# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓໑

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໔໑

## ຂຸດທະກະນິກາຍ ປະຕິສຳພິທາມັກ



ສະບັບຄົ້ນຄ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໔໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໔໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຣົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາຣົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ๗ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ๗ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ

**໑. ມະຫາວັກ**..................................................................................... ໑

ໝວດວ່າດ້ວຍຫຼັກທຳສຳຄັນ................................................................... ໑

ມາຕິກາ ............................................................................................ ໑

**໑. ຍານະກະຖາ**.................................................................................. ໖

ວ່າດ້ວຍຍານ ...................................................................................... ໖

໑. ສຸຕະມະຍະຍານນິດເທດ....................................................................... ໖

ສະແດງສຸຕະມະຍະຍານ .......................................................................... ໖

໒. ສີລະມະຍະຍານະນິດເທດ ..................................................................... ໒໙

ສະແດງສີລະມະຍະຍານ ......................................................................... ໒໙

໓. ສະມາທິພາວະນາມະຍະຍານະນິດເທດ...................................................... ໕໖

ສະແດງສະມາທິພາວະນາມະຍະຍານ ........................................................... ໕໖

໔. ທຳມັດຖິຕິຍານນິດເທດ ........................................................................ ໖໐

ສະແດງທຳມັດຖິຕິຍານ........................................................................... ໖໐

໕. ສຳມະສະນະຍານນິດເທດ....................................................................... ໖໔

ສະແດງສຳມະສະນະຍານ ......................................................................... ໖໔

໖. ອຸທະຍັບພະຍະຍານນິດເທດ.................................................................... ໖໖

ສະແດງອຸທະຍັບພະຍະຍານ ...................................................................... ໖໖

໗. ພັງຄານຸປັດສະນາຍານນິດເທດ ................................................................ ໗໑

ສະແດງພັງຄານຸປັດສະນາຍານ ................................................................. ໗໑

໘. ອາທີນະວະຍານນິດເທດ........................................................................ ໗໒

ສະແດງອາທີນະວະຍານ .......................................................................... ໗໒

໙. ສັງຂາຣຸເປກຂາຍານນິດເທດ ................................................................... ໗໔

ສະແດງສັງຂາຣຸເປກຂາຍານ...................................................................... ໗໔

໑໐. ໂຄຕະຣະພູຍານນິດເທດ........................................................................ ໘໑

ສະແດງໂຄຕະຣະພູຍານ ......................................................................... ໘໑

໑໑. ມັກຄະຍານນິດເທດ ............................................................................. ໘໕

ສະແດງມັກຄະຍານ ................................................................................ ໘໕

໑໒. ຜົນຍານນິດເທດ ................................................................................ ໘໘

ສະແດງຜົນຍານ...................................................................................... ໘໘

໑໓. ວິມຸດຕິຍານນິດເທດ ........................................................................ ໗໐
ສະແດງວິມຸດຕິຍານ ........................................................................ ໗໐
໑໔. ປັດຈະເວກຂະນະຍານນິດເທດ ........................................................................ ໗໑
ສະແດງປັດຈະເວກຂະນະຍານ ........................................................................ ໗໑
໑໕. ວັດຖຸນານັດຕະຍານນິດເທດ ........................................................................ ໗໔
ສະແດງຍານໃນວັດຖຸຕ່າງ ໆ ........................................................................ ໗໔
໑໖. ໂຄຈະຣະນານັດຕະຍານນິດເທດ ........................................................................ ໗໖
ສະແດງໂຄຈະຣະນານັດຕະຍານ ........................................................................ ໗໖
໑໗. ຈະຣິຍານານັດຕະຍານນິດເທດ ........................................................................ ໗໘
ສະແດງຈະຣິຍານານັດຕະຍານ ........................................................................ ໗໘
໑໘. ພູມນານັດຕະຍານນິດເທດ ........................................................................ ໑໐໔
ສະແດງພູມນານັດຕະຍານ ........................................................................ ໑໐໔
໑໙. ທຳມະນານັດຕະຍານນິດເທດ ........................................................................ ໑໐໕
ສະແດງທຳມະນານັດຕະຍານ ........................................................................ ໑໐໕
໒໐-໒໔. ຍານະປັນຈະກະນິດເທດ ........................................................................ ໑໐໘
ສະແດງຍານ ໕ ໝວດ ........................................................................ ໑໐໘
໒໕-໒໘. ປະຕິສຳພິທາຍານນິດເທດ ........................................................................ ໑໐໙
ສະແດງປະຕິສຳພິທາຍານ ........................................................................ ໑໐໙
໒໙-໓໑. ຍານັດຕະຍະນິດເທດ ........................................................................ ໑໑໓
ສະແດງຍານ ໓ ຢ່າງ ........................................................................ ໑໑໓
໓໒. ອານັນຕະຣິກະສະມາທິຍານະນິດເທດ ........................................................................ ໑໑໖
ສະແດງອານັນຕະຣິກະສະມາທິຍານ ........................................................................ ໑໑໖
໓໓. ອະຣະນະວິຫາຣະຍານນິດເທດ ........................................................................ ໑໒໐
ສະແດງອະຣະນະວິຫາຣະຍານ ........................................................................ ໑໒໐
໓໔. ນິໂຣທະສະມາປັດຕິຍານະນິດເທດ ........................................................................ ໑໒໑
ສະແດງນິໂຣທະສະມາປັດຕິຍານ ........................................................................ ໑໒໑
໓໕. ປະຣິນິບພານະຍານະນິດເທດ ........................................................................ ໑໒໕
ສະແດງປະຣິນິບພານະຍານ ........................................................................ ໑໒໕
໓໖. ສະມະສີສັດຖະຍານະນິດເທດ ........................................................................ ໑໒໕
ສະແດງສະມະສີສັດຖະຍານ ........................................................................ ໑໒໕
໓໗. ສັນເລຂັດຖະຍານະນິດເທດ ........................................................................ ໑໒໗

ສະແດງສັນເລຂັດຖະຍານ ........................................................................ ໑໔໗
໓໘. ວິຣິຍາຣຳພະຍານະນິດເທດ ........................................................................ ໑໔໙
ສະແດງວິຣິຍາຣຳພະຍານ ........................................................................ ໑໔໙
໓໙. ອັດຖະສັນທັດສະນະຍານະນິດເທດ ........................................................................ ໑໓໐
ສະແດງອັດຖະສັນທັດສະນະຍານ ........................................................................ ໑໓໐
໔໐. ທັດສະນະວິສຸດທິຍານະນິດເທດ ........................................................................ ໑໓໐
ສະແດງທັດສະນະວິສຸດທິຍານ ........................................................................ ໑໓໐
໔໑. ຂັນຕິຍານະນິດເທດ ........................................................................ ໑໓໑
ສະແດງຂັນຕິຍານ ........................................................................ ໑໓໑
໔໒. ປະຣິໂຍຄາຫະນະຍານະນິດເທດ ........................................................................ ໑໓໒
ສະແດງປະຣິໂຍຄາຫະນະຍານ ........................................................................ ໑໓໒
໔໓. ປະເທສະວິຫາຣະຍານະນິດເທດ ........................................................................ ໑໓໒
ສະແດງປະເທສະວິຫານຍານ ........................................................................ ໑໓໒
໔໔-໔໙. ສະວິວັດຕະຍານະນິດເທດ ........................................................................ ໑໓໔
ສະແດງຍານໃນການຫຼີກອອກ ໖ ຢ່າງ ........................................................................ ໑໓໔
໕໐. ອິດທິວິທະຍານະນິດເທດ ........................................................................ ໑໓໗
ສະແດງອິດທິວິທະຍານ ........................................................................ ໑໓໗
໕໑. ໂສຕະທາດວິສຸດທິຍານະນິດເທດ ........................................................................ ໑໓໘
ສະແດງໂສຕະທາດວິສຸດທິຍານ ........................................................................ ໑໓໘
໕໒. ເຈໂຕປະຣິຍະຍານະນິດເທດ ........................................................................ ໑໓໙
ສະແດງເຈໂຕປະຣິຍະຍານ ........................................................................ ໑໓໙
໕໓. ປຸບເພນິວາສານຸດສະຕິຍານະນິດເທດ ........................................................................ ໑໔໐
ສະແດງປຸບເພນິວາສານຸດສະຕິຍານ ........................................................................ ໑໔໐
໕໔. ທິບພະຈັກຂຸຍານະນິດເທດ ........................................................................ ໑໔໑
ສະແດງທິບພະຈັກຂຸຍານ ........................................................................ ໑໔໑
໕໕. ອາສະວັກຂະຍະຍານະນິດເທດ ........................................................................ ໑໔໒
ສະແດງອາສະວັກຂະຍະຍານ ........................................................................ ໑໔໒
໕໖-໖໓. ສັດຈະຍານຈະຕຸກກະທະວະຍະນິດເທດ ........................................................................ ໑໔໕
ສະແດງຍານໃນສັດຈະ ໔ ສອງໝວດ ........................................................................ ໑໔໕
໖໔-໖໗. ສຸດທິກະປະຕິສຳພິທາຍານະນິດເທດ ........................................................................ ໑໔໖
ສະແດງຍານໃນປະຕິສຳພິທາລ້ວນ ........................................................................ ໑໔໖

໒໗. ອິນທະຣິຍະປະໂຣປະຣິຍັດຕະຍານະນິດເທດ ........................................ ໑໔໗
ສະແດງອິນທະຣິຍະປະໂຣປະຣິຍັດຕະຍານ................................................ ໑໔໗
໒໙. ອາສະຍານຸສະຍະຍານະນິດເທດ ........................................................ ໑໕໐
ສະແດງອາສະຍານຸສະຍະຍານ.............................................................. ໑໕໐
໓໐. ຍະມະກະປາຕິຫະຣະຍານະນິດເທດ..................................................... ໑໕໔
ສະແດງຍານໃນຍະມະກະປາຕິຫານ ........................................................ ໑໕໔
໓໑. ມະຫາກະຣຸນາຍານະນິດເທດ............................................................ ໑໕໕
ສະແດງຍານໃນມະຫາກະຣຸນາສະມາບັດ .................................................. ໑໕໕
໓໔-໓໓. ສັບພັນຍຸຕະຍານນິດເທດ ........................................................ ໑໕໓
ສະແດງສັບພັນຍຸຕະຍານ ..................................................................... ໑໕໓

**໔. ທິດຖິກະຖາ**........................................................................... ໑໖໔
ວ່າດ້ວຍທິດຖິ.................................................................................. ໑໖໔
໑. ອັດສາທະທິດຖິນິດເທດ.................................................................. ໑໖໗
ສະແດງອັດສາທະທິດຖິ ...................................................................... ໑໖໗
໔. ອັດຕານຸທິດຖິນິດເທດ .................................................................... ໑໓໔
ສະແດງອັດຕານຸທິດຖິ........................................................................ ໑໓໔
໓. ມິດສາທິດຖິນິດເທດ......................................................................... ໑໗໔
ສະແດງມິດສາທິດຖິ........................................................................... ໑໗໔
໔. ສັກກາຍະທິດຖິນິດເທດ ..................................................................... ໑໗໔
ສະແດງສັກກາຍະທິດຖິ........................................................................ ໑໗໔
໕. ສັດສະຕະທິດຖິນິດເທດ...................................................................... ໑໗໓
ສະແດງສັດສະຕະທິດຖິ ....................................................................... ໑໗໓
໖. ອຸດເສທະທິດຖິນິດເທດ ..................................................................... ໑໗໕
ສະແດງອຸດເສທະທິດຖິ........................................................................ ໑໗໕
໗. ອັນຕັກຄາຫິກະທິດຖິນິດເທດ ............................................................. ໑໗໕
ສະແດງອັນຕັກຄາຫິກະທິດຖິ................................................................. ໑໗໕
໗. ປຸບພັນຕານຸທິດຖິນິດເທດ .................................................................. ໑໙໐
ສະແດງປຸບພັນຕານຸທິດຖິ...................................................................... ໑໙໐
໙. ອະປະຣັນຕານຸທິດຖິນິດເທດ................................................................ ໑໙໑
ສະແດງອະປະຣັນຕານຸທິດຖິ ................................................................... ໑໙໑
໑໐-໑໔. ສັນໂຍຊະນິກາທິທິດຖິນິດເທດ........................................................ ໑໙໑

ສະແດງສັນໂຍຊະນິກາທິທິດຖິ........ ໑໙໑
໑໓. ອັດຕະວາທະປະຕິສັງຍຸດຕະທິດຖິນິດເທດ........ ໑໙໓
ສະແດງອັດຕະວາທະປະຕິສັງຍຸດຕະທິດຖິ........ ໑໙໓
໑໔. ໂລກະວາທະປະຕິສັງຍຸດຕະທິດຖິນິດເທດ........ ໑໙໓
ສະແດງໂລກະວາທະປະຕິສັງຍຸດຕະທິດຖິ........ ໑໙໓
໑໕ ໑໖. ພະວະວິພະວະທິດຖິນິດເທດ........ ໑໙໔
ສະແດງພະວະວິພະວະທິດຖິ........ ໑໙໔

**໓. ອານາປານັດສະຕິກະຖາ**........ ໔໐໐
ວ່າດ້ວຍສະຕິກຳນົດລົມຫັນໃຈເຂົ້າລົມຫັນໃຈອອກ........ ໔໐໐
໑. ຄະນະນະວາຣະ........ ໔໐໐
ວາຣະວ່າດ້ວຍການນັບ........ ໔໐໐
໔. ໂສລະສະຍານະນິດເທດ........ ໔໐໑
ສະແດງຍານ ໑໖........ ໔໐໑
໓. ອຸປະກິເລດຍານະນິດເທດ........ ໔໐໓
ສະແດງຍານໃນອຸປະກິເລດ........ ໔໐໓
໔. ໂວທະນະຍານະນິດເທດ........ ໔໐໗
ສະແດງຍານໃນໂວທະນະ........ ໔໐໗
໕. ສະໂຕກາຣິຍານະນິດເທດ........ ໔໑໙
ສະແດງຍານໃນການກະທຳສະຕິ........ ໔໑໙
໖. ຍານະຣາສິສັກກະນິດເທດ........ ໔໔໖
ສະແດງໝວດ ໖ ແຫ່ງກອງຍານ........ ໔໔໖

**໔. ອິນທະຣິຍະກະຖາ**........ ໔໔໙
ວ່າດ້ວຍອິນຊີ........ ໔໔໙
໑. ປະຖົມສູດຕັນຕະນິດເທດ........ ໔໔໙
ສະແດງສູດທີ ໑........ ໔໔໙
໔. ທຸຕິຍະສູດຕັນຕະນິດເທດ........ ໔໕໔
ສະແດງສູດທີ ໔........ ໔໕໔
໓. ຕະຕິຍະສູດຕັນຕະນິດເທດ........ ໔໖໖
ສະແດງສູດທີ ໓........ ໔໖໖
ຈາຣະວິຫາຣະນິດເທດ........ ໔໗໓

໔. ຈະຕຸດຖະສູດຕັນຕະນິດເທດ ........................................................... ໔ກຜ
ສະແດງສູດທີ ໔ ........................................................... ໔ກຜ
(໓) ອະທິມັດຕັດຖະນິດເທດ ........................................................... ໔໗໐
໕. ອິນທະຣິຍະສະໂມທານ ........................................................... ໔໗໔
ວ່າດ້ວຍການປະຊຸມອິນຊີ ........................................................... ໔໗໔
໕. ວິໂມກຂະກະຖາ ........................................................... ໔໙ຜ
ວ່າດ້ວຍວິໂມກ ........................................................... ໔໙ຜ
ຜ. ຄະຕິກະຖາ ........................................................... ໓໓໕
ວ່າດ້ວຍຄະຕິ ........................................................... ໓໓໕
ກ. ກຳມະກະຖາ ........................................................... ໓໓໙
ວ່າດ້ວຍກຳ ........................................................... ໓໓໙
໗. ວິປັນລາສະກະຖາ ........................................................... ໓໔໑
ວ່າດ້ວຍວິປັນລາດ ........................................................... ໓໔໑
໙. ມັກຄະກະຖາ ........................................................... ໓໔໓
ວ່າດ້ວຍມັກ ........................................................... ໓໔໓
໑໐. ມັນທະເປີຍຍະກະຖາ ........................................................... ໓໔໕
ວ່າດ້ວຍພົມມະຈັນທີ່ໃສແລະໜ້າດື່ມ ........................................................... ໓໔໕

**໔. ຍຸຄະນັດທະວັກ** ........................................................... ໓໕໓
ໝວດວ່າດ້ວຍການຈະເລີນທຳທີ່ເປັນຄູ່ ........................................................... ໓໕໓
໑. ຍຸຄະນັດທະກະຖາ ........................................................... ໓໕໓
ວ່າດ້ວຍການຈະເລີນທຳທີ່ເປັນຄູ່ ........................................................... ໓໕໓
໔. ສັດຈະກະຖາ ........................................................... ໓ຜ໕
ວ່າດ້ວຍສັດຈະ ........................................................... ໓ຜ໕
໓. ໂພດຊັງຄະກະຖາ ........................................................... ໓໗໐
ວ່າດ້ວຍໂພດຊົງ ........................................................... ໓໗໐
໔. ເມດຕາກະຖາ ........................................................... ໓໙໕
ວ່າດ້ວຍເມດຕາ ........................................................... ໓໙໕
໕. ວິຣາຄະກະຖາ ........................................................... ໔໐໗
ວ່າດ້ວຍວິຣາຄະ ........................................................... ໔໐໗
ຜ. ປະຕິສຳພິທາກະຖາ ........................................................... ໔໑໔
ວ່າດ້ວຍປະຕິສຳພິທາ ........................................................... ໔໑໔

໗. ທຳມະຈັກກະຖາ ........ ໔໖໐
ວ່າດ້ວຍທຳມະຈັກ ........ ໔໖໐
໘. ໂລກຸດຕະຣະກະຖາ ........ ໔໖໙
ວ່າດ້ວຍ ໂລກຸດຕະຣະທຳ ........ ໔໖໙
໙. ພະລະກະຖາ ........ ໔໔໐
ວ່າດ້ວຍພະລະ ........ ໔໔໐
໑໐. ສູນຍະກະຖາ ........ ໔໕໐
ວ່າດ້ວຍຄວາມວ່າງ ........ ໔໕໐

**໖. ປັນຍາວັກ** ........ ໔໖໑
ໝວດວ່າດ້ວຍປັນຍາ ........ ໔໖໑
໑. ມະຫາປັນຍາກະຖາ ........ ໔໖໑
ວ່າດ້ວຍມະຫາປັນຍາ ........ ໔໖໑
໒. ອິດທິກະຖາ ........ ໔໗໑
ວ່າດ້ວຍລິດ ........ ໔໗໑
໓. ອະພິສະມະຍະກະຖາ ........ ໔໙໐
ວ່າດ້ວຍການຕັດສະຣູ້ ........ ໔໙໐
໔. ວິເວກກະຖາ ........ ໔໙໔
ວ່າດ້ວຍວິເວກ ........ ໔໙໔

# ພຣະໄຕຣປິດົກ

## ເຫຼັ້ມທີ ໓໑

# ພຣະສູດຕັນຕະປິດົກ

## ເຫຼັ້ມທີ ໒໓

## ຂຸດທະກະນິກາຍ ປະຕິສຳພິທາມັກ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸດທະເຈົ້າ ພຣະອົງນັ້ນ**

# ໑. ມະຫາວັກ

## ໝວດວ່າດ້ວຍຫຼັກທຳສຳຄັນ

### ມາຕິກາ

[໑] ປັນຍາໃນການຊົງຈຳທຳທີ່ໄດ້ສະດັບມາ ຊື່ວ່າ ສຸຕະມະຍະຍານ (ຍານໃນການຊົງຈຳທຳທີ່ໄດ້ສະດັບມາ)

[໒] ປັນຍາໃນການສະດັບທຳແລ້ວສັງລວມໄວ້ ຊື່ວ່າສີລະມະຍະຍານ (ຍານໃນການສັງລວມສີນ)

[໓] ປັນຍາໃນການສັງລວມຈິດຕັ້ງໝັ້ນ ຊື່ວ່າສະມາທິພາວະນາມະຍະຍານ (ຍານໃນການ ສັງລວມຈິດຈະເລີນສະມາທິ)

[໔] ປັນຍາໃນການກຳນົດປັດໄຈ ຊື່ວ່າທຳມັດຖິຕິຍານ (ຍານໃນການກຳນົດບ່ອນຕັ້ງແຫ່ງທຳ)

[໕] ປັນຍາໃນການຫຍໍ້ທຳທັງຫຼາຍທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນແລ້ວກຳນົດໄວ້ ຊື່ວ່າສຳມະສະນະຍານ (ຍານທີ່ກຳນົດນາມທຳແລະຮູບທຳ)

[໖] ປັນຍາໃນການພິຈາລະນາເຫັນຄວາມຜັນປ່ຽນແຫ່ງທຳທັງຫຼາຍທີ່ເປັນປັດຈຸບັນ ຊື່ວ່າອຸທະຍັບພະຍານຸປັດສະນາຍານ (ຍານທີ່ພິຈາລະນາເຫັນຄວາມເກີດແລະຄວາມດັບ)

[๗] ປັນຍາໃນການພິຈາລະນາອາລົມແລ້ວ ພິຈາລະນາເຫັນຄວາມດັບ ຊື່ວ່າວິປັດສະນາຍານ (ຍານທີ່ພິຈາລະນາເຫັນຄວາມດັບ)

[๘] ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພ ຊື່ວ່າອາທີນະວະຍານ (ຍານທີ່ຄຳນຶງເຫັນໂທດ)

[๙] ປັນຍາທີ່ປາຖະໜາຈະພົ້ນໄປ ພິຈາລະນາແລະດຳຣົງໝັ້ນຢູ່ ຊື່ວ່າສັງຂາຣຸເປກຂາຍານ (ຍານທີ່ເປັນກາງຕໍ່ສັງຂານ)

[໑໐] ປັນຍາໃນການອອກແລະຫຼີກໄປຈາກນິມິດພາຍນອກ ຊື່ວ່າໂຄຕະຣະພູຍານ(ຍານຄອບໂຄດ)

[໑໑] ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ (ຍານໃນອະຣິຍະມັກ)

[໑໒] ປັນຍາທີ່ຢຸດຄວາມພະຍາຍາມ ຊື່ວ່າຜົນຍານ (ຍານໃນອະຣິຍະຜົນ)

[໑໓] ປັນຍາໃນການພິຈາລະນາເຫັນອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າວິມຸດຕິຍານ (ຍານໃນວິມຸດຕິ)

[໑໔] ປັນຍາໃນການເຫັນທຳທີ່ມາຮ່ວມກັນໃນຂະນະນັ້ນ ຊື່ວ່າປັດຈະເວກຂະນະຍານ (ຍານໃນການພິຈາລະນາທົບທວນ)

[໑໕] ປັນຍາໃນການກຳນົດທຳຕ່າງ ໆ ທີ່ເປັນພາຍໃນ ຊື່ວ່າວັດຖຸນານັດຕະຍານ (ຍານໃນວັດຖຸຕ່າງ ໆ)

[໑໖] ປັນຍາໃນການກຳນົດທຳຕ່າງ ໆ ທີ່ເປັນພາຍນອກ ຊື່ວ່າໂຄຈະຣະນານັດຕະຍານ (ຍານໃນອາລົມຕ່າງ ໆ)

[໑໗] ປັນຍາໃນການກຳນົດຈະຣິຍາ ຊື່ວ່າ ຈະຣິຍານານັດຕະຍານ(ຍານໃນຈະຣິຍາຕ່າງ ໆ)

[໑໘] ປັນຍາໃນການກຳນົດທຳ ໔ ປະການ ຊື່ວ່າ ພູມິນານັດຕະຍານ (ຍານໃນພູມຕ່າງ ໆ)

[໑໙] ປັນຍາໃນການກຳນົດທຳ ໙ ປະການ ຊື່ວ່າ ທຳມະນານັດຕະຍານ (ຍານໃນທຳຕ່າງ ໆ)

[໒໐] ປັນຍາເຄື່ອງຮູ້ຍິ່ງ ຊື່ວ່າ ຍາຕັດຖະຍານ (ຍານທີ່ມີສະພາວະຮູ້)

[໒໑] ປັນຍາເຄື່ອງກຳນົດຮູ້ ຊື່ວ່າ ຕີຣະນັດຖະຍານ (ຍານທີ່ມີສະພາວະພິຈາລະນາ)

[໒໒] ປັນຍາເຄື່ອງລະ ຊື່ວ່າ ປະຣິດຈາຄັດຖະຍານ (ຍານທີ່ມີສະພາວະສະລະ)

[໒໓] ປັນຍາເຄື່ອງຈະເລີນ ຊື່ວ່າເອກະຣະສັດຖະຍານ (ຍານທີ່ມີສະພາວະເປັນຣົດດຽວ)

[໒໔] ປັນຍາເຄື່ອງເຮັດໃຫ້ແຈ້ງ ຊື່ວ່າ ຜັດສະນັດຖະຍານ (ຍານທີ່ມີສະພາວະຖືກຕ້ອງ)

[໒໕] ປັນຍາໃນອັດຖະຕ່າງ ໆ ຊື່ວ່າ ອັດຖະປະຕິສຳພິທາຍານ (ຍານແຕກສານໃນອັດຖະ)

[໒໖] ປັນຍາໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ (ຍານແຕກສານໃນທຳ)

[໔໗] ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່າ ນິຣຸດຕິປະຕິສຳພິທາຍານ (ຍານແຕກສານໃນນິຣຸດຕິ)

[໔໘] ປັນຍາໃນປະຕິພານຕ່າງ ໆ ຊື່ວ່າ ປະຕິພານະປະຕິສຳພິທາຍານ (ຍານແຕກສານໃນປະຕິພານ)

[໔໙] ປັນຍາໃນວິຫາຣະທຳຕ່າງ ໆ ຊື່ວ່າ ວິຫາຣັດຖະຍານ (ຍານໃນສະພາວະແຫ່ງວິຫາຣະທຳ)

[໕໐] ປັນຍາໃນສະມາບັດຕ່າງ ໆ ຊື່ວ່າ ສະມາປັດຕັດຖະຍານ (ຍານໃນສະພາວະແຫ່ງສະມາບັດ)

[໕໑] ປັນຍາໃນວິຫານສະມາບັດຕ່າງ ໆ ຊື່ວ່າ ວິຫາຣະສະມາປັດຕັດຖະຍານ (ຍານໃນສະພາວະແຫ່ງວິຫານສະມາບັດ)

[໕໒] ປັນຍາໃນການຕັດຂາດອາສະວະ ຍ້ອນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອານັນຕະຣິກສະມາທິຍານ (ຍານໃນສະມາທິຕາມລຳດັບ)

[໕໓] ທັດສະນາທິປະໄຕ ວິຫາຣາທິຄົນທີ່ສະງົບ ແລະປະນີຕາທິມຸດຕະຕາປັນຍາຊື່ວ່າອະຣະນະວິຫານຍານ (ຍານໃນອະຣະນະວິຫານ)

[໕໔] ປັນຍາທີ່ມີຄວາມຊຳນານ ໃນການຣະງັບສັງຂານ ໓ ດ້ວຍຍານຈະຣິຍາ ໑໖ ແລະດ້ວຍສະມາທິຈະຣິຍາ ໙ ຍ້ອນເປັນຜູ້ປະກອບດ້ວຍພະລະ ໔ ຢ່າງ ຊື່ວ່າ ນິໂຣດສະມາປັດຕິຍານ (ຍານໃນນິໂຣທະສະມາບັດ)

[໕໕] ປັນຍາໃນການກະກະທຳຄວາມດຳຣົງຢູ່ກິເລດໃຫ້ສິ້ນໄປຂອງຜູ້ມີສຳປະຊັນຍະຊື່ວ່າປະຣິນິບພານຍານ (ຍານໃນປະຣິນິບພານ)

[໕໖] ປັນຍາໃນຄວາມບໍ່ຜາກົດແຫ່ງທຳທັງປວງ ຍ້ອນຕັດຂາດໂດຍຊອບ ແລະດັບໄປ ຊື່ວ່າ ສະມະສີສັດຖະຍານ (ຍານໃນອັດຖະແຫ່ງທຳທີ່ສະງົບແລະເປັນປະທານ)

[໕໗] ປັນຍາໃນສະພາວະແຕ່ລະຢ່າງ ສະພາວະຕ່າງ ໆ ສະພາວະດຽວ ແລະເດດ ຊື່ວ່າສັນເລຂັດຖະຍານ (ຍານໃນອັດຖະແຫ່ງທຳເປັນເຄື່ອງຂັດເກົາ)

[໕໘] ປັນຍາໃນການປະຄອງຈິດທີ່ບໍ່ທໍ້ດທູ່ ແລະຈິດທີ່ສົ່ງໄປ ຊື່ວ່າວິຣິຍາຣຳພະຍານ (ຍານໃນການຜາຣົບຄວາມພຽນ)

[໕໙] ປັນຍາໃນການປະກາດທຳຕ່າງ ໆ ຊື່ວ່າ ອັດຖະສັນທັດສະນະຍານ (ຍານໃນການເຫັນແຈ້ງເຊິ່ງອັດຖະແຫ່ງທຳ)

[໖໐] ປັນຍາໃນການລວມທຳທັງປວງເຂົ້າເປັນໝວດດຽວກັນ ໃນການຮູ້ແຈ້ງສະພາວະຕ່າງ ໆ ແລະສະພາວະດຽວ ຊື່ວ່າ ທັດສະນະວິສຸດທິຍານ (ຍານໃນຄວາມມົດຈົດແຫ່ງທັດສະນະ)

[໖໑] ປັນຍາທີ່ຮູ້ຊັດແຈ້ງ ຊື່ວ່າ ຂັນຕິຍານ (ຍານໃນທຳທີ່ພໍໃຈ)

[໔໒] ປັນຍາທີ່ຖືກຕ້ອງທຳ ຊື່ວ່າ ປະຣິໂຍຄາທະນະຍານ (ຍານໃນການຢັ່ງລົງສູ່ທຳ)

[໔໓] ປັນຍາໃນການລວມປັດໄຈ ຊື່ວ່າປະເທສະວິທານຍານ (ຍານໃນວິທາຣະທຳສ່ວນໜຶ່ງ)

[໔໔] ປັນຍາທີ່ມີກຸສົນທຳເປັນໃຫຍ່ ຊື່ວ່າສັນຍາວິວັດຕະຍານ (ຍານໃນການຫຼີກອອກຈາກອະກຸສົນດ້ວຍສັນຍາ)

[໔໕] ປັນຍາໃນທຳເປັນເຫດຫຼີກອອກຈາກສະພາວະຕ່າງ ໆ ຊື່ວ່າ ເຈໂຕວິວັດຕະຍານ (ຍານໃນການຫຼີກອອກຈາກອະກຸສົນດ້ວຍການຄິດເຖິງກຸສົນ)

[໔໖] ປັນຍາໃນການອະທິຖານ ຊື່ວ່າ ຈິດຕະວິວັດຕະຍານ (ຍານໃນການຫຼີກອອກຈາກອະກຸສົນດ້ວຍກຸສົນທີ່ອະທິຖານ)

[໔໗] ປັນຍາໃນທຳທີ່ວ່າງ ຊື່ວ່າ ຍານະວິວັດຕະຍານ (ຍານໃນການຫຼີກອອກຈາກອະກຸສົນດ້ວຍຄວາມຮູ້)

[໔໘] ປັນຍາໃນຄວາມສະລະ ຊື່ວ່າວິໂມກຂະວິວັດຕະຍານ (ຍານໃນການຫຼີກອອກຈາກອະກຸສົນດ້ວຍການສະລະ)

[໔໙] ປັນຍາໃນສະພາວະແທ້ ຊື່ວ່າສັດຈະວິວັດຕະຍານ (ຍານໃນການຫຼີກອອກຈາກພາວະທີ່ບໍ່ແທ້ດ້ວຍພາວະທີ່ແທ້)

[໕໐] ປັນຍາໃນສະພາວະທີ່ສຳເລັດ ດ້ວຍການກຳນົດກາຍແລະຈິດເຂົ້ານຳກັນ ດ້ວຍອຳນາດການຕັ້ງໄວ້ເຊິ່ງສຸຂະສັນຍາແລະລະຫຸສັນຍາ ຊື່ວ່າອິດທິວິທະຍານ (ຍານທີ່ເຮັດໃຫ້ສະແດງລິດຕ່າງ ໆ ໄດ້)

[໕໑] ປັນຍາໃນການຢັ່ງລົງສູ່ສັດທະນິມິດທີ່ມີສະພາວະຕ່າງ ໆ ແລະສະພາວະດຽວດ້ວຍອຳນາດການແຜ່ວິຕົກໄປ ຊື່ວ່າ ໂສຕະທາດວິສຸດທິຍານ (ຍານໃນຄວາມມົດຈິດແຫ່ງໂສຕະທາດ)

[໕໒] ປັນຍາໃນການຢັ່ງລົງສູ່ວິນຍານຈະຣິຍາທີ່ມີສະພາວະຕ່າງ ໆ ແລະສະພາວະດຽວດ້ວຍອຳນາດຄວາມຜ່ອງໃສແຫ່ງອິນຊີທັງຫຼາຍ ຍ້ອນການແຜ່ໄປແຫ່ງຈິດ ໓ ປະເພດ ຊື່ວ່າ ເຈໂຕປະຣິຍະຍານ (ຍານທີ່ເຮັດໃຫ້ກຳນົດໃຈຜູ້ອື່ນໄດ້)

[໕໓] ປັນຍາໃນການຢັ່ງລົງສູ່ທຳທັງຫຼາຍທີ່ເປັນໄປຕາມປັດໄຈ ດ້ວຍອຳນາດການແຜ່ໄປແຫ່ງກຳທີ່ມີສະພາວະຕ່າງ ໆ ແລະສະພາວະດຽວ ຊື່ວ່າ ປຸບເພນິວາສານຸດສະຕິຍານ (ຍານທີ່ເຮັດໃຫ້ຣະລຶກຊາດໄດ້)

[໕໔] ປັນຍາໃນການເຫັນຮູບນິມິດທີ່ມີສະພາວະຕ່າງ ໆ ແລະສະພາວະດຽວດ້ວຍອຳນາດແສງສະຫວ່າງ ຊື່ວ່າ ທິບພະຈັກຂຸຍານ (ຍານທີ່ເຮັດໃຫ້ມີຕາທິບ)

[໕໕] ປັນຍາທີ່ມີຄວາມຊຳນານໃນອິນຊີ ໓ ປະການ ໂດຍອາການ ໖໔ ຊື່ວ່າອາສະວັກຂະຍະຍານ (ຍານທີ່ເຮັດໃຫ້ສິ້ນອາສະວະ)

[໕໖] ປັນຍາໃນສະພາວະທີ່ຄວນກຳນົດຮູ້ ຊື່ວ່າ ທຸກຂະຍານ (ຍານໃນທຸກ)

[໕໗] ປັນຍາໃນສະພາວະທີ່ຄວນລະ ຊື່ວ່າ ສະມຸທະຍະຍານ (ຍານໃນສະມຸໄທ)

[໕໘] ປັນຍາໃນສະພາວະທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າ ນິໂຣທະຍານ (ຍານໃນນິໂຣດ)

[໕໙] ປັນຍາໃນສະພາວະທີ່ຄວນຈະເລີນ ຊື່ວ່າ ມັກຄະຍານ (ຍານໃນມັກ)

[໖໐] ທຸກຂະຍານ (ຍານໃນທຸກ)

[໖໑] ທຸກຂະສະມຸທະຍະຍານ (ຍານໃນເຫດເກີດທຸກ)

[໖໒] ທຸກຂະນິໂຣທະຍານ (ຍານໃນຄວາມດັບທຸກ)

[໖໓] ທຸກຂະນິໂຣທະຄາມິນີປະຕິປະທາຍານ (ຍານໃນຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ)

[໖໔] ອັດຖະປະຕິສຳພິທາຍານ (ຍານແຕກສານໃນອັດຖະ)

[໖໕] ທຳມະປະຕິສຳພິທາຍານ (ຍານແຕກສານໃນທຳ)

[໖໖] ນິຣຸດຕິປະຕິສຳພິທາຍານ (ຍານແຕກສານໃນນິຣຸດຕິ)

[໖໗] ປະຕິພານະປະຕິສຳພິທາຍານ (ຍານແຕກສານໃນປະຕິພານ)

[໖໘] ອິນທະຣິຍະປະໂຣປະຣິຍັດຕະຍານ (ຍານໃນຄວາມຍິ່ງແລະຄວາມຍ່ອນແຫ່ງອິນຊີຂອງສັດທັງຫຼາຍ)

[໖໙] ອາສະຍານຸສະຍະຍານ (ຍານໃນອາສະຍະແລະອະນຸໄສຂອງສັດທັງຫຼາຍ)

[໗໐] ຍະມະກະປະຕິຫາຣິຍະຍານ (ຍານໃນຍະມົກປາຕິຫານ)

[໗໑] ມະຫາກະຣຸນາສະມາປັດຕິຍານ (ຍານໃນມະຫາກະຣຸນາສະມາບັດ)

[໗໒] ສັບພັນຍຸຕະຍານ (ຍານຄວາມຮູ້ໃນທຳທັງປວງ)

[໗໓] ອະນາວະຣະນະຍານ (ຍານທີ່ບໍ່ມີເຄື່ອງກັ້ນ)

ຍານເຫຼົ່ານີ້ລວມເປັນ ໗໓ ປະການ ໃນຍານທັງ ໗໓ ປະການນີ້ ຍານ ໖໗ ປະການ (ເບື້ອງຕົ້ນ) ເປັນຍານທີ່ມີທົ່ວໄປແກ່ສາວົກ ຍານ ໖ ປະການ (ເບື້ອງປາຍ) ເປັນຍານທີ່ບໍ່ມີທົ່ວໄປແກ່ສາວົກ (ມີສະເພາະພຣະຕະຖາຄົດເທົ່ານັ້ນ)

**ມາຕິກາ ຈົບ**

# ໑. ຍານະກະຖາ

## ວ່າດ້ວຍຍານ

## ໑. ສຸຕະມະຍະຍານນິດເທດ

### ສະແດງສຸຕະມະຍະຍານ

[໑] ປັນຍາໃນການຊົງຈຳທຳທີ່ໄດ້ສະດັບມາ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຮູ້ຍິ່ງ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (໑)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນກຳນົດຮູ້ ປັນຍາຮູ້ຊັດແຈ້ງ ທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (໒)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນລະ ປັນຍາຮູ້ຊັດແຈ້ງ ທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໓)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຈະເລີນ ປັນຍາຮູ້ຊັດແຈ້ງ ທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (໔)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນເຮັດໃຫ້ແຈ້ງ ປັນຍາຮູ້ຊັດແຈ້ງ ທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໕)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນໄປໃນສ່ວນແຫ່ງຄວາມເສື່ອມ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໖)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໗)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນສ່ວນແຫ່ງຄຸນວິເສດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໘)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນສ່ວນແຫ່ງການທຳລາຍກິເລດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໙)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ສັງຂານທັງປວງບໍ່ທ່ຽງ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໐)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ສັງຂານທັງປວງເປັນທຸກ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໑)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳທັງປວງເປັນອະນັດຕາ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໘)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (໑໓)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໔)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະນິໂຣທະອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໕)

ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໑໖)

[໘] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຮູ້ຍິ່ງ ປັນຍາ ຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື

ທຳ ໑ ຢ່າງທີ່ຄວນຮູ້ຍິ່ງ ຄື ສັດທັງປວງດຳຣົງຢູ່ໄດ້ຍ້ອນອາຫານ
ທຳ ໒ ຢ່າງທີ່ຄວນຮູ້ຍິ່ງ ຄື ທາດ ໒
ທຳ ໓ ຢ່າງທີ່ຄວນຮູ້ຍິ່ງ ຄື ທາດ ໓
ທຳ ໔ ຢ່າງທີ່ຄວນຮູ້ຍິ່ງ ຄື ອະຣິຍະສັດ ໔
ທຳ ໕ ຢ່າງທີ່ຄວນຮູ້ຍິ່ງ ຄື ວິມຸດຕາຍະຕະນະ ໕
ທຳ ໖ ຢ່າງທີ່ຄວນຮູ້ຍິ່ງ ຄື ອະນຸດຕະຣິຍະ ໖
ທຳ ໗ ຢ່າງທີ່ຄວນຮູ້ຍິ່ງ ຄື ນິດທະສະວັດຖຸ ໗
ທຳ ໘ ຢ່າງທີ່ຄວນຮູ້ຍິ່ງ ຄື ອະພິພາຍະຕະນະ ໘
ທຳ ໙ ຢ່າງທີ່ຄວນຮູ້ຍິ່ງ ຄື ອະນຸປຸບພະວິຫາຣະ ໙
ທຳ ໑໐ ຢ່າງທີ່ຄວນຮູ້ຍິ່ງ ຄື ນິດຊະຣະວັດຖຸ ໑໐

[໓] ພິກຂຸທັງຫຼາຍ ສິ່ງທັງປວງຄວນຮູ້ຍິ່ງ ສິ່ງທັງປວງທີ່ຄວນຮູ້ຍິ່ງ ຄື ອັນໃດ

ຄື ຈັກຂຸ (ຕາ) ຄວນຮູ້ຍິ່ງ ຮູບຄວນຮູ້ຍິ່ງ ຈັກຂຸວິນຍານຄວນຮູ້ຍິ່ງ ຈັກຂຸສຳຜັດຄວນ ຮູ້ຍິ່ງ ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາ ທີ່ເກີດຂື້ນຍ້ອນຈັກຂຸສຳຜັດ ເປັນປັດໄຈຄວນຮູ້ຍິ່ງ

ໂສຕະ (ຫູ) ຄວນຮູ້ຍິ່ງ ສັດທະ (ສຽງ) ໆລໆ
ຄານະ (ດັງ) ຄວນຮູ້ຍິ່ງ ຄັນທະ (ກິ່ນ) ໆລໆ
ຊິວຫາ (ລີ້ນ) ຄວນຮູ້ຍິ່ງ ຣົດ ໆລໆ

ກາຍ ຄວນຮູ້ຍິ່ງ ໂຜດຖັບພະ (ສຳຜັດທາງກາຍ) ໆລໆ

ມະໂນ (ໃຈ) ຄວນຮູ້ຍິ່ງ ທຳມາຣົມຄວນຮູ້ຍິ່ງ ມະໂນວິນຍານຄວນຮູ້ຍິ່ງ ມະໂນສຳຜັດ ຄວນຮູ້ຍິ່ງ

ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸຂະເວທະນາ ທີ່ເກີດຂຶ້ນຍ້ອນມະໂນສຳຜັດ ເປັນປັດໄຈຄວນຮູ້ຍິ່ງ ຮູບຄວນຮູ້ຍິ່ງ

ເວທະນາຄວນຮູ້ຍິ່ງ ສັນຍາຄວນຮູ້ຍິ່ງ ສັງຂານຄວນຮູ້ຍິ່ງ ວິນຍານຄວນຮູ້ຍິ່ງ ຈັກຂຸຄວນຮູ້ຍິ່ງ ໂສຕະ ໆລໆ ຄານະ ໆລໆ ຊິວຫາ ໆລໆ ກາຍະ ໆລໆ ມະໂນ ໆລໆ ຮູບ ໆລໆ ສັດທະ ໆລໆ ຄັນທະ ໆລໆ ຣະສະ ໆລໆ ໂຜດຖັບພະ ໆລໆ ທຳມາຣົມຄວນຮູ້ຍິ່ງ

ຈັກຂຸວິນຍານ (ຄວາມຮູ້ແຈ້ງອາລົມທາງຕາ) ຄວນຮູ້ຍິ່ງ ໂສຕະວິນຍານ (ຄວາມຮູ້ແຈ້ງອາລົມທາງຫູ) ໆລໆ ຄານະວິນຍານ (ຄວາມຮູ້ແຈ້ງອາລົມທາງດັງ) ໆລໆ ຊິວຫາວິນຍານ (ຄວາມຮູ້ແຈ້ງອາລົມທາງລີ້ນ) ໆລໆ ກາຍວິນຍານ (ຄວາມຮູ້ແຈ້ງອາລົມທາງກາຍ) ໆລໆ ມະໂນວິນຍານ (ຄວາມຮູ້ແຈ້ງອາລົມທາງໃຈ) ຄວນຮູ້ຍິ່ງ

ຈັກຂຸສຳຜັດ (ຄວາມກະທົບທາງຕາ) ຄວນຮູ້ຍິ່ງ ໂສຕະສຳຜັດ (ຄວາມກະທົບທາງດັງ) ໆລໆ ຄານະສຳຜັດ (ຄວາມກະທົບທາງກິ່ນ) ໆລໆ ຊິວຫາສຳຜັດ (ຄວາມກະທົບທາງລີ້ນ) ໆລໆ ກາຍສຳຜັດ (ຄວາມກະທົບທາງກາຍ) ໆລໆ ມະໂນສຳຜັດ (ຄວາມກະທົບທາງໃຈ) ຄວນຮູ້ຍິ່ງ

ຈັກຂຸສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງຕາ) ຄວນຮູ້ຍິ່ງ ໂສຕະສຳຜັດສະຊາ ເວທະນາ (ເວທະນາເກີດຈາກສຳຜັດທາງຫູ) ໆລໆ ຄານະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງດັງ) ໆລໆ ຊິວຫາສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງລີ້ນ) ໆລໆ ກາຍະສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງກາຍ) ໆລໆ ມະໂນສຳຜັດສະຊາເວທະນາ (ເວທະນາເກີດຈາກສຳຜັດທາງໃຈ) ຄວນຮູ້ຍິ່ງ

ຮູບສັນຍາ (ຄວາມໝາຍຮູ້ຮູບ) ຄວນຮູ້ຍິ່ງ ສັດທະສັນຍາ (ຄວາມໝາຍຮູ້ສຽງ) ໆລໆ ຄັນທະສັນຍາ (ຄວາມໝາຍຮູ້ກິ່ນ) ໆລໆ ຣະສະສັນຍາ (ຄວາມໝາຍຮູ້ຣົດ) ໆລໆ ໂຜດຖັບພະສັນຍາ (ຄວາມໝາຍຮູ້ສຳຜັດທາງກາຍ) ໆລໆ ທຳມະສັນຍາ (ຄວາມໝາຍຮູ້ທຳມາຣົມ) ຄວນຮູ້ຍິ່ງ

ຮູບສັນເຈຕະນາ (ຄວາມຈຳນົງຮູບ) ຄວນຮູ້ຍິ່ງ ສັດທະສັນເຈຕະນາ (ຄວາມຈຳນົງສຽງ) ໆລໆ ຄັນທະສັນເຈຕະນາ (ຄວາມຈຳນົງກິ່ນ) ໆລໆ ຣະສະສັນເຈຕະນາ (ຄວາມຈຳນົງຣົດ) ໆລໆ ໂຜດຖັບພະ ສັນເຈຕະນາ (ຄວາມຈຳນົງໂຜດຖັບພະ) ໆລໆ ທຳມະສັນເຈຕະນາ (ຄວາມຈຳນົງທຳມາຣົມ) ຄວນຮູ້ຍິ່ງ

ຮູບຕັນຫາ (ຢາກໄດ້ຮູບ) ຄວນຮູ້ຍິ່ງ ສັດທະຕັນຫາ (ຢາກໄດ້ສຽງ) ຯລຯ ຄັນທະຕັນຫາ (ຢາກໄດ້ກິ່ນ) ຯລຯ ຣະສະຕັນຫາ (ຢາກໄດ້ຣົດ) ຯລຯ ໂຜດຖັບພະຕັນຫາ (ຢາກໄດ້ໂຜດຖັບພະ) ຯລຯ ທຳມະຕັນຫາ (ຢາກໄດ້ທຳມາຣົມ) ຄວນຮູ້ຍິ່ງ

ຮູບວິຕົກ (ຄວາມນຶກກ່ຽວກັບຮູບ) ຄວນຮູ້ຍິ່ງ ສັດທະວິຕົກ (ຄວາມນຶກກ່ຽວກັບສຽງ) ຯລຯ ຄັນທະວິຕົກ (ຄວາມນຶກກ່ຽວກັບກິ່ນ) ຯລຯ ຣະສະວິຕົກ (ຄວາມນຶກກ່ຽວກັບຣົດ) ຯລຯ ໂຜດຖັບພະວິຕົກ (ຄວາມນຶກກ່ຽວກັບໂຜດຖັບພະ) ຯລຯ ທຳມະວິຕົກ (ຄວາມນຶກກ່ຽວກັບທຳມາຣົມ) ຄວນຮູ້ຍິ່ງ

ຮູບວິຈານ (ຄວາມຕອງກ່ຽວກັບຮູບ) ຄວນຮູ້ຍິ່ງ ສັດທະວິຈານ (ຄວາມຕອງກ່ຽວກັບສຽງ) ຯລຯ ຄັນທະວິຈານ (ຄວາມຕອງກ່ຽວກັບກິ່ນ) ຯລຯ ຣະສະວິຈານ (ຄວາມຕອງກ່ຽວກັບຣົດ) ຯລຯ ໂຜດຖັບພະວິຈານ (ຄວາມຕອງກ່ຽວກັບໂຜດຖັບພະ) ຯລຯ ທຳມະວິຈານ (ຄວາມຕອງກ່ຽວກັບທຳມາຣົມ) ຄວນຮູ້ຍິ່ງ

[໔] ປະຖະວີທາດ (ທາດດິນ) ຄວນຮູ້ຍິ່ງ ອາໂປທາດ (ທາດນ້ຳ) ຯລຯ ເຕໂຊທາດ (ທາດໄຟ) ຯລຯ ວາໂຍທາດ (ທາດລົມ) ຯລຯ ອາກາດທາດ (ທາດຄືທີ່ວ່າງ) ຯລຯ ວິນຍານທາດ (ທາດຄືວິນຍານ) ຄວນຮູ້ຍິ່ງ

ປະຖະວີກະສິນ (ກະສິນຄືດິນ) ຄວນຮູ້ຍິ່ງ ອາໂປກະສິນ (ກະສິນຄືນ້ຳ) ຯລຯ ເຕໂຊກະສິນ (ກະສິນຄືໄຟ) ຯລຯ ວາໂຍກະສິນ (ກະສິນຄືລົມ) ຯລຯ ນິລະກະສິນ (ກະສິນຄືສີຂຽວ) ຯລຯ ປີຕະກະສິນ (ກະສິນຄືສີເຫຼືອງ) ຯລຯ ໂລຫິຕະກະສິນ (ກະສິນຄືສີແດງ) ຯລຯ ໂອທາຕະກະສິນ (ກະສິນຄືສີຂາວ) ຯລຯ ອາກາສະກະສິນ (ກະສິນຄືຊ່ອງວ່າງ) ຯລຯ ວິນຍານະກະສິນ (ກະສິນຄືວິນຍານ) ຄວນຮູ້ຍິ່ງ

ຜົມຄວນຮູ້ຍິ່ງ ຂົນ ຯລຯ ເລັບ ຯລຯ ແຂ້ວ ຯລຯ ໜັງ ຯລຯ ຊີ້ນ ຯລຯ ເອັນ ຯລຯ ກະດູກ ຯລຯ ເຍື່ອໃນກະດູກ ຯລຯ ໄຕ ຯລຯ ຫົວໃຈ ຯລຯ ຕັບ ຯລຯ ພັງຜືດ ຯລຯ ມ້າມ ຯລຯ ປອດ ຯລຯ ໄສ້ໃຫຍ່ ຯລຯໄສ້ນ້ອຍ ຯລຯ ອາຫານໃໝ່ ອາຫານເກົ່າ ຯລຯ ບີ ຯລຯ ສະເລດ ຯລຯ ໜອງ ຯລຯ ເລືອດ ຯລຯ ເຫື່ອ ຯລຯ ມັນຂຸ້ນ ຯລຯ ນ້ຳຕາ ຯລຯ ນ້ຳມັນ ຯລຯ ນ້ຳລາຍ ຯລຯ ນ້ຳມູກ ຯລຯ ໄຂຂໍ້ ຯລຯ ມູດ ຯລຯ ມັນສະໝອງຄວນຮູ້ຍິ່ງ

ຈັກຂຸຍະຕະນະ (ອາຍະຕະນະຄືຕາ) ຄວນຮູ້ຍິ່ງ ຣູປາຍະຕະນະ (ອາຍະຕະນະຄືຮູບ) ຯລຯ ໂສຕາຍະຕະນະ (ອາຍະຕະນະຄືຫູ) ຯລຯ ສັດທາຍະຕະນະ (ອາຍະຕະນະຄືສຽງ) ຯລຯ ຄານາຍະຕະນະ (ອາຍະຕະນະຄືດັງ) ຯລຯ ຄັນທາຍະຕະນະ (ອາຍະຕະນະຄືກິ່ນ) ຯລຯ ຊິວຫາຍະຕະນະ (ອາຍະຕະນະຄືລີ້ນ) ຯລຯ ຣະສາຍະຕະນະ (ອາຍະຕະນະຄືຣົດ)

ຯລຯ ກາຍາຍະຕະນະ (ອາຍະຕະນະຄືກາຍ) ຯລຯ ໂຜດຖັບພາຍະຕະນະ (ອາຍະຕະນະຄືໂຜດຖັບພະ) ຯລຯ ມະນາຍະຕະນະ (ອາຍະຕະນະຄືໃຈ) ຯລຯ ທຳມາຍະຕະນະ (ອາຍະຕະນະຄືທຳມາຣົມ) ຄວນຮູ້ຍິ່ງ

ຈັກຂຸທາດ (ທາດຄືຈັກຂຸປະສາດ) ຄວນຮູ້ຍິ່ງ ຮູບທາດ (ທາດຄືຮູປາຣົມ) ຯລຯ ຈັກຂຸວິນຍານທາດ (ທາດຄືຈັກຂຸວິນຍານ) ຯລຯ ໂສຕະທາດ (ທາດຄືໂສຕະປະສາດ) ຯລຯ ສັດທະທາດ (ທາດຄືສັດທາຣົມ) ຯລຯ ໂສຕະວິນຍານທາດ (ທາດຄືໂສຕະວິນຍານ) ຯລຯ ຄານະທາດ (ທາດຄືຄານະປະສາດ) ຯລຯ ຄັນທະທາດ (ທາດຄືຄັນທາຣົມ) ຯລຯ ຄານະວິນຍານທາດ (ທາດຄືຄານະວິນຍານ) ຯລຯ ຊິວຫາທາດ (ທາດຄືຊິວຫາປະສາດ) ຯລຯ ຣະສະທາດ (ທາດຄືຣະສາຣົມ) ຯລຯ ຊິວຫາວິນຍານທາດ (ທາດຄືຊິວຫາວິນຍານ) ຯລຯ ກາຍະທາດ (ທາດຄືກາຍປະສາດ) ຯລຯ ໂຜດຖັບພະທາດ (ທາດຄືໂຜດຖັບພາຣົມ) ຯລຯ ກາຍະວິນຍານທາດ (ທາດຄືກາຍວິນຍານ) ຯລຯ ມະໂນທາດ (ທາດຄືມະໂນ) ຯລຯ ທຳມະທາດ (ທາດຄືທຳມາຣົມ) ຯລຯ ມະໂນວິນຍານທາດ (ທາດຄືມະໂນວິນຍານ) ຄວນຮູ້ຍິ່ງ

ຈັກຂຸນຊີ (ອິນຊີຄືຈັກຂຸປະສາດ) ຄວນຮູ້ຍິ່ງ ໂສຕິນຊີ (ອິນຊີຄືໂສຕະປະສາດ) ຯລຯ ຄານິນຊີ (ອິນຊີຄືຄານະປະສາດ) ຯລຯ ຊິວຫິນຊີ (ອິນຊີຄືຊິວຫາປະສາດ) ຯລຯ ກາຍິນຊີ (ອິນຊີຄືກາຍປະສາດ) ຯລຯ ມະນິນຊີ (ອິນຊີຄືໃຈ) ຯລຯ ຊີວິຕິນຊີ (ອິນຊີຄືຊີວິດ) ຯລຯ ອິດຖິນຊີ (ອິນຊີຄືອິດຖີພາວະ) ຯລຯ ປຸຣິສິນຊີ (ອິນຊີຄືປຸຣິສະພາວະ) ຯລຯ ສຸຂິນຊີ (ອິນຊີຄືສຸກຂະເວທະນາ) ຯລຯ ທຸກຂິນຊີ (ອິນຊີຄືທຸກຂະເວທະນາ) ຯລຯ ໂສມະນັດສິນຊີ (ອິນຊີຄືໂສມະນັດສະເວທະນາ) ຯລຯ ໂທມະນັດສິນຊີ (ອິນຊີຄືໂທມະນັດສະເວທະນາ) ຯລຯ ອຸເປກຂິນຊີ (ອິນຊີຄືອຸເປກຂາເວທະນາ) ຯລຯ ສັດທິນຊີ (ອິນຊີຄືສັດທາ) ຯລຯ ວິຣິຍິນຊີ (ອິນຊີຄືວິຣິຍະ) ຯລຯ ສະຕິນຊີ (ອິນຊີຄືສະຕິ) ຯລຯ ສະມາທິນຊີ (ອິນຊີຄືສະມາທິ) ຯລຯ ປັນຍິນຊີ (ອິນຊີຄືປັນຍາ) ຯລຯ ອະນັນຍາຕັນຍັດສາມີຕິນຊີ (ອິນຊີແຫ່ງທ່ານຜູ້ປະຕິບັດດ້ວຍມຸ້ງວ່າເຮົາຈັກຮູ້ສັດຈະທຳທີ່ຍັງບໍ່ໄດ້ຮູ້) ຯລຯ ອັນຍິນຊີ (ອິນຊີຄືປັນຍາອັນຮູ້ທົ່ວເຖິງ) ຯລຯ ອັນຍາຕາວິນຊີ (ອິນຊີແຫ່ງທ່ານຜູ້ຮູ້ທົ່ວເຖິງແລ້ວ) ຄວນຮູ້ຍິ່ງ

[໕] ກາມທາດ (ທາດຄືກາມ) ຄວນຮູ້ຍິ່ງ ຮູບທາດ (ທາດຄືຮູບ) ຯລຯ ອະຮູບທາດ (ທາດຄືອະຮູບ) ຯລຯ ກາມະພົບ (ພົບທີ່ເປັນກາມາວະຈອນ) ຯລຯ ຮູບພົບ (ພົບທີ່ເປັນຮູບປາວະຈອນ) ຯລຯ ອະຮູບພົບ (ພົບທີ່ເປັນອະຮູບປາວະຈອນ) ຯລຯ ສັນຍາພົບ (ພົບທີ່ມີສັນຍາ) ຯລຯ ອະສັນຍາພົບ (ພົບທີ່ບໍ່ມີສັນຍາ) ຯລຯ ເນວະສັນຍານາສັນຍາພົບ (ພົບທີ່ມີສັນຍາກໍບໍ່ແມ່ນບໍ່ມີສັນຍາກໍບໍ່ແມ່ນ) ຯລຯ ເອກະໂວກາຣະພົບ (ພົບທີ່ມີໂວກາຣະດຽວ) ຯລຯ ຈະຕຸໂວກາຣະພົບ (ພົບທີ່ມີ ໔ ໂວກາຣະ) ຯລຯ ປັນຈະໂວກາຣະພົບ (ພົບທີ່ມີ ໕ ໂວກາຣະ) ຄວນຮູ້ຍິ່ງ

[ຝ] ປະຖົມຊານ ຄວນຮູ້ຍິ່ງ ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ເມດຕາເຈໂຕ ວິມຸດຕິ (ຄວາມລຸດພົ້ນແຫ່ງຈິດດ້ວຍອຳນາດເມດຕາ) ຯລຯ ກະລຸນາເຈໂຕວິມຸດຕິ (ຄວາມລຸດພົ້ນແຫ່ງຈິດດ້ວຍອຳນາດກະລຸນາ) ຯລຯ ມຸທິຕາເຈໂຕວິມຸດຕິ (ຄວາມລຸດພົ້ນແຫ່ງຈິດດ້ວຍອຳນາດພອຍຍິນດີ) ຯລຯ ອຸເປກຂາເຈໂຕວິມຸດຕິ (ຄວາມລຸດພົ້ນແຫ່ງຈິດດ້ວຍອຳນາດການວາງຕົນເປັນກາງ) ຯລຯ ອາກາສານັນຈາຍະຕະນະສະມາບັດ (ສະມາບັດກຳນົດອາກາດຄືຊ່ອງວ່າງ ຫາທີ່ສຸດບໍ່ໄດ້ເປັນອາລົມ) ຯລຯ ວິນຍານັນຈາຍະຕະນະສະມາບັດ (ສະມາບັດກຳນົດວິນຍານຫາບ່ອນສຸດບໍ່ໄດ້ເປັນອາລົມ) ຯລຯ ອາກິນຈັນຍາຍະຕະນະສະມາບັດ (ສະມາບັດກຳນົດພາວະທີ່ບໍ່ມີ ອັນໃດ ໆ ເປັນອາລົມ) ຯລຯ ເນວະສັນຍານາສັນຍາຍະຕະນະສະມາບັດ (ສະມາບັດເຂົ້າເຖິງພາວະມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ) ຄວນຮູ້ຍິ່ງ

ອະວິດຊາ (ຄວາມບໍ່ຮູ້ແຈ້ງ) ຄວນຮູ້ຍິ່ງ ສັງຂານ (ສະພາບທີ່ປຸງແຕ່ງ) ຯລຯ ວິນຍານ (ຄວາມຮູ້ແຈ້ງອາລົມ) ຯລຯ ນາມຮູບ (ຮູບແລະນາມ) ຯລຯ ສະລາຍະຕະນະ (ອາຍະຕະນະ ໖) ຯລຯ ຜັດສະ (ຄວາມກະທົບ) ຯລຯ ເວທະນາ (ຄວາມສະເຫວີຍອາລົມ) ຯລຯ ຕັນຫາ (ຄວາມທະຍານຢາກ) ຯລຯ

ອຸປາທານ (ຄວາມຍຶດຖື) ຯລຯ ພົບ (ພາວະຊີວິດ) ຯລຯ ຊາດ (ຄວາມເກີດ) ຯລຯ ຊະຣາແລະມໍລະນະ (ຄວາມແກ່ແລະຄວາມຕາຍ) ຄວນຮູ້ຍິ່ງ

[ກ] ທຸກຄວນຮູ້ຍິ່ງ ທຸກຂະສະມຸໄທ (ເຫດໃຫ້ເກີດທຸກ) ຄວນຮູ້ຍິ່ງ ທຸກຂະນິໂຣທະ (ຄວາມດັບທຸກ) ຄວນຮູ້ຍິ່ງ ທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບທຸກ) ຄວນຮູ້ຍິ່ງ

ຮູບຄວນຮູ້ຍິ່ງ ຮູບສະມຸໄທ (ເຫດໃຫ້ເກີດຮູບ) ຄວນຮູ້ຍິ່ງ ຮູບນິໂຣທະ (ຄວາມດັບຮູບ) ຄວນຮູ້ຍິ່ງ

ຮູບນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບຮູບ) ຄວນຮູ້ຍິ່ງ

ເວທະນາ ຯລຯ

ສັນຍາ ຯລຯ

ສັງຂານ ຯລຯ

ວິນຍານ ຯລຯ

ຈັກຂຸ ຯລຯ

ຊະຣາແລະມໍຣະນະຄວນຮູ້ຍິ່ງ ຊະຣາມໍຣະນະສະມຸໄທ (ເຫດໃຫ້ເກີດຊະຣາແລະມໍລະນະ) ຄວນຮູ້ຍິ່ງ ຊະຣາມໍຣະນະນິໂຣດ (ຄວາມດັບແຫ່ງຊະຣາແລະມໍລະນະ) ຄວນຮູ້ຍິ່ງ ຊະຣາມໍຣະນະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ) ຄວນຮູ້ຍິ່ງ

ສະພາວະທີ່ຄວນກຳນົດຮູ້ແຫ່ງທຸກຄວນຮູ້ຍິ່ງ ສະພາວະທີ່ຄວນລະແຫ່ງທຸກຂະສະມຸໄທຄວນຮູ້ຍິ່ງ ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງທຸກຂະນິໂຣທະຄວນຮູ້ຍິ່ງ ສະພາວະທີ່ຄວນຈະເລີນແຫ່ງທຸກຂະນິໂຣທະຄາມິນີປະຕິປະທາຄວນຮູ້ຍິ່ງ

ສະພາວະທີ່ຄວນກຳນົດຮູ້ແຫ່ງຮູບຄວນຮູ້ຍິ່ງ ສະພາວະທີ່ຄວນລະແຫ່ງຮູບສະມຸໄທຄວນຮູ້ຍິ່ງ

ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງຮູບນິໂຣດຄວນຮູ້ຍິ່ງ ສະພາວະທີ່ຄວນຈະເລີນແຫ່ງຮູບນິໂຣທະຄາມິນີປະຕິປະທາ ຄວນຮູ້ຍິ່ງ

ສະພາວະທີ່ຄວນກຳນົດຮູ້ແຫ່ງເວທະນາ ຯລຯ

ສະພາວະທີ່ຄວນກຳນົດຮູ້ແຫ່ງສັນຍາ ຯລຯ

ສະພາວະທີ່ຄວນກຳນົດຮູ້ແຫ່ງສັງຂານ ຯລຯ

ສະພາວະທີ່ຄວນກຳນົດຮູ້ແຫ່ງວິນຍານ ຯລຯ

ສະພາວະທີ່ຄວນກຳນົດຮູ້ແຫ່ງຈັກຂຸ ຯລຯ

ສະພາວະທີ່ຄວນກຳນົດຮູ້ແຫ່ງຊະຣາ ແລະ ມໍຣະນະຄວນຮູ້ຍິ່ງ ສະພາວະທີ່ຄວນລະແຫ່ງຊະຣາ

ມໍຣະນະສະມຸໄທຄວນຮູ້ຍິ່ງ ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງຊະຣາມໍຣະນະນິໂຣດຄວນຮູ້ຍິ່ງ ສະພາວະທີ່ຄວນຈະເລີນແຫ່ງຊະຣາມໍຣະນະນິໂຣທະຄາມິນີປະຕິປະທາຄວນຮູ້ຍິ່ງ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງທຸກຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການລະແຫ່ງທຸກຂະສະມຸໄທຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງແຫ່ງທຸກຂະນິໂຣທະຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການຈະເລີນແຫ່ງທຸກຂະນິໂຣທະຄາມິນີປະຕິປະທາຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງຮູບຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການລະແຫ່ງຮູບສະມຸໄທຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງແຫ່ງຮູບນິໂຣດ ຄວນຮູ້ຍິ່ງ

ສະພາວະທີ່ຮູ້ແຈ້ງດ້ວຍການຈະເລີນແຫ່ງຮູບນິໂຣທະຄາມິນີປະຕິປະທາຄວນຮູ້ຍິ່ງ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງເວທະນາ ຯລຯ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງສັນຍາ ຯລຯ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງສັງຂານ ຯລຯ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງວິນຍານ ຯລຯ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງຈັກຂຸ ຯລຯ

ສະພາວະທີ່ຮູ້ແຈ້ງດ້ວຍການກຳນົດຮູ້ແຫ່ງຊະຣາ ແລະມໍຣະນະຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການລະແຫ່ງຊະຣາມໍຣະນະສະມຸໄທຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການເຮັດໃຫ້

ແຈ້ງແຫ່ງຊະຣາມໍຣະນະນິໂຣດ ຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງດ້ວຍການຈະເລີນແຫ່ງຊະຣາມໍຣະນະນິໂຣທະຄາມີນີປະຕິປະທາຄວນຮູ້ຍິ່ງ

[໗] ທຸກຄວນຮູ້ຍິ່ງ ທຸກຂະສະມຸໄທຄວນຮູ້ຍິ່ງ ທຸກຂະນິໂຣທະຄວນຮູ້ຍິ່ງ ຄວາມດັບເຫດເກີດແຫ່ງທຸກຄວນຮູ້ຍິ່ງ ຄວາມດັບສັນທະຣາຄະໃນທຸກຄວນຮູ້ຍິ່ງ ຄຸນແຫ່ງທຸກຄວນຮູ້ຍິ່ງ ໂທດແຫ່ງທຸກຄວນຮູ້ຍິ່ງ ເຄື່ອງສະລັດອອກຈາກທຸກຄວນຮູ້ຍິ່ງ

ຮູບຄວນຮູ້ຍິ່ງ ຮູບສະມຸໄທ ฯລฯ ຮູບນິໂຣດ ฯລฯ ຄວາມດັບເຫດໃຫ້ເກີດຮູບ ฯລฯ ຄວາມດັບ ສັນທະຣາຄະໃນຮູບ ฯລฯ ຄຸນແຫ່ງຮູບ ฯລฯ ໂທດແຫ່ງຮູບ ฯລฯ ເຄື່ອງສະລັດອອກຈາກຮູບຄວນຮູ້ຍິ່ງ

ເວທະນາ ฯລฯ

ສັນຍາ ฯລฯ

ສັງຂານ ฯລฯ

ວິນຍານ ฯລฯ

ຈັກຂຸ ฯລฯ

ຊະຣາແລະມໍຣະນະຄວນຮູ້ຍິ່ງ ຊະຣາມໍຣະນະສະມຸໄທ ฯລฯ ຊະຣາມໍຣະນະນິໂຣດ ฯລฯ ຄວາມດັບເຫດໃຫ້ເກີດຊະຣາແລະມໍລະນະ ฯລฯ ຄວາມດັບສັນທະຣາຄະໃນຊະຣາແລະມໍລະນະ ฯລฯ ຄຸນແຫ່ງຊະຣາແລະມໍລະນະ ฯລฯ ໂທດແຫ່ງຊະຣາແລະມໍລະນະ ฯລฯ ເຄື່ອງສະລັດອອກຈາກຊະຣາແລະມໍຣະນະຄວນຮູ້ຍິ່ງ

ທຸກຄວນຮູ້ຍິ່ງ ທຸກຂະສະມຸໄທ ฯລฯ ທຸກຂະນິໂຣທະ ฯລฯ ທຸກຂະນິໂຣທະຄາມີນີປະຕິປະທາ ฯລฯ ຄຸນແຫ່ງທຸກ ฯລฯ ໂທດແຫ່ງທຸກ ฯລฯ ເຄື່ອງສະລັດອອກຈາກທຸກຄວນຮູ້ຍິ່ງ

ຮູບຄວນຮູ້ຍິ່ງ ຮູບສະມຸໄທ ฯລฯ ຮູບນິໂຣດ ฯລฯ ຮູບນິໂຣທະຄາມີນີປະຕິປະທາ ฯລฯ ຄຸນແຫ່ງຮູບ ฯລฯ ໂທດແຫ່ງຮູບ ฯລฯ ເຄື່ອງສະລັດອອກຈາກຮູບຄວນຮູ້ຍິ່ງ

ເວທະນາ ฯລฯ

ສັນຍາ ฯລฯ

ສັງຂານ ฯລฯ

ວິນຍານ ฯລฯ

ຈັກຂຸ ฯລฯ

ຊະຣາແລະມໍຣະນະຄວນຮູ້ຍິ່ງ ຊະຣາມໍຣະນະສະມຸໄທ ฯລฯ ຊະຣາມໍຣະນະນິໂຣດ ฯລฯ ຊະຣາມໍຣະນະ ນິໂຣທະຄາມີນີປະຕິປະທາ ฯລฯ ຄຸນແຫ່ງຊະຣາແລະມໍລະນະ ฯລฯ ໂທດແຫ່ງຊະຣາແລະມໍລະນະ ฯລฯ ເຄື່ອງສະລັດອອກຈາກຊະຣາແລະມໍຣະນະຄວນຮູ້ຍິ່ງ

[໙] ອະນິດຈານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ທ່ຽງ) ຄວນຮູ້ຍິ່ງ ທຸກຂານຸປັດສະນາ (ການພິຈາລະນາເຫັນທຸກ) ຯລຯ ອະນັດຕານຸປັດສະນາ (ການພິຈາລະນາເຫັນອະນັດຕາ) ຯລຯ

ນິບພິທານຸປັດສະນາ (ການພິຈາລະນາເຫັນຄວາມເບື່ອໜ່າຍ) ຯລຯ ວິຣາຄານຸປັດສະນາ (ການພິຈາລະນາເຫັນຄວາມຄາຍກຳໜັດ) ຯລຯ ນິໂຣທານຸປັດສະນາ (ການພິຈາລະນາເຫັນຄວາມດັບ) ຯລຯ ປະຕິນິດສັກຄານຸປັດສະນາ (ການພິຈາລະນາເຫັນຄວາມສະລະຄືນ) ຄວນຮູ້ຍິ່ງ

ອະນິດຈານຸປັດສະນາໃນຮູບຄວນຮູ້ຍິ່ງ ທຸກຂານຸປັດສະນາໃນຮູບ ຯລຯ ອະນັດຕານຸປັດສະນາໃນຮູບ ຯລຯ ນິບພິທານຸປັດສະນາໃນຮູບ ຯລຯ ວິຣາຄານຸປັດສະນາໃນຮູບ ຯລຯ ນິໂຣທານຸປັດສະນາໃນຮູບ ຯລຯ

ປະຕິນິດສັກຄານຸປັດສະນາໃນຮູບຄວນຮູ້ຍິ່ງ
ອະນິດຈານຸປັດສະນາໃນເວທະນາ ຯລຯ
ອະນິດຈານຸປັດສະນາໃນສັນຍາ ຯລຯ
ອະນິດຈານຸປັດສະນາໃນສັງຂານ ຯລຯ
ອະນິດຈານຸປັດສະນາໃນວິນຍານ ຯລຯ
ອະນິດຈານຸປັດສະນາໃນຈັກຂຸ ຯລຯ

ອະນິດຈານຸປັດສະນາໃນຊະຣາ ແລະມໍຣະນະຄວນຮູ້ຍິ່ງ ທຸກຂານຸປັດສະນາໃນຊະຣາແລະມໍລະນະ ຯລຯ ອະນັດຕານຸປັດສະນາໃນຊະຣາ ແລະມໍລະນະ ຯລຯ ນິບພິທານຸປັດສະນາໃນຊະຣາແລະມໍລະນະ ຯລຯ ວິຣາຄານຸປັດສະນາໃນຊະຣາ ແລະມໍລະນະ ຯລຯ ນິໂຣທານຸປັດສະນາໃນຊະຣາແລະມໍລະນະ ຯລຯ ປະຕິນິດສັກຄານຸປັດສະນາໃນຊະຣາແລະມໍຣະນະຄວນຮູ້ຍິ່ງ

[໑໐] ຄວາມເກີດຂຶ້ນຄວນຮູ້ຍິ່ງ ຄວາມເປັນໄປ ຯລຯ ນິມິດ (ເຄື່ອງໝາຍ) ຯລຯ ກຳເປັນເຄື່ອງປະມວນມາ ຯລຯ ປະຕິສົນທິ ຯລຯ ຄະຕິ (ພົບທີ່ໄປເກີດ) ຯລຯ ຄວາມບັງເກີດ ຯລຯ ຄວາມອຸບັດ ຯລຯ ຄວາມເກີດ ຯລຯ ຄວາມແກ່ ຯລຯ ຄວາມເຈັບໄຂ້ ຯລຯ ຄວາມຕາຍ ຯລຯ ຄວາມເສົ້າໂສກ ຯລຯ ຄວາມລຳພັນ ຯລຯ ຄວາມຄັບແຄ້ນໃຈຄວນຮູ້ຍິ່ງ

ຄວາມບໍ່ເກີດຂຶ້ນຄວນຮູ້ຍິ່ງ ຄວາມບໍ່ເປັນໄປ ຯລຯ ອະນິມິດ (ຄວາມບໍ່ມີເຄື່ອງໝາຍ) ຯລຯ ຄວາມບໍ່ມີກຳເປັນເຄື່ອງປະມວນມາ ຯລຯ ຄວາມບໍ່ມີປະຕິສົນທິ ຯລຯ ອະຄະຕິ (ຄວາມບໍ່ມີພົບທີ່ໄປເກີດ) ຯລຯ ຄວາມບໍ່ບັງເກີດ ຯລຯ ຄວາມບໍ່ອຸບັດ ຯລຯ ຄວາມບໍ່ເກີດ ຯລຯ ຄວາມບໍ່ແກ່ ຯລຯ ຄວາມບໍ່ເຈັບໄຂ້ ຯລຯ ຄວາມບໍ່ຕາຍ ຯລຯ ຄວາມບໍ່ເສົ້າໂສກ ຯລຯ ຄວາມບໍ່ລຳພັນ ຯລຯ ຄວາມບໍ່ຄັບແຄ້ນໃຈຄວນຮູ້ຍິ່ງ

ຄວາມເກີດຂຶ້ນຄວນຮູ້ຍິ່ງ ຄວາມບໍ່ເກີດຂຶ້ນ ຯລຯ ຄວາມເປັນໄປ ຯລຯ ຄວາມບໍ່ເປັນໄປ ຯລຯ ນິມິດ ຯລຯ ອະນິມິດ ຯລຯ ກຳເປັນເຄື່ອງປະມວນມາ ຯລຯ ຄວາມບໍ່ມີກຳເປັນເຄື່ອງປະມວນມາ ຯລຯ ປະຕິສົນທິ ຯລຯ ຄວາມບໍ່ມີປະຕິສົນທິ ຯລຯ ຄະຕິ ຯລຯ ອະຄະຕິ ຯລຯ ຄວາມບັງເກີດ ຯລຯ ຄວາມບໍ່ບັງເກີດ ຯລຯ ຄວາມອຸບັດ ຯລຯ ຄວາມບໍ່ອຸບັດ ຯລຯ ຄວາມເກີດ ຯລຯ ຄວາມບໍ່ເກີດ ຯລຯ ຄວາມແກ່ ຯລຯ ຄວາມບໍ່ແກ່ ຯລຯ ຄວາມເຈັບໄຂ້ ຯລຯ ຄວາມບໍ່ເຈັບໄຂ້ ຯລຯ ຄວາມຕາຍ ຯລຯ ຄວາມບໍ່ຕາຍ ຯລຯ ຄວາມເສົ້າໂສກ ຯລຯ ຄວາມບໍ່ເສົ້າໂສກ ຯລຯ ຄວາມລຳພັນ ຯລຯ ຄວາມບໍ່ລຳພັນ ຯລຯ ຄວາມຄັບແຄ້ນໃຈ ຯລຯ ຄວາມບໍ່ຄັບແຄ້ນໃຈຄວນຮູ້ຍິ່ງ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນທຸກ ຯລຯ ຄວາມເປັນໄປເປັນທຸກ ຯລຯ ນິມິດເປັນທຸກ ຯລຯ ກຳເປັນເຄື່ອງປະມວນມາເປັນທຸກ ຯລຯ ປະຕິສົນທິເປັນທຸກ ຯລຯ ຄະຕິເປັນທຸກ ຯລຯ ຄວາມບັງເກີດເປັນທຸກ ຯລຯ ຄວາມອຸບັດເປັນທຸກ ຯລຯ ຄວາມເກີດເປັນທຸກ ຯລຯ ຄວາມແກ່ເປັນທຸກ ຯລຯ ຄວາມເຈັບໄຂ້ເປັນທຸກ ຯລຯ ຄວາມຕາຍເປັນ ທຸກ ຯລຯ ຄວາມເສົ້າໂສກເປັນທຸກ ຯລຯ ຄວາມລຳພັນເປັນທຸກ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນທຸກ

ຄວນຮູ້ຍິ່ງວ່າ ຄວາມບໍ່ເກີດຂຶ້ນເປັນສຸກ ຯລຯ ຄວາມບໍ່ເປັນໄປເປັນສຸກ ຯລຯ ອະນິມິດເປັນສຸກ ຯລຯ ຄວາມບໍ່ມີກຳເປັນເຄື່ອງປະມວນມາເປັນສຸກ ຯລຯ ຄວາມບໍ່ມີປະຕິສົນທິເປັນສຸກ ຯລຯ ອະຄະຕິເປັນສຸກ ຯລຯ ຄວາມບໍ່ບັງເກີດເປັນສຸກ ຯລຯ ຄວາມບໍ່ອຸບັດເປັນສຸກ ຯລຯ ຄວາມບໍ່ເກີດເປັນສຸກ ຯລຯ ຄວາມບໍ່ແກ່ເປັນສຸກ ຯລຯ ຄວາມບໍ່ເຈັບໄຂ້ເປັນສຸກ ຯລຯ ຄວາມບໍ່ຕາຍເປັນສຸກ ຯລຯ ຄວາມບໍ່ເສົ້າໂສກເປັນສຸກ ຯລຯ ຄວາມບໍ່ລຳພັນເປັນສຸກ ຄວນຮູ້ຍິ່ງວ່າ ຄວາມບໍ່ຄັບແຄ້ນໃຈເປັນສຸກ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນທຸກ ຄວາມບໍ່ເກີດຂຶ້ນເປັນສຸກ ຯລຯ ຄວາມເປັນໄປເປັນທຸກ ຄວາມບໍ່ເປັນໄປເປັນສຸກ ຯລຯ ນິມິດເປັນທຸກ ອະນິມິດເປັນສຸກ ຯລຯ ກຳເປັນເຄື່ອງປະມວນມາເປັນທຸກ ຄວາມບໍ່ມີກຳເປັນເຄື່ອງປະມວນມາເປັນສຸກ ຯລຯ ປະຕິສົນທິເປັນທຸກ ຄວາມບໍ່ມີປະຕິສົນທິເປັນສຸກ ຯລຯ ຄະຕິເປັນທຸກ ອະຄະຕິເປັນສຸກ ຯລຯ ຄວາມບັງເກີດເປັນທຸກ ຄວາມບໍ່ບັງເກີດເປັນສຸກ ຯລຯ ຄວາມອຸບັດເປັນທຸກ ຄວາມບໍ່ອຸບັດເປັນສຸກ ຯລຯ ຄວາມເກີດເປັນທຸກ ຄວາມບໍ່ເກີດເປັນສຸກ ຯລຯ ຄວາມແກ່ເປັນທຸກ ຄວາມບໍ່ແກ່ເປັນສຸກ ຯລຯ ຄວາມເຈັບໄຂ້ເປັນທຸກ ຄວາມບໍ່ເຈັບໄຂ້ເປັນສຸກ ຯລຯ ຄວາມຕາຍເປັນທຸກ ຄວາມບໍ່ຕາຍເປັນສຸກ ຯລຯ ຄວາມເສົ້າໂສກເປັນທຸກ ຄວາມບໍ່ເສົ້າໂສກເປັນສຸກ ຯລຯ ຄວາມລຳພັນເປັນທຸກ ຄວາມບໍ່ລຳພັນເປັນສຸກ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນທຸກ ຄວາມບໍ່ຄັບແຄ້ນໃຈເປັນສຸກ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນໄພ ໆລໆ ຄວາມເປັນໄປເປັນໄພ ໆລໆ ນິມິດເປັນໄພ ໆລໆ ກໍາເປັນເຄື່ອງປະມວນມາເປັນໄພ ໆລໆ ປະຕິສົນທິເປັນໄພ ໆລໆ ຄະຕິເປັນໄພ ໆລໆ ຄວາມບັງເກີດເປັນໄພ ໆລໆ ຄວາມອຸບັດເປັນໄພ ໆລໆ ຄວາມເກີດເປັນໄພ ໆລໆ ຄວາມແກ່ເປັນໄພ ໆລໆ ຄວາມເຈັບໄຂ້ເປັນໄພ ໆລໆ ຄວາມຕາຍເປັນໄພ ໆລໆ ຄວາມເສົ້າໂສກ ເປັນໄພ ໆລໆ ຄວາມລໍາພັນເປັນໄພ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນໄພ

ຄວນຮູ້ຍິ່ງວ່າ ຄວາມບໍ່ເກີດຂຶ້ນປອດໄພ ໆລໆ ຄວາມບໍ່ເປັນໄປປອດໄພ ໆລໆ ອະນິມິດປອດໄພ ໆລໆ ຄວາມບໍ່ມີກໍາເປັນເຄື່ອງປະມວນມາປອດໄພ ໆລໆ ຄວາມບໍ່ມີປະຕິສົນທິປອດໄພ ໆລໆ ອະຄະຕິປອດໄພ ໆລໆ ຄວາມບໍ່ບັງເກີດປອດໄພ ໆລໆ ຄວາມບໍ່ອຸບັດປອດໄພ ໆລໆ ຄວາມບໍ່ເກີດປອດໄພ ໆລໆ ຄວາມບໍ່ແກ່ປອດໄພ ໆລໆ ຄວາມບໍ່ເຈັບໄຂ້ປອດໄພ ໆລໆ ຄວາມບໍ່ຕາຍປອດໄພ ໆລໆ ຄວາມບໍ່ເສົ້າໂສກ ປອດໄພ ໆລໆ ຄວາມບໍ່ລໍາພັນປອດໄພ ຄວນຮູ້ຍິ່ງວ່າ ຄວາມບໍ່ຄັບແຄ້ນໃຈປອດໄພ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນໄພ ຄວາມບໍ່ເກີດຂຶ້ນປອດໄພ ໆລໆ ຄວາມເປັນໄປເປັນໄພ ຄວາມບໍ່ເປັນໄປປອດໄພ ໆລໆ ນິມິດເປັນໄພ ອະນິມິດປອດໄພ ໆລໆ ກໍາເປັນເຄື່ອງປະມວນມາເປັນໄພ ຄວາມບໍ່ມີກໍາເປັນເຄື່ອງປະມວນມາປອດໄພ ໆລໆ ປະຕິສົນທິເປັນໄພ ຄວາມບໍ່ມີປະຕິສົນທິປອດໄພ ໆລໆ ຄະຕິເປັນໄພ ອະຄະຕິປອດໄພ ໆລໆ ຄວາມບັງເກີດເປັນໄພ ຄວາມບໍ່ບັງເກີດປອດໄພ ໆລໆ ຄວາມອຸບັດເປັນໄພ ຄວາມບໍ່ອຸບັດປອດໄພ ໆລໆ ຄວາມເກີດເປັນໄພ ຄວາມບໍ່ເກີດປອດໄພ ໆລໆ ຄວາມແກ່ເປັນໄພ ຄວາມບໍ່ແກ່ປອດໄພ ໆລໆ ຄວາມເຈັບໄຂ້ເປັນໄພ ຄວາມບໍ່ເຈັບໄຂ້ປອດໄພ ໆລໆ ຄວາມຕາຍເປັນໄພ ຄວາມບໍ່ຕາຍປອດໄພ ໆລໆ ຄວາມເສົ້າໂສກເປັນໄພ ຄວາມບໍ່ເສົ້າໂສກປອດໄພ ໆລໆ ຄວາມລໍາພັນເປັນໄພ ຄວາມບໍ່ລໍາພັນປອດໄພ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນໄພ ຄວາມບໍ່ຄັບແຄ້ນໃຈປອດໄພ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນອາມິດ ໆລໆ ຄວາມເປັນໄປເປັນອາມິດ ໆລໆ ນິມິດເປັນອາມິດ ໆລໆ ກໍາເປັນເຄື່ອງປະມວນມາເປັນອາມິດ ໆລໆ ປະຕິສົນທິເປັນອາມິດ ໆລໆ ຄະຕິເປັນອາມິດ ໆລໆ ຄວາມບັງເກີດເປັນອາມິດ ໆລໆ ຄວາມອຸບັດເປັນອາມິດ ໆລໆ ຄວາມເກີດເປັນອາມິດ ໆລໆ ຄວາມແກ່ເປັນອາມິດ ໆລໆ ຄວາມເຈັບໄຂ້ເປັນອາມິດ ໆລໆ ຄວາມຕາຍເປັນອາມິດ ໆລໆ ຄວາມເສົ້າໂສກເປັນອາມິດ ໆລໆ ຄວາມລໍາພັນເປັນອາມິດ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນອາມິດ

ຄວນຮູ້ຍິ່ງວ່າ ຄວາມບໍ່ເກີດຂຶ້ນບໍ່ເປັນອາມິດ ໆລໆ ຄວາມບໍ່ເປັນໄປບໍ່ເປັນອາມິດໆລໆ ອະນິມິດບໍ່ເປັນອາມິດ ໆລໆ ຄວາມບໍ່ມີກໍາເປັນເຄື່ອງປະມວນມາບໍ່ເປັນອາມິດ ໆລໆ ຄວາມບໍ່ມີປະຕິສົນທິບໍ່ເປັນອາມິດ ໆລໆ ອະຄະຕິບໍ່ເປັນອາມິດ ໆລໆ ຄວາມບໍ່ບັງເກີດບໍ່ເປັນອາມິດ ໆລໆ

ຄວາມບໍ່ອຸບັດບໍ່ເປັນອາມິດ ໆລໆ ຄວາມບໍ່ເກີດບໍ່ເປັນອາມິດ ໆລໆ ຄວາມບໍ່ແກ່ບໍ່ເປັນອາມິດ ໆລໆ ຄວາມບໍ່ເຈັບໄຂ້ບໍ່ເປັນອາມິດ ໆລໆ ຄວາມບໍ່ຕາຍບໍ່ເປັນອາມິດ ໆລໆ ຄວາມບໍ່ເສົ້າໂສກ ບໍ່ເປັນອາມິດ ໆລໆ ຄວາມບໍ່ລຳພັນບໍ່ເປັນອາມິດ ຄວນຮູ້ຍິ່ງວ່າ ຄວາມບໍ່ຄັບແຄ້ນໃຈບໍ່ເປັນ ອາມິດ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນອາມິດ ຄວາມບໍ່ເກີດຂຶ້ນບໍ່ເປັນອາມິດ ໆລໆ ຄວາມເປັນໄປເປັນອາມິດ ຄວາມບໍ່ເປັນໄປບໍ່ເປັນອາມິດ ໆລໆ ນິມິດເປັນອາມິດ ອະນິມິດບໍ່ເປັນອາມິດ ໆລໆ ກຳເປັນເຄື່ອງປະມວນມາເປັນອາມິດ ຄວາມບໍ່ມີກຳເປັນເຄື່ອງປະມວນມາບໍ່ເປັນອາມິດ ໆລໆ ປະຕິສົນທິເປັນອາມິດ ຄວາມບໍ່ມີປະຕິສົນທິບໍ່ເປັນອາມິດ ໆລໆ ຄະຕິເປັນອາມິດ ອະຄະຕິບໍ່ເປັນອາມິດ ໆລໆ ຄວາມບັງເກີດເປັນອາມິດ ຄວາມບໍ່ບັງເກີດບໍ່ເປັນອາມິດ ໆລໆ ຄວາມອຸບັດເປັນອາມິດ ຄວາມບໍ່ອຸບັດບໍ່ເປັນອາມິດ ໆລໆ ຄວາມເກີດເປັນອາມິດ ຄວາມບໍ່ເກີດ ບໍ່ເປັນອາມິດ ໆລໆ ຄວາມແກ່ເປັນອາມິດ ຄວາມບໍ່ແກ່ບໍ່ເປັນອາມິດ ໆລໆ ຄວາມເຈັບໄຂ້ເປັນ ອາມິດ ຄວາມບໍ່ເຈັບໄຂ້ບໍ່ເປັນອາມິດ ໆລໆ ຄວາມຕາຍເປັນອາມິດ ຄວາມບໍ່ຕາຍບໍ່ເປັນອາມິດ ໆລໆ ຄວາມເສົ້າໂສກເປັນອາມິດ ຄວາມບໍ່ເສົ້າໂສກ ບໍ່ເປັນອາມິດ ໆລໆ ຄວາມລຳພັນເປັນ ອາມິດ ຄວາມບໍ່ລຳພັນບໍ່ເປັນອາມິດ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນອາມິດ ຄວາມບໍ່ຄັບ ແຄ້ນໃຈບໍ່ເປັນອາມິດ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນສັງຂານ ໆລໆ ຄວາມເປັນໄປເປັນສັງຂານ ໆລໆ ນິມິດເປັນສັງຂານ ໆລໆ ກຳເປັນເຄື່ອງປະມວນມາເປັນສັງຂານ ໆລໆ ປະຕິສົນທິເປັນສັງຂານ ໆລໆ ຄະຕິເປັນສັງຂານ ໆລໆ ຄວາມບັງເກີດເປັນສັງຂານ ໆລໆ ຄວາມອຸບັດເປັນສັງຂານ ໆລໆ ຄວາມເກີດເປັນສັງຂານ ໆລໆ ຄວາມແກ່ເປັນສັງຂານ ໆລໆ ຄວາມເຈັບໄຂ້ເປັນສັງຂານ ໆລໆ ຄວາມຕາຍເປັນສັງຂານ ໆລໆ ຄວາມເສົ້າໂສກເປັນສັງຂານ ໆລໆ ຄວາມລຳພັນເປັນສັງ ຂານ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນສັງຂານ

ຄວນຮູ້ຍິ່ງວ່າ ຄວາມບໍ່ເກີດຂຶ້ນເປັນນິບພານ ໆລໆ ຄວາມບໍ່ເປັນໄປເປັນນິບພານ ໆລໆ ອະນິມິດເປັນນິບພານ ໆລໆ ຄວາມບໍ່ມີກຳເປັນເຄື່ອງປະມວນມາເປັນນິບພານ ໆລໆ ຄວາມບໍ່ມີ ປະຕິສົນທິເປັນນິບພານ ໆລໆ ອະຄະຕິເປັນນິບພານ ໆລໆ ຄວາມບໍ່ບັງເກີດເປັນນິບພານ ໆລໆ ຄວາມບໍ່ອຸບັດເປັນນິບພານ ໆລໆ ຄວາມບໍ່ເກີດເປັນນິບພານ ໆລໆ ຄວາມບໍ່ແກ່ເປັນນິບ ພານ ໆລໆ ຄວາມບໍ່ເຈັບໄຂ້ເປັນນິບພານ ໆລໆ ຄວາມບໍ່ຕາຍເປັນນິບພານ ໆລໆ ຄວາມບໍ່ ເສົ້າໂສກເປັນນິບພານ ໆລໆ ຄວາມບໍ່ລຳພັນເປັນນິບພານ ຄວນຮູ້ຍິ່ງວ່າ ຄວາມບໍ່ຄັບແຄ້ນໃຈ ເປັນນິບພານ

ຄວນຮູ້ຍິ່ງວ່າ ຄວາມເກີດຂຶ້ນເປັນສັງຂານ ຄວາມບໍ່ເກີດຂຶ້ນເປັນນິບພານ ໆລໆ ຄວາມ

ເປັນໄປເປັນສັງຂານ ຄວາມບໍ່ເປັນໄປເປັນນິບພານ ຯລຯ ນິມິດເປັນສັງຂານ ອະນິມິດເປັນນິບພານ ຯລຯ ກຳເປັນເຄື່ອງປະມວນມາເປັນສັງຂານ ຄວາມບໍ່ມີກຳເປັນເຄື່ອງປະມວນມາເປັນນິບພານ ຯລຯ ປະຕິສົນທິເປັນສັງຂານ ຄວາມບໍ່ມີປະຕິສົນທິເປັນນິບພານ ຯລຯ ຄະຕິເປັນສັງຂານ ອະຄະຕິເປັນນິບພານ ຯລຯ ຄວາມບັງເກີດເປັນສັງຂານ ຄວາມບໍ່ບັງເກີດເປັນນິບພານ ຯລຯ ຄວາມອຸບັດເປັນສັງຂານ ຄວາມບໍ່ອຸບັດເປັນນິບພານ ຯລຯ ຄວາມເກີດເປັນສັງຂານ ຄວາມບໍ່ເກີດເປັນນິບພານ ຯລຯ ຄວາມແກ່ເປັນສັງຂານ ຄວາມບໍ່ແກ່ເປັນນິບພານ ຯລຯ ຄວາມເຈັບໄຂ້ເປັນສັງຂານ ຄວາມບໍ່ເຈັບໄຂ້ເປັນນິບພານ ຯລຯ ຄວາມຕາຍເປັນສັງຂານ ຄວາມບໍ່ຕາຍເປັນນິບພານ ຯລຯ ຄວາມເສົ້າໂສກເປັນສັງຂານ ຄວາມບໍ່ເສົ້າໂສກເປັນນິບພານ ຯລຯ ຄວາມລຳພັນເປັນສັງຂານ ຄວາມບໍ່ລຳພັນເປັນນິບພານ ຄວນຮູ້ຍິ່ງວ່າ ຄວາມຄັບແຄ້ນໃຈເປັນສັງຂານ ຄວາມບໍ່ຄັບແຄ້ນໃຈເປັນນິບພານ

**ປະຖົມພານະວານ ຈົບ**

[໑໑] ສະພາວະທີ່ຄວນກຳນົດຄວນຮູ້ຍິ່ງ ສະພາວະທີ່ເປັນບໍລິວານ ຯລຯ ສະພາວະທີ່ເຕັມຮອບ ຯລຯ ສະພາວະທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານ ຯລຯ ສະພາວະທີ່ປະຄອງໄວ້ ຯລຯ ສະພາວະທີ່ບໍ່ກະຈັດກະຈາຍໄປ ຯລຯ ສະພາວະທີ່ບໍ່ຂຸ່ນມົວ ຯລຯ ສະພາວະທີ່ບໍ່ຫວັ່ນໄຫວ ຯລຯ ສະພາວະທີ່ຕັ້ງຢູ່ດ້ວຍອຳນາດຄວາມຜາກົດແຫ່ງຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ເປັນອາລົມ ຯລຯ ສະພາວະທີ່ເປັນໂຄຈອນ ຯລຯ ສະພາວະທີ່ລະ ຯລຯ ສະພາວະທີ່ສະລະ ຯລຯ ສະພາວະທີ່ອອກ ຯລຯ ສະພາວະທີ່ຫຼີກໄປ ຯລຯ ສະພາວະທີ່ລະອຽດ ຯລຯ ສະພາວະທີ່ປະນີດ ຯລຯ ສະພາວະທີ່ລຸດພົ້ນ ຯລຯ ສະພາວະທີ່ບໍ່ມີອາສະວະ ຯລຯ ສະພາວະເຄື່ອງຂ້າມ ຯລຯ ສະພາວະທີ່ບໍ່ມີນິມິດ ຯລຯ ສະພາວະອັນບໍ່ມີບ່ອນຕັ້ງ ຯລຯ ສະພາວະທີ່ວ່າງ ຯລຯ ສະພາວະທີ່ມີຣົດເປັນແນວດຽວກັນ ຯລຯ ສະພາວະທີ່ບໍ່ລ່ວງເລີຍກັນ ຯລຯ ສະພາວະທີ່ເປັນຄູ່ກັນ ຯລຯ ສະພາວະທີ່ນຳອອກ ຯລຯ ສະພາວະທີ່ເປັນເຫດ ຯລຯ ສະພາວະທີ່ເຫັນ ຯລຯ ສະພາວະທີ່ເປັນໃຫຍ່ຄວນຮູ້ຍິ່ງ

[໑໒] ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມະຖະຄວນຮູ້ຍິ່ງ ສະພາວະທີ່ພິຈາລະນາເຫັນແຫ່ງ ວິປັດສະນາ ຯລຯ ສະພາວະທີ່ມີຣົດເປັນແນວດຽວກັນແຫ່ງສະມະຖະແລະວິປັດສະນາ ຯລຯ ສະພາວະທີ່ບໍ່ລ່ວງເລີຍກັນແຫ່ງທຳທີ່ເປັນຄູ່ກັນ ຯລຯ ສະພາວະທີ່ສະມາທານແຫ່ງສິກຂາ ຯລຯ ສະພາວະທີ່ເປັນໂຄຈອນແຫ່ງອາລົມ ຯລຯ ສະພາວະທີ່ປະຄອງຈິດເຊິ່ງຫຍໍ້ທໍ້ ຯລຯ ສະພາວະທີ່ຂົ່ມຈິດທີ່ຟຸ້ງຊ່ານ ຯລຯ ສະພາວະທີ່ຄຸມຈິດອັນບໍລິສຸດຈາກຄວາມຫຍໍ້ທໍ້ ແລະຄວາມຟຸ້ງຊ່ານທັງ ໒ ປະການ ຯລຯ ສະພາວະທີ່ບັນລຸຄຸນວິເສດ ຯລຯ ສະພາວະທີ່ຮູ້ແຈ້ງອະຣິຍະມັກອັນປະເສີດ ຯລຯ ສະພາວະທີ່ຕັດສະຮູ້ສັດຈະ ຯລຯ ສະພາວະທີ່ໃຫ້ຈິດຕັ້ງຢູ່ສະເພາະໃນນິໂຣດຄວນຮູ້ຍິ່ງ

ສະພາວະທີ່ນ້ອມໃຈເຊື່ອແຫ່ງສັດທິນຊີຄວນຮູ້ຍິ່ງ ສະພາວະທີ່ປະຄອງໄວ້ແຫ່ງວິຣິຍິນຊີ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງສະຕິນຊີ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມາທິນຊີ ຯລຯ ສະພາວະທີ່ເຫັນແຫ່ງປັນຍິນຊີຄວນຮູ້ຍິ່ງ

ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາແຫ່ງສັດທາພະລະຄວນຮູ້ຍິ່ງ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານແຫ່ງວິຣິຍະພະລະ ຯລຯ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຜະໝາດແຫ່ງສະຕິພະລະ ຯລຯ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອຸດທັດຈະແຫ່ງສະມາທິພະລະ ຯລຯ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອະວິດຊາແຫ່ງປັນຍາພະລະຄວນຮູ້ຍິ່ງ

ສະພາວະທີ່ຕັ້ງໝັ້ນແຫ່ງສະຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຣະລຶກໄດ້) ຄວນຮູ້ຍິ່ງ ສະພາວະທີ່ເລືອກເຟັ້ນແຫ່ງທຳມະວິຈະຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມເລືອກເຟັ້ນທຳ) ຯລຯ ສະພາວະທີ່ປະຄອງໄວ້ແຫ່ງວິຣິຍະສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ) ຯລຯ ສະພາວະທີ່ແຜ່ໄປແຫ່ງປີຕິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມອິ່ມໃຈ) ຯລຯ ສະພາວະທີ່ສະງົບແຫ່ງປັດສັດທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບໃຈ) ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມາທິສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ) ຯລຯ ສະພາວະທີ່ພິຈາລະນາແຫ່ງອຸເປກຂາ ສຳໂພດຊົງ (ທຳເປັນອົງແຫ່ງການຕັດສະຣູ້ຄືຄວາມມີໃຈເປັນກາງ) ຄວນຮູ້ຍິ່ງ

ສະພາວະທີ່ເຫັນແຫ່ງສຳມາທິດຖິ (ເຫັນຊອບ) ຄວນຮູ້ຍິ່ງ ສະພາວະທີ່ນຶກຕອງແຫ່ງສຳມາ ສັງກັບປະ (ດຳຣິຊອບ) ຯລຯ ສະພາວະທີ່ກຳນົດແຫ່ງສຳມາວາຈາ (ເຈຣະຈາຊອບ) ຯລຯ ສະພາວະທີ່ເປັນສະມຸດຖານແຫ່ງສຳມາກຳມັນຕະ (ການກະທຳຊອບ) ຯລຯ ສະພາວະທີ່ຜ່ອງແຜ້ວແຫ່ງສຳມາອາຊີວະ (ລ້ຽງຊີບຊອບ) ຯລຯ ສະພາວະທີ່ປະຄອງໄວ້ແຫ່ງສຳມາວາຍາມະ (ພະຍາຍາມຊອບ) ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງສຳມາສະຕິ (ຣະລຶກຊອບ) ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສຳມາສະມາທິ (ຕັ້ງຈິດໝັ້ນຊອບ) ຄວນຮູ້ຍິ່ງ

[໑໑] ສະພາວະທີ່ເປັນໃຫຍ່ແຫ່ງອິນຊີຄວນຮູ້ຍິ່ງ ສະພາວະທີ່ບໍ່ຫວັ່ນໄຫວແຫ່ງພະລະ ຯລຯ ສະພາວະທີ່ນຳອອກແຫ່ງໂພດຊົງ ຯລຯ ສະພາວະທີ່ເປັນເຫດແຫ່ງມັກ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງສະຕິປັດຖານ ຯລຯ ສະພາວະທີ່ເລີ່ມຕັ້ງແຫ່ງສຳມັບປະທານ ຯລຯ ສະພາວະທີ່ສຳເລັດແຫ່ງອິດທິບາດ ຯລຯ ສະພາວະທີ່ເປັນຂອງແທ້ແຫ່ງສັດຈະ ຯລຯ ສະພາວະທີ່ຣະງັບແຫ່ງມັກ ຯລຯ ສະພາວະທີ່ເຮັດໃຫ້ແຈ້ງ ແຫ່ງຜົນຄວນຮູ້ຍິ່ງ

ສະພາວະທີ່ນຶກຕອງແຫ່ງວິຕົກຄວນຮູ້ຍິ່ງ ສະພາວະທີ່ກວດກາແຫ່ງວິຈານ ຯລຯ ສະພາວະທີ່ແຜ່ໄປແຫ່ງປີຕິ ຯລຯ ສະພາວະທີ່ໄຫຼມາແຫ່ງສຸກ ຯລຯ ສະພາວະທີ່ເປັນເອກັກຄະຕາຣົມ (ມີອາລົມດຽວ) ແຫ່ງຈິດ ຯລຯ ສະພາວະທີ່ນຶກ ຯລຯ ສະພາວະທີ່ຮູ້ແຈ້ງ ຯລຯ

ສະພາວະທີ່ຮູ້ຊັດແຈ້ງ ໆລໆ ສະພາວະທີ່ຈຳໄດ້ ໆລໆ ສະພາວະທີ່ມີຣົດເປັນແນວດຽວກັນຄວນຮູ້ຍິ່ງ

ສະພາວະທີ່ຮູ້ແຫ່ງອະພິນຍາຄວນຮູ້ຍິ່ງ ສະພາວະທີ່ພິຈາລະນາແຫ່ງປະຣິນຍາ ໆລໆ ສະພາວະທີ່ສະລະແຫ່ງປະຫານະ ໆລໆ ສະພາວະທີ່ມີຣົດເປັນແນວດຽວກັນແຫ່ງພາວະນາ ໆລໆ ສະພາວະທີ່ຖືກຕ້ອງແຫ່ງສັດສິກິຣິຍາ ໆລໆ ສະພາວະທີ່ເປັນກອງແຫ່ງຂັນທັງຫຼາຍ ໆລໆ ສະພາວະທີ່ຊົງໄວ້ແຫ່ງທາດ ທັງຫຼາຍ ໆລໆ ສະພາວະທີ່ຕໍ່ແຫ່ງອາຍະຕະນະທັງຫຼາຍ ໆລໆ ສະພາວະທີ່ປັດໄຈປຸງແຕ່ງແຫ່ງ ສັງຂະຕະທຳ ໆລໆ ສະພາວະທີ່ປັດໄຈບໍ່ໄດ້ປຸງແຕ່ງແຫ່ງອະສັງຂະຕະທຳຄວນຮູ້ຍິ່ງ

[໑໘] ສະພາວະແຫ່ງຈິດຄວນຮູ້ຍິ່ງ ສະພາວະທີ່ບໍ່ມີລະຫວ່າງຄັ່ນແຫ່ງຈິດ ໆລໆ ສະພາວະທີ່ອອກແຫ່ງຈິດ ໆລໆ ສະພາວະທີ່ຫຼີກໄປແຫ່ງຈິດ ໆລໆ ສະພາວະທີ່ເປັນເຫດແຫ່ງຈິດ ໆລໆ ສະພາວະທີ່ເປັນປັດໄຈແຫ່ງຈິດ ໆລໆ ສະພາວະທີ່ຕັ້ງໝັ້ນແຫ່ງຈິດ ໆລໆ ສະພາວະທີ່ເປັນພູມແຫ່ງຈິດ ໆລໆ ສະພາວະທີ່ເປັນອາລົມແຫ່ງຈິດ ໆລໆ ສະພາວະທີ່ເປັນໂຄຈອນແຫ່ງຈິດ ໆລໆ ສະພາວະທີ່ທ່ຽວໄປແຫ່ງຈິດ ໆລໆ ສະພາວະທີ່ໄປແຫ່ງຈິດ ໆລໆ ສະພາວະທີ່ນຳໄປແຫ່ງຈິດ ໆລໆ ສະພາວະທີ່ນຳອອກແຫ່ງຈິດ ໆລໆ ສະພາວະທີ່ສະລັດອອກແຫ່ງຈິດຄວນຮູ້ຍິ່ງ

[໑໙] ສະພາວະທີ່ນຶກໃນຈິດທີ່ເປັນເອກັກຄະຕາຣົມ (ມີອາລົມດຽວ) ຄວນຮູ້ຍິ່ງ ສະພາວະທີ່ຮູ້ແຈ້ງໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຮູ້ຊັດແຈ້ງໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຈຳໄດ້ໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເປັນທຳເອກຜຸດຂຶ້ນໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເນື່ອງໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ແລ່ນໄປສູ່ຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຜ່ອງໃສໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຕັ້ງໝັ້ນໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ລຸດພົ້ນໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເຫັນວ່າ ນີ້ລະອຽດໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເຮັດໃຫ້ເປັນເໝືອນຍານໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເຮັດໃຫ້ເປັນບ່ອນຕັ້ງໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຕັ້ງຂຶ້ນເນືອງ ໆ ໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ອົບຮົມໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຜາຣົບສະເໝີດີໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ກຳນົດໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເປັນບໍລິວານໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເຕັມຮອບໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ປະຊຸມໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ອະທິຖານໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ປະຕິບັດໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ຈະເລີນໃນຈິດທີ່ເປັນເອກັກຄະຕາຣົມ ໆລໆ ສະພາວະທີ່ເຮັດ

ໃຫ້ຫຼາຍໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ລວມດີໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ລຸດພົ້ນດ້ວຍດີໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ຕັດສະຣູ້ ໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ໃຫ້ຕັດສະຣູ້ໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ໃຫ້ຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ໃຫ້ຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ໃຫ້ຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ສະຫວ່າງໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ສະຫວ່າງຂຶ້ນໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ສະຫວ່າງເນືອງໆ ໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ສະຫວ່າງສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຯລຯ ສະພາວະທີ່ສະຫວ່າງພ້ອມໃນຈິດທີ່ເປັນເອກັກຄະຕາຣົມຄວນຮູ້ຍິ່ງ

[໑໙] ສະພາວະທີ່ອະຣິຍະມັກໃຫ້ສະຫວ່າງຄວນຮູ້ຍິ່ງ ສະພາວະທີ່ອະຣິຍະມັກໃຫ້ຮຸ່ງເຮືອງ ຯລຯ ສະພາວະທີ່ອະຣິຍະມັກເຮັດໃຫ້ກິເລດຮ້ອນຮົນ ຯລຯ ສະພາວະທີ່ອະຣິຍະມັກບໍ່ມີມົນທິນ ຯລຯ ສະພາວະທີ່ອະຣິຍະມັກປາສະຈາກມົນທິນ ຯລຯ ສະພາວະທີ່ອະຣິຍະມັກໝົດມົນທິນ ຯລຯ ສະພາວະທີ່ອະຣິຍະມັກສະງົບ ຯລຯ ສະພາວະທີ່ອະຣິຍະມັກໃຫ້ກິເລດຣະງັບ ຯລຯ ສະພາວະແຫ່ງວິເວກ ຯລຯ ສະພາວະທີ່ດຳເນີນໄປໃນວິເວກ ຯລຯ ສະພາວະແຫ່ງຄວາມຄາຍກຳໜັດ ຯລຯ ສະພາວະທີ່ດຳເນີນໄປໃນຄວາມຄາຍກຳໜັດ ຯລຯ ສະພາວະແຫ່ງຄວາມດັບ ຯລຯ ສະພາວະທີ່ດຳເນີນໄປໃນຄວາມດັບ ຯລຯ ສະພາວະແຫ່ງການສະລະ ຯລຯ ສະພາວະທີ່ດຳເນີນໄປໃນການສະລະ ຯລຯ ສະພາວະແຫ່ງຄວາມພົ້ນ ຯລຯ ສະພາວະທີ່ດຳເນີນໄປໃນຄວາມພົ້ນຄວນຮູ້ຍິ່ງ

ສະພາວະແຫ່ງສັນທະຄວນຮູ້ຍິ່ງ ສະພາວະທີ່ເປັນມູນແຫ່ງສັນທະ ຯລຯ ສະພາວະທີ່ເປັນບາດແຫ່ງສັນທະ ຯລຯ ສະພາວະທີ່ເປັນປະທານແຫ່ງສັນທະ ຯລຯ ສະພາວະທີ່ສຳເລັດແຫ່ງສັນທະ ຯລຯ ສະພາວະທີ່ນ້ອມໄປແຫ່ງສັນທະ ຯລຯ ສະພາວະທີ່ປະຄອງໄວ້ແຫ່ງສັນທະ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງສັນທະ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສັນທະ ຯລຯ ສະພາວະທີ່ເຫັນແຫ່ງສັນທະຄວນຮູ້ຍິ່ງ

ສະພາວະແຫ່ງວິຣິຍະຄວນຮູ້ຍິ່ງ ສະພາວະທີ່ເປັນມູນແຫ່ງວິຣິຍະ ຯລຯ ສະພາວະທີ່ເປັນບາດແຫ່ງວິຣິຍະ ຯລຯ ສະພາວະທີ່ເປັນປະທານແຫ່ງວິຣິຍະ ຯລຯ ສະພາວະທີ່ສຳເລັດແຫ່ງວິຣິ

ຍະ ຯລຯ ສະພາວະທີ່ນ້ອມໄປແຫ່ງວິຣິຍະ ຯລຯ ສະພາວະທີ່ປະຄອງໄວ້ແຫ່ງວິຣິຍະ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງວິຣິຍະ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງວິຣິຍະ ຯລຯ ສະພາວະທີ່ເຫັນແຫ່ງວິຣິຍະຄວນຮູ້ຍິ່ງ

ສະພາວະແຫ່ງຈິດຕະຄວນຮູ້ຍິ່ງ ສະພາວະທີ່ເປັນມູນແຫ່ງຈິດຕະ ຯລຯ ສະພາວະທີ່ເປັນບາດແຫ່ງຈິດຕະ ຯລຯ ສະພາວະທີ່ເປັນປະທານແຫ່ງຈິດຕະ ຯລຯ ສະພາວະທີ່ສໍາເລັດແຫ່ງຈິດຕະ ຯລຯ ສະພາວະທີ່ນ້ອມໄປແຫ່ງຈິດຕະ ຯລຯ ສະພາວະທີ່ປະຄອງໄວ້ແຫ່ງຈິດຕະ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງຈິດຕະ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງຈິດຕະ ຯລຯ ສະພາວະທີ່ເຫັນແຫ່ງຈິດຕະຄວນຮູ້ຍິ່ງ

ສະພາວະແຫ່ງວິມັງສາຄວນຮູ້ຍິ່ງ ສະພາວະທີ່ເປັນມູນແຫ່ງວິມັງສາ ຯລຯ ສະພາວະທີ່ເປັນບາດແຫ່ງວິມັງສາ ຯລຯ ສະພາວະທີ່ເປັນປະທານແຫ່ງວິມັງສາ ຯລຯ ສະພາວະທີ່ສໍາເລັດແຫ່ງວິມັງສາ ຯລຯ ສະພາວະທີ່ນ້ອມໄປແຫ່ງວິມັງສາ ຯລຯ ສະພາວະທີ່ປະຄອງໄວ້ແຫ່ງວິມັງສາ ຯລຯ ສະພາວະທີ່ຕັ້ງໝັ້ນແຫ່ງວິມັງສາ ຯລຯ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງວິມັງສາ ຯລຯ ສະພາວະທີ່ເຫັນແຫ່ງວິມັງສາຄວນຮູ້ຍິ່ງ

[໑໗] ສະພາວະແຫ່ງທຸກຄວນຮູ້ຍິ່ງ ສະພາວະທີ່ບີບຄັ້ນແຫ່ງທຸກ ຯລຯ ສະພາວະທີ່ປັດໄຈປຸງແຕ່ງແຫ່ງທຸກ ຯລຯ ສະພາວະທີ່ເຮັດໃຫ້ເດືອດຮ້ອນແຫ່ງທຸກ ຯລຯ ສະພາວະທີ່ຜັນປ່ຽນແຫ່ງທຸກ ຯລຯ ສະພາວະແຫ່ງສະມຸໄທ ຯລຯ ສະພາວະທີ່ປະມວນມາແຫ່ງສະມຸໄທ ຯລຯ ສະພາວະທີ່ເປັນເຫດແຫ່ງສະມຸໄທ ຯລຯ ສະພາວະທີ່ກ່ຽວຂ້ອງແຫ່ງສະມຸໄທ ຯລຯ ສະພາວະທີ່ພົວພັນແຫ່ງສະມຸໄທ ຯລຯ ສະພາວະແຫ່ງນິໂຣດ ຯລຯ ສະພາວະທີ່ເປັນເຄື່ອງສະລັດອອກແຫ່ງນິໂຣດ ຯລຯ ສະພາວະທີ່ເປັນວິເວກແຫ່ງນິໂຣດ ຯລຯ ສະພາວະທີ່ເປັນອະສັງຂະຕະແຫ່ງນິໂຣດ ຯລຯ ສະພາວະທີ່ເປັນອະມະຕະແຫ່ງນິໂຣດ ຯລຯ ສະພາວະແຫ່ງມັກ ຯລຯ ສະພາວະທີ່ນໍາອອກແຫ່ງມັກ ຯລຯ ສະພາວະທີ່ເປັນເຫດແຫ່ງມັກ ຯລຯ ສະພາວະທີ່ເຫັນແຫ່ງມັກ ຯລຯ ສະພາວະທີ່ເປັນໃຫຍ່ແຫ່ງມັກຄວນຮູ້ຍິ່ງ

ສະພາວະທີ່ເປັນຂອງແທ້ຄວນຮູ້ຍິ່ງ ສະພາວະທີ່ເປັນອະນັດຕາ ຯລຯ ສະພາວະທີ່ເປັນຈິງ ຯລຯ ສະພາວະທີ່ຮູ້ແຈ້ງ ຯລຯ ສະພາວະທີ່ຮູ້ຍິ່ງ ຯລຯ ສະພາວະທີ່ກໍານົດຮູ້ ຯລຯ ສະພາວະທີ່ເປັນທໍາ ຯລຯ ສະພາວະທີ່ເປັນທາດ ຯລຯ ສະພາວະທີ່ຮູ້ ຯລຯ ສະພາວະທີ່ເຮັດໃຫ້ແຈ້ງ ຯລຯ ສະພາວະທີ່ຖືກຕ້ອງ ຯລຯ ສະພາວະທີ່ຕັດສະຣູ້ຄວນຮູ້ຍິ່ງ

[໑໘] ເນກຂໍາມະ (ການອອກຈາກກາມ) ຄວນຮູ້ຍິ່ງ ອະພະຍາບາດ (ຄວາມບໍ່ພະຍາບາດ) ຯລຯ ອາໂລກະສັນຍາ (ຄວາມໝາຍຮູ້ໃນນິມິດແຫ່ງແສງສະຫວ່າງ) ຯລຯ ອະວິກເຂປະ

(ຄວາມບໍ່ຟຸ້ງຊ່ານ) ໜຶ່ງ ທຳມະວະວັດຖານ (ຄວາມກຳນົດທຳ) ໜຶ່ງ ຍານ (ຄວາມຮູ້) ໜຶ່ງ ປາມຸດຊະ (ຄວາມປາໂມດ) ຄວນຮູ້ຍິ່ງ

ປະຖົມຊານຄວນຮູ້ຍິ່ງ ທຸຕິຍະຊານ ໜຶ່ງ ຕະຕິຍະຊານ ໜຶ່ງ ຈະຕຸດຖະຊານ ໜຶ່ງ ອາກາສານັນຈາຍະຕະນະສະມາບັດ ໜຶ່ງ ວິນຍານັນຈາຍະຕະນະສະມາບັດ ໜຶ່ງ ອາກິນຈັນຍາຍະຕະນະສະມາບັດ ໜຶ່ງ ເນວະສັນຍານາສັນຍາຍະຕະນະສະມາບັດຄວນຮູ້ຍິ່ງ

ອະນິດຈານຸປັດສະນາຄວນຮູ້ຍິ່ງ ທຸກຂານຸປັດສະນາ ໜຶ່ງ ອະນັດຕານຸປັດສະນາ ໜຶ່ງ ນິບພິທານຸປັດສະນາ ໜຶ່ງ ວິຣາຄານຸປັດສະນາ ໜຶ່ງ ນິໂຣທານຸປັດສະນາ ໜຶ່ງ ປະຕິນິດສັກຄານຸປັດສະນາ ໜຶ່ງ ຂະຍານຸປັດສະນາ (ການພິຈາລະນາເຫັນຄວາມສິ້ນໄປ) ໜຶ່ງ ວະຍານຸປັດສະນາ (ການພິຈາລະນາເຫັນຄວາມເສື່ອມໄປ) ໜຶ່ງ ວິປະຣິນາມານຸປັດສະນາ (ການພິຈາລະນາເຫັນຄວາມຜັນປ່ຽນ) ໜຶ່ງ ອະນິມິດຕານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ມີນິມິດ) ໜຶ່ງ ອັບປະນິຫິຕານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ມີບ່ອນຕັ້ງ) ໜຶ່ງ ສູນຍະຕານຸປັດສະນາ (ການພິຈາລະນາເຫັນຄວາມວ່າງ) ໜຶ່ງ ອະທິປັນຍາທຳມະວິປັດສະນາ (ການພິຈາລະນາເຫັນທຳດ້ວຍປັນຍາອັນຍິ່ງ) ໜຶ່ງ ຍະຖາພູຕະຍານະທັດສະນະ (ການຮູ້ເຫັນຕາມຄວາມເປັນຈິງ) ໜຶ່ງ ອາທີນະວານຸປັດສະນາ (ການພິຈາລະນາເຫັນໂທດ) ໜຶ່ງ ປະຕິສັງຂານຸປັດສະນາ (ການຕາມພິຈາລະນາ) ໜຶ່ງ ວິວັດຕະນານຸປັດສະນາ (ການພິຈາລະນາເຫັນອຸບາຍທີ່ຈະຫຼີກໄປ) ຄວນຮູ້ຍິ່ງ

[໑໗] ໂສດາປັດຕິມັກຄວນຮູ້ຍິ່ງ ໂສດາປັດຕິຜົນສະມາບັດ ໜຶ່ງ ສະກະທາຄາມິມັກ ໜຶ່ງ ສະກະທາຄາມິຜົນສະມາບັດ ໜຶ່ງ ອະນາຄາມິມັກ ໜຶ່ງ ອະນາຄາມິຜົນສະມາບັດ ໜຶ່ງ ອະຣະຫັດຕະມັກ ໜຶ່ງ ອະຣະຫັດຕະຜົນສະມາບັດຄວນຮູ້ຍິ່ງ

ຊື່ວ່າສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອຄວນຮູ້ຍິ່ງ ຊື່ວ່າວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ໜຶ່ງ ຊື່ວ່າສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ໜຶ່ງ ຊື່ວ່າສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໜຶ່ງ ຊື່ວ່າປັນຍິນຊີ ຍ້ອນມີສະພາວະເຫັນຄວນຮູ້ຍິ່ງ

ຊື່ວ່າສັດທາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາຄວນຮູ້ຍິ່ງ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ໜຶ່ງ ຊື່ວ່າສະຕິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ໜຶ່ງ ຊື່ວ່າສະມາທິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອຸດທັດຈະ ໜຶ່ງ ຊື່ວ່າປັນຍາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວເພາະອະວິດຊາຄວນຮູ້ຍິ່ງ

ຊື່ວ່າສະຕິສຳໂພດຊົງ ຍ້ອນມີສະພາວະຕັ້ງໝັ້ນຄວນຮູ້ຍິ່ງ ຊື່ວ່າທຳມະວິຈະຍະ ສຳໂພດຊົງ ຍ້ອນມີສະພາວະເລືອກເຟັ້ນທຳ ໜຶ່ງ ຊື່ວ່າວິຣິຍະສຳໂພດຊົງ ຍ້ອນມີສະພາວະປະຄອງໄວ້

ຯລຯ ຊື່ວ່າປີຕິສຳໂພດຊົງ ຍ້ອນມີສະພາວະແຜ່ໄປ ຯລຯ ຊື່ວ່າປັດສັດທິ ສຳໂພດຊົງ ຍ້ອນມີສະພາວະສະງົບ ຯລຯ ຊື່ວ່າສະມາທິສຳໂພດຊົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຯລຯ ຊື່ວ່າອຸເປກຂາສຳໂພດຊົງ ຍ້ອນມີສະພາວະພິຈາລະນາຄວນຮູ້ຍິ່ງ

ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນຄວນຮູ້ຍິ່ງ ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຯລຯ ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດ ຯລຯ ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຯລຯ ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຯລຯ ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຯລຯ ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຯລຯ ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານຄວນຮູ້ຍິ່ງ

ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ຄວນຮູ້ຍິ່ງ ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ຯລຯ ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກ ຯລຯ ຊື່ວ່າມັກ ຍ້ອນມີສະພາວະເປັນເຫດ ຯລຯ ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ຯລຯ ຊື່ວ່າສຳມັບປະທານ ຍ້ອນມີສະພາວະດຳຣົງໄວ້ ຯລຯ ຊື່ວ່າອິດທິບາດ ຍ້ອນມີສະພາວະສຳເລັດ ຯລຯ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ຯລຯ ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຯລຯ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ຯລຯ ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາ ວະມີຣົດເປັນແນວດຽວກັນ ຯລຯ ຊື່ວ່າທຳທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນຄວນຮູ້ຍິ່ງ

ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມຄວນຮູ້ຍິ່ງ ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຯລຯ ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ຯລຯ ຊື່ວ່າວິໂມກ ຍ້ອນມີສະພາວະລຸດພົ້ນ ຯລຯ ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ ຯລຯ ຊື່ວ່າວິມຸດຕິ ຍ້ອນມີສະພາວະສະລະ ຯລຯ ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ຯລຯ ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະສະງົບຣະງັບຄວນຮູ້ຍິ່ງ

[໔໐] ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນຄວນຮູ້ຍິ່ງ ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ຯລຯ ຊື່ວ່າຜັດສະ ຍ້ອນມີສະພາວະປະມວນມາ ຯລຯ ຊື່ວ່າເວທະນາ ຍ້ອນມີສະພາວະປະຊຸມ ຯລຯ ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ຯລຯ ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ຯລຯ ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ຯລຯ ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ຯລຯ ຊື່ວ່າທຳທີ່ຢັ່ງລົງສູ່ອຳມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດຄວນຮູ້ຍິ່ງ

ທຳໃດ ໆ ທີ່ຮູ້ຍິ່ງແລ້ວ ທຳນັ້ນ ໆ ກໍເປັນອັນຮູ້ແລ້ວ ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນແນວນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່

ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຮູ້ຍິ່ງ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (ຍານໃນການຊົງຈຳທຳທີ່ໄດ້ສະດັບມາ) (໑)

**ທຸຕິຍະພານະວານ ຈົບ**

[໔໑] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນກຳນົດຮູ້ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື

ທຳ ໑ ຢ່າງທີ່ຄວນກຳນົດຮູ້ ຄື ຜັດສະເຊິ່ງມີອາສະວະເປັນບ່ອນຕັ້ງແຫ່ງອຸປາທານ
ທຳ ໒ ຢ່າງທີ່ຄວນກຳນົດຮູ້ ຄື ນາມ ໑ ຮູບ ໑
ທຳ ໓ ຢ່າງທີ່ຄວນກຳນົດຮູ້ ຄື ເວທະນາ ໓
ທຳ ໔ ຢ່າງທີ່ຄວນກຳນົດຮູ້ ຄື ອາຫານ ໔
ທຳ ໕ ຢ່າງທີ່ຄວນກຳນົດຮູ້ ຄື ອຸປາທານຂັນ ໕
ທຳ ໖ ຢ່າງທີ່ຄວນກຳນົດຮູ້ ຄື ອາຍະຕະນະພາຍໃນ ໖
ທຳ ໗ ຢ່າງທີ່ຄວນກຳນົດຮູ້ ຄື ວິນຍານຖິຕິ ໗
ທຳ ໘ ຢ່າງທີ່ຄວນກຳນົດຮູ້ ຄື ໂລກະທຳ ໘
ທຳ ໙ ຢ່າງທີ່ຄວນກຳນົດຮູ້ ຄື ສັດຕາວາດ ໙
ທຳ ໑໐ ຢ່າງທີ່ຄວນກຳນົດຮູ້ ຄື ອາຍະຕະນະ ໑໐

ພິກຂຸທັງຫຼາຍ ສິ່ງທັງປວງຄວນກຳນົດຮູ້ ສິ່ງທັງປວງທີ່ຄວນກຳນົດຮູ້ ຄື ອັນໃດ?

ຄື ຈັກຂຸຄວນກຳນົດຮູ້ ຮູບຄວນກຳນົດຮູ້ ຈັກຂຸວິນຍານຄວນກຳນົດຮູ້ ຈັກຂຸສຳຜັດຄວນກຳນົດຮູ້ ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາທີ່ເກີດຂຶ້ນຍ້ອນຈັກຂຸສຳຜັດເປັນປັດໄຈຄວນກຳນົດຮູ້

ໂສຕະຄວນກຳນົດຮູ້ ສັດທະ ຯລຯ
ຄານະຄວນກຳນົດຮູ້ ຄັນທະ ຯລຯ
ຊິວຫາຄວນກຳນົດຮູ້ ຣົດ ຯລຯ
ກາຍຄວນກຳນົດຮູ້ ໂຜດຖັບພະ ຯລຯ

ມະໂນຄວນກຳນົດຮູ້ ທຳມາຣົມ ຯລຯ ມະໂນວິນຍານ ຯລຯ ມະໂນສຳຜັດ ຯລຯ ສຸກຂະເວທະນາທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາທີ່ເກີດຂຶ້ນຍ້ອນມະໂນສຳຜັດເປັນປັດໄຈຄວນກຳນົດຮູ້

ຮູບຄວນກຳນົດຮູ້ ເວທະນາຄວນກຳນົດຮູ້ ສັນຍາຄວນກຳນົດຮູ້ ສັງຂານຄວນກຳນົດຮູ້ ວິນຍານຄວນກຳນົດຮູ້

ຈັກຂຸຄວນກຳນົດຮູ້ ຯລຯ ຊະຣາແລະມໍລະນະ ຯລຯ ທຳທີ່ຢັ່ງລົງສູ່ອະມະຕະ ຄື ນິບພານຍ້ອນມີສະພາວະເປັນບ່ອນສຸດຄວນກຳນົດຮູ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ ທຳໃດ ໆ ໄດ້ທຳນັ້ນ ໆ ແລ້ວ ທຳເຫຼົ່ານັ້ນ ເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້

[໘໘] ບຸກຄົນພະຍາຍາມເພື່ອຕ້ອງການໄດ້ເນກຂຳມະ ໄດ້ເນກຂຳມະແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະພະຍາບາດ ໄດ້ອະພະຍາບາດແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອາໂລກະສັນຍາ ໄດ້ອາໂລກະ ສັນຍາແລ້ວທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະວິກເຂປະ ໄດ້ອະວິກເຂປະແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ທຳມະວະວັດຖານ ໄດ້ທຳມະວະວັດຖານແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ຍານ ໄດ້ຍານແລ້ວ ທຳນັ້ນເປັນທຳ ອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ປາມຸດຊະ ໄດ້ປາມຸດຊະແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ປະຖົມຊານ ໄດ້ປະຖົມຊານແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ຈະຕຸດຖະຊານ ໄດ້ຈະຕຸດຖະຊານແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອາກາສານັນຈາຍະຕະນະສະມາບັດ ໄດ້ອາກາສານັນຈາຍະຕະນະສະມາບັດແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ວິນຍານັນຈາຍະຕະນະສະມາບັດ ໄດ້ວິນຍານັນຈາຍະຕະນະສະມາບັດແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອາກິນຈັນຍາຍະຕະນະສະມາບັດ ໄດ້ອາກິນຈັນຍາຍະຕະນະສະມາບັດແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ໄດ້ເນວະສັນຍານາສັນຍາຍະຕະນະສະມາບັດແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະນິດຈານຸປັດສະນາ ໄດ້ອະນິດຈານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ທຸກຂານຸປັດສະນາ ໄດ້ທຸກຂານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນ

ກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະນັດຕານຸປັດສະນາ ໄດ້ອະນັດຕານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ນິບພິທານຸປັດສະນາ ໄດ້ນິບພິທານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ວິຣາຄານຸປັດສະນາ ໄດ້ວິຣາຄານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ນິໂຣທານຸປັດສະນາ ໄດ້ນິໂຣທານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ປະຕິນິດສັກຄານຸປັດສະນາ ໄດ້ປະຕິນິດສັກຄານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ຂະຍານຸປັດສະນາ ໄດ້ຂະຍານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ວະຍານຸປັດສະນາ ໄດ້ວະຍານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ວິປະຣິນາມານຸປັດສະນາ ໄດ້ວິປະຣິນາມານຸປັດສະນາແລ້ວ ທຳນັ້ນ ເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະນິມິດຕານຸປັດສະນາ ໄດ້ອະນິມິດຕານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອັບປະນິຫິຕານຸປັດສະນາ ໄດ້ອັບປະນິຫິຕານຸປັດສະນາແລ້ວ ທຳນັ້ນເປັນ ທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ສູນຍະຕານຸປັດສະນາ ໄດ້ສູນຍະຕານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະທິປັນຍາທຳມະວິປັດສະນາ ໄດ້ອະທິປັນຍາທຳມະວິປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາ ແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ຍະຖາພູຕະຍານທັດສະນະ ໄດ້ຍະຖາພູຕະຍານທັດສະນະແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອາທີນະວານຸປັດສະນາ ໄດ້ອາທີນະວານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ ປະຕິສັງຂານຸປັດສະນາ ໄດ້ປະຕິສັງຂານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ວິວັດຕະນານຸປັດສະນາ ໄດ້ວິວັດຕະນານຸປັດສະນາແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້

ບຸກຄົນພະຍາຍາມເພື່ອຕ້ອງການໄດ້ໂສດາປັດຕິມັກ ໄດ້ໂສດາປັດຕິມັກແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ສະກະທາຄາມິມັກ ໄດ້ສະກະທາຄາມິມັກແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະນາຄາມິມັກ ໄດ້ອະນາຄາມິມັກແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ອະຣະຫັດຕະມັກ ໄດ້ອະຣະຫັດຕະມັກແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາແລ້ວແນວນີ້ ບຸກຄົນພະຍາຍາມເພື່ອຕ້ອງການໄດ້ທຳໃດ ໆ ໄດ້ທຳນັ້ນ ໆ ແລ້ວ ທຳນັ້ນເປັນທຳອັນບຸກຄົນນັ້ນກຳນົດຮູ້ແລະພິຈາລະນາ ແລ້ວແນວນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນກຳນົດຮູ້ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໒)

[໒໓] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນລະ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື

ທຳ ໑ ຢ່າງທີ່ຄວນລະ ຄື ອັດສະມິມານະ
ທຳ ໒ ຢ່າງທີ່ຄວນລະ ຄື ອະວິດຊາ ໑ ພະວະຕັນຫາ ໑
ທຳ ໓ ຢ່າງທີ່ຄວນລະ ຄື ຕັນຫາ ໓
ທຳ ໔ ຢ່າງທີ່ຄວນລະ ຄື ໂອຄະ ໔
ທຳ ໕ ຢ່າງທີ່ຄວນລະ ຄື ນິວອນ ໕
ທຳ ໖ ຢ່າງທີ່ຄວນລະ ຄື ຕັນຫາ ໖
ທຳ ໗ ຢ່າງທີ່ຄວນລະ ຄື ອະນຸໄສ ໗
ທຳ ໘ ຢ່າງທີ່ຄວນລະ ຄື ມິດສັດຕະ ໘
ທຳ ໙ ຢ່າງທີ່ຄວນລະ ຄື ທຳທີ່ມີຕັນຫາເປັນມູນ ໙
ທຳ ໑໐ ຢ່າງທີ່ຄວນລະ ຄື ມິດສັດຕະ ໑໐

[໒໔] ປະຫານ ໒ ຄື

໑. ສະມຸດເສດປະຫານ (ການລະດ້ວຍການຕັດຂາດ)
໒. ປະຕິປັດສັດທິປະຫານ (ການລະດ້ວຍສະງົບຣະງັບ)

ສະມຸດເສດປະຫານເຊິ່ງເປັນໂລກຸດຕະຣະມັກ ແລະປະຕິປັດສັດທິປະຫານເຊິ່ງເປັນໂລກຸດຕະຣະຜົນ ໃນຂະນະແຫ່ງຜົນ ຍ່ອມມີແກ່ບຸກຄົນຜູ້ຈະເລີນມັກທີ່ໃຫ້ເຖິງຄວາມສິ້ນໄປ

ປະຫານ ໓ ຄື

໑. ເນກຂໍາມະປະຫານະ ເປັນເຄື່ອງສະລັດອອກຈາກກາມ
໒. ອະຣູບຊານ ເປັນເຄື່ອງສະລັດອອກຈາກຣູບຊານ
໓. ນິໂຣດ ເປັນເຄື່ອງສະລັດອອກຈາກສັງຂະຕະທໍາທີ່ເກີດຂຶ້ນແລ້ວເປັນແນວໃດ? ແນວໜຶ່ງ ເຊິ່ງອາໄສກັນແລະກັນເກີດຂຶ້ນ

ບຸກຄົນຜູ້ໄດ້ເນກຂໍາມະຍ່ອມລະ ແລະສະລະກາມໄດ້ ບຸກຄົນຜູ້ໄດ້ອະຣູບຊານຍ່ອມລະ ແລະສະລະຣູບໄດ້ ບຸກຄົນຜູ້ໄດ້ນິໂຣດຍ່ອມລະ ແລະສະລະສັງຂານໄດ້

ປະຫານ ໔ ຄື

໑. ເມື່ອຮູ້ແຈ້ງທຸກຂະສັດດ້ວຍການກໍານົດຮູ້ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້
໒. ເມື່ອຮູ້ແຈ້ງສະມຸທະຍະສັດດ້ວຍການລະ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້
໓. ເມື່ອຮູ້ແຈ້ງນິໂຣດສັດດ້ວຍການເຮັດໃຫ້ແຈ້ງ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້
໔. ເມື່ອຮູ້ແຈ້ງມັກຄະສັດດ້ວຍການຈະເລີນ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້

ປະຫານ ໕ ຄື

໑. ວິກຂໍາພະນະປະຫານ (ການລະດ້ວຍການຂົ່ມໄວ້)
໒. ຕະທັງຄະປະຫານ (ການລະດ້ວຍອົງນັ້ນ ໆ)
໓. ສະມຸດເສດປະຫານ (ການລະດ້ວຍການຕັດຂາດ)
໔. ປະຕິປັດສັດທິປະຫານ (ການລະດ້ວຍສະງົບຣະງັບ)
໕. ນິດສະຣະນະປະຫານ (ການລະດ້ວຍສະລັດອອກໄດ້)

ການລະນິວອນດ້ວຍການຂົ່ມໄວ້ ຍ່ອມມີແກ່ບຸກຄົນຜູ້ຈະເລີນປະຖົມຊານ ການລະທິດຖິສັງໂຍດດ້ວຍອົງນັ້ນ ໆ ຍ່ອມມີແກ່ບຸກຄົນຜູ້ຈະເລີນສະມາທິເຊິ່ງເປັນສ່ວນແຫ່ງການທໍາລາຍກິເລດ ສະມຸດເສດປະຫານະເຊິ່ງເປັນໂລກຸດຕະຣະມັກ ແລະປະຕິປັດສັດທິປະຫານເຊິ່ງເປັນໂລກຸດຕະຣະຜົນ ໃນຂະນະແຫ່ງຜົນ ຍ່ອມມີແກ່ບຸກຄົນຜູ້ຈະເລີນມັກທີ່ໃຫ້ເຖິງຄວາມສິ້ນໄປ ແລະນິດສະຣະນະປະຫານເປັນນິໂຣດ ຄື ພຣະນິບພານ

ພິກຂຸທັງຫຼາຍ ສິ່ງທັງປວງຄວນລະ ສິ່ງທັງປວງທີ່ຄວນລະ ຄືອັນໃດ?

ຄື ຈັກຂຸຄວນລະ ຣູບຄວນລະ ຈັກຂຸວິນຍານຄວນລະ ຈັກຂຸສໍາຜັດຄວນລະ ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາທີ່ເກີດຂຶ້ນຍ້ອນຈັກຂຸສໍາຜັດເປັນປັດໄຈຄວນລະ

ໂສຕະຄວນລະ ສັດທະ ຯລຯ
ຄານະຄວນລະ ຄັນທະ ຯລຯ
ຊິວຫາຄວນລະ ຣົດ ຯລຯ
ກາຍຄວນລະ ໂຜດຖັບພະ ຯລຯ

ມະໂນຄວນລະ ທຳມາຣົມຄວນລະ ມະໂນວິນຍານຄວນລະ ມະໂນສຳຜັດຄວນລະ

ສຸກຂະເວທະນາ ທຸກຂະເວທະນາ ຫຼື ແມ່ນອະທຸກຂະມະສຸຂະເວທະນາທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈ ຄວນລະ

ພຣະໂຍຄາວະຈອນເມື່ອເຫັນຣູບ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້ ເມື່ອເຫັນເວທະນາ ຯລຯ ເມື່ອເຫັນສັນຍາ ຯລຯ ເມື່ອເຫັນສັງຂານ ຯລຯ ເມື່ອເຫັນວິນຍານ (ໂດຍຄວາມເປັນຂອງບໍ່ທ່ຽງເປັນຕົ້ນ) ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ) ໄດ້ ເມື່ອເຫັນຈັກຂຸ ຯລຯ ເມື່ອເຫັນຊະຣາແລະມໍລະນະ ຯລຯ ເມື່ອເຫັນທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ຊື່ວ່າຍ່ອມລະ (ກິເລດທີ່ຄວນລະ)ໄດ້ ທຳໃດ ໆ ທີ່ລະໄດ້ແລ້ວ ທຳນັ້ນ ໆ ເປັນອັນລະໄດ້ແລ້ວ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ ຄວນລະ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໓)

**ຕະຕິຍະພານະວານ ຈົບ**

[໔໕] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຈະເລີນ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື

ທຳ ໑ ຢ່າງທີ່ຄວນຈະເລີນ ຄື ກາຍະຄະຕາສະຕິທີ່ປະກອບດ້ວຍຄວາມສຳຣານ
ທຳ ໒ ຢ່າງທີ່ຄວນຈະເລີນ ຄື ສະມະຖະ ໑ ວິປັດສະນາ ໑
ທຳ ໓ ຢ່າງທີ່ຄວນຈະເລີນ ຄື ສະມາທິ ໓
ທຳ ໔ ຢ່າງທີ່ຄວນຈະເລີນ ຄື ສະຕິປັດຖານ ໔
ທຳ ໕ ຢ່າງທີ່ຄວນຈະເລີນ ຄື ສຳມາສະມາທິອັນມີອົງ ໕
ທຳ ໖ ຢ່າງທີ່ຄວນຈະເລີນ ຄື ອະນຸດສະຕິຖານ (ອະນຸດສະຕິທີ່ເປັນເຫດ) ໖
ທຳ ໗ ຢ່າງທີ່ຄວນຈະເລີນ ຄື ໂພດຊົງ ໗
ທຳ ໘ ຢ່າງທີ່ຄວນຈະເລີນ ຄື ອະຣິຍະມັກມີອົງ ໘
ທຳ ໙ ຢ່າງທີ່ຄວນຈະເລີນ ຄື ປາຣິສຸດທິປະທານີຍັງຄະ ໙
ທຳ ໑໐ ຢ່າງທີ່ຄວນຈະເລີນ ຄື ກະສິນ ໑໐

[໒໕] ພາວະນາ ໒ ຢ່າງ ຄື

໑. ໂລກິຍະພາວະນາ
໒. ໂລກຸດຕະຣະພາວະນາ

ພາວະນາ ໓ ຢ່າງ ຄື

໑. ການຈະເລີນທຳທີ່ເປັນຮູບປາວະຈອນກຸສົນ
໒. ການຈະເລີນທຳທີ່ເປັນອະຮູບປາວະຈອນກຸສົນ
໓. ການຈະເລີນທຳທີ່ເປັນໂລກຸດຕະຣະກຸສົນ

ການຈະເລີນທຳທີ່ເປັນຮູບປາວະຈອນກຸສົນຢ່າງຫຍາບກໍມີ ປານກາງກໍມີ ປະນີດກໍມີ ການຈະເລີນທຳທີ່ເປັນອະຮູບປາວະຈອນກຸສົນຢ່າງຫຍາບກໍມີ ປານກາງກໍມີ ປະນີດກໍມີ ການຈະເລີນທຳທີ່ເປັນໂລກຸດຕະຣະກຸສົນປະນີດຢ່າງດຽວ

[໒ກ] ພາວະນາ ໔ ຢ່າງ ຄື

໑. ເມື່ອຮູ້ແຈ້ງທຸກຂະສັດດ້ວຍການກຳນົດຮູ້ ຊື່ວ່າຈະເລີນ
໒. ເມື່ອຮູ້ແຈ້ງສະມຸທະຍະສັດດ້ວຍການລະ ຊື່ວ່າຈະເລີນ
໓. ເມື່ອຮູ້ແຈ້ງນິໂຣທະສັດດ້ວຍການເຮັດໃຫ້ແຈ້ງ ຊື່ວ່າຈະເລີນ
໔. ເມື່ອຮູ້ແຈ້ງມັກຄະສັດດ້ວຍການຈະເລີນ ຊື່ວ່າຈະເລີນ

ເຫຼົ່ານີ້ ຊື່ວ່າພາວະນາ ໔
ພາວະນາແມ່ນອີກ ໔ ຢ່າງ ຄື

໑. ເອສະນາພາວະນາ
໒. ປະຕິລາພະພາວະນາ
໓. ເອກະຣະສາພາວະນາ
໔. ອາເສວະນາພາວະນາ

ເອສະນາພາວະນາ ເປັນແນວໃດ?

ຄື ເມື່ອພຣະໂຍຄາວະຈອນທັງປວງເຂົ້າສະມາທິຢູ່ ທຳທັງຫຼາຍທີ່ເກີດໃນສ່ວນເບື້ອງຕົ້ນນັ້ນມີຣົດເປັນແນວດຽວກັນ ຍ້ອນແນວນັ້ນ ພາວະນານີ້ຈຶ່ງຊື່ວ່າເອສະນາພາວະນາ

ປະຕິລາພະພາວະນາ ເປັນແນວໃດ?

ຄື ເມື່ອພຣະໂຍຄາວະຈອນທັງປວງເຂົ້າສະມາທິແລ້ວ ທຳທັງຫຼາຍທີ່ເກີດໃນອັບປະນາ ນັ້ນບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ພາວະນານີ້ຈຶ່ງຊື່ວ່າປະຕິລາພະພາວະນາ

ເອກະຣະສາພາວະນາ ເປັນແນວໃດ?

ຄື ເມື່ອພຣະໂຍຄາວະຈອນຈະເລີນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ອິນຊີອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສັດທິນຊີ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ອິນຊີອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງວິຣິຍິນຊີ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ອິນຊີອີກ ໔ ຢ່າງກໍ ມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງສະຕິນຊີ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີ ຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ອິນຊີ ອີກ ໔ ຢ່າງກໍມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງສະມາທິນຊີ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນປັນຍິນຊີ ຍ້ອນມີສະພາວະເຫັນ ອິນຊີອີກ ໔ ຢ່າງ ກໍ ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງປັນຍິນຊີ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີ ຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສັດທາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມ ບໍ່ມີ ສັດທາ ພະລະອີກ ໔ ຢ່າງກໍມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງສັດທາພະລະ ຍ້ອນ ແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າ ພະລະທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນວິຣິຍະພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມ ຂີ້ຄ້ານ ພະລະອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງວິຣິຍະພະລະ ຍ້ອນແນວ ນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າ ພະລະທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະຕິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມ ຜະໝາດ ພະລະອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສະຕິພະລະ ຍ້ອນແນວ ນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າພະລະທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະມາທິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອຸດທັດຈະ ພະລະອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສະມາທິພະລະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າ ພະລະທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນປັນຍາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອະວິດຊາ ພະລະອີກ ໔ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງປັນຍາພະລະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າພະລະທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະຕິສຳໂພດຊົງ ຍ້ອນມີສະພາວະຕັ້ງໝັ້ນ ໂພດຊົງອີກ ໖ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສະຕິສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າ ໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນທຳມະວິຈະຍະສຳໂພດຊົງ ຍ້ອນມີສະພາວະເລືອກເຟັ້ນໂພດຊົງ ອີກ ໖ ຢ່າງກໍມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງທຳມະວິຈະຍະສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນວິຣິຍະສຳໂພດຊົງ ຍ້ອນມີສະພາວະປະຄອງໄວ້ ໂພດຊົງ ອີກ ໖ ຢ່າງກໍມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງວິຣິຍະສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍ ມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນປີຕິສຳໂພດຊົງ ຍ້ອນມີສະພາວະແຜ່ຊ່ານ ໂພດຊົງອີກ ໖ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງປີຕິສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນປັດສັດທິສຳໂພດຊົງ ຍ້ອນມີສະພາວະສະງົບ ໂພດຊົງອີກ ໖ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງປັດສັດທິສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສະມາທິສຳໂພດຊົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໂພດຊົງ ອີກ ໖ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສະມາທິສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນອຸເປກຂາສຳໂພດຊົງ ຍ້ອນມີສະພາວະພິຈາລະນາໂພດຊົງອີກ ໖ ຢ່າງກໍມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງອຸເປກຂາສຳໂພດຊົງ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າໂພດຊົງທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາທິດຖິ ຍ້ອນມີສະພາວະເຫັນອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາທິດຖິ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ອົງມັກ ອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາສັງກັບປະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາວາຈາ ຍ້ອນມີສະພາວະກຳນົດ ອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາວາຈາ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ອົງມັກ ອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນ ດ້ວຍອຳນາດແຫ່ງສຳມາກຳມັນຕະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາອາຊີວະ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາວາຍາມະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາສະຕິ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ

ເມື່ອພຣະໂຍຄາວະຈອນຈະເລີນສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ອົງມັກອື່ນ ໆ ຢ່າງກໍ່ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງສຳມາສະມາທິ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອົງມັກທັງຫຼາຍມີຣົດເປັນແນວດຽວກັນ ພາວະນານີ້ຈຶ່ງຊື່ວ່າເອກະຣະສາພາວະນາ

ອາເສວະນາພາວະນາ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ເຂົ້າສະມາທິໃນເວລາເຊົ້າກໍໄດ້ ກາງເວັນກໍໄດ້ ຄ່ຳກໍໄດ້ ກ່ອນອາຫານກໍໄດ້ ຫຼັງອາຫານກໍໄດ້ ປະຖົມຍາມກໍໄດ້ ມັດຊິມະຍາມກໍໄດ້ ປັດສິມຍາມກໍໄດ້ ຕະຫຼອດຄືນກໍໄດ້ ຕະຫຼອດວັນກໍໄດ້ ຕະຫຼອດຄືນແລະວັນກໍໄດ້ ຕະຫຼອດຂ້າງຂຶ້ນແລະຂ້າງແຮມກໍໄດ້ ຕະຫຼອດລະດູຝົນກໍໄດ້ ລະດູໜາວກໍໄດ້ ລະດູຮ້ອນກໍໄດ້ ຕະຫຼອດປະຖົມໄວກໍໄດ້ ມັດຊິມະໄວກໍໄດ້ ປັດສິມໄວກໍໄດ້ ພາວະນານີ້ຈຶ່ງຊື່ວ່າອາເສວະນາພາວະນາ

ພາວະນາ ๔ ຢ່າງເຫຼົ່ານີ້

[໔໗] ອີກປະການໜຶ່ງ ພາວະນາ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າ ທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ
໒. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນ ບໍ່ລ່ວງເລີຍກັນເປັນແນວໃດ?

ຄື ເມື່ອພຣະໂຍຄາວະຈອນລະກາມສັນທະ (ຄວາມພໍໃຈໃນກາມ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງເນກຂຳມະ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະພະຍາບາດ (ຄວາມຄິດຮ້າຍ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະພະຍາບາດ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະຖີນະມິດທະ (ຄວາມທໍດທູ່) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອາໂລກະສັນຍາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອຸດທັດຈະ (ຄວາມຟຸ້ງຊ່ານ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະວິກເຂປະຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະວິຈິກິດສາ (ຄວາມລັງເລສົງໄສ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງທຳມະວະວັດຖານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອະວິດຊາ (ຄວາມບໍ່ຮູ້ແຈ້ງ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງຍານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອະຣະຕິ (ຄວາມບໍ່ຍິນດີ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງປາມຸດຊະ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະນິວອນທັງຫຼາຍ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງປະຖົມຊານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະວິຕົກແລະວິຈານ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງທຸຕິຍະຊານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະປີຕິ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງຕະຕິຍະຊານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະສຸກແລະທຸກ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງຈະຕຸດຖະຊານ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອພຣະໂຍຄາວະຈອນລະຣູບສັນຍາ (ຄວາມໝາຍຮູ້ຮູບ) ປະຕິຄະສັນຍາ (ຄວາມໝາຍຮູ້ຄວາມກະທົບກະທັ່ງໃນໃຈ) ນານັດຕະສັນຍາ (ຄວາມໝາຍຮູ້ພາວະຕ່າງກັນ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອາກາສານັນຈາຍະຕະນະສະມາບັດ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະອາກາສານັນຈາຍະຕະນະສັນຍາ (ຄວາມໝາຍຮູ້ອາກາສານັນຈາຍະຕະນະ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງວິນຍານັນຈາຍະຕະນະສະມາບັດ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະວິນຍານັນຈາຍະຕະນະສັນຍາ (ຄວາມໝາຍຮູ້ວິນຍານັນຈາຍະຕະນະ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອາກິນຈັນຍາຍະຕະນະສະມາບັດ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອາກິນຈັນຍາຍະຕະນະສັນຍາ (ຄວາມໝາຍຮູ້ອາກິນຈັນຍາຍະຕະນະ) ທຳ ທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອພຣະໂຍຄາວະຈອນລະນິດຈະສັນຍາ (ຄວາມໝາຍຮູ້ວ່າທ່ຽງ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະນິດຈານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະສຸຂະສັນຍາ (ຄວາມໝາຍຮູ້ວ່າເປັນສຸກ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງທຸກຂານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອັດຕະສັນຍາ (ຄວາມໝາຍຮູ້ວ່າອັດຕາ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະນັດຕານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະນັນທິ (ຄວາມຍິນດີ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງນິບພິທານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະຣາຄະ (ຄວາມກຳໜັດ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງວິຣາຄານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະສະມຸໄທ (ເຫດເກີດ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງນິໂຣທານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອາທານະ (ຄວາມຍຶດຖື) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງປະຕິນິດສັກຄານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະຄະນະສັນຍາ (ຄວາມໝາຍຮູ້ວ່າເປັນກ້ອນ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງຂະຍານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອາຍຸນະ (ກຳເປັນເຄື່ອງປະມວນມາ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງວະຍານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະທຸວະສັນຍາ (ຄວາມໝາຍຮູ້ວ່າໝັ້ນຄົງ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງວິປະຣິນາມານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະນິມິດ (ເຄື່ອງໝາຍ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະນິມິດຕານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະປະນິທິ (ຄວາມຕັ້ງໝັ້ນ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອັບປະນິຫິຕານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອະພິນິເວສະ (ຄວາມຍຶດໝັ້ນ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງສູນຍະຕານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະສາຣາທານາພິນິເວສະ (ຄວາມຍຶດໝັ້ນວ່າເປັນແກ່ນສານ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະທິປັນຍາທຳມະວິປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະສຳໂມຫາພິນິເວສະ (ຄວາມຍຶດໝັ້ນຍ້ອນຄວາມຫຼົງ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງຍະຖາພູຕະຍານະທັດສະນະ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອາລະຍາພິນິເວສະ (ຄວາມຍຶດໝັ້ນດ້ວຍຄວາມອາໄລ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອາທີນະວານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະອັບປະຕິສັງຂາ (ການບໍ່ພິຈາລະນາ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງປະຕິສັງຂານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະສັນໂຍຄາພິນິເວສະ (ຄວາມຍຶດໝັ້ນຍ້ອນກິເລດເຄື່ອງປະກອບ) ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງວິວັດຕະນານຸປັດສະນາ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະກິເລດທີ່ຕັ້ງຢູ່ຮ່ວມກັນກັບທິດຖິ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງໂສດາປັດຕິມັກ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ເມື່ອລະກິເລດຢ່າງຫຍາບ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງສະກະທາຄາມິມັກ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະກິເລດຢ່າງລະອຽດ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະນາຄາມິມັກ ຍ່ອມບໍ່ລ່ວງເລີຍກັນແລະກັນ ຯລຯ

ເມື່ອລະກິເລດທັງປວງ ທຳທັງຫຼາຍທີ່ເກີດດ້ວຍອຳນາດແຫ່ງອະຣະຫັດຕະມັກ ຍ່ອມບໍ່ລ່ວງເລີຍກັນແລະກັນ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອລະການສັນທະ ອິນຊີ ໕ ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງເນກຂຳມະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ ເມື່ອລະພະຍາບາດ ອິນຊີ ໕ ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງອະພະຍາບາດ ຯລຯ ເມື່ອລະກິເລດທັງປວງ ອິນຊີ ໕ ມີຣົດເປັນແນວດຽວກັນດ້ວຍອຳນາດແຫ່ງອະຣະຫັດຕະມັກ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນເປັນແນວນີ້

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນ ເຂົ້າໄປ ເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອລະການສັນທະ ຍ່ອມນຳຄວາມພຽນດ້ວຍອຳນາດແຫ່ງເນກຂຳມະເຂົ້າໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນ

แກ่ທຳນັ້ນເຂົ້າໄປ ເມື່ອລະພະຍາບາດຍ່ອມນຳຄວາມພຽນດ້ວຍອຳນາດແຫ່ງອະພະຍາບາດເຂົ້າໄປ ຯລຯ ເມື່ອລະກິເລດທັງປວງ ຍ່ອມນຳຄວາມພຽນດ້ວຍອຳນາດແຫ່ງອະຣະຫັດຕະມັກເຂົ້າໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ ເປັນແນວນີ້

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ ເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມປະຕິບັດເນືອງ ໆ ເຊິ່ງເນກຂຳມະ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ ເມື່ອລະພະຍາບາດຍ່ອມປະຕິບັດເນືອງ ໆ ເຊິ່ງອະພະຍາບາດ ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ ຯລຯ ເມື່ອລະກິເລດທັງປວງ ຍ່ອມປະຕິບັດເນືອງ ໆ ເຊິ່ງອະຣະຫັດຕະມັກ

ຍ້ອນແນວນັ້ນ ຈຶ່ງຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ ເປັນແນວນີ້

ພາວະນາ ໔ ປະການນີ້ ພຣະໂຍຄາວະຈອນເມື່ອເຫັນຮູບ ຊື່ວ່າຈະເລີນຢູ່ ເມື່ອເຫັນເວທະນາ ຯລຯ ເມື່ອເຫັນສັນຍາ ຯລຯ ເມື່ອເຫັນສັງຂານ ຯລຯ ເມື່ອເຫັນວິນຍານ ຯລຯ ເມື່ອເຫັນຈັກຂຸ ຯລຯ ເມື່ອເຫັນຊະຣາແລະມໍລະນະ ຯລຯ ເມື່ອເຫັນທຳທີ່ຢັ່ງລົງສູ່ອະມະຕະ ຄື ນິບພານຍ້ອນມີສະພາວະເປັນບ່ອນສຸດ ຊື່ວ່າຈະເລີນຢູ່ ທຳໃດ ໆ ທີ່ໄດ້ຈະເລີນແລ້ວ ທຳນັ້ນ ໆ ມີຣົດເປັນແນວດຽວກັນ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນຈະເລີນ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ (໔)

**ຈະຕຸດຖະພານະວານ ຈົບ**

[໔໙] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນເຮັດໃຫ້ແຈ້ງ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ ເປັນແນວໃດ? ຄື

ທຳ ໑ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ເຈໂຕວິມຸດຕິທີ່ບໍ່ກຳເຣີບ

ທຳ ໒ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ວິດຊາ ໑ ວິມຸດຕິ ໑

ທຳ ๓ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ວິດຊາ ๓

ທຳ ໔ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ສາມັນຍະຜົນ ໔

ທຳ ໕ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ທຳຂັນ ໕

ທຳ ໖ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ອະພິນຍາ ໖
ທຳ ໗ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ຂີນາສະວະພະລະ ໗
ທຳ ໘ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ວິໂມກ ໘
ທຳ ໙ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ອະນຸປຸບພະນິໂຣດ ໙
ທຳ ໑໐ ຢ່າງທີ່ຄວນເຮັດໃຫ້ແຈ້ງ ຄື ອະເສຂະທຳ ໑໐

ພິກຂຸທັງຫຼາຍ ສິ່ງທັງປວງຄວນເຮັດໃຫ້ແຈ້ງ ສິ່ງທັງປວງທີ່ຄວນເຮັດໃຫ້ແຈ້ງ ຄືອັນໃດ?

ຄື ຈັກຂຸຄວນເຮັດໃຫ້ແຈ້ງ ຮູບຄວນເຮັດໃຫ້ແຈ້ງ ຈັກຂຸວິນຍານຄວນເຮັດໃຫ້ແຈ້ງ ຈັກຂຸສຳຜັດຄວນເຮັດໃຫ້ແຈ້ງ ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາທີ່ເກີດຂື້ນຍ້ອນຈັກຂຸສຳຜັດເປັນປັດໄຈຄວນເຮັດໃຫ້ແຈ້ງ

ໂສຕະຄວນເຮັດໃຫ້ແຈ້ງ ສັດທະ ฯลฯ
ຄານະຄວນເຮັດໃຫ້ແຈ້ງ ຄັນທະ ฯลฯ
ຊິວຫາຄວນເຮັດໃຫ້ແຈ້ງ ຣົດ ฯลฯ
ກາຍຄວນເຮັດໃຫ້ແຈ້ງ ໂຜດຖັບພະ ฯลฯ

ມະໂນຄວນເຮັດໃຫ້ແຈ້ງ ທຳມາຣົມຄວນເຮັດໃຫ້ແຈ້ງ ມະໂນວິນຍານຄວນເຮັດ ໃຫ້ແຈ້ງ

ມະໂນສຳຜັດຄວນເຮັດໃຫ້ແຈ້ງ ສຸກຂະເວທະນາ ທຸກຂະເວທະນາ ຫຼື ອະທຸກຂະມະສຸກຂະເວທະນາທີ່ເກີດຂື້ນຍ້ອນມະໂນສຳຜັດເປັນປັດໄຈຄວນເຮັດໃຫ້ແຈ້ງ

ພຣະໂຍຄາວະຈອນເມື່ອເຫັນຮູບ ຊື່ວ່າຍ່ອມເຮັດໃຫ້ແຈ້ງ (ດ້ວຍການເຮັດໃຫ້ເປັນອາລົມ) ເມື່ອເຫັນເວທະນາ ฯลฯ ເມື່ອເຫັນສັນຍາ ฯลฯ ເມື່ອເຫັນສັງຂານ ฯลฯ ເມື່ອເຫັນວິນຍານ ฯลฯ ເມື່ອເຫັນຈັກຂຸ ฯลฯ ເມື່ອເຫັນຊະຣາແລະມໍລະນະ ฯลฯ ເມື່ອເຫັນທຳທີ່ຢັ່ງລົງສູ່ອະມະຕະ ຄື ນິບພານ ຍ້ອນມີສະພາວະເປັນບ່ອນສຸດ ຊື່ວ່າຍ່ອມເຮັດໃຫ້ແຈ້ງ (ດ້ວຍການເຮັດໃຫ້ເປັນອາລົມ) ທຳໃດ ໆ ທີ່ເຮັດໃຫ້ແຈ້ງແລ້ວ ທຳນັ້ນ ໆ ເປັນທຳທີ່ຖືກຕ້ອງແລ້ວ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ຄວນເຮັດໃຫ້ແຈ້ງ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໕)

[໖໐] ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນສ່ວນແຫ່ງຄວາມເສື່ອມ ທຳເຫຼົ່ານີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ທຳເຫຼົ່ານີ້ເປັນສ່ວນແຫ່ງຄຸນວິເສດ ທຳເຫຼົ່ານີ້ເປັນສ່ວນແຫ່ງການທຳລາຍກິເລດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ ເປັນແນວໃດ?

ຄື ພຣະໂຍຄາວະຈອນຜູ້ໄດ້ປະຖົມຊານ ມີສັນຍາ (ຄວາມໝາຍຮູ້) ແລະມະນະສິການ (ການເຮັດໄວ້ໃນໃຈ) ທີ່ປະກອບດ້ວຍກາມເກີດຂື້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່

ເປັນທຳສົມຄວນແກ່ປະຖົມຊານນັ້ນຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາແລະ ມະນະສິການທີ່ບໍ່ປະກອບດ້ວຍວິຕົກເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາແລະມະນະສິການທີ່ປະກອບດ້ວຍນິບພິທາ (ຄວາມເບື່ອໜ່າຍ) (ແລະ) ວິຣາຄະ (ຄວາມຄາຍກຳໜັດ) ເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ທຸຕິຍະຊານ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍວິຕົກເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳສົມຄວນແກ່ທຸຕິຍະຊານນັ້ນຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍອຸເປກຂາແລະສຸກເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ຕະຕິຍະຊານ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍປີຕິແລະສຸກ ເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳສົມຄວນແກ່ຕະຕິຍະຊານນັ້ນ ຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາ ແລະມະນະສິການທີ່ປະກອບ ດ້ວຍອະທຸກຂະມະສຸຂະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ຈະຕຸດຖະຊານ ມີສັນຍາແລະມະນະສິການທີ່ປະກອບດ້ວຍອຸເປກຂາ ເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳສົມຄວນແກ່ຈະຕຸດຖະຊານນັ້ນ ຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍ ອາກາສານັນຈາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ອາກາສານັນຈາຍະຕະນະຊານ ມີສັນຍາແລະມະນະສິການທີ່ປະກອບ ດ້ວຍຮູບເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳສົມຄວນແກ່ ອາກາສານັນຈາຍະຕະນະຊານນັ້ນຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາແລະມະນະສິການທີ່ປະກອບດ້ວຍວິນຍານັນຈາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ວິນຍານັນຈາຍະຕະນະຊານ ມີສັນຍາແລະມະນະສິການທີ່ປະກອບດ້ວຍອາກາສານັນຈາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳສົມຄວນແກ່ວິນຍານັນຈາຍະຕະນະຊານນັ້ນຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍອາກິນຈັນຍາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນ

ແຫ່ງຄຸນວິເສດ ມີສັນຍາແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ພຣະໂຍຄາວະຈອນຜູ້ໄດ້ອາກິນຈັນຍາຍະຕະນະຊານ ມີສັນຍາ ແລະມະນະສິການທີ່ປະກອບ ດ້ວຍວິນຍານັນຈາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄວາມເສື່ອມ ມີສະຕິທີ່ເປັນທຳ ສົມຄວນແກ່ອາກິນຈັນຍາຍະຕະນະຊານນັ້ນຕັ້ງຢູ່ ທຳນີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ມີສັນຍາ ແລະມະນະສິການທີ່ປະກອບດ້ວຍເນວະສັນຍານາສັນຍາຍະຕະນະຊານເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງຄຸນວິເສດ ມີສັນຍາແລະມະນະສິການທີ່ປະກອບດ້ວຍນິບພິທາ (ແລະ) ວິຣາຄະເກີດຂຶ້ນ ທຳນີ້ເປັນສ່ວນແຫ່ງການທຳລາຍກິເລດ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ທຳເຫຼົ່ານີ້ເປັນສ່ວນແຫ່ງຄວາມເສື່ອມ ທຳເຫຼົ່ານີ້ເປັນສ່ວນແຫ່ງຄວາມຕັ້ງຢູ່ ທຳເຫຼົ່ານີ້ເປັນສ່ວນແຫ່ງຄຸນວິເສດ ທຳເຫຼົ່ານີ້ເປັນສ່ວນແຫ່ງການທຳລາຍກິເລດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໔ ໗)

[໓໑] ການຊົງຈຳທຳທີ່ໄດ້ສະດັບມາວ່າ ສັງຂານທັງປວງບໍ່ທ່ຽງ ສັງຂານທັງປວງເປັນທຸກ ທຳທັງປວງເປັນອະນັດຕາ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ ເປັນແນວໃດ?

ຄື ການຊົງຈຳທຳທີ່ໄດ້ສະດັບມາວ່າ ຮູບບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ເປັນທຸກ ຍ້ອນມີສະພາວະເປັນໄພ ເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານ ປັນຍາ ຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ

ການຊົງຈຳທຳທີ່ໄດ້ສະດັບມາວ່າ ເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ການຊົງຈຳທຳທີ່ໄດ້ສະດັບມາວ່າ ຊະຣາແລະມໍຣະນະບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ເປັນທຸກ ຍ້ອນມີສະພາວະເປັນໄພ ເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າສຸຕະມະຍະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ສັງຂານທັງປວງບໍ່ທ່ຽງ ສັງຂານທັງປວງເປັນທຸກ ທຳທັງປວງເປັນອະນັດຕາ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ (໓ ໑໘)

[໓໘] ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະອະຣິຍະສັດ ນີ້ທຸກຂະສະມຸທະຍະອະຣິຍະສັດ ນີ້ທຸກຂະນິໂຣທະອະຣິຍະສັດ ນີ້ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ ເປັນແນວໃດ?

[໓໓] ບັນດາອະຣິຍະສັດ ໔ ນັ້ນ ທຸກຂະອະຣິຍະສັດ ເປັນແນວໃດ?

ຄື ຊາດເປັນທຸກ ຊະຣາເປັນທຸກ ມໍຣະນະເປັນທຸກ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດເປັນທຸກ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ການບໍ່ໄດ້ສິ່ງທີ່ຕ້ອງການເປັນທຸກ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ

ບັນດາທຸກຂະອະຣິຍະສັດນັ້ນ ຊາດ ເປັນແນວໃດ?

ຄື ຄວາມເກີດ ຄວາມເກີດພ້ອມ ຄວາມຢັ່ງລົງ ຄວາມບັງເກີດ ຄວາມບັງເກີດ ສະເພາະ ຄວາມຜາກົດແຫ່ງຂັນ ຄວາມໄດ້ອາຍະຕະນະໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊາດ

ບັນດາທຸກຂະອະຣິຍະສັດນັ້ນ ຊະຣາ ເປັນແນວໃດ?

ຄື ຄວາມແກ່ ຄວາມເຖົ້າ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວຍານ ຄວາມເສື່ອມອາຍຸ ຄວາມແກ່ຫງ່ອມແຫ່ງອິນຊີ ໃນໝູ່ສັດນັ້ນ ໆ ຂອງເຫຼົ່າສັດນັ້ນ ໆ ນີ້ຮຽກວ່າ ຊະຣາ

ບັນດາທຸກຂະອະຣິຍະສັດນັ້ນ ມໍລະນະ ເປັນແນວໃດ?

ຄື ຄວາມຈຸຕິ ຄວາມເຄື່ອນໄປ ຄວາມທຳລາຍໄປ ຄວາມຫາຍໄປ ຄວາມຕາຍກ່າວຄື ຄວາມຕາຍ ການກະທຳກາລະ ຄວາມແຕກແຫ່ງຂັນ ຄວາມປະຖິ້ມຮ່າງກາຍ ຄວາມຂາດສູນແຫ່ງຊີວິຕິນຊີ ຂອງເຫຼົ່າສັດນັ້ນ ໆ ຈາກໝູ່ສັດນັ້ນ ໆ ນີ້ຮຽກວ່າ ມໍລະນະ

ບັນດາທຸກຂະອະຣິຍະສັດນັ້ນ ໂສກະ ເປັນແນວໃດ?

ຄື ຄວາມເສົ້າໂສກ ກິຣິຍາທີ່ເສົ້າໂສກ ພາວະທີ່ເສົ້າໂສກ ຄວາມແຫ້ງຜາກພາຍໃນ ຄວາມແຫ້ງກອບພາຍໃນ ຄວາມແຫ້ງໃຈ ຄວາມໂທມະນັດ ລູກສອນຄືຄວາມເສົ້າໂສກ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວກັບໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທິບ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ໂສກະ

ບັນດາທຸກຂະອະຣິຍະສັດນັ້ນ ປະຣິເທວະ ເປັນແນວໃດ?

ຄື ຄວາມຮ້ອງໄຫ້ ຄວາມຄ່ຳຄວນ ກິຣິຍາທີ່ຮ້ອງໄຫ້ ກິຣິຍາທີ່ຄ່ຳຄວນ ພາວະທີ່ຮ້ອງໄຫ້ ພາວະທີ່ຄ່ຳຄວນ ຄວາມຈົ່ມເຖິງ ຄວາມພ່ຳເພີ້ ຄວາມຮ້ອງໄຫ້ ຄວາມພິໄຣລຳພັນ ກິຣິຍາທີ່ພິໄຣລຳພັນ ພາວະທີ່ພິໄຣລຳພັນ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວກັບໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທົບຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ປະຣິເທວະ

ບັນດາທຸກຂະອະຣິຍະສັດນັ້ນ ທຸກ ເປັນແນວໃດ?

ຄື ຄວາມບໍ່ສຳຣານທາງກາຍ ຄວາມທຸກທາງກາຍ ຄວາມສະເຫວີຍອາລົມທີ່ບໍ່ສຳຣານ ເປັນທຸກ ອັນເກີດຈາກກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສຳຣານ ເປັນທຸກ ອັນເກີດຈາກກາຍສຳຜັດ ນີ້ຮຽກວ່າ ທຸກ

ບັນດາທຸກຂະອະຣິຍະສັດນັ້ນ ໂທມະນັດ ເປັນແນວໃດ?

ຄື ຄວາມບໍ່ສຳຣານ ຄວາມບໍ່ສຳຣານໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມ ທີ່ບໍ່ສຳຣານ ເປັນທຸກ ອັນເກີດຈາກເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສຳຣານ ເປັນທຸກ ອັນເກີດຈາກເຈໂຕສຳຜັດ ນີ້ຮຽກວ່າ ຄວາມທຸກໃຈ

ບັນດາທຸກຂະອະຣິຍະສັດນັ້ນ ອຸປາຍາດ ເປັນແນວໃດ?

ຄື ຄວາມແຄ້ນ ຄວາມຄັບແຄ້ນ ພາວະທີ່ແຄ້ນ ພາວະທີ່ເຄືອງ ພາວະທີ່ຄັບແຄ້ນ ພາວະທີ່ແຄ້ນເຄືອງ ຂອງຜູ້ທີ່ຖືກຄວາມເສື່ອມຍາດ ຄວາມເສື່ອມໂພຄະຊັບ ຄວາມເສື່ອມກ່ຽວກັບໂຣກ ຄວາມເສື່ອມສີນ ຫຼື ຄວາມເສື່ອມທິດຖິກະທົບ ຂອງຜູ້ທີ່ປະກອບດ້ວຍຄວາມເສື່ອມແນວໃດແນວໜຶ່ງ (ຫຼື) ຜູ້ທີ່ຖືກເຫດແຫ່ງທຸກແນວໃດແນວໜຶ່ງກະທົບ ນີ້ຮຽກວ່າ ອຸປາຍາດ

ບັນດາທຸກຂະອະຣິຍະສັດນັ້ນ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ ເປັນແນວໃດ?

ຄື ການໄປຮ່ວມ ການມາຮ່ວມ ການປະຊຸມຮ່ວມ ການຢູ່ຮ່ວມກັບອາລົມອັນບໍ່ເປັນທີ່ປາຖະໜາ ບໍ່ເປັນທີ່ຮັກແພງ ບໍ່ເປັນທີ່ພໍໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຫຼື ຈາກບຸກຄົນຜູ້ປາຖະໜາແຕ່ສິ່ງທີ່ບໍ່ແມ່ນປະໂຫຍດ ປາຖະໜາແຕ່ສິ່ງທີ່ບໍ່ເກື້ອກູນ ປາຖະໜາແຕ່ສິ່ງທີ່ບໍ່ຜາສຸກ ບໍ່ປາຖະໜາຄວາມລຸດພົ້ນຈາກໂຍຄະຂອງເຂົາ ນີ້ຮຽກວ່າ ການປະສົບກັບອາລົມອັນບໍ່ເປັນທີ່ຮັກເປັນທຸກ

ບັນດາທຸກຂະອະຣິຍະສັດນັ້ນ ການພັດພາກຈາກອາລົມອັນເປັນທີ່ຮັກເປັນທຸກ ເປັນແນວໃດ?

ຄື ການບໍ່ໄປຮ່ວມ ການບໍ່ມາຮ່ວມ ການບໍ່ປະຊຸມຮ່ວມ ການບໍ່ຢູ່ຮ່ວມກັບອາລົມອັນເປັນທີ່ປາຖະໜາເປັນທີ່ຮັກແພງຊອບໃຈຂອງເຂົາໃນໂລກນີ້ ເຊັ່ນ ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ຫຼື ຈາກບຸກຄົນຜູ້ທີ່ມຸ້ງປະໂຫຍດ ມຸ້ງຄວາມເກື້ອກູນ ມຸ້ງຄວາມຜາສຸກ ມຸ້ງຄວາມກະເສມຈາກໂຍຄະຂອງເຂົາ ເຊັ່ນ ມານດາ ບິດາ ອ້າຍ ນ້ອງຊາຍ ເອື້ອຍ ນ້ອງສາວ ມິດ ອຳມາດ ຍາດ ຫຼື ສາໂລຫິດ ນີ້ຮຽກວ່າ ການພັດພາກຈາກອາລົມອັນເປັນທີ່ຮັກ ເປັນທຸກ

ບັນດາທຸກຂະອະຣິຍະສັດນັ້ນ ການບໍ່ໄດ້ອາລົມທີ່ປາຖະໜາເປັນທຸກ ເປັນແນວໃດ?

ຄື ເຫຼົ່າສັດຜູ້ມີຄວາມເກີດເປັນທຳມະດາ ເກີດຄວາມປາຖະໜາຂຶ້ນແນວນີ້ວ່າ ແນວໃດກໍດີ ຂໍເຮົາຢ່າໄດ້ມີຄວາມເກີດເປັນທຳມະດາ ຫຼື ຂໍຄວາມເກີດຢ່າໄດ້ມາເຖິງເຮົາເລີຍ ຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ອາລົມທີ່ ປາຖະໜາເປັນທຸກ ເຫຼົ່າສັດຜູ້ມີຄວາມແກ່ເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມເຈັບໄຂ້ເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມຕາຍເປັນທຳມະດາ ຯລຯ ເຫຼົ່າສັດຜູ້ມີຄວາມເສົ້າໂສກ ຄວາມລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນເປັນທຳມະດາ ຕ່າງກໍເກີດ ຄວາມປາຖະໜາຂຶ້ນແນວນີ້ວ່າ ແນວໃດກໍດີ ຂໍເຮົາຢ່າໄດ້ເປັນຜູ້ມີຄວາມເສົ້າໂສກ ຄວາມລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນເປັນທຳມະດາເລີຍຂໍຄວາມເສົ້າໂສກ ຄວາມລຳພັນ ຄວາມທຸກ ຄວາມໂທມະນັດ ແລະຄວາມຄັບແຄ້ນ ຢ່າໄດ້ມາເຖິງເຮົາເລີຍ ຂໍ້ນີ້ບໍ່ເພິ່ງສຳເລັດໄດ້ຕາມຄວາມປາຖະໜາ ນີ້ຮຽກວ່າ ການບໍ່ໄດ້ອາລົມທີ່ປາຖະໜາເປັນທຸກ

ບັນດາທຸກຂະອະຣິຍະສັດນັ້ນ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ ເປັນແນວໃດ? ຄື

໑. ຣູປູປາທານະຂັນ (ອຸປາທານຂັນ ຄື ຣູບ)
໒. ເວທະນູປາທານະຂັນ (ອຸປາທານຂັນ ຄື ເວທະນາ)
໓. ສັນຍູປາທານະຂັນ (ອຸປາທານຂັນ ຄື ສັນຍາ)
໔. ສັງຂາຣູປາທານະຂັນ (ອຸປາທານຂັນ ຄື ວິນຍານ)
໕. ວິນຍານູປາທານະຂັນ (ອຸປາທານຂັນ ຄື ອະວິນຍານ)

ເຫຼົ່ານີ້ຮຽກວ່າ ໂດຍຫຍໍ້ ອຸປາທານຂັນ ໕ ເປັນທຸກ
ນີ້ຮຽກວ່າ ທຸກຂະອະຣິຍະສັດ

[໓໔] ບັນດາອະຣິຍະສັດ ໔ ນັ້ນ ທຸກຂະສະມຸທະຍະອະຣິຍະສັດ ເປັນແນວໃດ?

ຄື ຕັນຫາອັນເຮັດໃຫ້ເກີດອີກປະກອບດ້ວຍຄວາມເພີດເພີນແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ການຕັນຫາ (ຄວາມທະຍານຢາກໃນການ) ພະວະຕັນຫາ (ຄວາມທະຍານຢາກໃນພົບ) ວິພະວະຕັນຫາ (ຄວາມທະຍານຢາກໃນວິພົບ)

ກໍຕັນຫານີ້ ເມື່ອເກີດ ເກີດບ່ອນໃດ ເມື່ອຕັ້ງຢູ່ ຕັ້ງຢູ່ບ່ອນໃດ?

ຄື ປິຍະຣູບສາຕະຣູບເປັນສະພາວະທີ່ມີຢູ່ໃນໂລກ ຕັນຫານີ້ເມື່ອເກີດ ກໍເກີດທີ່ປິຍະຣູບສາຕະຣູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ປິຍະຣູບສາຕະຣູບນີ້

ກໍອັນໃດເປັນປິຍະຣູບສາຕະຣູບໃນໂລກ?

ຄື ຈັກຂຸເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອເກີດ ກໍເກີດທີ່ຈັກຂຸນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຈັກຂຸນີ້ ໂສຕະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຄານະເປັນປິຍະຣູບສາຕະຣູບໃນ

ໂລກ ຯລຯ ຊິວຫາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ກາຍເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອເກີດ ກໍເກີດທີ່ມະໂນນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ ມະໂນນີ້

ຣູບເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອເກີດ ກໍເກີດທີ່ຣູບນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ຣູບນີ້ ສັດທະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມາຣົມເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຈັກຂຸວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນວິນຍານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຈັກຂຸສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນສຳຜັດເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຈັກຂຸສຳຜັດສະຊາເວທະນາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ມະໂນສຳຜັດສະຊາເວທະນາເປັນ ປິຍະຣູບສາຕະຣູບໃນໂລກ ຯລຯ ຣູບສັນຍາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະສັນຍາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຣູບສັນເຈຕະນາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະສັນເຈຕະນາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຣູບຕັນຫາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະຕັນຫາເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຣູບວິຕົກເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະວິຕົກເປັນປິຍະຣູບສາຕະຣູບໃນໂລກ ຯລຯ ຣູປະວິຈານເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະວິຈານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອເກີດ ກໍເກີດທີ່ທຳມະວິຈານນີ້ ເມື່ອຕັ້ງຢູ່ ກໍຕັ້ງຢູ່ທີ່ທຳມະວິຈານນີ້

ນີ້ຮຽກວ່າ ທຸກຂະສະມຸທະຍະອະຣິຍະສັດ

[໓໘] ບັນດາອະຣິຍະສັດ ໔ ນັ້ນ ທຸກຂະນິໂຣທະອະຣິຍະສັດ ເປັນແນວໃດ?

ຄື ຄວາມດັບຕັນຫານັ້ນນັ້ນແລໂດຍບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ກໍຕັນຫານີ້ ເມື່ອລະ ລະຢູ່ໃສ ເມື່ອດັບ ດັບຢູ່ໃສ?

ຄື ປິຍະຣູບສາຕະຣູບໃດມີຢູ່ໃນໂລກ ຕັນຫານີ້ເມື່ອລະ ກໍລະທີ່ປິຍະຣູບສາຕະຣູບນີ້ ເມື່ອດັບ ກໍດັບທີ່ປິຍະຣູບສາຕະຣູບນີ້

ກໍອັນໃດ?ເປັນປິຍະຣູບສາຕະຣູບໃນໂລກ

ຄື ຈັກຂຸເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ຈັກຂຸນັ້ນ ເມື່ອດັບກໍດັບທີ່ຈັກຂຸນັ້ນ ໂສຕະເປັນປິຍະຣູບສາຕະຣູບໃນໂລກ ຯລຯ ທຳມະວິຈານເປັນປິຍະຣູບສາຕະຣູບໃນໂລກ ຕັນຫານີ້ ເມື່ອລະ ກໍລະທີ່ທຳມະວິຈານນີ້ ເມື່ອດັບ ກໍດັບທີ່ທຳມະວິຈານນີ້

ນີ້ຮຽກວ່າ ທຸກຂະນິໂຣທະອະຣິຍະສັດ

[໓໙] ບັນດາອະຣິຍະສັດ ໔ ນັ້ນ ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

| | | | |
|---|---|---|---|
| ໑. ສຳມາທິດຖິ | (ເຫັນຖືກ) | ໒. ສຳມາສັງກັບປະ | (ດຳຣິຖືກ) |
| ໓. ສຳມາວາຈາ | (ເຈຣະຈາຖືກ) | ໔. ສຳມາກຳມັນຕະ | (ເຮັດຖືກ) |
| ໕. ສຳມາອາຊີວະ | (ລ້ຽງຊີບຖືກ) | ໖. ສຳມາວາຍາມະ | (ພະຍາຍາມຖືກ) |
| ໗. ສຳມາສະຕິ | (ຣະລຶກຖືກ) | ໘. ສຳມາສະມາທິ | (ຕັ້ງຈິດໝັ້ນຖືກ) |

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາທິດຖິ ເປັນແນວໃດ?

ຄື ຄວາມຮູ້ໃນທຸກ (ຄວາມທຸກ) ຄວາມຮູ້ໃນທຸກຂະສະມຸໄທ (ເຫດເກີດແຫ່ງທຸກ) ຄວາມຮູ້ໃນທຸກຂະນິໂຣທະ (ຄວາມດັບທຸກ) ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ (ຂໍ້ປະຕິບັດໃຫ້ເຖິງຄວາມດັບທຸກ) ນີ້ຮຽກວ່າ ສຳມາທິດຖິ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາສັງກັບປະ ເປັນແນວໃດ?

ຄື ຄວາມດຳຣິໃນເນກຂຳມະ (ການອອກຈາກກາມ) ຄວາມດຳຣິໃນອະພະຍາບາດ (ຄວາມບໍ່ພະຍາບາດ) ຄວາມດຳຣິໃນອະວິຫິງສາ (ການບໍ່ບຽດບຽນ) ນີ້ຮຽກວ່າ ສຳມາສັງ ກັບປະ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາວາຈາ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກມຸສາວາດ (ເວົ້າຕົວະ) ເຈຕະນາເປັນເຫດເວັ້ນຈາກປິສຸນາວາຈາ (ເວົ້າສໍ່ສຽດ) ເຈຕະນາເປັນເຫດເວັ້ນຈາກຜະຣຸສະວາຈາ (ເວົ້າຄຳຫຍາບ) ເຈຕະນາເປັນເຫດເວັ້ນຈາກ ສຳຜັບປະລາປະ (ເວົ້າເພີ້ເຈີ້) ນີ້ຮຽກວ່າ ສຳມາວາຈາ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາກຳມັນຕະ ເປັນແນວໃດ?

ຄື ເຈຕະນາເປັນເຫດເວັ້ນຈາກປານາຕິບາດ (ການຂ້າສັດ) ເຈຕະນາເປັນເຫດເວັ້ນຈາກອະທິນນາທານ (ການລັກຊັບ) ເຈຕະນາເປັນເຫດເວັ້ນຈາກກາເມສຸມິດສາຈານ (ການປະພຶດຜິດໃນກາມ) ນີ້ຮຽກວ່າ ສຳມາກຳມັນຕະ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາອາຊີວະ ເປັນແນວໃດ?

ຄື ຂໍ້ທີ່ພຣະອະຣິຍະສາວົກໃນທຳວິໄນນີ້ ລະມິດສາອາຊີວະ ສຳເລັດການລ້ຽງຊີບດ້ວຍສຳມາອາຊີວະ ນີ້ຮຽກວ່າ ສຳມາອາຊີວະ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາວາຍາມະ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ສ້າງສັນທະ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດມຸ້ງໝັ້ນເພື່ອປ້ອງກັນບາປອະກຸສົນທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ໗ລ໗ ເພື່ອລະບາບອະກຸສົນ ທຳທີ່ເກີດຂຶ້ນແລ້ວ ໗ລ໗ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ໗ລ໗ ສ້າງສັນທະ ພະຍາຍາມ ຜາຣົບ

ຄວາມພຽນ ປະຄອງຈິດ ມຸ້ງໝັ້ນເພື່ອຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ນີ້ຮຽກວ່າ ສຳມາວາຍາມະ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາສະຕິ ເປັນແນວໃດ?

ຄື ຂໍ້ທີ່ພິກຂຸໃນທຳວິໄນນີ້ເປັນຜູ້ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ພິຈາລະນາເຫັນກາຍໃນກາຍຢູ່ ເພິ່ງກຳຈັດອະພິດຊາ ແລະໂທມະນັດໃນໂລກໄດ້ ພິຈາລະນາເຫັນເວທະນາໃນເວທະນາຢູ່ ຯລຯ ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ ເປັນຜູ້ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ພິຈາລະນາເຫັນທຳໃນທຳຢູ່ ເພິ່ງກຳຈັດອະພິດຊາແລະໂທມະນັດໃນໂລກໄດ້ ນີ້ຮຽກວ່າສຳມາສະຕິ

ບັນດາອະຣິຍະມັກມີອົງ ໘ ນັ້ນ ສຳມາສະມາທິ ເປັນແນວໃດ?

ຄື ຂໍ້ທີ່ພິກຂຸໃນທຳວິໄນນີ້ ສະຫງັດຈາກກາມແລະອະກຸສົນທຳທັງຫຼາຍ ບັນລຸ ປະຖົມຊານທີ່ມີວິຕົກວິຈານ ມີປີຕິ ແລະສຸກອັນເກີດຈາກວິເວກຢູ່ ຍ້ອນວິຕົກວິຈານຣະງັບ ໄປແລ້ວ ບັນລຸທຸຕິຍະຊານທີ່ເປັນຄວາມຜ່ອງໃສພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ບໍ່ມີວິຕົກບໍ່ມີວິຈານ ມີແຕ່ປີຕິແລະສຸກອັນເກີດຈາກສະມາທິຢູ່ ຍ້ອນປີຕິຈາງຄາຍອອກ ມີຈິດເປັນອຸເປກຂາ ມີສະຕິ ມີສຳປະຊັນຍະຢູ່ແລະສະເຫວີຍສຸກດ້ວຍກາຍ (ນາມກາຍ) ບັນລຸຕະຕິຍະຊານທີ່ພຣະອະຣິຍະທັງຫຼາຍກ່າວສັນເສີນວ່າ ຜູ້ມີອຸເປກຂາ ມີສະຕິ ຢູ່ເປັນສຸກ ຍ້ອນລະສຸກແລະທຸກໄດ້ແລະຍ້ອນໂສມະນັດ ແລະໂທມະນັດດັບໄປກ່ອນແລ້ວ ບັນລຸຈະຕຸດຖະຊານທີ່ບໍ່ມີທຸກບໍ່ມີສຸກ ມີສະຕິບໍລິສຸດຍ້ອນອຸເປກຂາຢູ່ ນີ້ຮຽກວ່າ ສຳມາສະມາທິ

ນີ້ຮຽກວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ການຊົງຈຳທຳທີ່ໄດ້ສະດັບມາວ່າ ນີ້ທຸກຂະອະຣິຍະສັດ ນີ້ທຸກຂະສະມຸທະຍະອະຣິຍະສັດ ນີ້ທຸກຂະນິໂຣທະອະຣິຍະສັດ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ປັນຍາຮູ້ຊັດແຈ້ງທຳທີ່ໄດ້ສະດັບມານັ້ນ ຊື່ວ່າ ສຸຕະມະຍະຍານ

ປັນຍາໃນການຊົງຈຳທຳທີ່ໄດ້ສະດັບມາແນວນີ້ ຊື່ວ່າສຸຕະມະຍະຍານ (໑໔ ໑໖)

**ສຸຕະມະຍະຍານະນິດເທດທີ ໑ ຈົບ**

# ໔. ສີລະມະຍະຍານະນິດເທດ

## ສະແດງສີລະມະຍະຍານ

[໓໗] ປັນຍາໃນການສະດັບທຳແລ້ວສັງລວມໄວ້ ຊື່ວ່າສີລະມະຍະຍານ ເປັນແນວໃດ?
ຄື ສີນ ໕ ຢ່າງ ໄດ້ແກ່

໑. ປະຣິຍັນຕະປາຣິສຸດທິສີນ (ສີນຄືຄວາມບໍລິສຸດອັນມີບ່ອນສຸດ)
໔. ອະປະຣິຍັນຕະປາຣິສຸດທິສີນ (ສີນຄືຄວາມບໍລິສຸດອັນບໍ່ມີບ່ອນສຸດ)
໓. ປະຣິປຸນນະປາຣິສຸດທິສີນ (ສີນຄືຄວາມບໍລິສຸດບໍລິບູນ)
໔. ອຸປະຣາມັດຖະປາຣິສຸດທິສີນ (ສີນຄືຄວາມບໍລິສຸດທີ່ບໍ່ຢຶດໝັ້ນດ້ວຍອຳນາດທິດຖິ)
໕. ປະຕິປັດສັດທິປາຣິສຸດທິສີນ (ສີນຄືຄວາມບໍລິສຸດຍ້ອນການສະງົບຣະງັບ)

ໃນສີນ ໕ ຢ່າງນັ້ນ ປະຣິຍັນຕະປາຣິສຸດທິສີນ ເປັນແນວໃດ?
ຄື ສີນຂອງອະນຸປະສຳບັນຜູ້ມີສິກຂາບົດອັນມີບ່ອນສຸດ ນີ້ຊື່ວ່າປະຣິຍັນຕະປາຣິສຸດທິສີນ

ອະປະຣິຍັນຕະປາຣິສຸດທິສີນ ເປັນແນວໃດ?
ຄື ສີນຂອງອຸປະສຳບັນຜູ້ມີສິກຂາບົດອັນບໍ່ມີບ່ອນສຸດນີ້ຊື່ວ່າອະປະຣິຍັນຕະປາຣິສຸດທິສີນ

ປະຣິປຸນນະປາຣິສຸດທິສີນ ເປັນແນວໃດ?
ຄື ສີນຂອງກັນລະຍານະປຸຖຸຊົນຜູ້ປະກອບກຸສົນທຳ ພ່ຳເພັງທຳເຊິ່ງເປັນບ່ອນສຸດຂອງພຣະເສຂະໃຫ້ບໍລິບູນ ບໍ່ອາໄລໃນກາຍແລະຊີວິດ ສະລະຊີວິດແລ້ວ ນີ້ຊື່ວ່າປະຣິປຸນນະປາຣິສຸດທິສີນ

ອຸປະຣາມັດຖະປາຣິສຸດທິສີນ ເປັນແນວໃດ?
ຄື ສີນຂອງພຣະເສຂະ ໗ ຈຳພວກ ນີ້ຊື່ວ່າອຸປະຣາມັດຖະປາຣິສຸດທິສີນ
ປະຕິປັດສັດທິປາຣິສຸດທິສີນ ເປັນແນວໃດ?
ຄື ສີນຂອງສາວົກພຣະຕະຖາຄົດຜູ້ເປັນພຣະຂີນາສົບ ຂອງພຣະປັດເຈກພຸດທະເຈົ້າ ແລະຂອງພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ນີ້ຊື່ວ່າ ປະຕິປັດສັດທິປາຣິສຸດທິສີນ

[໓໘] ສີນມີບ່ອນສຸດກໍມີ ສີນບໍ່ມີບ່ອນສຸດກໍມີ ໃນສີນ ໔ ຢ່າງນັ້ນ ສີນມີບ່ອນສຸດນັ້ນ ເປັນແນວໃດ?
ຄື ສີນມີລາບເປັນບ່ອນສຸດກໍມີ ສີນມີຍົດເປັນບ່ອນສຸດກໍມີ ສີນມີຍາດເປັນບ່ອນສຸດກໍມີ ສີນມີອະໄວຍະວະເປັນບ່ອນສຸດກໍມີ ສີນມີຊີວິດເປັນບ່ອນສຸດກໍມີ

ສິນມີລາບເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ລ່ວງລະເມີດສິກຂາບົດຕາມທີ່ໄດ້ສະມາທານໄວ້ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈ ຍ້ອນລາບເປັນຕົວການ ສິນນີ້ຊື່ວ່າມີລາບເປັນບ່ອນສຸດ

ສິນມີຍົດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ລ່ວງລະເມີດສິກຂາບົດຕາມທີ່ໄດ້ສະມາທານໄວ້ ຍ້ອນຍົດເປັນເຫດ ຍ້ອນຍົດເປັນປັດໄຈ ຍ້ອນຍົດເປັນຕົວການ ສິນນີ້ຊື່ວ່າມີຍົດເປັນບ່ອນສຸດ

ສິນມີຍາດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ລ່ວງລະເມີດສິກຂາບົດຕາມທີ່ໄດ້ສະມາທານໄວ້ ຍ້ອນຍາດເປັນເຫດ ຍ້ອນຍາດເປັນປັດໄຈ ຍ້ອນຍາດເປັນຕົວການ ສິນນີ້ຊື່ວ່າມີຍາດເປັນບ່ອນສຸດ

ສິນມີອະໄວຍະວະເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ລ່ວງລະເມີດສິກຂາບົດຕາມທີ່ໄດ້ສະມາທານໄວ້ ຍ້ອນອະໄວຍະວະເປັນເຫດ ຍ້ອນອະໄວຍະວະເປັນປັດໄຈ ຍ້ອນອະໄວຍະວະເປັນຕົວການ ສິນນີ້ຊື່ວ່າມີອະໄວຍະວະເປັນບ່ອນສຸດ

ສິນມີຊີວິດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ລ່ວງລະເມີດສິກຂາບົດຕາມທີ່ໄດ້ສະມາທານໄວ້ ຍ້ອນຊີວິດເປັນເຫດ ຍ້ອນຊີວິດເປັນປັດໄຈ ຍ້ອນຊີວິດເປັນຕົວການ ສິນນີ້ຊື່ວ່າມີຊີວິດເປັນບ່ອນສຸດ

ສິນດັ່ງກ່າວນີ້ເປັນສິນຂາດ ທະລຸ ດ່າງ ຕົກ ບໍ່ເປັນອິດສະຫຼະ ທ່ານຜູ້ຮູ້ບໍ່ສັນເສີນ ຖືກຕັນຫາແລະທິດຖິຄອບງຳ ບໍ່ເປັນໄປເພື່ອສະມາທິ ເປັນບ່ອນຕັ້ງແຫ່ງຄວາມເດືອດຮ້ອນ ບໍ່ເປັນບ່ອນຕັ້ງແຫ່ງຄວາມປາໂມດ ບໍ່ເປັນບ່ອນຕັ້ງແຫ່ງປີຕິ ບໍ່ເປັນບ່ອນຕັ້ງແຫ່ງປັດສັດທິ ບໍ່ເປັນບ່ອນຕັ້ງແຫ່ງຄວາມສຸກ ບໍ່ເປັນບ່ອນຕັ້ງແຫ່ງສະມາທິ ບໍ່ເປັນບ່ອນຕັ້ງແຫ່ງຍະຖາພູຕະຍານະທັດສະນະ ບໍ່ເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ ສິນນີ້ຊື່ວ່າມີບ່ອນສຸດ

ສິນບໍ່ມີບ່ອນສຸດນັ້ນ ເປັນແນວໃດ?

ຄື ສິນບໍ່ມີລາບເປັນບ່ອນສຸດກໍມີ ສິນບໍ່ມີຍົດເປັນບ່ອນສຸດກໍມີ ສິນບໍ່ມີຍາດເປັນບ່ອນສຸດກໍມີ ສິນບໍ່ມີອະໄວຍະວະເປັນບ່ອນສຸດກໍມີ ສິນບໍ່ມີຊີວິດເປັນບ່ອນສຸດກໍມີ

ສິນບໍ່ມີລາບເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ແມ່ນຄວາມຄິດທີ່ຈະລ່ວງລະເມີດສິກຂາບົດຕາມທີ່ໄດ້ ສະມາທານໄວ້ ຍ້ອນລາບເປັນເຫດ ຍ້ອນລາບເປັນປັດໄຈ ຍ້ອນລາບເປັນຕົວການ ກໍບໍ່ເກີດຂຶ້ນ ເຫດໃດເຂົາຈັກລ່ວງລະເມີດສິກຂາບົດນໍ ສີນນີ້ຊື່ວ່າບໍ່ມີລາບເປັນບ່ອນສຸດ

ສີນບໍ່ມີຍົດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ແມ່ນຄວາມຄິດທີ່ຈະລ່ວງລະເມີດສິກຂາບົດຕາມທີ່ໄດ້ ສະມາທານໄວ້ ຍ້ອນຍົດເປັນເຫດ ຍ້ອນຍົດເປັນປັດໄຈ ຍ້ອນຍົດເປັນຕົວການ ກໍບໍ່ເກີດຂຶ້ນ ເຫດໃດເຂົາຈັກລ່ວງລະເມີດສິກຂາບົດນໍ ສີນນີ້ຊື່ວ່າບໍ່ມີຍົດເປັນບ່ອນສຸດ

ສີນບໍ່ມີຍາດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ແມ່ນຄວາມຄິດທີ່ຈະລ່ວງລະເມີດສິກຂາບົດຕາມທີ່ໄດ້ ສະມາທານໄວ້ ຍ້ອນຍາດເປັນເຫດ ຍ້ອນຍາດເປັນປັດໄຈ ຍ້ອນຍາດເປັນຕົວການ ກໍບໍ່ເກີດຂຶ້ນ ເຫດໃດເຂົາຈັກລ່ວງລະເມີດສິກຂາບົດນໍ ສີນນີ້ຊື່ວ່າບໍ່ມີຍາດເປັນບ່ອນສຸດ

ສີນບໍ່ມີອະໄວຍະວະເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ແມ່ນຄວາມຄິດທີ່ຈະລ່ວງລະເມີດສິກຂາບົດຕາມທີ່ໄດ້ ສະມາທານໄວ້ ຍ້ອນອະໄວຍະວະເປັນເຫດ ຍ້ອນອະໄວຍະວະເປັນປັດໄຈ ຍ້ອນອະໄວຍະວະເປັນຕົວການ ກໍບໍ່ເກີດຂຶ້ນ ເຫດໃດເຂົາຈັກລ່ວງລະເມີດສິກຂາບົດນໍ ສີນນີ້ຊື່ວ່າບໍ່ມີອະໄວຍະວະເປັນບ່ອນສຸດ

ສີນບໍ່ມີຊີວິດເປັນບ່ອນສຸດນັ້ນ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ແມ່ນຄວາມຄິດທີ່ຈະລ່ວງລະເມີດສິກຂາບົດຕາມທີ່ໄດ້ ສະມາທານໄວ້ ຍ້ອນຊີວິດເປັນເຫດ ຍ້ອນຊີວິດເປັນປັດໄຈ ຍ້ອນຊີວິດເປັນຕົວການ ກໍບໍ່ເກີດຂຶ້ນ ເຫດໃດເຂົາຈັກລ່ວງລະເມີດສິກຂາບົດນໍ ສີນນີ້ຊື່ວ່າບໍ່ມີຊີວິດເປັນບ່ອນສຸດ ສີນດັ່ງກ່າວນີ້ເປັນສີນບໍ່ຂາດ ບໍ່ທະລຸ ບໍ່ດ່າງ ບໍ່ຕົກ ເປັນອິດສະຫຼະ ທ່ານຜູ້ຮູ້ ສັນເສີນ ບໍ່ຖືກຕັນຫາແລະທິດຖິຄອບງຳ ເປັນໄປເພື່ອສະມາທິ ບໍ່ເປັນບ່ອນຕັ້ງແຫ່ງຄວາມເດືອດຮ້ອນ ເປັນບ່ອນຕັ້ງແຫ່ງຄວາມປາໂມດ ເປັນບ່ອນຕັ້ງແຫ່ງປີຕິ ເປັນບ່ອນຕັ້ງແຫ່ງປັດສັດທິ ເປັນບ່ອນຕັ້ງແຫ່ງຄວາມສຸກ ເປັນບ່ອນຕັ້ງແຫ່ງສະມາທິ ເປັນບ່ອນຕັ້ງແຫ່ງຍະຖາພູຕະຍານທັດສະນະ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານ ສີນນີ້ຊື່ວ່າບໍ່ມີບ່ອນສຸດ

[໓໙] ອັນໃດຊື່ວ່າສີນ ສີນມີເທົ່າໃດ ສີນມີອັນໃດເປັນສະມຸດຖານ ສີນເປັນບ່ອນລວມແຫ່ງທຳອັນໃດ? ອັນໃດ ຊື່ວ່າສີນ?

ເຈຕະນາຊື່ວ່າສີນ ເຈຕະສິກຊື່ວ່າສີນ ຄວາມສັງລວມຊື່ວ່າສີນ ຄວາມບໍ່ລ່ວງລະເມີດຊື່ວ່າສີນ

ສີນມີເທົ່າໃດ?

ສີນມີ ໓ ຄື (໑) ກຸສົນສີນ (໒) ອະກຸສົນສີນ (໓) ອັບພະຍາກະຕະສີນ

ສີນມີອັນໃດເປັນສະມຸດຖານ?

ກຸສົນສີນມີກຸສົນຈິດເປັນສະມຸດຖານ ອະກຸສົນສີນມີອະກຸສົນຈິດເປັນສະມຸດຖານ ອັບພະຍາກະຕະສີນມີອັບພະຍາກະຕະຈິດເປັນສະມຸດຖານ

ສີນເປັນບ່ອນລວມແຫ່ງທຳອັນໃດ?

ສີນເປັນບ່ອນລວມແຫ່ງຄວາມສັງລວມ ເປັນບ່ອນລວມແຫ່ງຄວາມບໍ່ລ່ວງລະເມີດ ເປັນບ່ອນລວມແຫ່ງເຈຕະນາທີ່ເກີດໃນຂະນະສັງລວມແລະບໍ່ລ່ວງລະເມີດນັ້ນ

[໔໐] ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມປານາຕິບາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດປານາຕິບາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມອະທິນນາທານ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າ ບໍ່ລ່ວງລະເມີດອະທິນນາທານ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມກາເມສຸມິດສາຈານ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດກາເມສຸມິດສາຈານ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມມຸສາວາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດມຸສາວາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມປິສຸນາວາຈາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດປິສຸນາວາຈາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມຜະຣຸສະວາຈາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດຜະຣຸສະວາຈາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມສຳຜັບປະລາປະ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດສຳຜັບປະລາປະ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມອະພິດຊາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດອະພິດຊາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມພະຍາບາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດພະຍາບາດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມມິດສາທິດຖິ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດມິດສາທິດຖິ

[໔໑] ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມການສັນທະດ້ວຍເນກຂຳມະ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດການສັນທະດ້ວຍເນກຂຳມະ ຯລຯ ພະຍາບາດດ້ວຍອະພະຍາບາດ ຯລຯ ຖີນະມິດທະດ້ວຍອາໂລກະສັນຍາ ຯລຯ ອຸດທັດຈະດ້ວຍອະວິກເຂປະ ຯລຯ ວິຈິກິດສາດ້ວຍທຳມະວະວັດຖານ ຯລຯ ອະວິດຊາດ້ວຍຍານ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມອະຣະຕິດ້ວຍປາມຸດຊະ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດອະຣະຕິດ້ວຍປາມຸດຊະຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມນິວອນດ້ວຍປະຖົມຊານ ຊື່ວ່າສີນ ຍ້ອນມີຄວາມ

ໝາຍວ່າບໍ່ລ່ວງລະເມີດນິວອນດ້ວຍປະຖົມຊານ ໆລໆ ວິຕົກວິຈານດ້ວຍທຸຕິຍະຊານ ໆລໆ ປີຕິດ້ວຍຕະຕິຍະຊານ ໆລໆ ສຸກແລະທຸກດ້ວຍຈະຕຸດຖະຊານ ໆລໆ ຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາດ້ວຍອາກາສານັນຈາຍະຕະນະສະມາບັດ ໆລໆ ອາກາສານັນຈາຍະຕະນະສະມາບັດດ້ວຍວິນຍານັນຈາຍະຕະນະສັນຍາ ໆລໆ ວິນຍານັນຈາຍະຕະນະສັນຍາດ້ວຍອາກິນຈັນຍາຍະຕະນະສະມາບັດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມອາກິນຈັນຍາຍະຕະນະສັນຍາດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດອາກິນຈັນຍາຍະຕະນະ ສັນຍາດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມນິດຈະສັນຍາດ້ວຍອະນິດຈານຸປັດສະນາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດນິດຈະສັນຍາດ້ວຍອະນິດຈານຸປັດສະນາ ໆລໆ ສຸຂະສັນຍາດ້ວຍທຸກຂານຸປັດສະນາ ໆລໆ ອັດຕະສັນຍາດ້ວຍອະນັດຕານຸປັດສະນາ ໆລໆ ນັນທິດ້ວຍນິບພິທານຸປັດສະນາ ໆລໆ ຣາຄະດ້ວຍວິຣາຄານຸປັດສະນາ ໆລໆ ສະມຸໄທດ້ວຍນິໂຣທານຸປັດສະນາ ໆລໆ ອາທານະດ້ວຍປະຕິນິດສັກຄານຸປັດສະນາ ໆລໆ ຄະນະສັນຍາດ້ວຍຂະຍານຸປັດສະນາ ໆລໆ ອາຍຸຫະນະດ້ວຍວະຍານຸປັດສະນາ ໆລໆ ທຸວະສັນຍາດ້ວຍວິປະຣິນາມານຸປັດສະນາ ໆລໆ ນິມິດດ້ວຍອະນິມິດຕານຸປັດສະນາ ໆລໆ ປະນິທິດ້ວຍອັບປະນິຫິຕານຸປັດສະນາ ໆລໆ ອະພິນິເວສະດ້ວຍສູນຍະຕານຸປັດສະນາ ໆລໆ ສາຣາທານາພິນິເວສະດ້ວຍອະທິປັນຍາທຳມະວິປັດສະນາ ໆລໆ ສຳໂມຫາພິນິເວສະດ້ວຍຍະຖາພູຕະຍານະທັດສະນະ ໆລໆ ອາລະຍາພິນິເວສະດ້ວຍອາທີນະວານຸປັດສະນາ ໆລໆ ອັບປະຕິສັງຂາດ້ວຍປະຕິສັງຂານຸປັດສະນາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມສັນໂຍຄາພິນິເວສະດ້ວຍວິວັດຕະນານຸປັດສະນາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດສັນໂຍຄາພິນິເວສະດ້ວຍວິວັດຕະນານຸປັດສະນາ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມກິເລດທີ່ຕັ້ງຢູ່ລວມກັນກັບທິດຖິດ້ວຍໂສດາປັດຕິມັກ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດກິເລດທີ່ຕັ້ງຢູ່ລວມກັນກັບທິດຖິດ້ວຍໂສດາປັດຕິມັກ ໆລໆ ກິເລດຢ່າງຫຍາບດ້ວຍສະກະທາຄາມິມັກ ໆລໆ ກິເລດຢ່າງລະອຽດດ້ວຍອະນາຄາມິມັກ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າສັງລວມກິເລດທັງປວງ ດ້ວຍອະຣະຫັດຕະມັກ ຊື່ວ່າສີນ ຍ້ອນມີຄວາມໝາຍວ່າບໍ່ລ່ວງລະເມີດກິເລດທັງປວງ ດ້ວຍອະຣະຫັດຕະມັກ

ສີນ ໕ ປະເພດ ຄື

໑. ການລະປານາຕິບາດ ຊື່ວ່າສີນ
໒. ການເວັ້ນປານາຕິບາດ ຊື່ວ່າສີນ
໓. ເຈຕະນາທີ່ເປັນຂ້າເສິກຕໍ່ປານາຕິບາດ ຊື່ວ່າສີນ
໔. ຄວາມສັງລວມປານາຕິບາດ ຊື່ວ່າສີນ
໕. ຄວາມບໍ່ລ່ວງລະເມີດປານາຕິບາດ ຊື່ວ່າສີນ

ສີນດັ່ງກ່າວນີ້ ຍ່ອມເປັນໄປເພື່ອຄວາມບໍ່ເດືອດຮ້ອນໃຈ ເພື່ອປາໂມດ ເພື່ອປີຕິ ເພື່ອປັດສັດທິ ເພື່ອໂສມະນັດ ເພື່ອການປະຕິບັດໂດຍເອື້ອເຟື້ອ ເພື່ອຄວາມຈະເລີນ ເພື່ອເຮັດໃຫ້ຫຼາຍ ເພື່ອເປັນເຄື່ອງປະດັບ ເພື່ອເປັນເຄື່ອງປ້ອງກັນ ເພື່ອເປັນເຄື່ອງແວດລ້ອມ ເພື່ອຄວາມສົມບູນ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຣູ້ ເພື່ອນິບພານຄວາມບໍລິສຸດດ້ວຍຄວາມສັງລວມແຫ່ງສີນດັ່ງກ່າວນີ້ ຊື່ວ່າອະທິສີນ ຈິດທີ່ຕັ້ງຢູ່ໃນຄວາມບໍລິສຸດດ້ວຍຄວາມສັງລວມ ຍ່ອມບໍ່ຟຸ້ງຊ່ານ ຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າ ອະທິຈິດ ພຣະໂຍຄາວະຈອນເຫັນຄວາມບໍລິສຸດດ້ວຍຄວາມສັງລວມໂດຍຊອບ ເຫັນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານໂດຍຊອບ ຄວາມບໍລິສຸດແຫ່ງຄວາມເຫັນ (ທັງສອງປະການນີ້) ຊື່ວ່າອະທິປັນຍາ

ບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານ ແລະຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າ ອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າ ອະທິປັນຍາສິກຂາ

ພຣະໂຍຄາວະຈອນເມື່ອນຶກເຖິງສິກຂາ ໓ ນີ້ ຊື່ວ່າສຶກສາ ເມື່ອຮູ້ ຊື່ວ່າສຶກສາ ເມື່ອເຫັນ ຊື່ວ່າສຶກສາ ເມື່ອພິຈາລະນາ ຊື່ວ່າສຶກສາ ເມື່ອອະທິຖານຈິດ ຊື່ວ່າສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າສຶກສາ ເມື່ອປະຄອງຄວາມພຽນໄວ້ ຊື່ວ່າສຶກສາ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າສຶກສາ ເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າສຶກສາ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າສຶກສາ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ຊື່ວ່າສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າສຶກສາ ເມື່ອຈະເລີນທຳທີ່ຄວນໃຫ້ຈະເລີນ ຊື່ວ່າສຶກສາ

ສີນ ໕ ປະເພດ ຄື

ການລະອະທິນນາທານ ຊື່ວ່າສີນ ฯລฯ ການລະກາເມສຸມິດສາຈານ ฯລฯ ການລະມຸສາວາດ ฯລฯ ການລະປິສຸນາວາຈາ ฯລฯ ການລະຜະຣຸສະວາຈາ ฯລฯ ການລະສຳຜັບປະລາປະ ฯລฯ ການລະອະພິດຊາ ฯລฯ ການລະພະຍາບາດ ฯລฯ ການລະມິດສາທິດຖິ ฯລฯ

ການລະການສັນທະດ້ວຍເນກຂຳມະ ฯລฯ ການລະພະຍາບາດດ້ວຍອະພະຍາບາດ ฯລฯ ການລະຖີນະມິດທະດ້ວຍອາໂລກະສັນຍາ ฯລฯ ການລະອຸດທັດຈະດ້ວຍອະວິກເຂປະ ฯລฯ ການລະວິຈິກິດສາດ້ວຍທຳມະວະວັດຖານ ฯລฯ ການລະອະວິດຊາດ້ວຍຍານ ฯລฯ ການລະອະຣະຕິດ້ວຍປາມຸດຊະ ฯລฯ

ການລະນິວອນດ້ວຍປະຖົມຊານ ฯລฯ ການລະວິຕົກວິຈານດ້ວຍທຸຕິຍະຊານ ฯລฯ ການລະປີຕິດ້ວຍຕະຕິຍະຊານ ฯລฯ ການລະສຸກແລະທຸກດ້ວຍຈະຕຸດຖະຊານ ฯລฯ

ການລະຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ດ້ວຍອາກາສານັນຈາຍະຕະນະສະມາບັດ ໆລໆ ການລະອາກາສານັນຈາຍະຕະນະສັນຍາດ້ວຍວິນຍານັນຈາຍະຕະນະສະມາບັດ ໆລໆ ການລະວິນຍານັນຈາຍະຕະນະສັນຍາດ້ວຍອາກິນຈັນຍາຍະຕະນະສັນຍາສະມາບັດ ໆລໆ ການລະອາກິນຈັນຍາຍະຕະນະ ສັນຍາດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ໆລໆ

ການລະສຸຂະສັນຍາດ້ວຍທຸກຂານຸປັດສະນາ ໆລໆ ການລະອັດຕະສັນຍາດ້ວຍອະນັດຕານຸປັດສະນາ ໆລໆ ການລະນັນທິດ້ວຍນິບພິທານຸປັດສະນາໆລໆ ການລະຣາຄະດ້ວຍວິຣາຄານຸປັດສະນາໆລໆ ການລະສະມຸໄທດ້ວຍນິໂຣທານຸປັດສະນາ ໆລໆ ການລະອາທານະດ້ວຍປະຕິນິດສັກຄານຸປັດສະນາ ໆລໆ ການລະຄະນະສັນຍາດ້ວຍຂະຍານຸປັດສະນາ ໆລໆ ການລະອາຍຸຫະນະດ້ວຍວະຍານຸປັດສະນາ ໆລໆ ການລະທຸວະສັນຍາດ້ວຍວິປະຣິນາມານຸປັດສະນາ ໆລໆ ການລະນິມິດດ້ວຍອະນິມິດຕານຸປັດສະນາ ໆລໆ ການລະປະນິທິດ້ວຍອັບປະນິຫິຕານຸປັດສະນາໆລໆ ການລະອະພິນິເວສະດ້ວຍສູນຍະຕານຸປັດສະນາ ໆລໆ ການລະສາຣາທານາພິນິເວສະດ້ວຍອະທິປັນຍາທຳມະວິປັດສະນາ ໆລໆ ການລະສຳໂມຫາພິນິເວສະດ້ວຍຍະຖາພູຕະຍານະທັດສະນະ ໆລໆ ການລະອາລະຍາພິນິເວສະ ດ້ວຍອາທິນະວານຸປັດສະນາ ໆລໆ ການລະອັບປະຕິສັງຂາດ້ວຍປະຕິສັງຂານຸປັດສະນາ ໆລໆ ການລະສັນໂຍຄາພິນິເວສະດ້ວຍວິວັດຕະນານຸປັດສະນາ ໆລໆການລະກິເລດທີ່ຕັ້ງຢູ່ລວມກັນກັບທິດຖິດ້ວຍໂສດາປັດຕິມັກ ໆລໆ ການລະກິເລດທີ່ຫຍາບດ້ວຍສະກະທາຄາມິມັກ ໆລໆ ການລະກິເລດທີ່ລະອຽດດ້ວຍອະນາຄາມິມັກ ໆລໆ

(ສີນ ໕ ປະເພດ ຄື)

໑. ການລະກິເລດທັງປວງດ້ວຍອະຣະຫັດຕະມັກ ຊື່ວ່າສີນ
໒. ການເວັ້ນກິເລດທັງປວງດ້ວຍອະຣະຫັດຕະມັກ ຊື່ວ່າສີນ
໓. ເຈຕະນາທີ່ເປັນຂ້າເສິກຕໍ່ກິເລດທັງປວງດ້ວຍອະຣະຫັດຕະມັກ ຊື່ວ່າສີນ
໔. ຄວາມສັງລວມກິເລດທັງປວງດ້ວຍອະຣະຫັດຕະມັກ ຊື່ວ່າສີນ
໕. ຄວາມບໍ່ລ່ວງລະເມີດກິເລດທັງປວງດ້ວຍອະຣະຫັດຕະມັກ ຊື່ວ່າສີນ

ສີນດັ່ງກ່າວນີ້ຍ່ອມເປັນໄປເພື່ອຄວາມບໍ່ເດືອດຮ້ອນ ເພື່ອປາໂມດ ເພື່ອປີຕິ ເພື່ອປັດສັດທິ ເພື່ອໂສມະນັດ ເພື່ອການປະຕິບັດໂດຍເອື້ອເຟື້ອ ເພື່ອຄວາມຈະເລີນ ເພື່ອເຮັດໃຫ້ຫຼາຍ ເພື່ອເປັນເຄື່ອງປະດັບ ເພື່ອເປັນເຄື່ອງປ້ອງກັນ ເພື່ອເປັນເຄື່ອງແວດລ້ອມ ເພື່ອຄວາມສົມບູນ ຍ່ອມເປັນໄປເພື່ອຄວາມເບື່ອໜ່າຍໂດຍສ່ວນດຽວ ເພື່ອຄາຍກຳໜັດ ເພື່ອດັບ ເພື່ອຣະງັບ ເພື່ອຮູ້ຍິ່ງ ເພື່ອຕັດສະຮູ້ ເພື່ອນິບພານ

[໔໒] ຄວາມບໍລິສຸດດ້ວຍຄວາມສັງລວມແຫ່ງສີນດັ່ງກ່າວນີ້ຊື່ວ່າອະທິສີນ ຈິດທີ່ຕັ້ງຢູ່ໃນຄວາມບໍລິສຸດດ້ວຍຄວາມສັງລວມ ຍ່ອມບໍ່ຟຸ້ງຊ່ານ ຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອະທິ

ຈິດ ພຣະໂຍຄາວະຈອນເຫັນຄວາມບໍລິສຸດດ້ວຍຄວາມສັງລວມໂດຍຊອບ ເຫັນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານໂດຍຊອບ ຄວາມບໍລິສຸດແຫ່ງຄວາມເຫັນ (ທັງສອງປະການນີ້) ຊື່ວ່າອະທິປັນຍາ ບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານ ແລະຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ

ພຣະໂຍຄາວະຈອນເມື່ອນຶກເຖິງສິກຂາ ໓ ນີ້ ຊື່ວ່າສຶກສາ ເມື່ອຮູ້ ຊື່ວ່າສຶກສາ ເມື່ອເຫັນຊື່ວ່າສຶກສາ ເມື່ອພິຈາລະນາ ຊື່ວ່າສຶກສາ ເມື່ອອະທິຖານຈິດ ຊື່ວ່າສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າສຶກສາ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າສຶກສາເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າສຶກສາ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າສຶກສາ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ຊື່ວ່າສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າສຶກສາ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າສຶກສາ ເມື່ອຈະເລີນທຳທີ່ຄວນໃຫ້ຈະເລີນຊື່ວ່າສຶກສາ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການສະດັບທຳແລ້ວສັງລວມໄວ້ ຊື່ວ່າສີລະມະຍະຍານ (ຍານໃນການສັງລວມສີນ)

**ສີລະມະຍະຍານະນິດເທດທີ ໒ ຈົບ**

# ໓. ສະມາທິພາວະນາມະຍະຍານະນິດເທດ

## ສະແດງສະມາທິພາວະນາມະຍະຍານ

[໔໓] ປັນຍາໃນການສັງລວມຕັ້ງຈິດໝັ້ນ ຊື່ວ່າສະມາທິພາວະນາມະຍະຍານ ເປັນແນວໃດ? ຄື

ສະມາທິ ໑ ຢ່າງ ໄດ້ແກ່

ເອກັກຄະຕາຈິດ

ສະມາທິ ໒ ຢ່າງ ໄດ້ແກ່

໑. ໂລກິຍະສະມາທິ
໒. ໂລກຸດຕະຣະສະມາທິ

ສະມາທິ ໓ ຢ່າງ ໄດ້ແກ່

໑. ສະມາທິທີ່ມີວິຕົກວິຈານ
໒. ສະມາທິທີ່ບໍ່ມີວິຕົກມີພຽງວິຈານ
໓. ສະມາທິທີ່ບໍ່ມີທັງວິຕົກແລະວິຈານ

ສະມາທິ ໔ ຢ່າງ ໄດ້ແກ່

໑. ສະມາທິທີ່ເປັນສ່ວນແຫ່ງຄວາມເສື່ອມ
໒. ສະມາທິທີ່ເປັນສ່ວນແຫ່ງຄວາມຕັ້ງຢູ່
໓. ສະມາທິທີ່ເປັນສ່ວນແຫ່ງຄຸນວິເສດ
໔. ສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ

ສະມາທິ ໕ ຢ່າງ ໄດ້ແກ່

໑. ສະມາທິທີ່ມີປິຕິແຜ່ໄປ
໒. ສະມາທິທີ່ມີສຸກແຜ່ໄປ
໓. ສະມາທິທີ່ມີຈິດແຜ່ໄປ
໔. ສະມາທິທີ່ມີແສງສະຫວ່າງແຜ່ໄປ
໕. ສະມາທິທີ່ມີການພິຈາລະນາເປັນນິມິດ

ສະມາທິ ໖ ຢ່າງ ໄດ້ແກ່

໑. ສະມາທິທີ່ຈິດເປັນເອກັກຄະຕາຣົມ (ມີອາລົມດຽວ) ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງພຸດທານຸດສະຕິ
໒. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງທຳມານຸດສະຕິ
໓. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງສັງຄານຸດສະຕິ
໔. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງສີລານຸດສະຕິ
໕. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງຈາຄານຸດສະຕິ
໖. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງເທວະຕານຸດສະຕິ

ສະມາທິ ໗ ຢ່າງ ໄດ້ແກ່

໑. ຄວາມສະຫຼາດໃນສະມາທິ
໒. ຄວາມສະຫຼາດໃນການເຂົ້າສະມາທິ
໓. ຄວາມສະຫຼາດໃນການດຳຣົງສະມາທິ
໔. ຄວາມສະຫຼາດໃນການອອກຈາກສະມາທິ

໕. ຄວາມສະຫຼາດໃນການໃຊ້ສະມາທິ

໖ ຄວາມສະຫຼາດໃນອາລົມແຫ່ງສະມາທິ

໗. ຄວາມສະຫຼາດໃນການນຳສະມາທິໃຫ້ສູງ ໆ ຂຶ້ນໄປ

ສະມາທິ ໘ ຢ່າງ ໄດ້ແກ່

໑. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງປະຖະວີກະສິນ
໒. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອາໂປກະສິນ
໓. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງເຕໂຊກະສິນ
໔. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວາໂຍກະສິນ
໕. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງນິລະກະສິນ
໖. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງປີຕະກະສິນ
໗. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງໂລຫິຕະກະສິນ
໘. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງໂອທາຕະກະສິນ

ສະມາທິ ໙ ຢ່າງ ໄດ້ແກ່

໑. ຣູປາວະຈອນສະມາທິຢ່າງຕ່ຳ
໒. ຣູປາວະຈອນສະມາທິຢ່າງປານກາງ
໓. ຣູປາວະຈອນສະມາທິຢ່າງປະນີດ
໔. ອະຣູບປາວະຈອນສະມາທິຢ່າງຕ່ຳ
໕. ອະຣູປາວະຈອນສະມາທິຢ່າງປານກາງ
໖. ອະຣູປາວະຈອນສະມາທິຢ່າງປະນີດ
໗. ສູນຍະຕະສະມາທິ (ສະມາທິພິຈາລະນາເຫັນຄວາມວ່າງ)
໘. ອະນິມິດຕະສະມາທິ (ສະມາທິພິຈາລະນາເຫັນທຳບໍ່ມີນິມິດ)
໙. ອັບປະນິຫິຕະສະມາທິ (ສະມາທິພິຈາລະນາເຫັນທຳບໍ່ມີຄວາມຕັ້ງປາຖະໜາ)

ສະມາທິ ໑໐ ຢ່າງ ໄດ້ແກ່

໑. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອຸດທຸມາຕະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ພອງຂຶ້ນ)
໒. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວິນີລະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີສີຂຽວ)

໓. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວິປຸບພະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີນ້ຳເຫຼືອງໄຫຼຫຍົດ)
໔. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວິດສິດທະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ຂາດຈາກກັນ)
໕. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວິກຂາຍິຕະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ຖືກສັດກັດ)
໖. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງວິກຂິດຕະສັນຍາ (ຄວາມໝາຍຮູ້ຊາກສົບທີ່ກະຈັດກະຈາຍ)
໗. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງຫະຕະວິກຂິດຕະກະ ສັນຍາ (ຄວາມໝາຍຮູ້ຊາກສົບທີ່ຖືກສັບເປັນທ່ອນ)
໘. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງໂລຫິຕະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີໂລຫິດ)
໙. ສະມາທິທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງປຸລຸວະກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີໜອນ)
໑໐. ສະມາທິທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອັດຖິກະສັນຍາ (ຄວາມໝາຍຮູ້ຊາກສົບທີ່ມີແຕ່ກະດູກ)

ສະມາທິເຫຼົ່ານີ້ລວມເປັນ ໕໕ ຢ່າງ

[໔໔] ອີກຢ່າງໜຶ່ງ ສະມາທິມີຄວາມໝາຍ ໒໕ ຢ່າງ ຄື

໑. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າສັດທິນຊີເປັນຕົ້ນກຳນົດຖືເອົາ
໒. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າອິນຊີເປັນບໍລິວານແຫ່ງກັນແລະກັນ
໓. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າສັດທິນຊີເປັນຕົ້ນບໍລິບູນ
໔. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າມີອາລົມດຽວ
໕. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ
໖. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຊ່ານໄປ
໗. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຂຸ່ນມົວ
໘. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຫວັ່ນໄຫວ
໙. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າລຸດພົ້ນຈາກກິເລດ

ສະຫຼຸບວ່າ ຊື່ວ່າສະມາທິ ຍ້ອນຈິດຕັ້ງໝັ້ນດ້ວຍອຳນາດຜາກົດຊັດແຈ້ງໃນເອກັກຄະຕາຣົມ

໑໐. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າສະແຫວງຫາຄວາມສະງົບ

໑໑. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ສະແຫວງຫາທຳທີ່ເປັນຂ້າເສິກແກ່ຄວາມສະງົບ
໑໒. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າສະແຫວງຫາຄວາມສະງົບແລ້ວ
໑໓. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ສະແຫວງຫາທຳທີ່ເປັນຂ້າເສິກແກ່ຄວາມສະງົບແລ້ວ
໑໔. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າຍຶດໝັ້ນຄວາມສະງົບ
໑໕. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຍຶດໝັ້ນທຳທີ່ເປັນຂ້າເສິກແກ່ຄວາມສະງົບແລ້ວ
໑໖. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າຍຶດໝັ້ນຄວາມສະງົບແລ້ວ
໑໗. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ຍຶດໝັ້ນທຳທີ່ເປັນຂ້າເສິກແກ່ຄວາມສະງົບແລ້ວ
໑໘. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າປະຕິບັດຄວາມສະງົບ
໑໙. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ປະຕິບັດຄວາມບໍ່ສະງົບ
໒໐. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າປະຕິບັດຄວາມສະງົບແລ້ວ
໒໑. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າບໍ່ປະຕິບັດຄວາມບໍ່ສະງົບແລ້ວ
໒໒. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າເພ່ງຄວາມສະງົບ
໒໓. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າເຜົາທຳທີ່ເປັນຂ້າເສິກແກ່ ຄວາມສະງົບ
໒໔. ຊື່ວ່າສະມາທິ ຍ້ອນມີຄວາມໝາຍວ່າເພ່ງຄວາມສະງົບແລ້ວ
໒໕. ຊື່ວ່າສະມາທິຍ້ອນມີຄວາມໝາຍວ່າເຜົາທຳທີ່ເປັນຂ້າເສິກແກ່ຄວາມສະງົບແລ້ວ

ສະຫຼຸບວ່າ ຊື່ວ່າສະມາທິ ຍ້ອນສະງົບເກື້ອກູນແລະເປັນສຸກ ເຫຼົ່ານີ້ເປັນຄວາມໝາຍແຫ່ງສະມາທິ ໒໕ ປະການ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າປັນຍາໃນການສັງລວມຕັ້ງຈິດໝັ້ນ ຊື່ວ່າສະມາທິພາວະນາມະຍະຍານ

**ສະມາທິພາວະນາມະຍະຍານນິດເທດທີ ໓ ຈົບ**

# ໔. ທຳມັດຖິຕິຍານນິດເທດ

## ສະແດງທຳມັດຖິຕິຍານ

[໔໕] ປັນຍາໃນການກຳນົດປັດໄຈ ຊື່ວ່າທຳມັດຖິຕິຍານ ເປັນແນວໃດ?

ຄື ປັນຍາໃນການກຳນົດປັດໄຈວ່າ ອະວິດຊາເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ເປັນບ່ອນຕັ້ງແຫ່ງຄວາມເປັນໄປ ເປັນບ່ອນຕັ້ງແຫ່ງນິມິດ ເປັນບ່ອນຕັ້ງແຫ່ງກຳເປັນເຄື່ອງປະມວນມາ ເປັນບ່ອນຕັ້ງແຫ່ງຄວາມປະກອບໄວ້ ເປັນບ່ອນຕັ້ງແຫ່ງຄວາມພົວພັນ ເປັນບ່ອນຕັ້ງແຫ່ງສະມຸໄທ ເປັນບ່ອນຕັ້ງແຫ່ງເຫດ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງສັງຂານທັງຫຼາຍ ດ້ວຍອາການ ໙ ແນວນີ້ ອະວິດຊາຈຶ່ງເປັນປັດໄຈ ສັງຂານເກີດຂຶ້ນຍ້ອນປັດໄຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໄຈ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ບັນດາອະວິດຊາແລະສັງຂານ ອະວິດຊາເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ເປັນບ່ອນຕັ້ງແຫ່ງຄວາມເປັນໄປ ເປັນບ່ອນຕັ້ງແຫ່ງນິມິດ ເປັນບ່ອນຕັ້ງແຫ່ງກຳເປັນເຄື່ອງປະມວນມາ ເປັນບ່ອນຕັ້ງແຫ່ງຄວາມປະກອບໄວ້ ເປັນບ່ອນຕັ້ງແຫ່ງຄວາມພົວພັນ ເປັນບ່ອນຕັ້ງແຫ່ງສະມຸໄທ ເປັນບ່ອນຕັ້ງແຫ່ງເຫດ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງສັງຂານທັງຫຼາຍ ດ້ວຍອາການ ໙ ແນວນີ້ ອະວິດຊາຈຶ່ງເປັນປັດໄຈ ສັງຂານເກີດຂຶ້ນຍ້ອນປັດໄຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໄຈ ຊື່ວ່າ ທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ສັງຂານເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງວິນຍານ ฯລฯ ວິນຍານເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງນາມຮູບ ฯລฯ ນາມຮູບເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງສະລາຍະຕະນະ ฯລฯ ສະລາຍະຕະນະເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງຜັດສະ ฯລฯ ຜັດສະເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງເວທະນາ ฯລฯ ເວທະນາເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງຕັນຫາ ฯລฯ ຕັນຫາເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງອຸປາທານ ฯລฯ ອຸປາທານເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງພົບ ฯລฯ ພົບເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງຊາດ ฯລฯ ຊາດເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ฯລฯ ແລະເປັນບ່ອນຕັ້ງແຫ່ງປັດໄຈຂອງຊະຣາແລະມໍລະນະ ດ້ວຍອາການ ໙ ແນວນີ້ ຊາດຈຶ່ງເປັນປັດໄຈ ຊະຣາແລະມໍຣະນະເກີດຂຶ້ນຍ້ອນປັດໄຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໄຈ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ຊາດເປັນບ່ອນຕັ້ງແຫ່ງຄວາມເກີດຂຶ້ນ ເປັນບ່ອນຕັ້ງແຫ່ງຄວາມເປັນໄປ ເປັນບ່ອນຕັ້ງແຫ່ງນິມິດ ເປັນບ່ອນຕັ້ງແຫ່ງກຳເປັນເຄື່ອງປະມວນມາ ເປັນບ່ອນຕັ້ງແຫ່ງຄວາມປະກອບໄວ້ ເປັນບ່ອນຕັ້ງແຫ່ງ

ຄວາມພົວພັນ ເປັນບ່ອນຕັ້ງແຫ່ງສະມຸໄທ ເປັນບ່ອນຕັ້ງແຫ່ງເຫດ ແລະເປັນບ່ອນຕັ້ງແຫ່ງປັດໄຈ ຂອງຊະຣາແລະມໍລະນະ

ດ້ວຍອາການ ໙ ແນວນີ້ ຊາດຈຶ່ງເປັນປັດໄຈ ຊະຣາ ແລະມໍຣະນະເກີດຂຶ້ນຍ້ອນປັດໄຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໄຈ ຊື່ວ່າທຳມັດຖິຕິຍານ

[໔໗] ປັນຍາໃນການກຳນົດປັດໄຈວ່າ ອະວິດຊາເປັນເຫດ ສັງຂານເກີດຂຶ້ນຍ້ອນເຫດ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນເຫດ ຊື່ວ່າ ທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ອະວິດຊາເປັນເຫດ ສັງຂານອາໄສເຫດເກີດຂຶ້ນ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນເຫດ ຊື່ວ່າ ທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ສັງຂານເປັນເຫດ ວິນຍານເກີດຂຶ້ນຍ້ອນເຫດ ຯລຯ ວິນຍານເປັນເຫດ ນາມຮູບເກີດຂຶ້ນຍ້ອນເຫດ ຯລຯ ນາມຮູບເປັນເຫດ ສະລາຍະຕະນະເກີດຂຶ້ນຍ້ອນເຫດ ຯລຯ ສະລາຍະຕະນະເປັນເຫດ ຜັດສະເກີດຂຶ້ນຍ້ອນເຫດ ຯລຯ ຜັດສະເປັນເຫດ ເວທະນາເກີດຂຶ້ນຍ້ອນເຫດ ຯລຯ ເວທະນາເປັນເຫດ ຕັນຫາເກີດຂຶ້ນຍ້ອນເຫດ ຯລຯ ຕັນຫາເປັນເຫດ ອຸປາທານເກີດຂຶ້ນຍ້ອນເຫດ ອຸປາທານເປັນເຫດ ພົບເກີດຂຶ້ນຍ້ອນເຫດ ຯລຯ ພົບເປັນເຫດ ຊາດເກີດຂຶ້ນຍ້ອນເຫດ ຯລຯ ຊາດເປັນເຫດ ຊະຣາແລະມໍຣະນະເກີດຂຶ້ນຍ້ອນເຫດ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນເຫດ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ຊາດເປັນເຫດ ຊະຣາແລະມໍຣະນະເກີດຂຶ້ນຍ້ອນເຫດ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນເຫດຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ອະວິດຊາອາໄສປັດໄຈເປັນໄປ ສັງຂານອາໄສອະວິດຊາເກີດຂຶ້ນ ແມ່ນທຳທັງສອງແນວນີ້ຕ່າງກໍອາໄສປັດໄຈເກີດຂຶ້ນ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ອະວິດຊາອາໄສປັດໄຈເປັນໄປ ສັງຂານອາໄສອະວິດຊາເກີດຂຶ້ນ ແມ່ນທຳທັງສອງແນວນີ້ຕ່າງກໍອາໄສປັດໄຈເກີດຂຶ້ນ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໄຈວ່າ ສັງຂານອາໄສປັດໄຈເປັນໄປ ວິນຍານອາໄສສັງຂານເກີດຂຶ້ນ ຯລຯ ວິນຍານອາໄສປັດໄຈເປັນໄປ ນາມຮູບອາໄສວິນຍານເກີດຂຶ້ນ ຯລຯ ນາມຮູບອາໄສປັດໄຈເປັນໄປ ສະລາຍະຕະນະອາໄສນາມຮູບເກີດຂຶ້ນ ຯລຯ ສະລາຍະຕະນະອາໄສປັດ

ໃຈເປັນໄປ ຜັດສະອາໄສສະລາຍະຕະນະເກີດຂຶ້ນ ຯລຯ ຜັດສະອາໄສປັດໃຈເປັນໄປ ເວທະນາອາໄສຜັດສະເກີດຂຶ້ນ ຯລຯ ເວທະນາອາໄສປັດໃຈເປັນໄປ ຕັນຫາອາໄສເວທະນາເກີດຂຶ້ນ ຯລຯ ຕັນຫາອາໄສປັດໃຈເປັນໄປ ອຸປາທານອາໄສຕັນຫາເກີດຂຶ້ນ ຯລຯ ອຸປາທານອາໄສປັດໃຈເປັນໄປ ພົບອາໄສອຸປາທານເກີດຂຶ້ນ ຯລຯ ພົບອາໄສປັດໃຈເປັນໄປ ຊາດອາໄສພົບເກີດຂຶ້ນ ຯລຯ ຊາດອາໄສປັດໃຈເປັນໄປ ຊະຣາ ແລະມໍຣະນະອາໄສຊາດເກີດຂຶ້ນ ແມ່ນທຳທັງສອງຢ່າງນີ້ຕ່າງກໍອາໄສປັດໃຈເກີດຂຶ້ນ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໃຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ຊາດອາໄສປັດໃຈເປັນໄປ ຊະຣາແລະມໍຣະນະອາໄສຊາດເກີດຂຶ້ນ ແມ່ນທຳທັງສອງແນວນີ້ຕ່າງກໍອາໄສປັດໃຈເກີດຂຶ້ນ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໃຈວ່າ ອະວິດຊາເປັນປັດໃຈ ສັງຂານເກີດຂຶ້ນຍ້ອນປັດໃຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໃຈ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໃຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ອະວິດຊາເປັນປັດໃຈ ສັງຂານເກີດຂຶ້ນຍ້ອນປັດໃຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໃຈ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໃຈວ່າ ສັງຂານເປັນປັດໃຈ ວິນຍານເກີດຂຶ້ນຍ້ອນປັດໃຈ ຯລຯ ວິນຍານເປັນປັດໃຈ ນາມຮູບເກີດຂຶ້ນຍ້ອນປັດໃຈ ຯລຯ ນາມຮູບເປັນປັດໃຈ ສະລາຍະຕະນະເກີດຂຶ້ນຍ້ອນປັດໃຈ ຯລຯ ສະລາຍະຕະນະເປັນປັດໃຈ ຜັດສະເກີດຂຶ້ນຍ້ອນປັດໃຈ ຯລຯ ຜັດສະເປັນປັດໃຈ ເວທະນາເກີດຂຶ້ນຍ້ອນປັດໃຈ ຯລຯ ເວທະນາເປັນປັດໃຈ ຕັນຫາເກີດຂຶ້ນຍ້ອນປັດໃຈ ຯລຯ ຕັນຫາເປັນປັດໃຈ ອຸປາທານເກີດຂຶ້ນຍ້ອນປັດໃຈ ຯລຯ ອຸປາທານເປັນປັດໃຈ ພົບເກີດຂຶ້ນຍ້ອນປັດໃຈ ຯລຯ ພົບເປັນປັດໃຈ ຊາດເກີດຂຶ້ນຍ້ອນປັດໃຈ ຯລຯ ຊາດເປັນປັດໃຈ ຊະຣາແລະມໍຣະນະເກີດຂຶ້ນຍ້ອນປັດໃຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໃຈ ຊື່ວ່າທຳມັດຖິຕິຍານ

ປັນຍາໃນການກຳນົດປັດໃຈວ່າ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີ ຊາດເປັນປັດໃຈ ຊະຣາແລະມໍຣະນະເກີດຂຶ້ນຍ້ອນປັດໃຈ ແມ່ນທຳທັງສອງແນວນີ້ຕ່າງກໍເກີດຂຶ້ນຍ້ອນປັດໃຈ ຊື່ວ່າທຳມັດຖິຕິຍານ

[໔໗] ໃນກຳພົບກ່ອນ ຄວາມຫຼົງເປັນອະວິດຊາ ກຳເປັນເຄື່ອງປະມວນມາເປັນສັງຂານ ຄວາມຕິດໃຈເປັນຕັນຫາ ຄວາມຍຶດໝັ້ນເປັນອຸປາທານ ເຈຕະນາເປັນພົບ ທຳ ໕ ປະການນີ້ໃນກຳພົບກ່ອນ ຍ່ອມເປັນໄປຍ້ອນປັດໃຈແຫ່ງປະຕິສົນທິໃນພົບປັດຈຸບັນນີ້ໃນພົບປັດຈຸບັນນີ້ ປະຕິສົນທິເປັນວິນຍານ ຄວາມກ້າວລົງເປັນນາມຮູບ ປະສາດເປັນອາຍະຕະນະ ສ່ວນທີ່ຖືກຕ້ອງເປັນຜັດສະ ການສະເຫວີຍອາລົມເປັນເວທະນາ ທຳ ໕ ປະການນີ້ໃນພົບປັດຈຸບັນ ຍ່ອມເປັນໄປ

ຍ້ອນປັດໄຈແຫ່ງກຳທີ່ເຮັດໄວ້ໃນພົບກ່ອນ ຍ້ອນອາຍະຕະນະທັງຫຼາຍໃນພົບນີ້ສຸກຮອບ ຄວາມຫຼົງເປັນອະວິດຊາ ກຳເປັນເຄື່ອງປະມວນມາເປັນສັງຂານ ຄວາມຕິດໃຈເປັນຕັນຫາ ຄວາມຢຶດໝັ້ນເປັນອຸປາທານ ເຈຕະນາເປັນພົບ ທຳ ໕ ປະການນີ້ໃນກຳພົບນີ້ ຍ່ອມເປັນໄປຍ້ອນປັດໄຈແຫ່ງປະຕິສົນທິໃນອະນາຄົດຕະການ ປະຕິສົນທິໃນອະນາຄົດຕະການເປັນວິນຍານ ຄວາມກ້າວລົງເປັນນາມຮູບ ປະສາດເປັນອາຍະຕະນະ ສ່ວນທີ່ຖືກຕ້ອງເປັນຜັດສະ ການສະເຫວີຍອາລົມເປັນເວທະນາ ທຳ ໕ ປະການ ນີ້ໃນພົບປັດຈຸບັນ ໃນອະນາຄົດຕະການ ຍ່ອມເປັນໄປຍ້ອນປັດໄຈແຫ່ງກຳທີ່ເຮັດໄວ້ ໃນພົບນີ້

ພຣະໂຍຄາວະຈອນຍ່ອມຮູ້ ຍ່ອມເຫັນ ຍ່ອມຮູ້ຊັດແຈ້ງ ຍ່ອມຮູ້ແຈ້ງສັງເຂບ ໔ ການ ມີປະຕິດຈະສະມຸບບາດອັນມີສົນທິ ໓ ດ້ວຍອາການ ໒໐ ນີ້ ດ້ວຍປະການດັ່ງນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກຳນົດປັດໄຈ ຊື່ວ່າທຳມັດຖິຕິຍານ

**ທຳມັດຖິຕິຍານນິດເທດທີ ໔ ຈົບ**

# ໕. ສຳມະສະນະຍານນິດເທດ

## ສະແດງສຳມະສະນະຍານ

[໔໗] ປັນຍາໃນການຫຍໍ້ທຳທັງຫຼາຍ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ແລ້ວກຳນົດໄວ້ ຊື່ວ່າສຳມະສະນະຍານ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດຮູບທຸກຢ່າງທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນເປັນພາຍໃນກໍຕາມ ເປັນພາຍນອກກໍຕາມ ຫຍາບກໍຕາມ ລະອຽດກໍຕາມ ຊົ່ວກໍຕາມ ປະນີດກໍຕາມ ມີໃນບ່ອນໄກກໍຕາມ ມີໃນບ່ອນໃກ້ກໍຕາມ ໂດຍຄວາມບໍ່ທ່ຽງ ການກຳນົດນີ້ ຊື່ວ່າ ສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍຄວາມເປັນທຸກ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍຄວາມເປັນອະນັດຕາ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ

ພຣະໂຍຄາວະຈອນກຳນົດເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ

ພຣະໂຍຄາວະຈອນກຳນົດວິນຍານທຸກຢ່າງທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນເປັນ ພາຍໃນກໍຕາມ ເປັນພາຍນອກກໍຕາມ ຫຍາບກໍຕາມ ລະອຽດກໍຕາມ ຊົ່ວກໍຕາມ ປະນີດກໍຕາມ ມີໃນບ່ອນໄກກໍຕາມ ມີໃນບ່ອນໃກ້ກໍຕາມ ໂດຍຄວາມບໍ່ທ່ຽງ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍຄວາມເປັນທຸກ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍຄວາມເປັນ ອະນັດຕາ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ

ພຣະໂຍຄາວະຈອນກຳນົດຈັກຂຸທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ໂດຍຄວາມບໍ່ທ່ຽງ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ຯລຯ

ພຣະໂຍຄາວະຈອນກຳນົດຊະຣາແລະມໍຣະນະທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ໂດຍຄວາມບໍ່ທ່ຽງ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍ ຄວາມເປັນທຸກ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ ກຳນົດໂດຍຄວາມເປັນ ອະນັດຕາ ການກຳນົດນີ້ ຊື່ວ່າສຳມະສະນະຍານຢ່າງໜຶ່ງ

ປັນຍາໃນການຫຍໍ້ແລ້ວກຳນົດວ່າ ຮູບທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຊື່ວ່າບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ຊື່ວ່າເປັນທຸກ ຍ້ອນມີສະພາວະເປັນໄພ ຊື່ວ່າເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດວ່າ ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ

ປັນຍາໃນການຫຍໍ້ແລ້ວກຳນົດວ່າ ຈັກຂຸ ຯລຯ ຊະຣາ ແລະມໍຣະນະທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຊື່ວ່າບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ຊື່ວ່າເປັນທຸກ ຍ້ອນມີສະພາວະເປັນໄພ ຊື່ວ່າເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດຮູບທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນວ່າ ບໍ່ທ່ຽງ ອັນປັດໄຈປຸງແຕ່ງ ອາໄສກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ເສື່ອມໄປເປັນທຳມະດາ ຄາຍອອກເປັນທຳມະດາ ດັບໄປເປັນທຳມະດາ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ

ປັນຍາໃນການຫຍໍ້ແລ້ວກຳນົດຈັກຂຸ ຯລຯ ຊະຣາແລະມໍລະນະ ທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນວ່າ ບໍ່ທ່ຽງ ອັນປັດໄຈປຸງແຕ່ງ ອາໄສກັນເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ເສື່ອມໄປເປັນທຳມະດາ ຄາຍອອກເປັນທຳມະດາ ດັບໄປເປັນທຳມະດາ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍຣະນະຈຶ່ງມີ ເມື່ອຊາດບໍ່ມີ ຊະຣາແລະມໍຣະນະກໍບໍ່ມີ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີວ່າ ຍ້ອນຊາດເປັນປັດໄຈ ຊະຣາແລະມໍຣະນະຈຶ່ງມີ ເມື່ອຊາດບໍ່ມີ ຊະຣາແລະມໍຣະນະກໍບໍ່ມີ ຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດວ່າ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ເມື່ອພົບບໍ່ມີ ຊາດກໍບໍ່ມີ ຯລຯ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ເມື່ອອຸປາທານບໍ່ມີ ພົບກໍບໍ່ມີ ຯລຯ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ເມື່ອຕັນຫາບໍ່ມີ ອຸປາທານກໍບໍ່ມີ ຯລຯ ຍ້ອນເວທະນາເປັນປັດໄຈ

ຕັນຫາຈຶ່ງມີ ເມື່ອເວທະນາບໍ່ມີ ຕັນຫາກໍບໍ່ມີ ຯລຯ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ເມື່ອຜັດສະບໍ່ມີ ເວທະນາກໍບໍ່ມີ ຯລຯ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ເມື່ອສະລາຍະຕະນະບໍ່ມີ ຜັດສະກໍບໍ່ມີ ຯລຯ ຍ້ອນນາມຮູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ເມື່ອນາມຮູບບໍ່ມີ ສະລາຍະຕະນະກໍບໍ່ມີ ຯລຯ ຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ ເມື່ອວິນຍານບໍ່ມີນາມຮູບກໍບໍ່ມີ ຯລຯ ຍ້ອນສັງຂານເປັນປັດໄຈ ວິນຍານ ຈຶ່ງມີ ເມື່ອສັງຂານບໍ່ມີ ວິນຍານກໍບໍ່ມີ ຯລຯ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ເມື່ອອະວິດຊາບໍ່ມີ ສັງຂານກໍບໍ່ມີຊື່ວ່າສຳມະສະນະຍານ

ປັນຍາໃນການຫຍໍ້ແລ້ວກຳນົດ ໃນອະດີດຕະການກໍດີ ໃນອະນາຄົດຕະການກໍດີວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ເມື່ອອະວິດຊາບໍ່ມີ ສັງຂານກໍບໍ່ມີ ຊື່ວ່າສຳມະສະນະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການຫຍໍ້ທຳທັງຫຼາຍທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນແລ້ວກຳນົດໄວ້ ຊື່ວ່າສຳມະສະນະຍານ

**ສຳມະສະນະຍານນິດເທດທີ ໕ ຈົບ**

## ໗. ອຸທະຍັບພະຍະຍານນິດເທດ

### ສະແດງອຸທະຍັບພະຍະຍານ

[໔໙] ປັນຍາໃນການພິຈາລະນາເຫັນຄວາມຜັນປ່ຽນແຫ່ງທຳທັງຫຼາຍທີ່ເປັນປັດຈຸບັນຊື່ວ່າອຸທະຍັບພະຍານຸປັດສະນາຍານ ເປັນແນວໃດ?

ຄື ຮູບທີ່ເກີດແລ້ວເປັນປັດຈຸບັນ ລັກສະນະຄວາມບັງເກີດແຫ່ງຮູບນັ້ນ ຊື່ວ່າຄວາມເກີດຂຶ້ນ ລັກສະນະຄວາມຜັນປ່ຽນໄປ (ແຫ່ງຮູບນັ້ນ) ຊື່ວ່າຄວາມເສື່ອມ ປັນຍາທີ່ພິຈາລະນາເຫັນດັ່ງນີ້ ຊື່ວ່າ ອະນຸປັດສະນາຍານ

ເວທະນາທີ່ເກີດແລ້ວ ຯລຯ ສັນຍາທີ່ເກີດແລ້ວ ຯລຯ ສັງຂານທີ່ເກີດແລ້ວ ຯລຯ ວິນຍານ ທີ່ເກີດແລ້ວ ຯລຯ

ຈັກຂຸທີ່ເກີດແລ້ວ ຯລຯ ພົບທີ່ເກີດແລ້ວ ເປັນປັດຈຸບັນ ລັກສະນະຄວາມບັງເກີດແຫ່ງພົບນັ້ນ ຊື່ວ່າຄວາມເກີດຂຶ້ນ ລັກສະນະຄວາມຜັນປ່ຽນໄປ (ແຫ່ງພົບນັ້ນ) ຊື່ວ່າຄວາມເສື່ອມປັນຍາທີ່ພິຈາລະນາເຫັນດັ່ງນີ້ ຊື່ວ່າອະນຸປັດສະນາຍານ

[໕໐] ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງປັນຈະຂັນ ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະເທົ່າໃດ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງປັນຈະຂັນ ຍ່ອມເຫັນລັກສະນະ ໒໕ ປະການ ເມື່ອເຫັນຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະ ໒໕ ປະການ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະ ໕໐ ປະການ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະເທົ່າໃດ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ຯລຯ ແຫ່ງສັນຍາຂັນ ຯລຯ ແຫ່ງສັງຂານຂັນ ຯລຯ ແຫ່ງວິນຍານຂັນ ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເສື່ອມ (ແຫ່ງເວທະນາຂັນ ຯລຯ ແຫ່ງສັນຍາຂັນ ຯລຯ ແຫ່ງສັງຂານຂັນ ຯລຯ ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະເທົ່າໃດ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ຍ່ອມເຫັນລັກສະນະ ໕ ປະການ ເມື່ອເຫັນຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະ ໕ ປະການ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະ ໑໐ ປະການ ເມື່ອເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ຯລຯ ແຫ່ງສັນຍາຂັນ ຯລຯ ແຫ່ງສັງຂານຂັນ ຯລຯ ແຫ່ງວິນຍານຂັນ ຍ່ອມເຫັນລັກສະນະ ໕ ປະການ ເມື່ອເຫັນຄວາມເສື່ອມ (ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະ ໕ ປະການ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະ ໑໐ ປະການ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອະວິດຊາເກີດ ຮູບຈຶ່ງເກີດ
໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນຕັນຫາເກີດ ຮູບຈຶ່ງເກີດ
໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນກຳເກີດ ຮູບຈຶ່ງເກີດ
໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອາຫານເກີດ ຮູບຈຶ່ງເກີດ
໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມບັງເກີດ ກໍຍ່ອມເຫັນຄວາມເກີດຂຶ້ນແຫ່ງຮູບຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງຮູບຂັນ ຍ່ອມເຫັນລັກສະນະ ໕ ປະການນີ້

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງຮູບຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ຮູບຈຶ່ງດັບ

໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງຮູບຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນຕັນຫາດັບ ຮູບຈຶ່ງດັບ

໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງຮູບຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນກຳດັບ ຮູບຈຶ່ງດັບ

໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງຮູບຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນອາຫານດັບ ຮູບຈຶ່ງດັບ

໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມຜັນປ່ຽນ ກໍຍ່ອມເຫັນຄວາມເສື່ອມແຫ່ງຮູບຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເສືອມແຫ່ງຮູບຂັນ ຍ່ອມເຫັນລັກສະນະ ໕ ປະການນີ້ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງຮູບຂັນ) ຍ່ອມເຫັນລັກສະນະ ໑໐ ປະການນີ້

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ໂດຍຄວາມເກີດຂຶ້ນ ແຫ່ງປັດໄຈວ່າ ຍ້ອນອະວິດຊາເກີດ ເວທະນາຈຶ່ງເກີດ

໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ໂດຍຄວາມເກີດຂຶ້ນ ແຫ່ງປັດໄຈວ່າ ຍ້ອນຕັນຫາເກີດ ເວທະນາຈຶ່ງເກີດ

໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ໂດຍຄວາມເກີດຂຶ້ນ ແຫ່ງປັດໄຈວ່າ ຍ້ອນກຳເກີດ ເວທະນາຈຶ່ງເກີດ

໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ໂດຍຄວາມເກີດຂຶ້ນ ແຫ່ງປັດໄຈວ່າ ຍ້ອນຜັດສະເກີດ ເວທະນາຈຶ່ງເກີດ

໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມບັງເກີດ ກໍຍ່ອມເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງເວທະນາຂັນ ຍ່ອມເຫັນລັກສະນະ ໕ ປະການນີ້

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມ (ແຫ່ງເວທະນາຂັນ) ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງເວທະນາຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ເວທະນາຈຶ່ງດັບ

໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງເວທະນາຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນຕັນຫາດັບ ເວທະນາຈຶ່ງດັບ

໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງເວທະນາຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນກຳດັບ ເວທະນາຈຶ່ງດັບ

໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງເວທະນາຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນຜັດສະດັບ ເວທະນາຈຶ່ງດັບ

໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມຜັນປ່ຽນ ກໍຍ່ອມເຫັນຄວາມເສື່ອມແຫ່ງເວທະນາຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມແຫ່ງເວທະນາຂັນ ຍ່ອມເຫັນລັກສະນະ ໕ ປະການນີ້ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງເວທະນາຂັນ) ຍ່ອມເຫັນລັກສະນະ ໑໐ ປະການນີ້

ພຣະໂຍຄາວະຈອນ ເມື່ອເຫັນຄວາມເກີດຂຶ້ນແຫ່ງສັນຍາຂັນ ຯລຯ ແຫ່ງສັງຂານຂັນ ຯລຯ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອະວິດຊາເກີດ ວິນຍານຈຶ່ງເກີດ

໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນຕັນຫາເກີດ ວິນຍານຈຶ່ງເກີດ

໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນກຳເກີດ ວິນຍານຈຶ່ງເກີດ

໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ໂດຍຄວາມເກີດຂຶ້ນແຫ່ງປັດໄຈ ວ່າ ຍ້ອນນາມຮູບເກີດ ວິນຍານຈຶ່ງເກີດ

໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມບັງເກີດ ກໍຍ່ອມເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງວິນຍານຂັນ ຍ່ອມເຫັນລັກສະນະ ໕ ປະການນີ້

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມ (ແຫ່ງສັນຍາຂັນ ໆລໆ ແຫ່ງສັງຂານຂັນ ໆລໆ)

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມ (ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະ ໕ ປະການ ອັນໃດແດ່ ຄື

໑. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງວິນຍານຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ວິນຍານຈຶ່ງດັບ
໒. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງວິນຍານຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນຕັນຫາດັບ ວິນຍານຈຶ່ງດັບ
໓. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງວິນຍານຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນກຳດັບ ວິນຍານຈຶ່ງດັບ
໔. ພຣະໂຍຄາວະຈອນຍ່ອມເຫັນຄວາມເສື່ອມແຫ່ງວິນຍານຂັນ ໂດຍຄວາມດັບແຫ່ງປັດໄຈວ່າ ຍ້ອນນາມຮູບດັບ ວິນຍານຈຶ່ງດັບ
໕. ພຣະໂຍຄາວະຈອນແມ່ນເມື່ອເຫັນລັກສະນະແຫ່ງຄວາມຜັນປ່ຽນ ກໍຍ່ອມເຫັນຄວາມເສື່ອມແຫ່ງວິນຍານຂັນ

ພຣະໂຍຄາວະຈອນເມື່ອເຫັນຄວາມເສື່ອມແຫ່ງວິນຍານຂັນ ຍ່ອມເຫັນລັກສະນະ ໕ ປະການນີ້ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງວິນຍານຂັນ) ຍ່ອມເຫັນລັກສະນະ ໑໐ ປະການນີ້

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງປັນຈະຂັນ ຍ່ອມເຫັນລັກສະນະ ໒໕ ປະການນີ້ ເມື່ອເຫັນຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະ ໒໕ ປະການນີ້ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະ ໕໐ ປະການນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນຄວາມຜັນປ່ຽນແຫ່ງທຳທັງຫຼາຍ ທີ່ເປັນປັດຈຸບັນ ຊື່ວ່າອຸທະຍັບພະຍານຸປັດສະນາຍານ

ຮູບຂັນມີອາຫານເປັນເຫດເກີດ ຂັນທີ່ເຫຼືອຄືເວທະນາຂັນ ສັນຍາຂັນ ສັງຂານຂັນມີຜັດສະເປັນເຫດເກີດ ວິນຍານຂັນມີນາມຮູບເປັນເຫດເກີດ

**ອຸທະຍັບພະຍະຍານນິດເທດທີ ໖ ຈົບ**

# ກ. ພັງຄານຸປັດສະນາຍານນິດເທດ

## ສະແດງພັງຄານຸປັດສະນາຍານ

[໕໑] ປັນຍາໃນການພິຈາລະນາອາລົມແລ້ວພິຈາລະນາເຫັນຄວາມດັບ ຊື່ວ່າ ວິປັດສະນາຍານ ເປັນແນວໃດ?

ຄື ຈິດມີຮູບເປັນອາລົມເກີດຂຶ້ນແລ້ວຍ່ອມດັບໄປ ພຣະໂຍຄາວະຈອນພິຈາລະນາອາລົມນັ້ນແລ້ວ ພິຈາລະນາເຫັນຄວາມດັບໄປແຫ່ງຈິດນັ້ນ

ພິຈາລະນາເຫັນເປັນແນວໃດ? ຊື່ວ່າພິຈາລະນາເຫັນ

ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຢຶດຖື

[໕໘] ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິ (ຄວາມຍິນດີ) ໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະ (ຄວາມຢຶດຖື) ໄດ້

ຈິດມີເວທະນາເປັນອາລົມ ฯລฯ ຈິດມີສັນຍາເປັນອາລົມ ฯລฯ ຈິດມີສັງຂານເປັນອາລົມ ฯລฯ ຈິດມີວິນຍານເປັນອາລົມ ฯລฯ

ຈິດມີຈັກຂຸເປັນອາລົມ ฯລฯ ຈິດມີຊະຣາ ແລະມໍຣະນະເປັນອາລົມເກີດຂຶ້ນແລ້ວຍ່ອມດັບໄປ ພຣະໂຍຄາວະຈອນພິຈາລະນາອາລົມນັ້ນແລ້ວ ພິຈາລະນາເຫັນຄວາມດັບໄປແຫ່ງຈິດນັ້ນ

ພິຈາລະນາເຫັນເປັນແນວໃດ? ຊື່ວ່າພິຈາລະນາເຫັນ

ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຢຶດຖື

ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ

ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້

ການກ້າວລົງສູ່ອາລົມ ການຫຼີກໄປດ້ວຍປັນຍາ
ການຄຳນຶງເຖິງທີ່ມີກຳລັງ ຊື່ວ່າປະຕິສັງຂາວິປັດສະນາ
ການກຳນົດທຳ ໒ ປະການ
ວ່າມີສະພາວະແນວດຽວກັນກັບອາລົມປັດຈຸບັນ
ຄວາມນ້ອມຈິດໄປໃນຄວາມດັບ ຊື່ວ່າລັກຂະນະວິປັດສະນາ
ການທີ່ພຣະໂຍຄາວະຈອນພິຈາລະນາອາລົມແລ້ວ
ພິຈາລະນາເຫັນຄວາມດັບແຫ່ງຈິດ
ແລະຄວາມຜາກົດໂດຍສູນຍະຕະ
ຊື່ວ່າອະທິປັນຍາວິປັດສະນາ
ພຣະໂຍຄາວະຈອນຜູ້ສະຫຼາດໃນອະນຸປັດສະນາ ໓
ແລະວິປັດສະນາ ໔ ຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ
ຍ້ອນເປັນຜູ້ສະຫຼາດໃນຄວາມຜາກົດ ໓ ປະການ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາອາລົມແລ້ວພິຈາລະນາເຫັນຄວາມດັບໄປຊື່ວ່າວິປັດສະນາຍານ

**ພັງຄານຸປັດສະນາຍານນິດເທດທີ ໗ ຈົບ**

# ໘. ອາທີນະວະຍານນິດເທດ

## ສະແດງອາທີນະວະຍານ

[໕໓] ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພ ຊື່ວ່າ ອາທີນະວະຍານເປັນແນວໃດ?

ຄື ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມເກີດຂຶ້ນເປັນໄພຊື່ວ່າອາທີນະວະຍານ ฯລฯ ຄວາມເປັນໄປເປັນໄພ ฯລฯ ນິມິດເປັນໄພ ກຳເປັນເຄື່ອງປະມວນມາເປັນໄພ ฯລฯ ປະຕິສົນທິເປັນໄພ ฯລฯ ຄະຕິເປັນໄພ ฯລฯ ຄວາມບັງເກີດເປັນໄພ ฯລฯ ຄວາມອຸບັດເປັນໄພ ฯລฯ ຄວາມເກີດເປັນໄພ ฯລฯ ຄວາມແກ່ເປັນໄພ ฯລฯ ຄວາມເຈັບໄຂ້ເປັນໄພ ฯລฯ ຄວາມຕາຍເປັນໄພ ฯລฯ ຄວາມເສົ້າໂສກເປັນໄພ ฯລฯ ຄວາມລຳພັນເປັນໄພ

ໆລໆ ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມຄັບແຄ້ນໃຈເປັນໄພ ຊື່ວ່າອາທີນະວະຍານ

ຍານໃນສັນຕິບົດວ່າ ຄວາມບໍ່ເກີດຂຶ້ນປອດໄພ ໆລໆ ຄວາມບໍ່ເປັນໄປປອດໄພ ໆລໆ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈປອດໄພ

ຍານໃນສັນຕິບົດວ່າ ຄວາມເກີດຂຶ້ນເປັນໄພ ໆລໆ ຄວາມບໍ່ເກີດຂຶ້ນປອດໄພ ໆລໆ ຄວາມເປັນໄປເປັນໄພ ໆລໆ ຄວາມບໍ່ເປັນໄປປອດໄພ ໆລໆ ຄວາມຄັບແຄ້ນໃຈເປັນໄພ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈປອດໄພ

ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມເກີດຂຶ້ນເປັນທຸກ ຊື່ວ່າອາທີນະວະຍານ ໆລໆ ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມຄັບແຄ້ນໃຈເປັນທຸກ ຊື່ວ່າ ອາທີນະວະຍານ

ຍານໃນສັນຕິບົດວ່າ ຄວາມບໍ່ເກີດຂຶ້ນເປັນສຸກ ໆລໆ ຄວາມບໍ່ເປັນໄປເປັນສຸກ ໆລໆ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈເປັນສຸກ

ຍານໃນສັນຕິບົດວ່າ ຄວາມເກີດຂຶ້ນເປັນທຸກ ໆລໆ ຄວາມບໍ່ເກີດຂຶ້ນເປັນສຸກ ໆລໆ ຄວາມເປັນໄປເປັນທຸກ ໆລໆ ຄວາມບໍ່ເປັນໄປເປັນສຸກ ໆລໆ ຄວາມຄັບແຄ້ນໃຈເປັນທຸກ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈເປັນສຸກ

ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມເກີດຂຶ້ນເປັນອາມິດ ຊື່ວ່າອາທີນະວະຍານ ໆລໆ ຄວາມເປັນໄປເປັນອາມິດ ໆລໆ ປັນຍາໃນການ(ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມຄັບແຄ້ນໃຈເປັນອາມິດ ຊື່ວ່າ ອາທີນະວະຍານ

ຍານໃນສັນຕິບົດວ່າ ຄວາມບໍ່ເກີດຂຶ້ນບໍ່ເປັນອາມິດ ໆລໆ ຄວາມບໍ່ເປັນໄປບໍ່ເປັນອາມິດ ໆລໆ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈບໍ່ເປັນອາມິດ

ຍານໃນສັນຕິບົດວ່າ ຄວາມເກີດຂຶ້ນເປັນອາມິດ ໆລໆ ຄວາມບໍ່ເກີດຂຶ້ນບໍ່ເປັນອາມິດ ໆລໆ ຄວາມເປັນໄປເປັນອາມິດ ໆລໆ ຄວາມບໍ່ເປັນໄປບໍ່ເປັນອາມິດ ໆລໆ ຄວາມຄັບແຄ້ນໃຈເປັນອາມິດ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈບໍ່ເປັນອາມິດ

ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມເກີດຂຶ້ນເປັນສັງຂານ ຊື່ວ່າອາທີນະວະຍານ ໆລໆ ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພວ່າ ຄວາມຄັບແຄ້ນໃຈເປັນສັງຂານ ຊື່ວ່າ ອາທີນະວະຍານ

ຍານໃນສັນຕິບົດວ່າ ຄວາມບໍ່ເກີດຂຶ້ນເປັນນິບພານ ໆລໆ ຄວາມບໍ່ເປັນໄປເປັນນິບພານ ໆລໆ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈເປັນນິບພານ

ຍານໃນສັນຕິບົດວ່າ ຄວາມເກີດຂຶ້ນເປັນສັງຂານ ฯລฯ ຄວາມບໍ່ເກີດຂຶ້ນເປັນນິບພານ ฯລฯ ຄວາມເປັນໄປເປັນສັງຂານ ฯລฯ ຄວາມບໍ່ເປັນໄປເປັນນິບພານ ฯລฯ ຄວາມຄັບແຄ້ນໃຈເປັນສັງຂານ ຍານໃນສັນຕິບົດວ່າ ຄວາມບໍ່ຄັບແຄ້ນໃຈເປັນນິບພານ

ການທີ່ພຣະໂຍຄາວະຈອນເຫັນຄວາມເກີດຂຶ້ນ
ຄວາມເປັນໄປນິມິດ ກຳເປັນເຄື່ອງປະມວນມາ
ແລະປະຕິສົນທິວ່າເປັນທຸກ
ນີ້ເປັນອາທີນະວະຍານ
ການທີ່ພຣະໂຍຄາວະຈອນເຫັນຄວາມບໍ່ເກີດຂຶ້ນ
ຄວາມບໍ່ເປັນໄປ ອະນິມິດ
ຄວາມບໍ່ມີກຳເປັນເຄື່ອງປະມວນມາ
ແລະຄວາມບໍ່ມີປະຕິສົນທິວ່າເປັນສຸກ
ນີ້ເປັນຍານໃນສັນຕິບົດ
ອາທີນະວະຍານນີ້ຍ່ອມເກີດຂຶ້ນໃນຖານະ ໕
ຍານໃນສັນຕິບົດຍ່ອມເກີດຂຶ້ນໃນຖານະ ໕
ພຣະໂຍຄາວະຈອນຮູ້ຊັດແຈ້ງຍານ ໑໐ ປະການ
ຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ
ຍ້ອນເປັນຜູ້ສະຫຼາດໃນຍານທັງສອງ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພ ຊື່ວ່າອາທີນະວະຍານ

**ອາທີນະວະຍານນິດເທດທີ ໗ ຈົບ**

# ໘. ສັງຂາຣຸເປກຂາຍານນິດເທດ

## ສະແດງສັງຂາຣຸເປກຂາຍານ

[໕໔] ປັນຍາທີ່ປາຖະໜາຈະພົ້ນໄປ ພິຈາລະນາແລະດຳຣົງໝັ້ນຢູ່ ຊື່ວ່າສັງຂາຣຸເປກຂາຍານ ເປັນແນວໃດ?

ຄື ປັນຍາທີ່ປາຖະໜາຈະພົ້ນໄປຈາກຄວາມເກີດຂຶ້ນ ພິຈາລະນາແລະດຳຣົງໝັ້ນຢູ່ ຊື່ວ່າສັງຂາຣຸເປກຂາຍານ ປັນຍາທີ່ປາຖະໜາຈະພົ້ນໄປຈາກຄວາມເປັນໄປ ພິຈາລະນາແລະດຳຣົງ

ໝັ້ນຢູ່ ຊື່ວ່າສັງຂາຣຸເປກຂາຍານ ປັນຍາທີ່ປາຖະໜາຈະພົ້ນໄປຈາກນິມິດ ຯລຯ ຈາກກຳເປັນເຄື່ອງປະມວນມາ ຯລຯ ຈາກປະຕິສົນທິ ຯລຯ ຈາກຄະຕິ ຯລຯ ຈາກຄວາມບັງເກີດ ຯລຯ ຈາກຄວາມອຸບັດ ຯລຯ ຈາກຄວາມເກີດ ຯລຯ ຈາກຄວາມແກ່ ຯລຯ ຈາກຄວາມເຈັບໄຂ້ ຯລຯ ຈາກຄວາມຕາຍ ຯລຯ ຈາກຄວາມເສົ້າໂສກ ຯລຯ ຈາກຄວາມລຳພັນ ຯລຯ ປັນຍາທີ່ປາຖະໜາຈະພົ້ນໄປຈາກຄວາມຄັບແຄ້ນໃຈ ພິຈາລະນາ ແລະດຳຣົງໝັ້ນຢູ່ ຊື່ວ່າ ສັງຂາຣຸເປກຂາຍານ

ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມເກີດຂຶ້ນເປັນ ທຸກ ຊື່ວ່າສັງຂາຣຸເປກຂາຍານ ຯລຯ ຄວາມເປັນໄປເປັນທຸກ ຯລຯ ນິມິດເປັນທຸກ ຯລຯ ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມຄັບແຄ້ນໃຈເປັນທຸກ ຊື່ວ່າສັງຂາຣຸເປກຂາຍານ

ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາ ແລະດຳຣົງໝັ້ນຢູ່ວ່າ ຄວາມເກີດຂຶ້ນເປັນໄພ ຊື່ວ່າສັງຂາຣຸເປກຂາຍານ ຯລຯ ຄວາມເປັນໄປເປັນໄພ ຯລຯ ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມຄັບແຄ້ນໃຈເປັນໄພ ຊື່ວ່າສັງຂາຣຸເປກຂາຍານ

ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມເກີດຂຶ້ນເປັນອາມິດ ຊື່ວ່າສັງຂາຣຸເປກຂາຍານ ຯລຯ ຄວາມເປັນໄປເປັນອາມິດ ຯລຯ ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມຄັບແຄ້ນໃຈເປັນອາມິດ ຊື່ວ່າສັງຂາຣຸເປກຂາຍານ

ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາແລະດຳຣົງໝັ້ນຢູ່ວ່າ ຄວາມເກີດຂຶ້ນເປັນສັງຂານ ຊື່ວ່າສັງຂາຣຸເປກຂາຍານ ຯລຯ ຄວາມເປັນໄປເປັນສັງຂານ ຯລຯ ປັນຍາທີ່ປາຖະໜາຈະພົ້ນໄປພິຈາລະນາ ແລະດຳຣົງໝັ້ນຢູ່ວ່າ ຄວາມຄັບແຄ້ນໃຈເປັນສັງຂານ ຊື່ວ່າສັງຂາຣຸເປກຂາຍານຄວາມເກີດຂຶ້ນເປັນສັງຂານ ຍານເພ່ງເສີຍສັງຂານເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັງຂາຣຸເປກຂາຍານ

ແມ່ນທຳ ໘ ປະການນີ້ ຄື ສັງຂານ ແລະອຸເປກຂາກໍເປັນສັງຂານ ຍານເພ່ງເສີຍສັງຂານເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັງຂາຣຸເປກຂາຍານ

ຄວາມເປັນໄປເປັນສັງຂານ ຍານເພ່ງເສີຍສັງຂານເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ສັງຂາຣຸເປກຂາຍານ ຯລຯ ນິມິດເປັນສັງຂານ ຯລຯ ກຳເປັນເຄື່ອງປະມວນມາເປັນສັງຂານ ຯລຯ ປະຕິສົນທິເປັນສັງຂານ ຯລຯ ຄະຕິເປັນສັງຂານ ຯລຯ ຄວາມບັງເກີດເປັນສັງຂານ ຯລຯ ຄວາມອຸບັດເປັນສັງຂານ ຯລຯ ຄວາມເກີດເປັນສັງຂານ ຯລຯ ຄວາມແກ່ເປັນສັງຂານ ຯລຯ ຄວາມເຈັບໄຂ້ເປັນສັງຂານ ຯລຯ ຄວາມຕາຍເປັນສັງຂານ ຯລຯ ຄວາມເສົ້າໂສກເປັນສັງຂານ ຯລຯ ຄວາມລຳພັນເປັນສັງຂານ ຯລຯ ຄວາມຄັບແຄ້ນໃຈເປັນສັງຂານ ຍານເພ່ງເສີຍສັງຂານເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັງຂາຣຸເປກຂາຍານ

ແມ່ນທຳ ໒ ປະການ ຄື ສັງຂານແລະອຸເປກຂາກໍເປັນສັງຂານ ຍານເພ່ງເສີຍສັງຂານເຫຼົ່ານັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັງຂາຣຸເປກຂາຍານ

[໕໘] ການນ້ອມຈິດໄປໃນສັງຂາຣຸເປກຂາມີດ້ວຍອາການເທົ່າໃດ?

ຄື ການນ້ອມຈິດໄປໃນສັງຂາຣຸເປກຂາມີດ້ວຍອາການ ໘ ຢ່າງ

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນມີດ້ວຍອາການເທົ່າໃດ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະມີດ້ວຍອາການເທົ່າໃດ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງທ່ານຜູ້ປາສະຈາກຣາຄະມີດ້ວຍອາການເທົ່າໃດ

ຄື ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນມີດ້ວຍອາການ ໒ ຢ່າງ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະມີດ້ວຍອາການ ໓ ຢ່າງ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງທ່ານຜູ້ປາສະຈາກຣາຄະມີດ້ວຍອາການ ໓ ຢ່າງ

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນມີດ້ວຍອາການ ໒ ຢ່າງ ອັນໃດແດ່ ຄື

໑. ປຸຖຸຊົນຍ່ອມຍິນດີສັງຂາຣຸເປກຂາ
໒. ປຸຖຸຊົນຍ່ອມເຫັນແຈ້ງສັງຂາຣຸເປກຂາ

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນມີດ້ວຍອາການ ໒ ແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະມີດ້ວຍອາການ ໓ ຢ່າງ ອັນໃດແດ່ ຄື

໑. ພຣະເສຂະຍ່ອມຍິນດີສັງຂາຣຸເປກຂາ
໒. ພຣະເສຂະຍ່ອມເຫັນແຈ້ງສັງຂາຣຸເປກຂາ
໓. ພຣະເສຂະພິຈາລະນາແລ້ວຍ່ອມເຂົ້າຜະລະສະມາບັດ

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະມີດ້ວຍອາການ ໓ ແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງທ່ານຜູ້ປາສະຈາກຣາຄະມີດ້ວຍອາການ ໓ ຢ່າງ ອັນໃດແດ່ ຄື

໑. ທ່ານຜູ້ປາສະຈາກຣາຄະຍ່ອມເຫັນແຈ້ງສັງຂາຣຸເປກຂາ
໒. ທ່ານຜູ້ປາສະຈາກຣາຄະພິຈາລະນາແລ້ວຍ່ອມເຂົ້າຜະລະສະມາບັດ
໓. ທ່ານຜູ້ປາສະຈາກຣາຄະເພ່ງເສີຍໃນສັງຂາຣຸເປກຂານັ້ນແລ້ວ ຍ່ອມຢູ່ດ້ວຍສູນຍະຕະວິຫານສະມາບັດ ອະນິມິດຕະວິຫານສະມາບັດ ຫຼື ອັບປະນິຫິຕະວິຫາຣະສະມາບັດ

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງທ່ານຜູ້ປາສະຈາກຣາຄະມີດ້ວຍອາການ ៦ ແນວນີ້

[໕໘] ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນ ແລະຂອງພຣະເສຂະ ຄື ກັນເປັນແນວໃດ?

ຄື ປຸຖຸຊົນຜູ້ຍິນດີສັງຂາຣຸເປກຂາ ຈິດຍ່ອມເສົ້າໝອງ (ຄວາມເສົ້າໝອງນັ້ນ) ເປັນເຄື່ອງກີດຂວາງຕໍ່ພາວະນາ ເປັນອັນຕະລາຍຕໍ່ປະຕິເວດ ເປັນປັດໄຈແຫ່ງປະຕິສົນທິສືບຕໍ່ໄປ ແມ່ນພຣະເສຂະຜູ້ຍິນດີສັງຂາຣຸເປກຂາ ຈິດກໍຍ່ອມເສົ້າໝອງ (ຄວາມເສົ້າໝອງນັ້ນ) ເປັນເຄື່ອງກີດຂວາງຕໍ່ພາວະນາ ເປັນອັນຕະລາຍຕໍ່ປະຕິເວດໃນມັກຂັ້ນສູງ ເປັນປັດໄຈແຫ່ງປະຕິສົນທິສືບຕໍ່ໄປ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນແລະຂອງພຣະເສຂະ ຄືກັນໂດຍສະພາວະແຫ່ງຄວາມຍິນດີແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຄືກັນເປັນແນວໃດ?

ຄື ປຸຖຸຊົນຍ່ອມເຫັນແຈ້ງສັງຂາຣຸເປກຂາທັງໂດຍຄວາມບໍ່ທ່ຽງ ເປັນທຸກ ແລະເປັນອະນັດຕາ ແມ່ນພຣະເສຂະກໍເຫັນແຈ້ງສັງຂາຣຸເປກຂາທັງໂດຍຄວາມບໍ່ທ່ຽງ ເປັນທຸກ ແລະເປັນອະນັດຕາ ແມ່ນທ່ານຜູ້ປາສະຈາກຣາຄະກໍເຫັນແຈ້ງສັງຂາຣຸເປກຂາທັງໂດຍຄວາມບໍ່ທ່ຽງ ເປັນທຸກ ແລະເປັນອະນັດຕາ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນ ຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຄື ກັນໂດຍສະພາວະແຫ່ງການພິຈາລະນາເຫັນແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນເປັນແນວໃດ?

ຄື ສັງຂາຣຸເປກຂາຂອງປຸຖຸຊົນເປັນກຸສົນ ແມ່ນຂອງພຣະເສຂະກໍເປັນກຸສົນ ແຕ່ຂອງທ່ານ ຜູ້ປາສະຈາກຣາຄະເປັນອັບພະຍາກະຕະ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນໂດຍສະພາວະເປັນກຸສົນ ເປັນອັບພະຍາກະຕະແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນ ຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນເປັນແນວໃດ?

ຄື ສັງຂາຣຸເປກຂາຂອງປຸຖຸຊົນ ບາງເວລາຜາກົດຊັດແຈ້ງ ບາງເວລາບໍ່ຜາກົດຊັດແຈ້ງ ແມ່ນສັງຂາຣຸເປກຂາຂອງພຣະເສຂະ ບາງເວລາກໍຜາກົດຊັດແຈ້ງ ບາງເວລາບໍ່ຜາກົດຊັດ ສັງຂາຣຸເປກຂາຂອງທ່ານຜູ້ປາສະຈາກຣາຄະ ຍ່ອມຜາກົດຊັດແຈ້ງໂດຍສ່ວນດຽວ ການນ້ອມຈິດ

ໄປໃນສັງຂາຣຸເປກຂາຂອງປຸຖຸຊົນ ຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນໂດຍສະພາວະທີ່ຜາກົດກັບສະພາວະທີ່ບໍ່ຜາກົດແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນເປັນແນວໃດ?

ຄື ປຸຖຸຊົນຍ່ອມເຫັນແຈ້ງຍ້ອນເປັນຜູ້ຍັງບໍ່ສຳເລັດກິດຈາກສັງຂາຣຸເປກຂາ ແມ່ນພຣະເສຂະ ຍ່ອມເຫັນແຈ້ງຍ້ອນຍັງບໍ່ສຳເລັດກິດຈາກສັງຂາຣຸເປກຂາ ສ່ວນທ່ານຜູ້ປາສະຈາກຣາຄະຍ່ອມເຫັນແຈ້ງຍ້ອນເປັນຜູ້ສຳເລັດກິດຈາກສັງຂາຣຸເປກຂາ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນ ຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນໂດຍສະພາວະທີ່ສຳເລັດກິດແລ້ວກັບສະພາວະທີ່ຍັງບໍ່ສຳເລັດກິດແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນເປັນແນວໃດ?

ຄື ປຸຖຸຊົນຍ່ອມເຫັນແຈ້ງສັງຂາຣຸເປກຂາເພື່ອລະສັງໂຍດ ໓[១] ເພື່ອຕ້ອງການໄດ້ໂສດາປັດຕິມັກ ພຣະເສຂະຍ່ອມເຫັນແຈ້ງສັງຂາຣຸເປກຂາເພື່ອຕ້ອງການໄດ້ມັກຊັ້ນສູງຂຶ້ນໄປ ຍ້ອນເປັນຜູ້ລະສັງໂຍດ ໓ ໄດ້ແລ້ວ ທ່ານຜູ້ປາສະຈາກຣາຄະຍ່ອມເຫັນແຈ້ງສັງຂາຣຸເປກຂາເພື່ອຕ້ອງການຢູ່ເປັນສຸກໃນປັດຈຸບັນ ຍ້ອນເປັນຜູ້ລະກິເລດທັງປວງໄດ້ແລ້ວ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງປຸຖຸຊົນຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະຕ່າງກັນໂດຍສະພາວະທີ່ລະກິເລດໄດ້ກັບສະພາວະທີ່ຍັງລະກິເລດບໍ່ໄດ້ແນວນີ້

ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນເປັນແນວໃດ?

ຄື ພຣະເສຂະຍິນດີສັງຂາຣຸເປກຂາແດ່ ເຫັນແຈ້ງສັງຂາຣຸເປກຂາແດ່ ພິຈາລະນາແລ້ວເຂົ້າຜະລະສະມາບັດແດ່ ທ່ານຜູ້ປາສະຈາກຣາຄະເຫັນແຈ້ງສັງຂາຣຸເປກຂາແດ່ ພິຈາລະນາແລ້ວເຂົ້າຜະລະສະມາບັດແດ່ ເພ່ງເສີຍສັງຂາຣຸເປກຂານັ້ນແລ້ວຢູ່ດ້ວຍສູນຍະຕະວິຫາຣະສະມາບັດ ອະນິມິດຕະ ວິຫາຣະສະມາບັດ ຫຼື ອັບປະນິຫິຕະວິຫາຣະສະມາບັດ ການນ້ອມຈິດໄປໃນສັງຂາຣຸເປກຂາຂອງພຣະເສຂະ ແລະຂອງທ່ານຜູ້ປາສະຈາກຣາຄະ ຕ່າງກັນໂດຍສະພາວະແຫ່ງວິຫາຣະສະມາບັດແນວນີ້

[໕໗] ສັງຂາຣຸເປກຂາເທົ່າໃດເກີດຂຶ້ນດ້ວຍອຳນາດສະມະຖະ ສັງຂາຣຸເປກຂາເທົ່າໃດເກີດຂຶ້ນດ້ວຍອຳນາດວິປັດສະນາ

ຄື ສັງຂາຣຸເປກຂາ ໘ ຢ່າງເກີດຂຶ້ນດ້ວຍອຳນາດສະມະຖະ ສັງຂາຣຸເປກຂາ ໑໐ ຢ່າງເກີດຂຶ້ນດ້ວຍອຳນາດວິປັດສະນາ

ສັງຂາຣຸເປກຂາ ໘ ຢ່າງ ອັນໃດແດ່ ເກີດຂຶ້ນດ້ວຍອຳນາດສະມະຖະ ຄື

໑. ປັນຍາທີ່ພິຈາລະນານິວອນແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ປະຖົມຊານ ຊື່ວ່າສັງຂາຣຸເປກຂາຍານ
໒. ປັນຍາທີ່ພິຈາລະນາວິຕົກວິຈານແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ທຸຕິຍະຊານ ຊື່ວ່າສັງຂາຣຸເປກຂາຍານ
໓. ປັນຍາທີ່ພິຈາລະນາປິຕິແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ຕະຕິຍະຊານ ຊື່ວ່າສັງຂາຣຸ ເປກຂາຍານ
໔. ປັນຍາທີ່ພິຈາລະນາສຸກແລະທຸກແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ຈະຕຸດຖະຊານ ຊື່ວ່າສັງຂາຣຸເປກຂາຍານ
໕. ປັນຍາທີ່ພິຈາລະນາຣູບສັນຍາ ປະຕິຄະສັນຍານາ ນັດຕະສັນຍາ ແລ້ວດຳຣົງໝັ້ນຢູ່ເພື່ອຕ້ອງການໄດ້ອາກາສານັນຈາຍະຕະນະສະມາບັດ ຊື່ວ່າສັງຂາຣຸເປກຂາຍານ
໖. ປັນຍາທີ່ພິຈາລະນາອາກາສານັນຈາຍະຕະນະສັນຍາ ແລ້ວດຳຣົງໝັ້ນຢູ່ເພື່ອຕ້ອງການໄດ້ວິນຍານັນຈາຍະຕະນະສະມາບັດ ຊື່ວ່າສັງຂາຣຸເປກຂາຍານ
໗. ປັນຍາທີ່ພິຈາລະນາວິນຍານັນຈາຍະຕະນະສັນຍາ ແລ້ວດຳຣົງໝັ້ນຢູ່ເພື່ອຕ້ອງການໄດ້ອາກິນຈັນຍາຍະຕະນະສະມາບັດ ຊື່ວ່າສັງຂາຣຸເປກຂາຍານ
໘. ປັນຍາທີ່ພິຈາລະນາອາກິນຈັນຍາຍະຕະນະສັນຍາແລ້ວ ດຳຣົງໝັ້ນຢູ່ເພື່ອຕ້ອງການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າ ສັງຂາຣຸເປກຂາຍານ

ສັງຂາຣຸເປກຂາ ໘ ແນວນີ້ເກີດຂຶ້ນດ້ວຍອຳນາດສະມະຖະ
ສັງຂາຣຸເປກຂາ ໑໐ ຢ່າງ ອັນໃດແດ່ ເກີດຂຶ້ນດ້ວຍອຳນາດວິປັດສະນາ ຄື

໑. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ຄວາມເປັນໄປນິມິດ ກຳເປັນເຄື່ອງປະມວນມາ ປະຕິສົນທິຄະຕິ ຄວາມບັງເກີດ ຄວາມອຸບັດ ຄວາມເກີດ ຄວາມແກ່ ຄວາມເຈັບໄຂ້ ຄວາມຕາຍ ຄວາມເສົ້າໂສກ ຄວາມລຳພັນ ຄວາມຄັບແຄ້ນໃຈແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ໂສດາປັດຕິມັກ ຊື່ວ່າສັງຂາຣຸເປກຂາຍານ
໒. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ຯລຯ ເພື່ອຕ້ອງການໄດ້ໂສດາປັດຕິຜົນສະມາບັດ ຊື່ວ່າສັງຂາຣຸເປກຂາຍານ
໓. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ຯລຯ ເພື່ອຕ້ອງການໄດ້ສະກະທາຄາມິມັກ ຊື່ວ່າສັງຂາຣຸເປກຂາຍານ

໔. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ສະກະທາຄາມິຜົນສະມາບັດ ຊື່ວ່າສັງຂາຣຸເປກຂາຍານ

໕. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ອະນາຄາມິມັກ ຊື່ວ່າສັງຂາຣຸເປກຂາຍານ

໖. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ອະນາຄາມິຜົນສະມາບັດ ຊື່ວ່າສັງຂາຣຸເປກຂາຍານ

໗. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ອະຣະຫັດຕະມັກ ຊື່ວ່າສັງຂາຣຸເປກຂາຍານ

໘. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ອະຣະຫັດຕະຜົນສະມາບັດ ຊື່ວ່າສັງຂາຣຸເປກຂາຍານ

໙. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ໆລໆ ເພື່ອຕ້ອງການໄດ້ສູນຍະຕະວິຫາຣະສະມາບັດ ຊື່ວ່າສັງຂາຣຸເປກຂາຍານ

໑໐. ປັນຍາທີ່ພິຈາລະນາຄວາມເກີດຂຶ້ນ ຄວາມເປັນໄປ ນິມິດ ກຳເປັນເຄື່ອງປະມວນມາ ປະຕິສົນທິ ຄະຕິ ຄວາມບັງເກີດ ຄວາມອຸບັດ ຄວາມເກີດ ຄວາມແກ່ ຄວາມເຈັບໄຂ້ ຄວາມຕາຍ ຄວາມເສົ້າໂສກ ຄວາມລຳພັນ ຄວາມຄັບແຄ້ນໃຈ ແລ້ວດຳຣົງໝັ້ນຢູ່ ເພື່ອຕ້ອງການໄດ້ອະນິມິດຕະວິຫາຣະສະມາບັດ ຊື່ວ່າສັງຂາຣຸເປກຂາຍານ

ສັງຂາຣຸເປກຂາຍານ ໑໐ ຢ່າງນີ້ເກີດຂຶ້ນດ້ວຍອຳນາດວິປັດສະນາ

[໕໗] ສັງຂາຣຸເປກຂາຝ່າຍກຸສົນມີເທົ່າໃດ ຝ່າຍອະກຸສົນມີເທົ່າໃດ ຝ່າຍອັບພະຍາກະຕະມີເທົ່າໃດ?

ສັງຂາຣຸເປກຂາຝ່າຍກຸສົນມີ ໑໕ ຝ່າຍອັບພະຍາກະຕະມີ ໓ ຝ່າຍອະກຸສົນບໍ່ມີ

ປັນຍາທີ່ພິຈາລະນາແລ້ວດຳຣົງໝັ້ນຢູ່

໗ ປະການເປັນອາລົມຂອງສະມາທິຈິດ

໔ ປະການເປັນອາລົມຂອງປຸຖຸຊົນ

໓ ປະການເປັນອາລົມຂອງພຣະເສຂະ

ແລະ ໓ ປະການເປັນເຫດໃຫ້ຈິດ

ຂອງທ່ານຜູ້ປາສະຈາກຣາຄະຫຼີກໄປ

໗ ປະການເປັນປັດໄຈແກ່ສະມາທິ

໑໐ ປະການເປັນອາລົມແຫ່ງຍານ

ສັງຂາຣຸເປກຂາ ໑໗ ປະການ

ເປັນປັດໃຈແຫ່ງວິໂມກ ໓
ປັນຍາ ໑໗ ປະການນີ້
ອັນພຣະໂຍຄາວະຈອນໃດອົບຮົມແລ້ວ
ພຣະໂຍຄາວະຈອນນັ້ນເປັນຜູ້ສະຫຼາດໃນສັງຂາຣຸເປກຂາ
ຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ປາຖະໜາຈະພົ້ນໄປ ພິຈາລະນາແລະດຳຣົງໝັ້ນຢູ່ ຊື່ວ່າສັງຂາຣຸເປກຂາຍານ

**ສັງຂາຣຸເປກຂາຍານນິດເທດທີ ໙ ຈົບ**

# ໑໐. ໂຄຕະຣະພູຍານນິດເທດ

## ສະແດງໂຄຕະຣະພູຍານ

[໕໙] ປັນຍາໃນການອອກແລະຫຼີກໄປຈາກນິມິດພາຍນອກ ຊື່ວ່າໂຄຕະຣະພູຍານ ເປັນແນວໃດ?

ຄື ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເປັນໄປ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳນິມິດ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳກຳເປັນເຄື່ອງປະມວນມາ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳປະຕິສົນທິ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄະຕິ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມບັງເກີດ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມອຸບັດ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເກີດ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມແກ່ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເຈັບໄຂ້ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມຕາຍ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເສົ້າໂສກ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມລຳພັນ

ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມຄັບແຄ້ນໃຈ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳສັງຂານນິມິດພາຍນອກ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຯລຯ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມດັບຄືນິບພານ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເກີດຂຶ້ນແລ້ວແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳຄວາມເປັນໄປແລ້ວແລ່ນໄປສູ່ຄວາມບໍ່ເປັນໄປ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳນິມິດແລ້ວແລ່ນໄປສູ່ອະນິມິດ ຯລຯ ຊື່ວ່າໂຄຕະຣະພູ ຍ້ອນຄອບງຳສັງຂານນິມິດພາຍນອກແລ້ວແລ່ນໄປສູ່ຄວາມດັບຄືນິບພານ

ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເປັນໄປ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກນິມິດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກກຳເປັນເຄື່ອງປະມວນມາ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກປະຕິສົນທິ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄະຕິ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມບັງເກີດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມອຸບັດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເກີດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມແກ່ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເຈັບໄຂ້ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມຕາຍ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເສົ້າໂສກ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມລຳພັນ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມຄັບແຄ້ນໃຈ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກສັງຂານນິມິດພາຍນອກ

ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມບໍ່ເປັນໄປ ຯລຯ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມດັບຄືນິບພານຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເກີດຂຶ້ນແລ້ວແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເປັນໄປແລ້ວແລ່ນໄປສູ່ຄວາມບໍ່ເປັນໄປ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກນິມິດແລ້ວແລ່ນໄປສູ່ອະນິມິດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກກຳເປັນເຄື່ອງປະມວນມາແລ້ວແລ່ນໄປສູ່ຄວາມບໍ່ມີກຳເປັນເຄື່ອງປະມວນມາ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກປະຕິສົນທິແລ້ວແລ່ນໄປສູ່ຄວາມບໍ່ມີປະຕິສົນທິ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄະຕິແລ້ວແລ່ນໄປສູ່ອະຄະຕິ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມບັງເກີດແລ້ວແລ່ນໄປສູ່ຄວາມບໍ່ບັງເກີດ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມອຸບັດແລ້ວແລ່ນໄປສູ່ຄວາມບໍ່ອຸບັດ

ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເກີດແລ້ວແລ່ນໄປສູ່ຄວາມບໍ່ເກີດ ຊື່ວ່າ ໂຄຕະຣະພູ ຍ້ອນອອກຈາກຄວາມແກ່ແລ້ວແລ່ນໄປສູ່ຄວາມບໍ່ແກ່ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເຈັບໄຂ້ແລ້ວແລ່ນໄປສູ່ຄວາມບໍ່ເຈັບໄຂ້ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມຕາຍແລ້ວແລ່ນໄປສູ່ຄວາມບໍ່ຕາຍ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມເສົ້າໂສກແລ້ວແລ່ນໄປສູ່ຄວາມບໍ່ເສົ້າໂສກ

ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມລຳພັນແລ້ວແລ່ນໄປສູ່ຄວາມບໍ່ລຳພັນ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກຄວາມຄັບແຄ້ນໃຈແລ້ວແລ່ນໄປສູ່ຄວາມບໍ່ຄັບແຄ້ນໃຈ ຊື່ວ່າໂຄຕະຣະພູ ຍ້ອນອອກຈາກສັງຂານນິມິດພາຍນອກແລ້ວແລ່ນໄປສູ່ຄວາມດັບຄືນິບພານ ຊື່ວ່າໂຄຕະຣະພູ ຍ້ອນຫຼີກອອກຈາກຄວາມເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນຫຼີກອອກຈາກຄວາມເປັນໄປ ຯລຯ ຊື່ວ່າໂຄຕະຣະພູ ຍ້ອນຫຼີກອອກຈາກສັງຂານນິມິດພາຍນອກ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມບໍ່ເປັນໄປ ຯລຯ ຊື່ວ່າໂຄຕະຣະພູ ຍ້ອນແລ່ນໄປສູ່ຄວາມດັບຄືນິບພານ ຊື່ວ່າໂຄຕະຣະພູ ຍ້ອນຫຼີກອອກຈາກຄວາມເກີດຂຶ້ນ

ແລ້ວແລ່ນໄປສູ່ຄວາມບໍ່ເກີດຂຶ້ນ ຊື່ວ່າໂຄຕະຣະພູ ຍ້ອນຫຼີກອອກຈາກຄວາມເປັນໄປແລ້ວແລ່ນໄປສູ່ຄວາມບໍ່ເປັນໄປ ໆລໆ ຊື່ວ່າໂຄຕະຣະພູຍ້ອນຫຼີກອອກຈາກສັງຂານນິມິດພາຍນອກແລ້ວແລ່ນໄປສູ່ຄວາມດັບຄືນິບພານ

[໖໐] ໂຄຕະຣະພູທຳເທົ່າໃດເກີດຂຶ້ນດ້ວຍອຳນາດສະມະຖະ ໂຄຕະຣະພູທຳເທົ່າໃດເກີດຂຶ້ນດ້ວຍອຳນາດວິປັດສະນາ

ຄື ໂຄຕະຣະພູທຳ ๘ ປະການເກີດຂຶ້ນດ້ວຍອຳນາດສະມະຖະ ໂຄຕະຣະພູທຳ ໑໐ ປະການເກີດຂຶ້ນດ້ວຍອຳນາດວິປັດສະນາ

ໂຄຕະຣະພູທຳ ๘ ປະການ ອັນໃດແດ່ ເກີດຂຶ້ນດ້ວຍອຳນາດສະມະຖະ ຄື

໑. ຍານທີ່ຄອບງຳນິວອນ ເພື່ອໄດ້ປະຖົມຊານ ຊື່ວ່າໂຄຕະຣະພູ
໒. ຍານທີ່ຄອບງຳວິຕົກວິຈານ ເພື່ອໄດ້ທຸຕິຍະຊານ ຊື່ວ່າໂຄຕະຣະພູ
໓. ຍານທີ່ຄອບງຳປີຕິ ເພື່ອໄດ້ຕະຕິຍະຊານ ຊື່ວ່າໂຄຕະຣະພູ
໔. ຍານທີ່ຄອບງຳສຸກແລະທຸກ ເພື່ອໄດ້ຈະຕຸດຖະຊານ ຊື່ວ່າໂຄຕະຣະພູ
໕. ຍານທີ່ຄອບງຳຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ເພື່ອໄດ້ອາກາສານັນຈາຍະຕະນະສະມາບັດ ຊື່ວ່າໂຄຕະຣະພູ
໖. ຍານທີ່ຄອບງຳອາກາສານັນຈາຍະຕະນະສັນຍາ ເພື່ອໄດ້ວິນຍານັນຈາຍະຕະນະສະມາບັດ ຊື່ວ່າໂຄຕະຣະພູ
໗. ຍານທີ່ຄອບງຳວິນຍານັນຈາຍະຕະນະສັນຍາ ເພື່ອໄດ້ອາກິນຈັນຍາຍະຕະນະສະມາບັດ ຊື່ວ່າ ໂຄຕະຣະພູ
๘. ຍານທີ່ຄອບງຳອາກິນຈັນຍາຍະຕະນະສັນຍາ ເພື່ອໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າໂຄຕະຣະພູ

ໂຄຕະຣະພູທຳ ๘ ປະການນີ້ເກີດຂຶ້ນດ້ວຍອຳນາດສະມະຖະ
ໂຄຕະຣະພູທຳ ໑໐ ປະການ ອັນໃດແດ່ ເກີດຂຶ້ນດ້ວຍອຳນາດວິປັດສະນາ ຄື

໑. ຍານທີ່ຄອບງຳຄວາມເກີດຂຶ້ນ ຄວາມເປັນໄປນິມິດ ກຳເປັນເຄື່ອງປະມວນມາ ປະຕິສົນທິ ຄະຕິ ຄວາມບັງເກີດ ຄວາມອຸບັດ ຄວາມເກີດ ຄວາມແກ່ ຄວາມເຈັບໄຂ້ ຄວາມຕາຍ ຄວາມເສົ້າໂສກ ຄວາມລຳພັນ ຄວາມຄັບແຄ້ນໃຈ ສັງຂານນິມິດພາຍນອກ ເພື່ອໄດ້ໂສດາປັດຕິມັກ ຊື່ວ່າໂຄຕະຣະພູ
໒. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ໂສດາປັດຕິຜົນສະມາບັດ ຊື່ວ່າໂຄຕະຣະພູ

໓. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ສະກະທາຄາມິມັກ ຊື່ວ່າໂຄຕະ ຣະພູ

໔. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ສະກະທາຄາມິຜົນສະມາບັດ ຊື່ວ່າ ໂຄຕະຣະພູ

໕. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ອະນາຄາມິມັກ ຊື່ວ່າໂຄຕະຣະພູ

໖. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ອະນາຄາມິຜົນສະມາບັດ ຊື່ວ່າ ໂຄຕະຣະພູ

໗. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ອະຣະຫັດຕະມັກ ຊື່ວ່າໂຄຕະຣະພູ

໘. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ອະຣະຫັດຕະຜົນສະມາບັດ ຊື່ວ່າ ໂຄຕະຣະພູ

໙. ຍານທີ່ຄອບງຳຄວາມເກີດຂຶ້ນ ໆລໆ ເພື່ອໄດ້ສູນຍະຕະວິຫາຣະສະມາບັດ ຊື່ວ່າ ໂຄຕະຣະພູ

໑໐. ຍານທີ່ຄອບງຳຄວາມເກີດຂຶ້ນ ຄວາມເປັນໄປ ນິມິດ ກຳເປັນເຄື່ອງປະມວນມາ ປະຕິສົນທິ ຄະຕິ ຄວາມບັງເກີດ ຄວາມອຸບັດ ຄວາມເກີດ ຄວາມແກ່ ຄວາມ ເຈັບໄຂ້ ຄວາມຕາຍ ຄວາມເສົ້າໂສກ ຄວາມລຳພັນ ຄວາມຄັບແຄ້ນໃຈ ສັງຂາ ນນິມິດພາຍນອກ ເພື່ອໄດ້ອະນິມິດຕະວິຫາຣະສະມາບັດ ຊື່ວ່າໂຄຕະຣະພູ

ໂຄຕະຣະພູທຳ ໑໐ ປະການນີ້ເກີດຂຶ້ນດ້ວຍອຳນາດວິປັດສະນາ

ໂຄຕະຣະພູທຳ ຝ່າຍກຸສົນມີເທົ່າໃດ ຝ່າຍອະກຸສົນມີເທົ່າໃດ ຝ່າຍອັບພະຍາກະຕະມີ ເທົ່າໃດ

ຄື ໂຄຕະຣະພູທຳ ຝ່າຍກຸສົນມີ ໑໕ ຝ່າຍອັບພະຍາກະຕະມີ ໓ ຝ່າຍອະກຸສົນບໍ່ມີໂຄຕະ ຣະພູທຳ ໗ ປະການ ຄື

(໑) ມີອາມິດ (໒) ບໍ່ມີອາມິດ
(໓) ມີບ່ອນຕັ້ງ (໔) ບໍ່ມີບ່ອນຕັ້ງ
(໕) ເປັນສູນຍະຕະ (໖) ເປັນວິສູນຍະຕະ
(໗) ເປັນວຸດຖິຕະ (໘) ເປັນອະວຸດຖິຕະ

໗ ປະການເປັນປັດໄຈແຫ່ງສະມາທິ

໑໐ ປະການເປັນໂຄຈອນແຫ່ງຍານ

໑໗ ປະການເປັນປັດໄຈແຫ່ງວິໂມກ ໓

ອາການ ໑໗ ປະການນີ້

ອັນພຣະໂຍຄາວະຈອນໃດອົບຮົມແລ້ວດ້ວຍປັນຍາ
ພຣະໂຍຄາວະຈອນນັ້ນເປັນຜູ້ສະຫຼາດໃນຍານ
ຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປຈາກນິມິດພາຍນອກ ຊື່ວ່າໂຄຕະຣະພູຍານ

**ໂຄຕະຣະພູຍານນິດເທດທີ ໑໐ ຈົບ**

# ໑໑. ມັກຄະຍານນິດເທດ

## ສະແດງມັກຄະຍານ

[໖໑] ປັນຍາໃນການອອກ ແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດ ພາຍນອກ ຊື່ວ່າມັກຄະຍານ ເປັນແນວໃດ?

ຄື ໃນຂະນະແຫ່ງໂສດາປັດຕິມັກ ຍານທີ່ຊື່ວ່າສໍາມາທິດຖິ ຍ້ອນມີສະພາວະເຫັນ ຍ່ອມອອກຈາກມິດສາທິດຖິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາທິດຖິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກ ແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ຍານທີ່ຊື່ວ່າສໍາມາສັງກັບປະ ຍ້ອນມີສະພາວະນຶກຕອງ ຍ່ອມອອກຈາກມິດສາສັງກັບປະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສັງກັບປະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ຍານທີ່ຊື່ວ່າສໍາມາວາຈາ ຍ້ອນມີສະພາວະກໍານົດໄວ້ ຍ່ອມອອກຈາກມິດສາວາຈາ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາວາຈານັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ຍານທີ່ຊື່ວ່າສໍາມາກໍາມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຍ່ອມອອກຈາກມິດສາກໍາມັນຕະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາກໍາມັນຕະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ຍານທີ່ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຍ່ອມອອກຈາກມິດສາອາຊີວະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາອາຊີວະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນແລະຈາກ ນິມິດພາຍນອກ ຊື່ວ່າມັກຄະຍານ

ຍານທີ່ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຍ່ອມອອກຈາມິດສາວາຍາມະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາວາຍາມະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກ ແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າ ມັກຄະຍານ

ຍານທີ່ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຍ່ອມອອກຈາກມິດສາສະຕິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະຕິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກ ແລະຫຼີກໄປທັງຈາກກິເລດຂັນແລະຈາກນິມິດພາຍນອກ ຊື່ວ່າ ມັກຄະຍານ

ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກມິດສາສະມາທິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກ ແລະຫຼີກໄປທັງຈາກກິເລດຂັນແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ໃນຂະນະແຫ່ງສະກະທາຄາມິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກການຣາຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືການຣາຄະ) ຈາກປະຕິຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບຄືປະຕິຄະ) ຈາກການຣາຄານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືການຣາຄະ) ຈາກປະຕິຄານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືປະຕິຄະ) ສ່ວນຫຍາບ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ໃນຂະນະແຫ່ງອະນາຄາມິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກການຣາຄະສັງໂຍດ ຈາກປະຕິຄະສັງໂຍດ ຈາກການຣາຄານຸໄສ ຈາກປະຕິຄານຸໄສ ສ່ວນລະອຽດ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

ໃນຂະນະແຫ່ງອະຣະຫັດຕະມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ໗ລ໗ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກຣູບຣາຄະ (ຄວາມກຳໜັດໃນຣູບ) ຈາກອະຣູບຣາຄະ (ຄວາມກຳໜັດໃນອະຣູບ) ຈາກມານະ (ຄວາມຖືຕົວ) ຈາກອຸດທັດຈະ (ຄວາມຟຸ້ງຊ່ານ) ຈາກອະວິດຊາ (ຄວາມບໍ່ຮູ້) ຈາກມານານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືມານະ) ຈາກພະວະຣາຄານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືພະວະຣາຄະ) ຈາກອະວິດຊານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືອະວິດຊາ) ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

[໖໘] ບຸກຄົນຜູ້ພ້ອມພຽງດ້ວຍອະຣິຍະມັກ
ຍ່ອມເຜົາກິເລດທີ່ຍັງບໍ່ເກີດ
ດ້ວຍໂລກຸດຕະຣະຊານທີ່ເກີດຂື້ນແລ້ວ
ຍ້ອນເຫດນັ້ນ ທ່ານຈຶ່ງກ່າວໂລກຸດຕະວ່າເປັນຊານ
ບຸກຄົນນັ້ນຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ
ຍ້ອນເປັນຜູ້ສະຫຼາດໃນຊານແລະວິໂມກ

ພຣະໂຍຄາວະຈອນຕັ້ງຈິດໝັ້ນແລ້ວຍ່ອມເຫັນແຈ້ງສັນໃດ
ເມື່ອເຫັນແຈ້ງກໍເພິ່ງຕັ້ງຈິດໝັ້ນສັນນັ້ນ

ທັງສະມະຖະແລະວິປັດສະນາໄດ້ເກີດຂຶ້ນໃນຂະນະນັ້ນ
ມີສ່ວນສະເໝີກັນດຳເນີນໄປຄູ່ກັນ

ຄວາມເຫັນວ່າສັງຂານທັງຫຼາຍເປັນທຸກ ນິໂຣດເປັນສຸກ
ປັນຍາທີ່ອອກຈາກທຳທັງສອງຍ່ອມຖືກຕ້ອງອະມະຕະບົດ

ພຣະໂຍຄາວະຈອນຜູ້ສະຫຼາດໃນຄວາມຕ່າງກັນ
ແລະຄວາມເປັນອັນດຽວກັນແຫ່ງວິໂມກເຫຼົ່ານັ້ນ
ຍ່ອມຮູ້ວິໂມກຂະຈະຣິຍາ ຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິຕ່າງ ໆ
ຍ້ອນເປັນຜູ້ສະຫຼາດໃນຍານທັງສອງ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອອກແລະຫຼີກໄປທັງຈາກກິເລດຂັນ ແລະຈາກນິມິດພາຍນອກ ຊື່ວ່າມັກຄະຍານ

**ມັກຄະຍານນິດເທດທີ ໑໑ ຈົບ**

# ໑໘. ຜົນຍານນິດເທດ

## ສະແດງຜົນຍານ

[໓໓] ປັນຍາທີ່ຢຸດຄວາມພະຍາຍາມ ຊື່ວ່າຜົນຍານ ເປັນແນວໃດ?

ຄື ໃນຂະນະແຫ່ງໂສດາປັດຕິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຍ່ອມອອກຈາກມິດສາທິດຖິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາທິດຖິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາທິດຖິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຍ່ອມອອກຈາກມິດສາສັງກັບປະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສັງກັບປະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາສັງກັບປະຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດໄວ້ ຍ່ອມອອກຈາກມິດສາວາຈາ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາວາຈານັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາວາຈາຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຍ່ອມອອກຈາກມິດສາກຳມັນຕະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາກຳມັນຕະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາກຳມັນຕະຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຍ່ອມອອກຈາກມິດສາອາຊີວະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາອາຊີວະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາອາຊີວະຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຍ່ອມອອກຈາກມິດສາວາຍາມະ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາວາຍາມະນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາວາຍາມະຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຍ່ອມອອກຈາກມິດສາສະຕິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະຕິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາສະຕິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມ ນັ້ນເປັນຜົນຂອງມັກ

ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກມິດສາສະມາທິ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາສະມາທິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກໃນຂະນະແຫ່ງສະກະທາຄາມີມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກການຣາຄະສັງໂຍດ ຈາກປະຕິຄະສັງໂຍດ ຈາກການຣາຄານຸໄສ ຈາກປະຕິຄານຸໄສສ່ວນຫຍາບ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາສະມາທິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ

ໃນຂະນະແຫ່ງອະນາຄາມີມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກການຣາຄະສັງໂຍດ ຈາກປະຕິຄະສັງໂຍດ ຈາກການຣາຄານຸໄສ ຈາກປະຕິຄານຸໄສ ສ່ວນລະອຽດ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ສຳມາສະມາທິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກໃນຂະນະແຫ່ງ ອະຣະຫັດຕະມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມອອກຈາກຣູບຣາຄະ ຈາກອະຣູບຣາຄະ ຈາກມານະ ຈາກອຸດທັດຈະ ຈາກຖີນະມິດທະ ຈາກອະວິດຊາ ຈາກພະວະຣາຄານຸໄສ ຈາກມານານຸໄສ ຈາກອະວິດຊານຸໄສ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນທັງຫຼາຍແລະອອກຈາກສັບພະນິມິດພາຍນອກ ສຳມາສະມາທິຍ່ອມເກີດຂຶ້ນຍ້ອນຢຸດຄວາມພະຍາຍາມນັ້ນ ການຢຸດຄວາມພະຍາຍາມນັ້ນເປັນຜົນຂອງມັກ ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ຢຸດຄວາມພະຍາຍາມ ຊື່ວ່າຜົນຍານ

**ຜົນຍານນິດເທດທີ ໑໔ ຈົບ**

# ໑໓. ວິມຸດຕິຍານນິດເທດ

## ສະແດງວິມຸດຕິຍານ

[໗໔] ປັນຍາໃນການພິຈາລະນາເຫັນອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າ ວິມຸດຕິຍານ ເປັນແນວໃດ?

ຄື ອຸປະກິເລດແຫ່ງຈິດຂອງຕົນ ຄື ສັກກາຍະທິດຖິ (ຄວາມເຫັນວ່າເປັນອັດຕາຂອງຕົນ) ວິຈິກິດສາ (ຄວາມລັງເລສົງໄສ) ສີລັບພະຕະປະຣາມາດ (ການຍຶດໝັ້ນສີນພົດ) ທິດຖານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືທິດຖິ) ວິຈິກິດສານຸໄສ (ກິເລດທີ່ນອນເນື່ອງຢູ່ໃນສັນດານຄືວິຈິກິດສາ) ເປັນກິເລດທີ່ໂສດາປັດຕິມັກຕັດໄດ້ໂດຍເດັດຂາດແລ້ວ ຈິດຈຶ່ງຊື່ວ່າລຸດພົ້ນແລ້ວ ລຸດພົ້ນດີແລ້ວຈາກອຸປະກິເລດ ໕ ປະການນີ້ ພ້ອມດ້ວຍກິເລດທີ່ກຸ້ມຣຸມຈິດ ຊື່ວ່າຍານ ຍ້ອນມີສະພາວະຮູ້ວິມຸດຕິນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າວິມຸດຕິຍານ

ອຸປະກິເລດແຫ່ງຈິດຂອງຕົນ ຄື ກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນຫຍາບ ໆ ກາມຣາຄານຸໄສ ປະຕິຄານຸໄສ ສ່ວນຫຍາບ ໆ ເປັນກິເລດທີ່ສະກະທາຄາມີມັກຕັດໄດ້ໂດຍເດັດຂາດແລ້ວ ຈິດຈຶ່ງຊື່ວ່າລຸດພົ້ນແລ້ວ ລຸດພົ້ນດີແລ້ວຈາກອຸປະກິເລດ ໔ ປະການນີ້ ພ້ອມດ້ວຍກິເລດທີ່ກຸ້ມຣຸມຈິດ ຊື່ວ່າຍານ ຍ້ອນມີສະພາວະຮູ້ວິມຸດຕິນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນ ອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າວິມຸດຕິຍານ

ອຸປະກິເລດແຫ່ງຈິດຂອງຕົນ ຄື ກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນລະອຽດ ໆ ກາມຣາຄານຸໄສ ປະຕິຄານຸໄສ ສ່ວນລະອຽດ ໆ ເປັນກິເລດທີ່ອະນາຄາມີມັກຕັດໄດ້ໂດຍເດັດຂາດແລ້ວ ຈິດຈຶ່ງຊື່ວ່າລຸດພົ້ນແລ້ວ ລຸດພົ້ນດີແລ້ວຈາກອຸປະກິເລດ ໔ ປະການນີ້ ພ້ອມດ້ວຍກິເລດທີ່ກຸ້ມຣຸມຈິດ ຊື່ວ່າຍານ ຍ້ອນມີສະພາວະຮູ້ວິມຸດຕິນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນ ອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າວິມຸດຕິຍານ

ອຸປະກິເລດແຫ່ງຈິດຂອງຕົນ ຄື ຮູບຣາຄະ ອະຮູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເປັນກິເລດທີ່ອະຣະຫັດຕະມັກຕັດໄດ້ໂດຍເດັດຂາດແລ້ວ ຈິດຈຶ່ງຊື່ວ່າລຸດພົ້ນແລ້ວ ລຸດພົ້ນດີແລ້ວຈາກອຸປະກິເລດ ໘ ປະການນີ້ ພ້ອມດ້ວຍກິເລດ ທີ່ກຸ້ມຣຸມຈິດ ຊື່ວ່າຍານ ຍ້ອນມີສະພາວະຮູ້ວິມຸດຕິນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນອຸປະກິເລດ

ທີ່ອະຣິຍະມັກ ຕັດຂາດແລ້ວ ຊື່ວ່າວິມຸດຕິຍານ ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາເຫັນອຸປະກິເລດທີ່ອະຣິຍະມັກຕັດຂາດແລ້ວ ຊື່ວ່າວິມຸດຕິຍານ

**ວິມຸດຕິຍານນິດເທດທີ ໑໓ ຈົບ**

# ໑໔. ປັດຈະເວກຂະນະຍານນິດເທດ

## ສະແດງປັດຈະເວກຂະນະຍານ

[໗໕] ປັນຍາໃນການເຫັນທຳທີ່ມາຮ່ວມກັນໃນຂະນະນັ້ນ ຊື່ວ່າປັດຈະເວກຂະນະຍານເປັນແນວໃດ?

ຄື ໃນຂະນະແຫ່ງໂສດາປັດຕິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດໄວ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມາຮ່ວມກັນໃນຂະນະນັ້ນ

ຍານທີ່ຊື່ວ່າສະຕິສຳໂພດຊົງ ຍ້ອນມີສະພາວະຕັ້ງໝັ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າທຳມະວິຈະຍະສຳໂພດຊົງ ຍ້ອນມີສະພາວະເລືອກເຟັ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິຣິຍະສຳໂພດຊົງ ຍ້ອນມີສະພາວະປະຄອງໄວ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປີຕິສຳໂພດຊົງ ຍ້ອນມີສະພາວະແຜ່ຊ່ານໄປ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປັດສັດທິສຳໂພດຊົງ ຍ້ອນມີສະພາວະສະງົບຣະງັບ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມາທິສຳໂພດຊົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າ ອຸເປກຂາສຳໂພດຊົງ ຍ້ອນມີສະພາວະພິຈາລະນາ ມາຮ່ວມກັນໃນຂະນະນັ້ນ

ຍານທີ່ຊື່ວ່າສັດທາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະຕິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມາທິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອຸດ

ທັດຈະ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປັນຍາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອະວິດຊາ ມາຮ່ວມກັນໃນຂະນະນັ້ນ

ຍານທີ່ຊື່ວ່າສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າ ສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມາທິນຊີຍ້ອນມີສະພາວະບໍ່ຟຸ້ງຊ່ານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປັນຍິນຊີ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ

ຍານທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳໂພດຊົງ ຍ້ອນມີສະພາວະນຳອອກ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າມັກ ຍ້ອນມີສະພາວະເປັນເຫດ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະຕັ້ງໄວ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະສຳເລັດ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າ ສັດຈະ ຍ້ອນມີສະພາວະເປັນຂອງແທ້ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າທຳເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສີນວິສຸດທິ ຍ້ອນມີສະພາວະສັງລວມ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ມາຮ່ວມກັນ ໃນຂະນະນັ້ນ ຍານທີ່ຊື່ວ່າວິໂມກ ຍ້ອນມີສະພາວະລຸດພົ້ນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ຊັດແຈ້ງ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິມຸດຕິຍ້ອນມີສະພາວະສະລະ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ມາຮ່ວມກັນໃນຂະນະນັ້ນ

ຍານທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນບ່ອນລວມ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າເວທະນາ ຍ້ອນມີສະພາວະ ເປັນທີ່ປະຊຸມ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປັນຍາ ຍ້ອນມີສະພາວະຍິ່ງກວ່າທຳນັ້ນ ໆ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າທຳທີ່

ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ມາຮ່ວມກັນໃນຂະນະນັ້ນ ພຣະໂຍຄາວະຈອນອອກ (ຈາກສະມາບັດ) ແລ້ວພິຈາລະນາວ່າ ທຳເຫຼົ່ານີ້ມາຮ່ວມກັນໃນຂະນະນັ້ນ

ໃນຂະນະແຫ່ງໂສດາປັດຕິຜົນ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ມາຮ່ວມກັນ ໃນຂະນະນັ້ນ ຯລຯ ຍານທີ່ຊື່ວ່າອະນຸບປາທະຍານ (ຍານໃນຄວາມບໍ່ເກີດຂຶ້ນ) ຍ້ອນມີສະພາວະຣະງັບ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນບ່ອນລວມ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ປະຊຸມ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສະຕິ ຍ້ອນມີສະພາວະ ເປັນໃຫຍ່ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າປັນຍາ ຍ້ອນມີສະພາວະຍິ່ງກວ່າທຳນັ້ນ ໆ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ມາຮ່ວມກັນ ໃນຂະນະນັ້ນ ຍານທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ມາຮ່ວມກັນໃນຂະນະນັ້ນ ພຣະໂຍຄາວະຈອນອອກ (ຈາກສະມາບັດ) ແລ້ວພິຈາລະນາວ່າ ທຳເຫຼົ່ານີ້ ມາຮ່ວມກັນໃນຂະນະນັ້ນ

ໃນຂະນະແຫ່ງສະກະທາຄາມິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ ຯລຯ

ໃນຂະນະແຫ່ງສະກະທາຄາມິຜົນ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ ຯລຯ

ໃນຂະນະແຫ່ງອະນາຄາມິມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນມາຮ່ວມກັນໃນຂະນະນັ້ນ ຯລຯ

ໃນຂະນະແຫ່ງອະນາຄາມິຜົນ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນ ໃນຂະນະນັ້ນ ຯລຯ

ໃນຂະນະແຫ່ງອະຣະຫັດຕະມັກ ຍານທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນມາຮ່ວມກັນໃນຂະນະນັ້ນ ຯລຯ ຍານທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ມາຮ່ວມກັນໃນຂະນະນັ້ນ ຯລຯ ຍານທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ມາຮ່ວມກັນໃນຂະນະນັ້ນ ພຣະໂຍຄາວະຈອນອອກ (ຈາກສະມາບັດ) ແລ້ວພິຈາລະນາວ່າ ທຳເຫຼົ່ານີ້ມາຮ່ວມກັນໃນຂະນະນັ້ນ

ໃນຂະນະແຫ່ງອະຣະຫັດຕະຜົນ ຍານທີ່ຊື່ວ່າສໍາມາທິດຖິ ຍ້ອນມີສະພາວະເຫັນ ມາຮ່ວມກັນໃນຂະນະນັ້ນ ຯລຯ ຍານທີ່ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະຮະງັບ ມາຮ່ວມກັນໃນຂະນະນັ້ນ ຍານທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ມາຮ່ວມກັນໃນຂະນະນັ້ນ ຯລຯ ຍານທີ່ຊື່ວ່າທໍາທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ມາຮ່ວມກັນໃນຂະນະນັ້ນ ພຣະໂຍຄາວະຈອນອອກ (ຈາກສະມາບັດ) ແລ້ວພິຈາລະນາວ່າ ທໍາເຫຼົ່ານີ້ມາຮ່ວມກັນໃນຂະນະນັ້ນ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການພິຈາລະນາທໍາທີ່ເຂົ້າມາປະຊຸມກັນໃນຂະນະນັ້ນ ຊື່ວ່າປັດຈະເວກຂະນະຍານ

**ປັດຈະເວກຂະນະຍານນິດເທດທີ ໑໔ ຈົບ**

# ໑໕. ວັດຖຸນານັດຕະຍານນິດເທດ

## ສະແດງຍານໃນວັດຖຸຕ່າງ ໆ

[໗໗] ປັນຍາໃນການກໍານົດທໍາຕ່າງ ໆ ທີ່ເປັນພາຍໃນ ຊື່ວ່າວັດຖຸນານັດຕະຍານ (ຍານໃນວັດຖຸຕ່າງ ໆ) ເປັນແນວໃດ? ພຣະໂຍຄາວະຈອນກໍານົດທໍາທັງຫຼາຍທີ່ເປັນພາຍໃນ ເປັນແນວໃດ? ຄື ພຣະໂຍຄາວະຈອນກໍານົດຈັກຂຸທີ່ເປັນພາຍໃນ ກໍານົດໂສຕະທີ່ເປັນພາຍໃນ ກໍານົດຄານະທີ່ເປັນພາຍໃນ ກໍານົດຊິວຫາທີ່ເປັນພາຍໃນ ກໍານົດກາຍທີ່ເປັນພາຍໃນ ກໍານົດມະໂນທີ່ເປັນພາຍໃນ

ພຣະໂຍຄາວະຈອນກໍານົດຈັກຂຸທີ່ເປັນພາຍໃນ ເປັນແນວໃດ?

ຄື ກໍານົດວ່າ ຈັກຂຸເກີດຍ້ອນອະວິດຊາ ກໍານົດວ່າ ຈັກຂຸເກີດຍ້ອນຕັນຫາ ກໍານົດວ່າ ຈັກຂຸເກີດຍ້ອນກໍາ ກໍານົດວ່າ ຈັກຂຸເກີດຍ້ອນອາຫານ ກໍານົດວ່າ ຈັກຂຸເກີດຍ້ອນອາໄສມະຫາພູຕະຮູບ ໔ ກໍານົດວ່າ ຈັກຂຸເກີດແລ້ວ ກໍານົດວ່າ ຈັກຂຸ ມາຮ່ວມກັນແລ້ວ ກໍານົດວ່າ ຈັກຂຸບໍ່ມີແລ້ວເກີດມີ ມີແລ້ວຈັກບໍ່ມີ

ກໍານົດຈັກຂຸໂດຍຄວາມເປັນຂອງມີບ່ອນສຸດ ຄືກໍານົດວ່າ ຈັກຂຸບໍ່ຍັ່ງຍືນ ບໍ່ທ່ຽງ ມີຄວາມຜັນປ່ຽນໄປເປັນທໍາມະດາ ກໍານົດວ່າ ຈັກຂຸບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປເປັນທໍາມະດາ ເສື່ອມໄປເປັນທໍາມະດາ ຄາຍອອກເປັນທໍາມະດາ ດັບໄປເປັນທໍາມະດາ

ກຳນົດຈັກຂຸໂດຍຄວາມບໍ່ທ່ຽງ ບໍ່ກຳນົດໂດຍຄວາມທ່ຽງ ກຳນົດໂດຍຄວາມເປັນທຸກ ບໍ່ກຳນົດໂດຍຄວາມເປັນສຸກ ກຳນົດໂດຍຄວາມເປັນອະນັດຕາ ບໍ່ກຳນົດໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດຂຶ້ນ ຍ່ອມສະລະຄືນ ບໍ່ຢຶດຖື

ເມື່ອກຳນົດໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາ (ຄວາມໝາຍຮູ້ວ່າທ່ຽງ) ໄດ້ ເມື່ອກຳນົດໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາ (ຄວາມໝາຍຮູ້ວ່າເປັນສຸກ)ໄດ້ ເມື່ອກຳນົດໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາ (ຄວາມໝາຍຮູ້ວ່າອັດຕາ) ໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິ (ຄວາມຍິນດີ) ໄດ້ ເມື່ອຄາຍກຳໜັດຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະ (ຄວາມກຳໜັດ) ໃຫ້ດັບ ຍ່ອມລະສະມຸໄທ (ເຫດເກີດ) ໄດ້ ເມື່ອສະລະຄືນ ຍ່ອມລະອາທານະ (ຄວາມຢຶດຖື) ໄດ້ ພຣະໂຍຄາວະຈອນກຳນົດຈັກຂຸທີ່ເປັນພາຍໃນແນວນີ້

ພຣະໂຍຄາວະຈອນກຳນົດໂສຕະທີ່ເປັນພາຍໃນ ເປັນແນວໃດ?

ຄື ກຳນົດວ່າ ໂສຕະເກີດຍ້ອນອະວິດຊາ ฯລฯ ພຣະໂຍຄາວະຈອນກຳນົດໂສຕະທີ່ເປັນພາຍໃນແນວນີ້

ພຣະໂຍຄາວະຈອນກຳນົດຄານະທີ່ເປັນພາຍໃນ ເປັນແນວໃດ?

ຄື ກຳນົດວ່າ ຄານະເກີດຍ້ອນອະວິດຊາ ฯລฯ ພຣະໂຍຄາວະຈອນກຳນົດຄານະທີ່ເປັນພາຍໃນແນວນີ້

ພຣະໂຍຄາວະຈອນກຳນົດຊິວຫາທີ່ເປັນພາຍໃນ ເປັນແນວໃດ?

ຄື ກຳນົດວ່າ ຊິວຫາເກີດຍ້ອນອະວິດຊາ ฯລฯ ພຣະໂຍຄາວະຈອນກຳນົດຊິວຫາທີ່ເປັນພາຍໃນແນວນີ້

ພຣະໂຍຄາວະຈອນກຳນົດກາຍທີ່ເປັນພາຍໃນ ເປັນແນວໃດ?

ຄື ກຳນົດວ່າ ກາຍເກີດຍ້ອນອະວິດຊາ ฯລฯ ພຣະໂຍຄາວະຈອນກຳນົດກາຍທີ່ເປັນພາຍໃນແນວນີ້

ພຣະໂຍຄາວະຈອນກຳນົດມະໂນທີ່ເປັນພາຍໃນ ເປັນແນວໃດ?

ຄື ກຳນົດວ່າ ມະໂນເກີດຍ້ອນອະວິດຊາ ກຳນົດວ່າ ມະໂນເກີດຍ້ອນຕັນຫາ ກຳນົດວ່າ ມະໂນເກີດຍ້ອນກຳ ກຳນົດວ່າ ມະໂນເກີດຍ້ອນອາຫານ (ອາໄສຫະທະຍະວັດຖຸ) ກຳນົດວ່າ ມະໂນເກີດແລ້ວ ກຳນົດວ່າ ມະໂນມາຮ່ວມກັນແລ້ວ ກຳນົດວ່າ ມະໂນບໍ່ມີແລ້ວເກີດມີ ມີແລ້ວຈັກບໍ່ມີ

ກໍານົດມະໂນໂດຍຄວາມເປັນຂອງມີບ່ອນສຸດ ຄືກໍານົດວ່າ ມະໂນບໍ່ຍັ່ງຍືນ ບໍ່ທ່ຽງມີຄວາມປັ່ນປ່ວນໄປເປັນທໍາມະດາ ກໍານົດວ່າ ມະໂນບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປເປັນທໍາມະດາ ເສື່ອມໄປເປັນທໍາມະດາ ຄາຍອອກເປັນທໍາມະດາ ດັບໄປເປັນທໍາມະດາ

ກໍານົດມະໂນໂດຍຄວາມບໍ່ທ່ຽງ ບໍ່ກໍານົດໂດຍຄວາມທ່ຽງ ກໍານົດໂດຍຄວາມເປັນທຸກ ບໍ່ກໍານົດໂດຍຄວາມເປັນສຸກ ກໍານົດໂດຍຄວາມເປັນອະນັດຕາ ບໍ່ກໍານົດໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກໍາໜັດ ບໍ່ກໍາໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດຂຶ້ນ ຍ່ອມສະລະຄືນ ບໍ່ຢຶດຖື

ເມື່ອກໍານົດໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອກໍານົດໂດຍຄວາມເປັນທຸກຍ່ອມລະສຸຂະສັນຍາໄດ້ ເມື່ອກໍານົດໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກໍາໜັດຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພຣະໂຍຄາວະຈອນກໍານົດມະໂນທີ່ເປັນພາຍໃນແນວນີ້ ກໍານົດທໍາທີ່ເປັນພາຍໃນແນວນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກໍານົດທໍາທີ່ເປັນພາຍໃນ ຊື່ວ່າ ອັດຖຸນາບັດຕະຍານ

**ອັດຖຸນາບັດຕະຍານນິດເທດທີ ໑໕ ຈົບ**

# ໑໖. ໂຄຈະຣະນາບັດຕະຍານນິດເທດ

## ສະແດງໂຄຈະຣະນາບັດຕະຍານ

[໒໗] ປັນຍາໃນການກໍານົດທໍາຕ່າງ ໆ ທີ່ເປັນພາຍນອກ ຊື່ວ່າ ໂຄຈະຣະນາບັດຕະຍານເປັນແນວໃດ?

ພຣະໂຍຄາວະຈອນກໍານົດທໍາທັງຫຼາຍທີ່ເປັນພາຍນອກ ເປັນແນວໃດ?

ຄື ພຣະໂຍຄາວະຈອນກໍານົດຮູບທີ່ເປັນພາຍນອກ ກໍານົດສັດທະ (ສຽງ) ທີ່ເປັນພາຍນອກ ກໍານົດຄັນທະ (ກິ່ນ) ທີ່ເປັນພາຍນອກ ກໍານົດຣົດທີ່ເປັນພາຍນອກ ກໍານົດ ໂຜດຖັບພະທີ່ເປັນພາຍນອກ ກໍານົດທໍາມາຣົມທີ່ເປັນພາຍນອກ

ພຣະໂຍຄາວະຈອນກໍານົດຮູບທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ຮູບເກີດຍ້ອນອະວິດຊາ ກຳນົດວ່າ ຮູບເກີດຍ້ອນຕັນຫາ ກຳນົດ ວ່າ ຮູບເກີດຍ້ອນກຳ ກຳນົດວ່າ ຮູບເກີດຍ້ອນອາຫານ ກຳນົດວ່າ ຮູບອາໄສມະຫາພູຕະຮູບ ໔ ກຳນົດວ່າ ຮູບເກີດແລ້ວ ກຳນົດວ່າ ຮູບມາຮ່ວມກັນແລ້ວ ກຳນົດວ່າ ຮູບບໍ່ມີແລ້ວ ເກີດມີ ມີແລ້ວ ຈັກບໍ່ມີ

ກຳນົດຮູບໂດຍຄວາມເປັນຂອງມີບ່ອນສຸດ ຄື ກຳນົດວ່າ ຮູບບໍ່ຍັ່ງຍືນ ບໍ່ທ່ຽງ ມີຄວາມຜັນປ່ຽນໄປເປັນທຳມະດາ ກຳນົດວ່າ ຮູບບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ເສື່ອມໄປເປັນທຳມະດາ ຄາຍອອກເປັນທຳມະດາ ດັບໄປເປັນທຳມະດາ

ກຳນົດຮູບໂດຍຄວາມບໍ່ທ່ຽງ ບໍ່ກຳນົດໂດຍຄວາມທ່ຽງ ກຳນົດໂດຍຄວາມເປັນທຸກບໍ່ກຳນົດໂດຍຄວາມເປັນສຸກ ກຳນົດໂດຍຄວາມເປັນອະນັດຕາ ບໍ່ກຳນົດໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດຂຶ້ນ ຍ່ອມສະລະຄືນ ບໍ່ຍຶດຖື

ເມື່ອກຳນົດໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອກຳນົດໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອກຳນົດໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພຣະໂຍຄາວະຈອນກຳນົດຮູບທີ່ເປັນພາຍນອກແນວນີ້

ພຣະໂຍຄາວະຈອນກຳນົດສັດທະ (ສຽງ) ທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ສັດທະເກີດຍ້ອນອະວິດຊາ ຯລຯ ພຣະໂຍຄາວະຈອນກຳນົດສັດທະທີ່ເປັນພາຍນອກແນວນີ້

ພຣະໂຍຄາວະຈອນກຳນົດຄັນທະ (ກິ່ນ) ທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ຄັນທະເກີດຍ້ອນອະວິດຊາ ຯລຯ ພຣະໂຍຄາວະຈອນກຳນົດຄັນທະທີ່ເປັນພາຍນອກແນວນີ້

ພຣະໂຍຄາວະຈອນກຳນົດຣົດທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ຣົດເກີດຍ້ອນອະວິດຊາ ຯລຯ ພຣະໂຍຄາວະຈອນກຳນົດຣົດທີ່ເປັນພາຍນອກແນວນີ້

ພຣະໂຍຄາວະຈອນກຳນົດໂຜດຖັບພະທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ໂຜດຖັບພະເກີດຍ້ອນອະວິດຊາ ຯລຯ ພຣະໂຍຄາວະຈອນກຳນົດ ໂຜດຖັບພະທີ່ເປັນພາຍນອກແນວນີ້

ພຣະໂຍຄາວະຈອນກຳນົດທຳມາຣົມທີ່ເປັນພາຍນອກ ເປັນແນວໃດ?

ຄື ກຳນົດວ່າ ທຳມາຣົມເກີດຍ້ອນອະວິດຊາ ກຳນົດວ່າ ທຳມາຣົມເກີດຍ້ອນຕັນຫາ ກຳນົດວ່າ ທຳມາຣົມເກີດຍ້ອນກຳ ກຳນົດວ່າ ທຳມາຣົມ ເກີດຍ້ອນອາຫານ (ອາໄສຫະທະຍະວັດຖຸ) ກຳນົດວ່າ ທຳມາຣົມເກີດແລ້ວ ກຳນົດວ່າ ທຳມາຣົມມາຮ່ວມກັນແລ້ວ ກຳນົດວ່າ ທຳມາຣົມບໍ່ມີແລ້ວເກີດມີ ມີແລ້ວຈັກບໍ່ມີ

ກຳນົດທຳມາຣົມໂດຍຄວາມເປັນຂອງມີບ່ອນສຸດ ຄືກຳນົດວ່າ ທຳມາຣົມບໍ່ ຍັ່ງຍືນ ບໍ່ທ່ຽງ ມີຄວາມຜັນປ່ຽນໄປເປັນທຳມະດາ ກຳນົດວ່າ ທຳມາຣົມບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສປັດໄຈເກີດຂຶ້ນ ມີຄວາມສິ້ນໄປເປັນທຳມະດາ ເສື່ອມໄປເປັນທຳມະດາ ຄາຍອອກເປັນທຳມະດາ ດັບໄປເປັນທຳມະດາ

ກຳນົດທຳມາຣົມໂດຍຄວາມບໍ່ທ່ຽງ ບໍ່ກຳນົດໂດຍຄວາມທ່ຽງ ກຳນົດໂດຍຄວາມເປັນທຸກ ບໍ່ກຳນົດໂດຍຄວາມເປັນສຸກ ກຳນົດໂດຍຄວາມເປັນອະນັດຕາ ບໍ່ກຳນົດໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຍຶດຖື

ເມື່ອກຳນົດໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອກຳນົດໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອກຳນົດໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພຣະໂຍຄາວະຈອນກຳນົດທຳມາຣົມ ທີ່ເປັນພາຍນອກແນວນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກຳນົດທຳຕ່າງ ໆ ທີ່ເປັນພາຍນອກ ຊື່ວ່າໂຄຈະຣະນານັດຕະຍານ

**ໂຄຈະຣະນານັດຕະຍານນິດເທດທີ ໑໖ ຈົບ**

## ໑໗. ຈະຣິຍານານັດຕະຍານນິດເທດ

### ສະແດງຈະຣິຍານານັດຕະຍານ

[໖໗] ປັນຍາໃນການກຳນົດຈະຣິຍາ ຊື່ວ່າຈະຣິຍານານັດຕະຍານ ເປັນແນວໃດ?

ຄື ຄຳວ່າ ຈະຣິຍາ ອະທິບາຍວ່າ ຈະຣິຍາ ໓ ຢ່າງ ໄດ້ແກ່

໑. ວິນຍານຈະຣິຍາ

໔. ອັນຍານະຈະຣິຍາ

໓. ຍານຈະຣິຍາ

ວິນຍານຈະຣິຍາ ເປັນແນວໃດ?

ຄື ຄວາມຄິດເພື່ອເບິ່ງຮູບທັງຫຼາຍອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານ ຈະຣິຍາ ຈັກຂຸວິນຍານທີ່ເປັນແຕ່ພຽງເຫັນຮູບ ຊື່ວ່າວິນຍານຈະຣິຍາ ມະໂນທາດອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນໄດ້ເຫັນຮູບແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ຮູບແລ້ວ

ຄວາມຄິດເພື່ອຟັງສຽງອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ໂສຕະວິນຍານທີ່ເປັນແຕ່ພຽງຟັງສຽງ ຊື່ວ່າວິນຍານຈະຣິຍາ ມະໂນທາດອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນໄດ້ຟັງສຽງແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ສຽງແລ້ວ

ຄວາມຄິດເພື່ອດົມກິ່ນອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄານະວິນຍານທີ່ເປັນແຕ່ພຽງດົມກິ່ນ ຊື່ວ່າວິນຍານຈະຣິຍາ ມະໂນທາດອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນໄດ້ດົມກິ່ນແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ກິ່ນແລ້ວ

ຄວາມຄິດເພື່ອຊີມຣົດອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຊິວຫາວິນຍານທີ່ເປັນແຕ່ພຽງຊີມຣົດ ຊື່ວ່າວິນຍານຈະຣິຍາ ມະໂນທາດອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນໄດ້ຊີມຣົດແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ຣົດແລ້ວ

ຄວາມຄິດເພື່ອສຳຜັດໂຜດຖັບພະອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານ ຈະຣິຍາ ກາຍວິນຍານທີ່ເປັນແຕ່ພຽງສຳຜັດໂຜດຖັບພະ ຊື່ວ່າວິນຍານຈະຣິຍາ ມະໂນທາດອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນໄດ້ສຳຜັດໂຜດຖັບພະແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ໂຜດຖັບພະແລ້ວ

ຄວາມຄິດເພື່ອຮູ້ແຈ້ງທຳມາຣົມອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ມະໂນວິນຍານທາດທີ່ເປັນແຕ່ພຽງຮູ້ແຈ້ງທຳມາຣົມ ຊື່ວ່າວິນຍານຈະຣິຍາ ມະໂນທາດ ອັນເປັນວິບາກທີ່ຂຶ້ນສູ່ອາລົມ ຊື່ວ່າວິນຍານຈະຣິຍາ ຍ້ອນຮູ້ແຈ້ງທຳມາຣົມແລ້ວ ມະໂນວິນຍານທາດອັນເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນຂຶ້ນສູ່ທຳມາຣົມແລ້ວ

[໖໗] ຄຳວ່າ ວິນຍານຈະຣິຍາ ອະທິບາຍວ່າ ຊື່ວ່າວິນຍານຈະຣິຍາ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີຣາຄະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີໂທສະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີໂມຫະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີມານະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີທິດຖິ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີອຸດທັດຈະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີວິຈິກິດສາ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ມີອະນຸໄສ ຊື່ວ່າ ວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍຣາຄະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍໂທສະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍໂມຫະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍມານະ ຊື່ວ່າ ວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍທິດຖິ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍອຸດທັດຈະ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍວິຈິກິດສາ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍອະນຸໄສ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຸສົນກຳ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍອະກຸສົນກຳ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳມີໂທດ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳບໍ່ມີໂທດ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳດຳ ຊື່ວ່າ ວິນຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳຂາວ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳທີ່ມີສຸກເປັນກຳໄລ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳທີ່ມີທຸກເປັນກຳໄລ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳທີ່ມີສຸກເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳທີ່ມີທຸກເປັນວິບາກ ຊື່ວ່າວິນຍານຈະຣິຍາ ຍ້ອນປະພຶດໃນອາລົມທີ່ຮູ້ແຈ້ງແລ້ວ ວິນຍານມີຈະຣິຍາເຊັ່ນນີ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ວິນຍານຈະຣິຍາ

ຈິດນີ້ບໍລິສຸດໂດຍປົກກະຕິ ຍ້ອນບໍ່ມີກິເລດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວິນຍານຈະຣິຍາ ນີ້ຊື່ວ່າ ວິນຍານຈະຣິຍາ

ອັນຍານະຈະຣິຍາ ເປັນແນວໃດ?

ຄື ຄວາມຄິດເພື່ອຄວາມແລ່ນໄປແຫ່ງຣາຄະໃນຮູບທີ່ໜ້າພໍໃຈ ອັນເປັນພຽງກິຣິຍາ ອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງຣາຄະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງໂທສະໃນຮູບທີ່ໜ້າພໍໃຈ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງໂທສະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງໂມຫະໃນວັດຖຸທີ່ບໍ່ໄດ້ເພ່ງເລັງດ້ວຍຣາຄະແລະໂທສະທັງສອງນັ້ນ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງໂມຫະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງມານະທີ່ຜູກພັນ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງມານະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງທິດຖິທີ່ຍຶດຖື ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງທິດຖິ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງອຸດທັດຈະທີ່ເຖິງຄວາມຟຸ້ງຊ່ານ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງອຸດທັດຈະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງວິຈິກິດສາທີ່ບໍ່ເຖິງຄວາມຕົກລົງ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງວິຈິກິດສາ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງອະນຸໄສທີ່ເຖິງຄວາມເປັນທຳມີກຳລັງ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງອະນຸໄສ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງຣາຄະໃນສຽງທີ່ໜ້າພໍໃຈ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຯລຯ ຄວາມຄິດເພື່ອຄວາມແລ່ນໄປແຫ່ງຣາຄະໃນກິ່ນທີ່ໜ້າພໍໃຈ ຯລຯ ໃນຣົດທີ່ໜ້າພໍໃຈ ຯລຯ ໃນໂຜດຖັບພະທີ່ໜ້າພໍໃຈ ຯລຯ ຄວາມຄິດເພື່ອແລ່ນໄປແຫ່ງຣາຄະໃນທຳມາຣົມທີ່ໜ້າພໍໃຈ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງຣາຄະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງໂທສະໃນທຳມາຣົມທີ່ບໍ່ໜ້າພໍໃຈ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງໂທສະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງໂມຫະໃນວັດຖຸທີ່ບໍ່ໄດ້ເພ່ງເລັງດ້ວຍຣາຄະແລະໂທສະທັງສອງນັ້ນ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງໂມຫະ ຊື່ວ່າອັນຍານະຈະຣິຍາ ຯລຯ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງທິດຖິທີ່ຍຶດຖື ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງທິດຖິ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງອຸດທັດຈະທີ່ເຖິງຄວາມຟຸ້ງຊ່ານ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງອຸດທັດຈະ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງວິຈິກິດສາທີ່ບໍ່ເຖິງຄວາມຕົກລົງ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງວິຈິກິດສາ ຊື່ວ່າອັນຍານະຈະຣິຍາ

ຄວາມຄິດເພື່ອຄວາມແລ່ນໄປແຫ່ງອະນຸໄສທີ່ເຖິງຄວາມເປັນທຳມີກຳລັງ ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ຄວາມແລ່ນໄປແຫ່ງອະນຸໄສ ຊື່ວ່າອັນຍານະຈະຣິຍາ

[໗໐] ຄຳວ່າ ອັນຍານະຈະຣິຍາ ອະທິບາຍວ່າ ຊື່ວ່າອັນຍານະຈະຣິຍາ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີຣາຄະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີໂທສະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີໂມຫະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີມານະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີທິດຖິ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີອຸດທັດຈະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີວິຈິກິດສາ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດມີອະນຸໄສ ຊື່ວ່າອັນຍານະຈະຣິຍາ

ຍ້ອນປະພຶດປະກອບດ້ວຍຣາຄະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍໂທສະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍໂມຫະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍມານະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍທິດຖິ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍອຸດທັດຈະ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍວິຈິກິດສາ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍອະນຸໄສ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຸສົນກຳ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍອະກຸສົນກຳ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳມີໂທດ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳບໍ່ມີໂທດ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳດຳ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳຂາວ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳທີ່ມີສຸກເປັນກຳໄລ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳທີ່ມີທຸກເປັນກຳໄລ ຊື່ວ່າອັນຍານະຈະຣິຍາ

ຍ້ອນປະພຶດບໍ່ປະກອບດ້ວຍກຳທີ່ມີສຸກເປັນວິບາກ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳທີ່ມີທຸກເປັນວິບາກ ຊື່ວ່າອັນຍານະຈະຣິຍາ ຍ້ອນປະພຶດໃນອາລົມທີ່ບໍ່ຮູ້ ຄວາມບໍ່ຮູ້ມີຈະຣິຍາເຫັນປານນີ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັນຍານະຈະຣິຍາ ນີ້ຊື່ວ່າອັນຍານະຈະຣິຍາ

[໗໑] ຍານຈະຣິຍາ ເປັນແນວໃດ?

ຄື ຄວາມຄິດເພື່ອອະນິດຈານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ທ່ຽງ) ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ອະນິດຈານຸປັດສະນາ ຊື່ວ່າຍານຈະຣິຍາ

ຄວາມຄິດເພື່ອທຸກຂານຸປັດສະນາ (ການພິຈາລະນາເຫັນຄວາມທຸກ) ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ທຸກຂານຸປັດສະນາ ຊື່ວ່າຍານຈະຣິຍາ

ຄວາມຄິດເພື່ອອະນັດຕານຸປັດສະນາ (ການພິຈາລະນາເຫັນອະນັດຕາ) ອັນເປັນພຽງ ກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ອະນັດຕານຸປັດສະນາ ຊື່ວ່າຍານຈະຣິຍາ

ຄວາມຄິດເພື່ອນິບພິທານຸປັດສະນາ (ການພິຈາລະນາເຫັນຄວາມເບື່ອໜ່າຍ) ອັນເປັນພຽງກິຣິຍາອັບພະຍາກະຕະ ຯລຯ

ຄວາມຄິດເພື່ອວິຣາຄານຸປັດສະນາ (ການພິຈາລະນາເຫັນຄວາມຄາຍກຳໜັດ) ອັນເປັນພຽງກິຣິຍາອັບພະຍາກະຕະ ຯລຯ

ຄວາມຄິດເພື່ອນິໂຣທານຸປັດສະນາ (ການພິຈາລະນາເຫັນຄວາມດັບ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອປະຕິນິດສັກຄານຸປັດສະນາ (ການພິຈາລະນາເຫັນຄວາມສະລະຄືນ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອຂະຍານຸປັດສະນາ (ການພິຈາລະນາເຫັນຄວາມສິ້ນໄປ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອວະຍານຸປັດສະນາ (ການພິຈາລະນາເຫັນຄວາມເສື່ອມໄປ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອວິປະຣິນາມານຸປັດສະນາ (ການພິຈາລະນາເຫັນຄວາມຜັນປ່ຽນ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອອະນິມິດຕານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ມີນິມິດ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອອັບປະນິຫິຕານຸປັດສະນາ (ການພິຈາລະນາເຫັນຄວາມບໍ່ມີບ່ອນຕັ້ງ)ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອສູນຍະຕານຸປັດສະນາ (ການພິຈາລະນາເຫັນຄວາມວ່າງ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອອະທິປັນຍາທຳມານຸປັດສະນາ (ການພິຈາລະນາເຫັນທຳດ້ວຍປັນຍາ ອັນຍິ່ງ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອຍະຖາພູຕະຍານທັດສະນະ (ການຮູ້ເຫັນຕາມຄວາມເປັນຈິງ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອອາທີນະວານຸປັດສະນາ (ການພິຈາລະນາເຫັນໂທດ) ອັນເປັນພຽງກິຣິຍາອັບພະຍາກະຕະ ໗ລ໗

ຄວາມຄິດເພື່ອປະຕິສັງຂານຸປັດສະນາ (ການຕາມພິຈາລະນາ) ອັນເປັນພຽງກິຣິຍາອັບພະຍາກະຕະ ຊື່ວ່າວິນຍານຈະຣິຍາ ປະຕິສັງຂານຸປັດສະນາ ຊື່ວ່າຍານຈະຣິຍາ

ວິວັດຕະນານຸປັດສະນາ (ການພິຈາລະນາເຫັນຄວາມຄາຍອອກ) ຊື່ວ່າຍານຈະຣິຍາ ໂສດາປັດຕິມັກ ຊື່ວ່າຍານຈະຣິຍາ ໂສດາປັດຕິຜົນສະມາບັດ ຊື່ວ່າຍານຈະຣິຍາ ສະກະທາຄາມິມັກ ຊື່ວ່າຍານຈະຣິຍາ ສະກະທາຄາມິຜົນສະມາບັດ ຊື່ວ່າຍານຈະຣິຍາ ອະນາຄາມິມັກ ຊື່ວ່າຍານຈະຣິຍາ ອະນາຄາມິຜົນສະມາບັດ ຊື່ວ່າຍານຈະຣິຍາ ອະຣະຫັດຕະມັກ ຊື່ວ່າຍານຈະຣິຍາ ອະຣະຫັດຕະຜົນສະມາບັດ ຊື່ວ່າຍານຈະຣິຍາ

ຄຳວ່າ ຍານຈະຣິຍາ ອະທິບາຍວ່າ ຊື່ວ່າຍານຈະຣິຍາ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ມີຣາຄະ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ມີໂທສະ ຯລຯ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ມີອະນຸໄສ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍຣາຄະ ຊື່ວ່າຍານຈະຣິຍາ ຍ້ອນປະພຶດ ບໍ່ປະກອບດ້ວຍໂທສະ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍໂມຫະ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍມານະ ຯລຯ ບໍ່ປະກອບດ້ວຍທິດຖິ ຯລຯ ບໍ່ປະກອບດ້ວຍອຸດທັດຈະ ຯລຯ ບໍ່ປະກອບດ້ວຍວິຈິກິດສາ ຯລຯ ບໍ່ປະກອບດ້ວຍອະນຸໄສ ຯລຯ ປະກອບດ້ວຍກຸສົນກຳ ຯລຯ ບໍ່ປະກອບດ້ວຍອະກຸສົນກຳ ຯລຯ ບໍ່ປະກອບດ້ວຍກຳທີ່ມີໂທດ ຯລຯ ປະກອບດ້ວຍກຳທີ່ບໍ່ມີໂທດ ຯລຯ ບໍ່ປະກອບດ້ວຍກຳດຳ ຯລຯ ປະກອບດ້ວຍກຳຂາວ ຯລຯ ປະກອບດ້ວຍກຳທີ່ມີສຸກເປັນກຳໄລ ຯລຯ ບໍ່ປະກອບດ້ວຍກຳທີ່ມີທຸກເປັນກຳໄລ ຯລຯ ຊື່ວ່າຍານຈະຣິຍາ ຍ້ອນປະພຶດປະກອບດ້ວຍກຳທີ່ມີສຸກເປັນວິບາກ ຯລຯ ຊື່ວ່າຍານຈະຣິຍາ ຍ້ອນປະພຶດບໍ່ປະກອບດ້ວຍກຳທີ່ມີທຸກເປັນວິບາກ ຊື່ວ່າຍານຈະຣິຍາ ຍ້ອນປະພຶດໃນຍານ ຍານມີຈະຣິຍາເຊັ່ນນີ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານຈະຣິຍາ ນີ້ຊື່ວ່າຍານຈະຣິຍາ ວິນຍານຈະຣິຍາ ອັນຍານະຈະຣິຍາ ຍານຈະຣິຍາ ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກຳນົດຈະຣິຍາ ຊື່ວ່າ ຈະຣິຍານານັດຕະຍານ

**ຈະຣິຍານານັດຕະຍານນິດເທດທີ ໑໗ ຈົບ**

# ໑໘. ພູມນານັດຕະຍານນິດເທດ

## ສະແດງພູມນານັດຕະຍານ

[໗໔] ປັນຍາໃນການກຳນົດທຳ ໔ ປະການ ຊື່ວ່າພູມນານັດຕະຍານ ເປັນແນວໃດ?
ຄື ພູມ ໔ ປະການ ໄດ້ແກ່

໑. ກາມາວະຈອນພູມ (ຊັ້ນທີ່ທ່ອງທ່ຽວຢູ່ໃນກາມ)
໒. ຣູບປາວະຈອນພູມ (ຊັ້ນທີ່ທ່ອງທ່ຽວຢູ່ໃນຣູບ)
໓. ອະຣູບປາວະຈອນພູມ (ຊັ້ນທີ່ທ່ອງທ່ຽວຢູ່ໃນອະຣູບ)
໔. ອະປະຣິຍາປັນນະພູມ (ຊັ້ນທີ່ບໍ່ນັບເນື່ອງໃນພູມ ໓ ໝາຍເຖິງໂລກຸດຕະຣະພູມ)

ກາມາວະຈອນພູມ ເປັນແນວໃດ?

ຄື ຂັນ ທາດ ອາຍະຕະນະ ຮູບ ເວທະນາ ສັນຍາ ສັງຂານ ວິນຍານທີ່ທ່ອງທ່ຽວ ຢູ່ໃນພູມນີ້ ນັບເນື່ອງໃນພູມນີ້ ໃນລະຫວ່າງນີ້ ຄືເບື້ອງລຸ່ມກຳນົດເອົາອະເວຈີນະຣົກເປັນບ່ອນສຸດ ເບື້ອງເທິງກຳນົດເອົາເຫຼົ່າເທບຊັ້ນປະຣະນິມມິຕະວະສະວັດດີເປັນບ່ອນສຸດ ນີ້ຊື່ວ່າກາມາວະຈອນພູມ

ຮູບປາວະຈອນພູມ ເປັນແນວໃດ?

ຄື ທຳ ຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າສະມາບັດ ຜູ້ເກີດໃນຮູບພູມ ຫຼື ພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ໃນພູມນີ້ ນັບເນື່ອງໃນພູມນີ້ ໃນລະຫວ່າງນີ້ ຄືເບື້ອງລຸ່ມກຳນົດເອົາພົມມະໂລກເປັນບ່ອນສຸດ (ຊັ້ນພົມປາຣິສັດຊາ) ເບື້ອງເທິງກຳນົດເອົາພົມຊັ້ນອະກະນິດຖະພົບເປັນບ່ອນສຸດ ນີ້ຊື່ວ່າຮູບປາວະຈອນພູມ

ອະຮູບປາວະຈອນພູມ ເປັນແນວໃດ?

ຄື ທຳຄືຈິດແລະເຈຕະສິກຂອງບຸກຄົນຜູ້ເຂົ້າສະມາບັດ ຜູ້ເກີດໃນອະຮູບພູມ ຫຼືພຣະອະຣະຫັນຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ໃນພູມນີ້ ນັບເນື່ອງໃນພູມນີ້ ໃນລະຫວ່າງນີ້ ຄືເບື້ອງລຸ່ມກຳນົດເອົາພົມຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບເປັນບ່ອນສຸດ ເບື້ອງເທິງກຳນົດເອົາເຫຼົ່າພົມຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບເປັນບ່ອນສຸດ ນີ້ຊື່ວ່າອະຮູບປາວະຈອນພູມ

ອະປະຣິຍາປັນນະພູມ ເປັນແນວໃດ?

ຄື ມັກ ຜົນ ທາດທີ່ປັດໄຈບໍ່ປຸງແຕ່ງ (ນິບພານ) ເປັນອະປະຣິຍາປັນນະ ນີ້ຊື່ວ່າ ອະປະຣິຍາປັນນະພູມ ເຫຼົ່ານີ້ຊື່ວ່າ ພູມ ໔

ພູມ ໔ ອີກໄນໜຶ່ງ ຄື ສະຕິປັດຖານ ໔ ສຳມັປປະທານ ໔ ອິດທິບາດ ໔ ຊານ ໔ ອັບປະມັນຍາ ໔ ອະຮູບປາວະຈອນສະມາບັດ ໔ ປະຕິສຳພິທາ ໔ ປະຕິປະທາ ໔ ອາລົມ ໔ ອະຣິຍະວົງ ໔ ສັງຄະຫະວັດຖຸ ໔ ຈັກກະ ໔ ທຳມະບົດ ໔ ເຫຼົ່ານີ້ຊື່ວ່າພູມ ໔

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກຳນົດທຳ ໔ ປະການ ຊື່ວ່າ ພູມນານັດຕະຍານ

**ພູມນານັດຕະຍານນິດເທດທີ ໑໗ ຈົບ**

## ໑໘. ທຳມະນານັດຕະຍານນິດເທດ

### ສະແດງທຳມະນານັດຕະຍານ

[໘໖] ປັນຍາໃນການກຳນົດທຳ ໙ ຊື່ວ່າທຳມະນານັດຕະຍານ ເປັນແນວໃດ? ພຣະໂຍຄາວະຈອນກຳນົດທຳທັງຫຼາຍ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດກາມາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອະກຸສົນ ເປັນຝ່າຍອັບພະຍາກະຕະ ກຳນົດຣູບປາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ ກຳນົດອະຣູບປາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ ກຳນົດອະປະຣິຍາປັນນະທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ

ພຣະໂຍຄາວະຈອນກຳນົດກາມາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອະກຸສົນ ເປັນຝ່າຍ ອັບພະຍາກະຕະ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດກຸສົນກຳມະບົດ ໑໐[໑] ເປັນຝ່າຍກຸສົນ ກຳນົດອະກຸສົນ ກຳມະບົດ ໑໐ ເປັນຝ່າຍອະກຸສົນ ກຳນົດຣູບ ວິບາກ ແລະກິຣິຍາເປັນຝ່າຍອັບພະຍາກະຕະ ພຣະໂຍຄາວະຈອນກຳນົດກາມາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອະກຸສົນ ເປັນຝ່າຍອັບພະຍາກະຕະແນວນີ້

ພຣະໂຍຄາວະຈອນກຳໜົດຣູບປາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດຊານ ໔ ຂອງບຸກຄົນຜູ້ຍັງຢູ່ໃນໂລກນີ້ ເປັນຝ່າຍກຸສົນ ກຳນົດຊານ ໔ ຂອງບຸກຄົນຜູ້ເກີດໃນພົມມະໂລກເປັນຝ່າຍອັບພະຍາກະຕະ ພຣະໂຍຄາວະຈອນກຳນົດຣູບປາວະຈອນທຳ ເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະແນວນີ້

ພຣະໂຍຄາວະຈອນກຳນົດອະຣູບປາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດອະຣູບປາວະຈອນສະມາບັດ ໔ ຂອງບຸກຄົນຜູ້ຍັງຢູ່ໃນໂລກນີ້ ເປັນຝ່າຍກຸສົນ ກຳນົດອະຣູບປາວະຈອນສະມາບັດ ໔ ຂອງບຸກຄົນຜູ້ເກີດໃນພົມມະໂລກນັ້ນ ເປັນຝ່າຍອັບພະຍາກະຕະ ພຣະໂຍຄາວະຈອນກຳນົດອະຣູບປາວະຈອນທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະແນວນີ້

ພຣະໂຍຄາວະຈອນກຳນົດອະປະຣິຍາປັນນະທຳເປັນຝ່າຍກຸສົນ ເປັນຝ່າຍອັບພະຍາກະຕະ ເປັນແນວໃດ?

ຄື ພຣະໂຍຄາວະຈອນກຳນົດອະຣິຍະມັກ ໔ ເປັນຝ່າຍກຸສົນ ກຳນົດອະປະຣິຍາປັນນະທຳເປັນຝ່າຍກຸສົນ ກຳນົດສາມັນຍະຜົນ ແລະນິບພານເປັນຝ່າຍອັບພະຍາກະຕະແນວນີ້

ພຣະໂຍຄາວະຈອນກຳນົດທຳທັງຫຼາຍແນວນີ້

ທຳ ໙ ປະການ ມີປາໂມດເປັນມູນ ເມື່ອພຣະໂຍຄາວະຈອນມະນະສິການໂດຍ ຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ຜູ້ມີກາຍສະງົບຍ່ອມສະເຫວີຍສຸກ ເມື່ອມີຄວາມສຸກ ຈິດຍ່ອມເປັນສະມາທິ ເມື່ອຈິດເປັນສະມາທິ ຍ່ອມຮູ້

ຍ່ອມເຫັນຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ເພາະຄາຍກຳໜັດ ຈິດຈຶ່ງລຸດພົ້ນ ເມື່ອມະນະສິການໂດຍຄວາມເປັນທຸກ ປາໂມດຍ່ອມເກີດ ຯລຯ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ປາໂມດຍ່ອມເກີດ ຯລຯ

ເມື່ອພຣະໂຍຄາວະຈອນມະນະສິການຮູບໂດຍຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ຯລຯ ເມື່ອມະນະສິການຮູບໂດຍຄວາມເປັນທຸກ ຯລຯ ເມື່ອມະນະສິການຮູບໂດຍຄວາມເປັນອະນັດຕາ ຯລຯ

ເມື່ອພຣະໂຍຄາວະຈອນມະນະສິການເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂຸ ຯລຯ ເມື່ອມະນະສິການຊະຣາແລະມໍຣະນະໂດຍຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ຯລຯ ເມື່ອມະນະສິການຊະຣາແລະມໍຣະນະໂດຍຄວາມເປັນທຸກ ປາໂມດຍ່ອມເກີດ ຯລຯ ເມື່ອມະນະສິການຊະຣາແລະມໍຣະນະໂດຍຄວາມເປັນອະນັດຕາ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ຜູ້ມີກາຍສະງົບ ຍ່ອມສະເຫວີຍສຸກ ເມື່ອມີຄວາມສຸກ ຈິດຍ່ອມເປັນສະມາທິ ເມື່ອຈິດເປັນສະມາທິ ຍ່ອມຮູ້ ຍ່ອມເຫັນຕາມຄວາມເປັນຈິງ ເມື່ອຮູ້ ເມື່ອເຫັນຕາມຄວາມເປັນຈິງ ຍ່ອມເບື່ອໜ່າຍ ເມື່ອເບື່ອໜ່າຍ ຍ່ອມຄາຍກຳໜັດ ຍ້ອນຄາຍກຳໜັດ ຈິດຈຶ່ງລຸດພົ້ນ

ນີ້ຄືທຳ ໙ ປະການ ມີປາໂມດເປັນມູນ

[໗໘] ທຳ ໙ ປະການ ມີໂຍນິໂສມະນະສິການເປັນມູນ ເມື່ອພຣະໂຍຄາວະຈອນມະນະສິການໂດຍອຸບາຍແຍບຄາຍໂດຍຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ຜູ້ມີກາຍສະງົບ ຍ່ອມສະເຫວີຍສຸກ ເມື່ອມີຄວາມສຸກ ຈິດຍ່ອມເປັນສະມາທິ ຜູ້ມີຈິດເປັນສະມາທິ ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະສະມຸໄທ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເມື່ອພຣະໂຍຄາວະຈອນມະນະສິການໂດຍອຸບາຍແຍບຄາຍໂດຍຄວາມເປັນທຸກ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ຜູ້ມີກາຍສະງົບ ຍ່ອມສະເຫວີຍສຸກ ເມື່ອມີຄວາມສຸກ ຈິດຍ່ອມເປັນສະມາທິ ຜູ້ມີຈິດເປັນສະມາທິ ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະສະມຸໄທ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເມື່ອມະນະສິການໂດຍອຸບາຍແຍບຄາຍໂດຍຄວາມເປັນອະນັດຕາ ປາໂມດຍ່ອມເກີດ ຯລຯ

ເມື່ອພຣະໂຍຄາວະຈອນມະນະສິການຮູບໂດຍອຸບາຍແຍບຄາຍ ໂດຍຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ຯລຯ ເມື່ອມະນະສິການຮູບໂດຍອຸບາຍແຍບຄາຍໂດຍຄວາມເປັນທຸກ ປາໂມດ

ຍ່ອມເກີດ ฯລฯ ເມື່ອມະນະສິການຮູບໂດຍອຸບາຍແຍບຄາຍໂດຍຄວາມເປັນອະນັດຕາ ປາໂມດ ຍ່ອມເກີດ ฯລฯ

ເມື່ອພຣະໂຍຄາວະຈອນມະນະສິການເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ເມື່ອມະນະສິການຊະຣາແລະມໍຣະນະໂດຍອຸບາຍແຍບຄາຍໂດຍຄວາມບໍ່ທ່ຽງ ປາໂມດຍ່ອມເກີດ ฯລฯ ເມື່ອມະນະສິການຊະຣາ ແລະມໍຣະນະໂດຍອຸບາຍແຍບຄາຍໂດຍຄວາມເປັນທຸກ ປາໂມດຍ່ອມເກີດ ฯລฯ ເມື່ອມະນະສິການຊະຣາ ແລະມໍຣະນະໂດຍອຸບາຍແຍບຄາຍໂດຍຄວາມເປັນອະນັດຕາ ປາໂມດຍ່ອມເກີດ ເມື່ອມີປາໂມດ ປີຕິຍ່ອມເກີດ ເມື່ອໃຈມີປີຕິ ກາຍຍ່ອມສະງົບ ຜູ້ມີກາຍສະງົບ ຍ່ອມສະເຫວີຍສຸກ ເມື່ອມີຄວາມສຸກ ຈິດຍ່ອມເປັນສະມາທິ ຜູ້ມີຈິດເປັນສະມາທິ ຍ່ອມຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະສະມຸໄທ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະ ຮູ້ຊັດແຈ້ງຕາມຄວາມເປັນຈິງວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ

ນີ້ຄືທໍາ ໙ ປະການ ມີໂຍນິໂສມະນະສິການເປັນມູນ

ຄວາມຕ່າງ ໙ ປະການ ຄື ຜັດສະຕ່າງ ໆ ອາໄສທາດຕ່າງ ໆ ເກີດຂຶ້ນ ເວທະນາຕ່າງ ໆ ອາໄສຜັດສະຕ່າງ ໆ ເກີດຂຶ້ນ ສັນຍາຕ່າງ ໆ ອາໄສເວທະນາຕ່າງ ໆ ເກີດຂຶ້ນ ຄວາມດໍາຣິຕ່າງ ໆ ອາໄສສັນຍາຕ່າງ ໆ ເກີດຂຶ້ນ ສັນທະຕ່າງ ໆ ອາໄສຄວາມດໍາຣິຕ່າງ ໆ ເກີດຂຶ້ນ ຄວາມຮ້ອນຮົນຕ່າງ ໆ ອາໄສສັນທະຕ່າງ ໆ ເກີດຂຶ້ນ ການສະແຫວງຫາຕ່າງ ໆ ອາໄສ ຄວາມຮ້ອນຮົນຕ່າງ ໆ ເກີດຂຶ້ນ ລາບຕ່າງ ໆ ອາໄສການສະແຫວງຫາຕ່າງ ໆ ເກີດຂຶ້ນ ນີ້ຄືຄວາມຕ່າງ ໙ ປະການ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກໍານົດທໍາ ໙ ປະການ ຊື່ວ່າ ທໍາມະນານັດຕະຍານ

**ທໍາມະນານັດຕະຍານນິດເທດທີ ໑໙ ຈົບ**

## ໒໐-໒໔. ຍານະປັນຈະກະນິດເທດ

### ສະແດງຍານ ໕ ໝວດ

[໗໕] ປັນຍາເຄື່ອງຮູ້ຍິ່ງ ຊື່ວ່າຍາຕັດຖະຍານ (ຍານທີ່ມີສະພາວະຮູ້) ປັນຍາ ເຄື່ອງກໍານົດຮູ້ ຊື່ວ່າຕີຣະນັດຖະຍານ (ຍານທີ່ມີສະພາວະພິຈາລະນາ) ປັນຍາເຄື່ອງລະ ຊື່ວ່າປະຣິດຈາຄັດຖະຍານ (ຍານທີ່ມີສະພາວະສະລະ) ປັນຍາເຄື່ອງຈະເລີນ ຊື່ວ່າເອກະຣະສັດຖະຍານ

(ຍານທີ່ມີສະພາວະເປັນຣິດດຽວ) ປັນຍາເຄື່ອງເຮັດໃຫ້ແຈ້ງ ຊື່ວ່າ ຜັດສະນັດຖະຍານ (ຍານທີ່ມີສະພາວະຖືກຕ້ອງ) ເປັນແນວໃດ?

ຄື ທຳໃດ ໆ ທີ່ພຣະໂຍຄາວະຈອນຮູ້ຍິ່ງແລ້ວ ທຳນັ້ນ ໆ ກໍເປັນອັນຮູ້ແລ້ວ ທຳໃດ ໆ ທີ່ພຣະໂຍຄາວະຈອນກຳນົດຮູ້ແລ້ວ ທຳນັ້ນ ໆ ກໍເປັນອັນພິຈາລະນາແລ້ວ ທຳໃດ ໆ ທີ່ພຣະໂຍຄາວະຈອນລະໄດ້ແລ້ວ ທຳນັ້ນ ໆ ເປັນອັນລະໄດ້ແລ້ວ ທຳໃດ ໆ ທີ່ພຣະໂຍຄາວະຈອນຈະເລີນແລ້ວ ທຳນັ້ນ ໆ ກໍເປັນທຳມີຣິດເປັນອັນດຽວ ທຳໃດ ໆ ທີ່ພຣະໂຍຄາວະຈອນເຮັດໃຫ້ແຈ້ງແລ້ວ ທຳນັ້ນ ໆ ກໍເປັນອັນຖືກຕ້ອງແລ້ວ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາເຄື່ອງຮູ້ຍິ່ງ ຊື່ວ່າຍາຕັດຖະຍານ ປັນຍາ ເຄື່ອງກຳນົດຮູ້ ຊື່ວ່າຕີຣະນັດຖະຍານ ປັນຍາເຄື່ອງລະ ຊື່ວ່າປະຮິດຈາຄັດຖະຍານ ປັນຍາເຄື່ອງຈະເລີນ ຊື່ວ່າເອກະຣະສັດຖະຍານ ປັນຍາເຄື່ອງເຮັດໃຫ້ແຈ້ງ ຊື່ວ່າຜັດສະນັດຖະຍານ

**ຍານະປັນຈະກະນິດເທດທີ ໘໐ ໘໔ ຈົບ**

# ໘໕-໘໗. ປະຕິສຳພິທາຍານນິດເທດ

## ສະແດງປະຕິສຳພິທາຍານ

[໗໘] ປັນຍາໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ ປັນຍາໃນທຳ ຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່ານິຣຸດຕິປະຕິສຳພິທາຍານ ປັນຍາໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ ເປັນແນວໃດ?

ຄື ສັດທິນຊີຊື່ວ່າທຳ ວິຣິຍິນຊີຊື່ວ່າທຳ ສະຕິນຊີຊື່ວ່າທຳ ສະມາທິນຊີຊື່ວ່າທຳ ປັນຍິນຊີຊື່ວ່າທຳ ສັດທິນຊີເປັນທຳແນວໜຶ່ງ ວິຣິຍິນຊີເປັນທຳແນວໜຶ່ງ ສະຕິນຊີເປັນທຳແນວໜຶ່ງ ສະມາທິນຊີເປັນທຳແນວໜຶ່ງ ປັນຍິນຊີເປັນທຳແນວໜຶ່ງ ພຣະໂຍຄາວະຈອນຮູ້ທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ (໑)

ສະພາວະທີ່ນ້ອມໄປຊື່ວ່າອັດຖະ ສະພາວະທີ່ປະຄອງໄວ້ຊື່ວ່າອັດຖະ ສະພາວະທີ່ເຂົ້າໄປຕັ້ງໄວ້ຊື່ວ່າອັດຖະ ສະພາວະທີ່ບໍ່ຟຸ້ງຊ່ານຊື່ວ່າອັດຖະ ສະພາວະທີ່ເຫັນຊື່ວ່າອັດຖະ ສະພາວະທີ່ນ້ອມໄປເປັນອັດຖະແນວໜຶ່ງ ສະພາວະທີ່ປະຄອງໄວ້ເປັນອັດຖະແນວໜຶ່ງ ສະພາວະທີ່ເຂົ້າໄປຕັ້ງໄວ້ເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຟຸ້ງຊ່ານເປັນອັດຖະແນວໜຶ່ງ ສະພາວະທີ່ເຫັນ ເປັນ

ອັດຖະແນວໜຶ່ງ ພຣະໂຍຄາວະຈອນຮູ້ອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາ ໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ (໘)

ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງທຳ ໕ ປະການ ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງອັດຖະ ໕ ປະການ ທຳນິຣຸດຕິເປັນແນວໜຶ່ງ ອັດຖະນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ນິຣຸດຕິຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະນິຣຸດຕິ ຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່ານິຣຸດຕິປະຕິສຳພິທາຍານ (໙)

ຍານໃນທຳ ໕ ປະການ ຍານໃນອັດຖະ ໕ ປະການ ຍານໃນນິຣຸດຕິ ໑໐ ປະການ ຍານໃນທຳເປັນແນວໜຶ່ງ ຍານໃນອັດຖະເປັນແນວໜຶ່ງ ຍານໃນນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ (໔)

[໗໗] ສັດທາພະລະຊື່ວ່າທຳ ວິຣິຍະພະລະຊື່ວ່າທຳ ສະຕິພະລະຊື່ວ່າທຳ ສະມາທິພະລະຊື່ວ່າທຳ ປັນຍາພະລະຊື່ວ່າທຳ ສັດທາພະລະເປັນທຳແນວໜຶ່ງ ວິຣິຍະພະລະເປັນທຳແນວໜຶ່ງ ສະຕິພະລະເປັນທຳແນວໜຶ່ງ ສະມາທິພະລະເປັນທຳແນວໜຶ່ງ ປັນຍາພະລະເປັນທຳແນວໜຶ່ງ ພຣະໂຍຄາວະຈອນຮູ້ທຳຕ່າງ ໆ ເຫຼົ່ານີ້ ດ້ວຍຍານໃດ ເປັນອັນຮູ້ສະເພາະທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ

ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາຊື່ວ່າອັດຖະ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານຊື່ວ່າອັດຖະ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຜະໝາດຊື່ວ່າ ອັດຖະ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອຸດທັດຈະຊື່ວ່າອັດຖະ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອະວິດຊາຊື່ວ່າອັດຖະ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນຄວາມຜະໝາດເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອຸດທັດຈະເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຫວັ່ນໄຫວຍ້ອນອະວິດຊາເປັນອັດຖະແນວໜຶ່ງ ພຣະໂຍຄາວະຈອນຮູ້ອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ

ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງທຳ ๕ ປະການ ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງອັດຖະ ๕ ປະການ ທຳນິຣຸດຕິເປັນແນວໜຶ່ງ ອັດຖະນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ນິຣຸດຕິຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະນິຣຸດຕິ ຕ່າງ ໆ ເຫຼົ່ານັ້ນ ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່ານິຣຸດຕິປະຕິສຳພິທາຍານ

ຍານໃນທຳ ๕ ປະການ ຍານໃນອັດຖະ ๕ ປະການ ຍານໃນນິຣຸດຕິ ໑໐ ປະການ ຍານໃນທຳເປັນແນວໜຶ່ງ ຍານໃນອັດຖະເປັນແນວໜຶ່ງ ຍານໃນນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາ ໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ

ສະຕິສຳໂພດຊົງຊື່ວ່າທຳ ທຳມະວິຈະຍະສຳໂພດຊົງຊື່ວ່າທຳ ວິຣິຍະສຳໂພດຊົງ ຊື່ວ່າທຳ ປີຕິສຳໂພດຊົງຊື່ວ່າທຳ ປັດສັດທິສຳໂພດຊົງຊື່ວ່າທຳ ສະມາທິສຳໂພດຊົງຊື່ວ່າທຳ ອຸເປກຂາສຳໂພດຊົງຊື່ວ່າທຳ ສະຕິສຳໂພດຊົງເປັນທຳແນວໜຶ່ງ ທຳມະວິຈະຍະສຳໂພດຊົງເປັນທຳແນວໜຶ່ງ ວິຣິຍະສຳໂພດຊົງເປັນທຳແນວໜຶ່ງ ປີຕິສຳໂພດຊົງເປັນທຳແນວໜຶ່ງ ປັດສັດທິສຳໂພດຊົງເປັນທຳແນວໜຶ່ງ ສະມາທິສຳໂພດຊົງເປັນທຳແນວໜຶ່ງ ອຸເປກຂາສຳໂພດຊົງເປັນທຳແນວໜຶ່ງ ພຣະໂຍຄາວະຈອນຮູ້ທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ

ສະພາວະທີ່ຕັ້ງໝັ້ນຊື່ວ່າອັດຖະ ສະພາວະທີ່ເລືອກເຟັ້ນຊື່ວ່າອັດຖະ ສະພາວະທີ່ປະຄອງໄວ້ ຊື່ວ່າອັດຖະ ສະພາວະທີ່ແຜ່ຊ່ານຊື່ວ່າອັດຖະ ສະພາວະທີ່ສະງົບຊື່ວ່າອັດຖະ ສະພາວະທີ່ບໍ່ຟຸ້ງຊ່ານ ຊື່ວ່າອັດຖະ ສະພາວະທີ່ພິຈາລະນາຊື່ວ່າອັດຖະ ສະພາວະທີ່ຕັ້ງໝັ້ນເປັນອັດຖະແນວໜຶ່ງ ສະພາວະທີ່ເລືອກເຟັ້ນເປັນອັດຖະແນວໜຶ່ງ ສະພາວະທີ່ປະຄອງໄວ້ເປັນອັດຖະແນວໜຶ່ງ ສະພາວະທີ່ແຜ່ຊ່ານເປັນອັດຖະແນວໜຶ່ງ ສະພາວະທີ່ສະງົບເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຟຸ້ງຊ່ານເປັນອັດຖະແນວໜຶ່ງ ສະພາວະທີ່ພິຈາລະນາເປັນອັດຖະແນວໜຶ່ງ ພຣະໂຍຄາວະຈອນຮູ້ອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ

ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງທຳ ๗ ປະການ ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງອັດຖະ ๗ ປະການ ທຳນິຣຸດຕິເປັນແນວໜຶ່ງ ອັດຖະນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ນິຣຸດຕິຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະ

ນິຣຸດຕິ ຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່ານິຣຸດຕິປະຕິສຳພິທາຍານ

ຍານໃນທຳ ໗ ປະການ ຍານໃນອັດຖະ ໗ ປະການ ຍານໃນນິຣຸດຕິ ໑໔ ປະການ ຍານໃນທຳເປັນແນວໜຶ່ງ ຍານໃນອັດຖະເປັນແນວໜຶ່ງ ຍານໃນນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ

ສຳມາທິດຖິຊື່ວ່າທຳ ສຳມາສັງກັບປະຊື່ວ່າທຳ ສຳມາວາຈາຊື່ວ່າທຳ ສຳມາກຳມັນຕະຊື່ວ່າທຳ ສຳມາອາຊີວະຊື່ວ່າທຳ ສຳມາວາຍາມະຊື່ວ່າທຳ ສຳມາສະຕິຊື່ວ່າທຳ ສຳມາສະມາທິຊື່ວ່າທຳ ສຳມາທິດຖິເປັນທຳແນວໜຶ່ງ ສຳມາສັງກັບປະເປັນທຳແນວໜຶ່ງ ສຳມາກຳມັນຕະເປັນທຳແນວໜຶ່ງ ສຳມາອາຊີວະເປັນທຳແນວໜຶ່ງ ສຳມາວາຍາມະເປັນທຳແນວໜຶ່ງ ສຳມາສະມາທິເປັນທຳແນວໜຶ່ງ ພຣະໂຍຄາວະຈອນຮູ້ທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະທຳຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາ ໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ

ສະພາວະທີ່ເຫັນຊື່ວ່າອັດຖະ ສະພາວະທີ່ນຶກຕອງຊື່ວ່າອັດຖະ ສະພາວະທີ່ກຳນົດໄວ້ ຊື່ວ່າອັດຖະ ສະພາວະທີ່ເປັນສະມຸດຖານຊື່ວ່າອັດຖະ ສະພາວະທີ່ຜ່ອງແຜ້ວຊື່ວ່າອັດຖະ ສະພາວະທີ່ປະຄອງໄວ້ຊື່ວ່າອັດຖະ ສະພາວະທີ່ຕັ້ງໝັ້ນຊື່ວ່າອັດຖະ ສະພາວະທີ່ບໍ່ຟຸ້ງຊ່ານຊື່ວ່າອັດຖະ ສະພາວະທີ່ເຫັນເປັນອັດຖະແນວໜຶ່ງ ສະພາວະທີ່ນຶກຕອງເປັນອັດຖະແນວໜຶ່ງ ສະພາວະທີ່ກຳນົດໄວ້ເປັນອັດຖະແນວໜຶ່ງ ສະພາວະທີ່ເປັນສະມຸດຖານເປັນອັດຖະແນວໜຶ່ງ ສະພາວະທີ່ຜ່ອງແຜ້ວເປັນອັດຖະແນວໜຶ່ງ ສະພາວະທີ່ປະຄອງໄວ້ເປັນອັດຖະແນວໜຶ່ງ ສະພາວະທີ່ຕັ້ງໝັ້ນ ເປັນອັດຖະແນວໜຶ່ງ ສະພາວະທີ່ບໍ່ຟຸ້ງຊ່ານເປັນອັດຖະແນວໜຶ່ງ ພຣະໂຍຄາວະຈອນຮູ້ອັດຖະ ຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະອັດຖະຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ

ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງທຳ ໘ ປະການ ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງອັດຖະ ໘ ປະການ ທຳນິຣຸດຕິເປັນແນວໜຶ່ງ ອັດຖະນິຣຸດຕິເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ນິຣຸດຕິຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະນິຣຸດຕິ ຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່ານິຣຸດຕິປະຕິສຳພິທາຍານ

ຍານໃນທຳ ໙ ປະການ ຍານໃນອັດຖະ ໙ ປະການ ຍານໃນນິຣຸດຕິ ໑໖ ປະການ ຍານໃນທຳເປັນແນວໜຶ່ງ ຍານໃນອັດຖະເປັນແນວໜຶ່ງ ຍານໃນນິຣຸດຕິ ເປັນແນວໜຶ່ງ ພຣະໂຍຄາວະຈອນຮູ້ຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານໃດ ເປັນອັນຮູ້ສະເພາະຍານຕ່າງ ໆ ເຫຼົ່ານີ້ດ້ວຍຍານນັ້ນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາ ໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນອັດຖະຕ່າງ ໆ ຊື່ວ່າອັດຖະປະຕິສຳພິທາຍານ ປັນຍາໃນທຳຕ່າງ ໆ ຊື່ວ່າທຳມະປະຕິສຳພິທາຍານ ປັນຍາໃນນິຣຸດຕິຕ່າງ ໆ ຊື່ວ່າ ນິຣຸດຕິປະຕິສຳພິທາຍານ ປັນຍາໃນປະຕິພານຕ່າງ ໆ ຊື່ວ່າປະຕິພານະປະຕິສຳພິທາຍານ

**ປະຕິສຳພິທາຍານນິດເທດທີ ໒໕ ໒໙ ຈົບ**

## ໒໙-໖໑. ຍານັດຕະຍະນິດເທດ

## ສະແດງຍານ ໖ ຢ່າງ

[໗໙] ປັນຍາໃນວິຫາຣະທຳຕ່າງ ໆ ຊື່ວ່າວິຫາຣັດຖະຍານ (ຍານໃນສະພາວະແຫ່ງວິຫາຣະທຳ) ປັນຍາໃນສະມາບັດຕ່າງ ໆ ຊື່ວ່າສະມາປັດຕັດຖະຍານ (ຍານໃນສະພາວະແຫ່ງສະມາບັດ) ປັນຍາໃນວິຫາຣະສະມາບັດຕ່າງ ໆ ຊື່ວ່າວິຫາຣະສະມາປັດຕັດຖະຍານ

(ຍານໃນສະພາວະແຫ່ງວິຫາຣະສະມາບັດ) ເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອພິຈາລະນານິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ (ເຊິ່ງສັງຂານນິມິດດ້ວຍຍານ) ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະວິຫາຣະ

ເມື່ອພິຈາລະນາປະນິທິ[໑] (ຄວາມຕັ້ງໝັ້ນ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ (ເຊິ່ງປະນິທິດ້ວຍຍານ) ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ[໒] ນີ້ຊື່ວ່າອັບປະນິຫິຕະວິຫາຣະ

ເມື່ອພິຈາລະນາອະພິນິເວສະ (ຄວາມຍຶດໝັ້ນ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ (ເຊິ່ງອະພິນິເວສະດ້ວຍຍານ) ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະວິຫາຣະ

ພຣະໂຍຄາວະຈອນເມື່ອພິຈາລະນານິມິດໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະສະມາບັດ

ເມື່ອພິຈາລະນາປະນິທິໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບ ບໍ່ມີປະນິທິຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ ນີ້ຊື່ວ່າອັບປະນິທິຕະສະມາບັດ

ເມື່ອພິຈາລະນາອະພິນິເວສະໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະສະມາບັດ

ພຣະໂຍຄາວະຈອນເມື່ອພິຈາລະນານິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າອະນິມິດຕະວິຫາຣະສະມາບັດ

ເມື່ອພິຈາລະນາປະນິທິໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີປະນິທິຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າອັບປະນິທິຕະວິຫາຣະສະມາບັດ

ເມື່ອພິຈາລະນາອະພິນິເວສະໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານ ອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າສູນຍະຕະວິຫາຣະສະມາບັດ

[໓໙] ພຣະໂຍຄາວະຈອນເມື່ອພິຈາລະນາຮູບນິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະວິຫາຣະ

ເມື່ອພິຈາລະນາຮູບປະນິທິ (ຕັນຫາອັນເປັນບ່ອນຕັ້ງແຫ່ງຮູບ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ ນີ້ຊື່ວ່າ ອັບປະນິທິຕະວິຫາຣະ

ເມື່ອພິຈາລະນາຮູບອະພິນິເວສະ (ຄວາມຍຶດໝັ້ນວ່າຮູບ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະວິຫາຣະ

ພຣະໂຍຄາວະຈອນເມື່ອພິຈາລະນາຮູບນິມິດໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະສະມາບັດ

ເມື່ອພິຈາລະນາຮູບປະນິທິໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານ ອັນເປັນຄວາມດັບບໍ່ມີປະນິທິຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ ນີ້ຊື່ວ່າ ອັບປະນິທິຕະສະມາບັດ

ເມື່ອພິຈາລະນາຮູບອະພິນິເວສະໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງ ນິບພານອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະສະມາບັດ

ພຣະໂຍຄາວະຈອນເມື່ອພິຈາລະນາຮູບນິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະວິຫາຣະສະມາບັດ

ເມື່ອພິຈາລະນາຮູບປະນິທິໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິຫິຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີປະນິຫິຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າອັບປະນິຫິຕະວິຫາຣະສະມາບັດ

ເມື່ອພິຈາລະນາຮູບອະພິນິເວສະໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າ ສູນຍະຕະວິຫາຣະສະມາບັດ

ພຣະໂຍຄາວະຈອນເມື່ອພິຈາລະນາເວທະນານິມິດ ຯລຯ ສັນຍານິມິດ ຯລຯ ສັງຂານນິມິດ ຯລຯ ວິນຍານນິມິດ ຯລຯ ຈັກຂຸ ຯລຯ ເມື່ອພິຈາລະນາຊະຣາມໍຣະນະນິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະວິຫາຣະ

ເມື່ອພິຈາລະນາຊະຣາມໍຣະນະປະນິທິ (ຕັນຫາອັນເປັນບ່ອນຕັ້ງແຫ່ງຊະຣາແລະມໍລະນະ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານ ທີ່ບໍ່ມີ ປະນິຫິຕະ ນີ້ຊື່ວ່າອັບປະນິຫິຕະວິຫາຣະ

ເມື່ອພິຈາລະນາຊະຣາມະຣະນາພິນິເວສະ (ຄວາມຢຶດໝັ້ນວ່າຊະຣາແລະມໍລະນະ) ໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະວິຫາຣະ

ພຣະໂຍຄາວະຈອນເມື່ອພິຈາລະນາຊະຣາມໍຣະນະນິມິດໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດ ນ້ອມໄປໃນນິບພານທີ່ບໍ່ມີນິມິດ ນີ້ຊື່ວ່າອະນິມິດຕະວິຫາຣະສະມາບັດ

ເມື່ອພິຈາລະນາຊະຣາມໍຣະນະປະນິທິໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີປະນິຫິຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິຫິຕະ ນີ້ຊື່ວ່າອັບປະນິຫິຕະວິຫາຣະສະມາບັດ

ເມື່ອພິຈາລະນາຊະຣາມະຣະນາພິບິເວສະໂດຍຄວາມເປັນໄພ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ນີ້ຊື່ວ່າ ສູນຍະຕະສະມາບັດ

ພຣະໂຍຄາວະຈອນເມື່ອພິຈາລະນາຊະຣາມໍຣະນະນິມິດໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີນິມິດ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບບໍ່ມີນິມິດແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າອະນິມິດຕະວິຫາຣະສະມາບັດ

ເມື່ອພິຈາລະນາຊະຣາມໍຣະນະປະນິທິໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ບໍ່ມີປະນິທິຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບ ບໍ່ມີປະນິທິຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າອັບປະນິທິຕະວິຫາຣະສະມາບັດ

ເມື່ອພິຈາລະນາຊະຣາມະຣະນາພິບິເວສະໂດຍຄວາມເປັນໄພ ຖືກຕ້ອງແລ້ວ ໆ ຍ່ອມເຫັນຄວາມເສື່ອມ ຍ້ອນຈິດນ້ອມໄປໃນນິບພານທີ່ເປັນສູນຍະຕະ ເພ່ງເສີຍຄວາມເປັນໄປແລ້ວ ນຶກເຖິງນິບພານອັນເປັນຄວາມດັບເປັນສູນຍະຕະແລ້ວ ຍ່ອມເຂົ້າສະມາບັດ ນີ້ຊື່ວ່າສູນຍະຕະວິຫາຣະສະມາບັດ

ອະນິມິດຕະວິຫານເປັນແນວໜຶ່ງ ອັບປະນິທິຕະວິຫານເປັນແນວໜຶ່ງ ສູນຍະຕະວິຫານເປັນແນວໜຶ່ງ ອະນິມິດຕະສະມາບັດເປັນແນວໜຶ່ງ ອັບປະນິທິຕະສະມາບັດເປັນແນວໜຶ່ງ ສູນຍະຕະສະມາບັດເປັນແນວໜຶ່ງ ອະນິມິດຕະວິຫາຣະສະມາບັດເປັນແນວໜຶ່ງ ອັບປະນິທິຕະວິຫາຣະສະມາບັດເປັນແນວໜຶ່ງ ສູນຍະຕະວິຫາຣະສະມາບັດເປັນແນວໜຶ່ງ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນວິຫາຣະທຳຕ່າງ ໆ ຊື່ວ່າວິຫາຣັດຖະຍານ ປັນຍາໃນສະມາບັດຕ່າງ ໆ ຊື່ວ່າສະມາປັດຕັດຖະຍານ ປັນຍາໃນວິຫາຣະສະມາບັດຕ່າງ ໆ ຊື່ວ່າວິຫາຣະສະມາປັດຕັດຖະຍານ

**ຍານັດຕະຍະນິດເທດທີ ໔໗ ໕໑ ຈົບ**

# ໕໔. ອານັນຕະຣິກະສະມາທິຍານະນິດເທດ

## ສະແດງອານັນຕະຣິກະສະມາທິຍານ

[໗໐] ປັນຍາໃນການຕັດຂາດອາສະວະ ຍ້ອນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອານັນຕະຣິກະສະມາທິຍານ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມ (ມີອາລົມດຽວ) ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງເນກຂຳມະ ຊື່ວ່າສະມາທິ ຍານຍ່ອມເກີດຂຶ້ນດ້ວຍອຳນາດແຫ່ງສະມາທິນັ້ນ ອາສະວະທັງຫຼາຍຍ່ອມສິ້ນໄປດ້ວຍຍານນັ້ນ ສະມະຖະມີກ່ອນ ຍານມີພາຍຫຼັງ ດ້ວຍປະການແນວນີ້ ຄວາມສິ້ນໄປແຫ່ງອາສະວະທັງຫຼາຍ ຍ່ອມມີໄດ້ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າປັນຍາໃນການຕັດຂາດອາສະວະຍ້ອນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອານັນຕະຣິກະສະມາທິຍານ

ຄຳວ່າ ອາສະວະ ອະທິບາຍວ່າ ອາສະວະເຫຼົ່ານັ້ນ ມີອັນໃດແດ່?

ຄື ກາມາສະວະ (ອາສະວະ ຄື ກາມ) ພະວາສະວະ (ອາສະວະ ຄື ພົບ) ທິດຖາສະວະ (ອາສະວະ ຄື ທິດຖິ) ອະວິດຊາສະວະ (ອາສະວະ ຄື ອະວິດຊາ)

ອາສະວະເຫຼົ່ານີ້ຍ່ອມສິ້ນໄປ ໃນບ່ອນໃດ?

ຄື ທິດຖາສະວະທັງໝົດຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ກາມາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ພະວາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ອະວິດຊາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງໂສດາປັດຕິມັກນີ້

ກາມາສະວະສ່ວນຫຍາບຍ່ອມສິ້ນໄປດ້ວຍສະກະທາຄາມິມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍສະກະທາຄາມິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງສະກະທາຄາມິມັກນີ້

ກາມາສະວະທັງໝົດຍ່ອມສິ້ນໄປດ້ວຍອະນາຄາມິມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍອະນາຄາມິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງອະນາຄາມິມັກນີ້

ພະວາສະວະທັງໝົດ ອະວິດຊາສະວະທັງໝົດ ຍ່ອມສິ້ນໄປດ້ວຍອະຣະຫັດຕະມັກ ອາສະວະເຫຼົ່ານີ້ ຍ່ອມສິ້ນໄປໃນຂະນະແຫ່ງອະຣະຫັດຕະມັກນີ້

ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອະພະຍາບາດ ຊື່ວ່າສະມາທິ ฯລฯ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອາໂລກະສັນຍາ ฯລฯ

ດ້ວຍອຳນາດແຫ່ງອະວິກເຂປະ ฯລฯ ດ້ວຍອຳນາດແຫ່ງທຳມະວະວັດຖານ ฯລฯ ດ້ວຍອຳນາດແຫ່ງຍານ ฯລฯ ດ້ວຍອຳນາດແຫ່ງປາມຸດຊະ ฯລฯ ດ້ວຍອຳນາດແຫ່ງປະຖົມຊານ ฯລฯ ດ້ວຍອຳນາດແຫ່ງທຸຕິຍະຊານ ฯລฯ ດ້ວຍອຳນາດແຫ່ງຕະຕິຍະຊານ ฯລฯ ດ້ວຍອຳນາດແຫ່ງ ຈະຕຸດຖະຊານ ฯລฯ ດ້ວຍອຳນາດແຫ່ງອາກາສານັນຈາຍະຕະນະສະມາບັດ ฯລฯ ດ້ວຍອຳນາດແຫ່ງວິນຍານັນຈາຍະຕະນະສະມາບັດ ฯລฯ ດ້ວຍອຳນາດແຫ່ງອາກິນຈັນຍາຍະຕະນະສະມາບັດ ฯລฯ ດ້ວຍອຳນາດແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ

ຯລຯ ດ້ວຍອຳນາດແຫ່ງປະຖະວີກະສິນ ຯລຯ ດ້ວຍອຳນາດແຫ່ງອາໂປກະສິນ ຯລຯ ດ້ວຍອຳນາດແຫ່ງເຕໂຊກະສິນ ຯລຯ ດ້ວຍອຳນາດແຫ່ງວາໂຍກະສິນ ຯລຯ ດ້ວຍອຳນາດແຫ່ງນິລະກະສິນ ຯລຯ ດ້ວຍອຳນາດແຫ່ງປີຕະກະສິນ ຯລຯ ດ້ວຍອຳນາດແຫ່ງໂລຫິຕະກະສິນ ຯລຯ ດ້ວຍອຳນາດແຫ່ງໂອທາຕະກະສິນ ຯລຯ ດ້ວຍອຳນາດແຫ່ງອາກາດກະສິນ ຯລຯ ດ້ວຍອຳນາດແຫ່ງວິນຍານກະສິນ ຯລຯ ດ້ວຍອຳນາດແຫ່ງພຸດທານຸດສະຕິ ຯລຯ ດ້ວຍອຳນາດແຫ່ງທຳມານຸດສະຕິ ຯລຯ ດ້ວຍອຳນາດແຫ່ງສັງຄານຸດສະຕິ ຯລຯ ດ້ວຍອຳນາດແຫ່ງສີລານຸດສະຕິ ຯລຯ ດ້ວຍອຳນາດແຫ່ງຈາຄານຸດສະຕິ ຯລຯ ດ້ວຍອຳນາດແຫ່ງເທວະຕານຸດສະຕິ ຯລຯ ດ້ວຍອຳນາດແຫ່ງອານາປານັດສະຕິ ຯລຯ ດ້ວຍອຳນາດແຫ່ງມະຣະນັດສະຕິ ຯລຯ ດ້ວຍອຳນາດແຫ່ງກາຍະຄະຕາສະຕິ ຯລຯ ດ້ວຍອຳນາດແຫ່ງອຸປະສະມານຸດສະຕິ ຯລຯ ດ້ວຍອຳນາດແຫ່ງອຸດທຸມາຕະກະສັນຍາ ຯລຯ ດ້ວຍອຳນາດແຫ່ງວິນີລະກະສັນຍາ ຯລຯ ດ້ວຍອຳນາດ ແຫ່ງວິປຸບພະກະສັນຍາ ຯລຯ ດ້ວຍອຳນາດແຫ່ງວິດສິດທະກະສັນຍາ ຯລຯ ດ້ວຍອຳນາດແຫ່ງວິກຂາຍິຕະກະສັນຍາ ຯລຯ ດ້ວຍອຳນາດແຫ່ງວິກຂິດຕະກະສັນຍາ ຯລຯ ດ້ວຍອຳນາດແຫ່ງຫະຕະວິກຂິດຕະກະສັນຍາ ຯລຯ ດ້ວຍອຳນາດແຫ່ງໂລຫິຕະກະສັນຍາ ຯລຯ ດ້ວຍອຳນາດແຫ່ງປຸລະວະກະສັນຍາ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອັດຖິກະສັນຍາ ຊື່ວ່າ ສະມາທິ ຯລຯ

[໗໑] ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງລົມຫັນໃຈເຂົ້າຍາວ ຊື່ວ່າສະມາທິ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງລົມຫັນໃຈອອກຍາວ ຯລຯ ດ້ວຍອຳນາດແຫ່ງລົມຫັນໃຈເຂົ້າສັ້ນ ຯລຯ ດ້ວຍອຳນາດແຫ່ງລົມຫັນໃຈອອກສັ້ນ ຯລຯ ດ້ວຍອຳນາດແຫ່ງຄວາມເປັນຜູ້ຮູ້ແຈ້ງກອງລົມທັງປວງຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງຄວາມເປັນຜູ້ຮູ້ແຈ້ງກອງລົມທັງປວງຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງການຣະງັບກາຍສັງຂານຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງການຣະງັບກາຍສັງຂານຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງປີຕິຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງປີຕິຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງສຸກຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງສຸກຫັນໃຈອອກ ຯລຯ

ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງຈິດຕະສັງຂານຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງຈິດຕະສັງຂານຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງການຣະງັບຈິດຕະສັງຂານຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງການຣະງັບຈິດຕະສັງຂານຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງຈິດຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງຄວາມຮູ້ແຈ້ງຈິດຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງການຍັງຈິດໃຫ້ບັນເທີງຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງການຍັງຈິດໃຫ້ບັນເທີງຫັນໃຈອອກ ຯລຯ ດ້ວຍອຳນາດແຫ່ງການຕັ້ງຈິດໄວ້ຫັນໃຈເຂົ້າ ຯລຯ ດ້ວຍອຳນາດແຫ່ງ

ການຕັ້ງຈິດໄວ້ຫັນໃຈອອກ ฯລฯ ດ້ວຍອຳນາດແຫ່ງການເປືອງຈິດຫັນໃຈເຂົ້າฯລฯ ດ້ວຍອຳນາດແຫ່ງການເປືອງຈິດຫັນໃຈອອກ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມບໍ່ທ່ຽງຫັນໃຈເຂົ້າ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມບໍ່ທ່ຽງຫັນໃຈອອກ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມຄາຍກຳໜັດຫັນໃຈເຂົ້າ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມຄາຍກຳໜັດຫັນໃຈອອກ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມດັບຫັນໃຈເຂົ້າฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມດັບຫັນໃຈອອກ ฯລฯ ດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າ ฯລฯ

ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ ຊື່ວ່າສະມາທິ ຍານຍ່ອມເກີດຂຶ້ນດ້ວຍອຳນາດແຫ່ງສະມາທິນັ້ນ

ອາສະວະທັງຫຼາຍຍ່ອມສິ້ນໄປດ້ວຍຍານນັ້ນ ສະມະຖະມີກ່ອນ ຍານມີພາຍຫຼັງ ດ້ວຍປະການແນວນີ້ ຄວາມສິ້ນໄປແຫ່ງອາສະວະທັງຫຼາຍຍ່ອມມີໄດ້ດ້ວຍຍານນັ້ນ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ປັນຍາໃນການຕັດຂາດອາສະວະຍ້ອນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອານັນຕະຣິກະສະມາທິຍານ

ຄຳວ່າ ອາສະວະ ອະທິບາຍວ່າ ອາສະວະເຫຼົ່ານັ້ນ ມີອັນໃດແດ່

ຄື ກາມາສະວະ ພະວາສະວະ ທິດຖາສະວະ ອະວິດຊາສະວະ

ອາສະວະເຫຼົ່ານີ້ຍ່ອມສິ້ນໄປ ໃນບ່ອນໃດ?

ຄື ທິດຖາສະວະທັງໝົດຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ກາມາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ພະວາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ອະວິດຊາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງ ໂສດາປັດຕິມັກນີ້

ກາມາສະວະສ່ວນຫຍາບຍ່ອມສິ້ນໄປດ້ວຍສະກະທາຄາມີມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍສະກະທາຄາມີມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງສະກະທາຄາມີມັກນີ້

ກາມາສະວະທັງໝົດຍ່ອມສິ້ນໄປດ້ວຍອະນາຄາມີມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍອະນາຄາມີມັກອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງອະນາຄາມີມັກນີ້

ພະວາສະວະທັງໝົດ ອະວິດຊາສະວະທັງໝົດຍ່ອມສິ້ນໄປດ້ວຍອະຣະຫັດຕະມັກ ອາສະວະເຫຼົ່ານີ້ ຍ່ອມສິ້ນໄປໃນຂະນະແຫ່ງອະຣະຫັດຕະມັກນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາຍ້ອນມີສະພາວະຮູ້ຊັດແຈ້ງ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການຕັດຂາດອາສະວະຍ້ອນຄວາມບໍລິສຸດແຫ່ງຈິດທີ່ບໍ່ຟຸ້ງຊ່ານ ຊື່ວ່າອານັນຕະຣິກະສະມາທິຍານ

**ອານັນຕະຣິກະສະມາທິຍານນິດເທດທີ ໒໘ ຈົບ**

# ໒໒. ອະຣະນະວິຫາຣະຍານນິດເທດ

## ສະແດງອະຣະນະວິຫາຣະຍານ

[໗໘] ທັດສະນາທິປະໄຕ ວິຫາຣາທິຄົມທີ່ສະງົບ ແລະປະນີຕາທິມຸດຕະຕາປັນຍາຊື່ວ່າອະຣະນະວິຫາຣະຍານ ເປັນແນວໃດ?

ຄື ຄຳວ່າ ທັດສະນາທິປະໄຕ ອະທິບາຍວ່າ ອະນິດຈານຸປັດສະນາຊື່ວ່າ ທັດສະນາທິປະໄຕ ທຸກຂານຸປັດສະນາຊື່ວ່າທັດສະນາທິປະໄຕ ອະນັດຕານຸປັດສະນາຊື່ວ່າທັດສະນາທິປະໄຕ ອະນິດຈານຸປັດສະນາໃນຮູບຊື່ວ່າທັດສະນາທິປະໄຕ ທຸກຂານຸປັດສະນາໃນຮູບຊື່ວ່າທັດສະນາທິປະໄຕ ອະນັດຕານຸປັດສະນາໃນຮູບຊື່ວ່າທັດສະນາທິປະໄຕ ອະນິດຈານຸປັດສະນາໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາໃນຊະຣາ ແລະມໍຣະນະຊື່ວ່າທັດສະນາທິປະໄຕ ທຸກຂານຸປັດສະນາໃນຊະຣາ ແລະມໍຣະນະຊື່ວ່າທັດສະນາທິປະໄຕ ອະນັດຕານຸປັດສະນາໃນຊະຣາ ແລະມໍຣະນະຊື່ວ່າທັດສະນາທິປະໄຕ

ຄຳວ່າ ວິຫາຣາທິຄົມທີ່ສະງົບ ອະທິບາຍວ່າ ສູນຍະຕະວິຫານຊື່ວ່າວິຫາຣາທິຄົມທີ່ສະງົບ ອະນິມິດຕະວິຫານຊື່ວ່າວິຫາຣາທິຄົມທີ່ສະງົບ ອັບປະນິຫິຕະວິຫານຊື່ວ່າວິຫາຣາທິຄົມທີ່ສະງົບ

ຄຳວ່າ ປະນີຕາທິມຸດຕະຕາ ອະທິບາຍວ່າ ຄວາມທີ່ຈິດນ້ອມໄປໃນທຳທີ່ວ່າງ ຊື່ວ່າປະນີຕາທິມຸດຕະຕາ ຄວາມທີ່ຈິດນ້ອມໄປໃນທຳທີ່ບໍ່ມີນິມິດຊື່ວ່າປະນີຕາທິມຸດຕະຕາ ຄວາມທີ່ຈິດນ້ອມໄປໃນທຳທີ່ບໍ່ມີປະນິຫິຕະ (ບ່ອນຕັ້ງ) ຊື່ວ່າປະນີຕາທິມຸດຕະຕາ

ຄຳວ່າ ອະຣະນະວິຫາຣະ ອະທິບາຍວ່າ ປະຖົມຊານຊື່ວ່າອະຣະນະວິຫາຣະ ທຸຕິຍະຊານຊື່ວ່າອະຣະນະວິຫາຣະ ຕະຕິຍະຊານຊື່ວ່າອະຣະນະວິຫາຣະ ຈະຕຸດຖະຊານຊື່ວ່າອະຣະນະວິຫາຣະ ອາກາສານັນຈາຍະຕະນະສະມາບັດ ຯລຯ ເນວະສັນຍານາສັນຍາຍະຕະນະສະມາບັດຊື່ວ່າອະຣະນະວິຫາຣະ

ຄຳວ່າ ອະຣະນະວິຫາຣະ ອະທິບາຍວ່າ ຊື່ວ່າອະຣະນະວິຫາຣະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າອະຣະນະວິຫາຣະ ຍ້ອນກຳຈັດນິວອນໄດ້ດ້ວຍປະຖົມຊານ ຊື່ວ່າອະຣະນະວິຫາຣະ ຍ້ອນກຳຈັດວິຕົກວິຈານໄດ້ດ້ວຍທຸຕິຍະຊານ ຊື່ວ່າອະຣະນະວິຫາຣະ ຍ້ອນກຳຈັດປີຕິໄດ້

ດ້ວຍຕະຕິຍະຊານ ຊື່ວ່າອະຣະນະວິຫາຣະ ຍ້ອນກໍາຈັດສຸກ ແລະທຸກໄດ້ດ້ວຍຈະຕຸດຖະຊານ ຊື່ວ່າອະຣະນະວິຫາຣະ ຍ້ອນກໍາຈັດຣູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາໄດ້ດ້ວຍອາກາສານັນຈາຍະຕະນະສະມາບັດ ຊື່ວ່າອະຣະນະວິຫາຣະ ຍ້ອນກໍາຈັດອາກາສານັນຈາຍະຕະນະສັນຍາໄດ້ດ້ວຍວິນຍານັນຈາຍະຕະນະສະມາບັດ ຊື່ວ່າອະຣະນະວິຫາຣະ ຍ້ອນກໍາຈັດວິນຍານັນຈາຍະຕະນະສັນຍາໄດ້ດ້ວຍອາກິນຈັນຍາຍະຕະນະສະມາບັດ ຊື່ວ່າອະຣະນະວິຫາຣະ ຍ້ອນກໍາຈັດອາກິນຈັນຍາຍະຕະນະ ສັນຍາໄດ້ດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າອະຣະນະວິຫາຣະ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ທັດສະນາທິປະໄຕ ວິຫາຣາທິຄົມທີ່ສະງົບ ແລະປະນີຕາທິມຸດຕະຕາປັນຍາ ຊື່ວ່າອະຣະນະວິຫາຣະຍານ

**ອະຣະນະວິຫາຣະຍານນິດເທດທີ ໓໓ ຈົບ**

# ໓໔. ນິໂຣທະສະມາປັດຕິຍານະນິດເທດ

## ສະແດງນິໂຣທະສະມາປັດຕິຍານ

[໗໓] ປັນຍາທີ່ມີຄວາມຊໍານານໃນການຣະງັບສັງຂານ ໓ ດ້ວຍຍານຈະຣິຍາ ໑໖ ແລະດ້ວຍສະມາທິຈະຣິຍາ ໙ ຍ້ອນເປັນຜູ້ປະກອບດ້ວຍພະລະ ໔ ຢ່າງ

ຊື່ວ່ານິໂຣທະສະມາປັດຕິຍານ ເປັນແນວໃດ?

ຄື ຄໍາວ່າ ພະລະ ໔ ຢ່າງ ອະທິບາຍວ່າ ພະລະ ໔ ຢ່າງ ໄດ້ແກ່

໑. ສະມະຖະພະລະ
໔. ວິປັດສະນາພະລະ

ສະມະຖະພະລະ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອໍານາດແຫ່ງເນກຂໍາມະ ຊື່ວ່າ ສະມະຖະພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອໍານາດແຫ່ງອະພະຍາບາດ ຊື່ວ່າ ສະມະຖະພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອໍານາດແຫ່ງອາໂລກະສັນຍາ ຊື່ວ່າ ສະມະຖະພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອໍານາດແຫ່ງອະວິກເຂປະ ຊື່ວ່າສະມະຖະພະລະ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອໍານາດແຫ່ງການພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ຊື່ວ່າສະມະຖະພະລະ ຄວາມທີ່

ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງການພິຈາລະນາເຫັນຄວາມສະລະຄືນທັນໃຈອອກ ຊື່ວ່າສະມະຖະພະລະ

ຄຳວ່າ ສະມະຖະພະລະ ອະທິບາຍວ່າ ຊື່ວ່າສະມະຖະພະລະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນນິວອນດ້ວຍປະຖົມຊານ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນວິຕົກວິຈານດ້ວຍທຸຕິຍະຊານ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນປິຕິດ້ວຍຕະຕິຍະຊານ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນສຸກແລະທຸກດ້ວຍຈະຕຸດຖະຊານ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນຮູບສັນຍາປະຕິຄະສັນຍາ ນານັດຕະສັນຍາ ດ້ວຍອາກາສານັນຈາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອາກາສານັນຈາຍະຕະນະສັນຍາດ້ວຍວິນຍານັນຈາຍະຕະນະສະມາບັດ ຊື່ວ່າສະມະຖະພະລະຍ້ອນບໍ່ຫວັ່ນໄຫວຍ້ອນວິນຍານັນຈາຍະຕະນະສັນຍາດ້ວຍອາກິນຈັນຍາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອາກິນຈັນຍາຍະຕະນະສັນຍາ ດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນບໍ່ຫວັ່ນໄຫວ ບໍ່ກວັດແກວ່ງ ບໍ່ເອນອຽງ ຍ້ອນອຸດທັດຈະ ຍ້ອນກິເລດທີ່ປະກອບດ້ວຍອຸດທັດຈະ ແລະຍ້ອນຂັນ ນີ້ຊື່ວ່າສະມະຖະພະລະ

ວິປັດສະນາພະລະ ເປັນແນວໃດ?

ຄື ອະນິດຈານຸປັດສະນາຊື່ວ່າວິປັດສະນາພະລະ ທຸກຂານຸປັດສະນາຊື່ວ່າວິປັດສະນາພະລະ ອະນັດຕານຸປັດສະນາຊື່ວ່າວິປັດສະນາພະລະ ນິບພິທານຸປັດສະນາຊື່ວ່າວິປັດສະນາພະລະ ວິຣາຄານຸປັດສະນາຊື່ວ່າວິປັດສະນາພະລະ ນິໂຣທານຸປັດສະນາຊື່ວ່າວິປັດສະນາພະລະປະຕິນິດສັກຄານຸປັດສະນາຊື່ວ່າວິປັດສະນາພະລະ ອະນິດຈານຸປັດສະນາໃນຮູບຊື່ວ່າວິປັດສະນາພະລະ ຯລຯ ປະຕິນິດສັກຄານຸປັດສະນາໃນຮູບ ຯລຯ ໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ໃນຊະຣາແລະມໍລະນະ ຯລຯ ປະຕິນິດສັກຄານຸປັດສະນາໃນຊະຣາແລະມໍຣະນະຊື່ວ່າວິປັດສະນາພະລະ

ຄຳວ່າ ວິປັດສະນາພະລະ ອະທິບາຍວ່າ ຊື່ວ່າວິປັດສະນາພະລະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນນິດຈະສັນຍາດ້ວຍອະນິດຈານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນສຸຂະສັນຍາດ້ວຍທຸກຂານຸປັດສະນາ ຊື່ວ່າ ວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອັດຕະສັນຍາດ້ວຍອະນັດຕານຸປັດສະນາ ຊື່ວ່າ ວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນນັນທິດ້ວຍນິບພິທານຸປັດສະນາ ຊື່ວ່າວິປັດສະນາພະລະຍ້ອນບໍ່ຫວັ່ນໄຫວຍ້ອນຣາຄະດ້ວຍວິຣາຄານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນບໍ່ຫວັ່ນ

ໄຫວຍ້ອນສະມຸໄທດ້ວຍນິໂຣທານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອາທານະດ້ວຍປະຕິນິດສັກຄານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນບໍ່ຫວັ່ນໄຫວ ບໍ່ກວັດແກວ່ງ ບໍ່ເອນອຽງຍ້ອນອະວິດຊາ ຍ້ອນກິເລດທີ່ປະກອບດ້ວຍອະວິດຊາແລະຍ້ອນຂັນ ນີ້ຊື່ວ່າວິປັດສະນາພະລະ

ຄຳວ່າ ດ້ວຍການຣະງັບສັງຂານ ໓ ອະທິບາຍວ່າ ດ້ວຍການຣະງັບສັງຂານ ໓ ເປັນແນວໃດ?

ຄື ວິຕົກ ວິຈານທີ່ເປັນວະຈີສັງຂານຂອງທ່ານຜູ້ເຂົ້າທຸຕິຍະຊານຍ່ອມຣະງັບໄປ ລົມຫັນໃຈເຂົ້າຫັນໃຈອອກທີ່ເປັນກາຍສັງຂານ ຂອງທ່ານຜູ້ເຂົ້າຈະຕຸດຖະຊານຍ່ອມຣະງັບໄປ ສັນຍາແລະເວທະນາທີ່ເປັນຈິດຕະສັງຂານຂອງທ່ານຜູ້ເຂົ້າສັນຍາເວທະຍິດນິໂຣດ ຍ່ອມຣະງັບໄປດ້ວຍການ ຣະງັບສັງຂານ ໓ ນີ້

[໗໔] ຄຳວ່າ ດ້ວຍຍານຈະຣິຍາ ໑໖ ອະທິບາຍວ່າ ດ້ວຍຍານຈະຣິຍາ ໑໖ ເປັນແນວ ໃດ?

ຄື ອະນິດຈານຸປັດສະນາຊື່ວ່າຍານຈະຣິຍາ ທຸກຂານຸປັດສະນາຊື່ວ່າຍານຈະຣິຍາ ອະນັດຕານຸປັດສະນາຊື່ວ່າຍານຈະຣິຍາ ນິບພິທານຸປັດສະນາຊື່ວ່າຍານຈະຣິຍາ ວິຣາຄານຸປັດສະນາຊື່ວ່າຍານຈະຣິຍາ ນິໂຣທານຸປັດສະນາຊື່ວ່າຍານຈະຣິຍາ ປະຕິນິດສັກຄານຸປັດສະນາຊື່ວ່າຍານຈະຣິຍາ ວິວັດຕະນານຸປັດສະນາຊື່ວ່າຍານຈະຣິຍາ ໂສດາປັດຕິມັກ ຊື່ວ່າຍານຈະຣິຍາ ໂສດາປັດຕິຜົນສະມາບັດຊື່ວ່າຍານຈະຣິຍາ ສະກະທາຄາມິມັກຊື່ວ່າຍານຈະຣິຍາ ສະກະທາຄາມິຜົນສະມາບັດຊື່ວ່າຍານຈະຣິຍາ ອະນາຄາມິມັກຊື່ວ່າຍານຈະຣິຍາ ອະນາຄາມິຜົນສະມາບັດຊື່ວ່າຍານຈະຣິຍາ ອະຣະຫັດຕະມັກຊື່ວ່າຍານຈະຣິຍາ ອະຣະຫັດຕະຜົນສະມາບັດຊື່ວ່າຍານຈະຣິຍາ ດ້ວຍຍານຈະຣິຍາ ໑໖ ນີ້

[໗໕] ຄຳວ່າ ດ້ວຍສະມາທິຈະຣິຍາ ໙ ອະທິບາຍວ່າ ດ້ວຍສະມາທິຈະຣິຍາ ໙ ເປັນແນວໃດ?

ຄື ປະຖົມຊານຊື່ວ່າສະມາທິຈະຣິຍາ ທຸຕິຍະຊານຊື່ວ່າສະມາທິຈະຣິຍາ ຕະຕິຍະຊານ ຊື່ວ່າສະມາທິຈະຣິຍາ ຈະຕຸດຖະຊານຊື່ວ່າສະມາທິຈະຣິຍາ ອາກາສານັນຈາຍະນະຕະສະມາບັດ ฯລฯ ວິນຍານັນຈາຍະຕະນະສະມາບັດ ฯລฯ ອາກິນຈັນຍາຍະຕະນະສະມາບັດ ฯລฯ ເນວະສັນຍານາສັນຍາຍະຕະນະສະມາບັດຊື່ວ່າສະມາທິຈະຣິຍາ ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ ເພື່ອໄດ້ປະຖົມຊານ ฯລฯ ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ ເພື່ອໄດ້ເນວະສັນຍາ ນາສັນຍາຍະຕະນະສະມາບັດຊື່ວ່າສະມາທິຈະຣິຍາ ດ້ວຍສະມາທິຈະຣິຍາ ໙ ນີ້

ຄຳວ່າ ວະສີ ອະທິບາຍວ່າ ວະສີ ໕ ປະການ ໄດ້ແກ່

໑. ອາວັດຊະນາວະສີ (ຊຳນານໃນການຄຳນຶງເຖິງ)

໒. ສະມາປັດຊະນະວະສີ (ຊຳນານໃນການເຂົ້າ)
໓. ອະທິດຖານະວະສີ (ຊຳນານໃນການອະທິຖານ)
໔. ວຸດຖານະວະສີ (ຊຳນານໃນການອອກ)
໕. ປັດຈະເວກຂະນາວະສີ (ຊຳນານໃນການພິຈາລະນາ)

ສະມາປັດຕິລາພີບຸກຄົນ (ບຸກຄົນຜູ້ໄດ້ສະມາບັດ) ຄຳນຶງເຖິງປະຖົມຊານ ຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການຄຳນຶງເຖິງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາວັດຊະນາວະສີ

ສະມາປັດຕິລາພີບຸກຄົນເຂົ້າປະຖົມຊານຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການເຂົ້າ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສະມາປັດຊະນະວະສີ ສະມາປັດຕິລາພີບຸກຄົນອະທິຖານປະຖົມຊານຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດ ກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການອະທິຖານ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະທິດຖານະວະສີ

ສະມາປັດຕິລາພີບຸກຄົນອອກຈາກປະຖົມຊານຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການອອກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວຸດຖານະວະສີ

ສະມາປັດຕິລາພີບຸກຄົນພິຈາລະນາປະຖົມຊານຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການພິຈາລະນາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ປັດຈະເວກຂະນາວະສີ

ສະມາປັດຕິລາພີບຸກຄົນຄຳນຶງເຖິງທຸຕິຍະຊານ ຯລຯ ຄຳນຶງເຖິງເນວະສັນຍາ ນາສັນຍາຍະຕະນະສະມາບັດຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການຄຳນຶງເຖິງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາວັດຊະນາວະສີ

ສະມາປັດຕິລາພີບຸກຄົນເຂົ້າ ຯລຯ ອະທິດຖານ ຯລຯ ອອກ ຯລຯ ພິຈາລະນາ ເນວະສັນຍານາສັນຍາຍະຕະນະສະມາບັດຢູ່ໃສກໍໄດ້ ເມື່ອໃດກໍໄດ້ ດົນນານເທົ່າໃດກໍໄດ້ ຕາມປາຖະໜາ ບໍ່ມີຄວາມລ້າຊ້າໃນການພິຈາລະນາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ປັດຈະເວກຂະນາວະສີ

ວະສີ ໕ ປະການນີ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ມີຄວາມຊຳນານໃນການຣະງັບສັງຂານ ໓ ດ້ວຍຍານຈະຣິຍາ ໑໖ ແລະດ້ວຍສະມາທິຈະຣິຍາ ໙ ຍ້ອນເປັນຜູ້ປະກອບດ້ວຍພະລະ ໒ ຢ່າງ ຊື່ວ່ານິໂຣທະສະມາປັດຕິຍານ

**ນິໂຣທະສະມາປັດຕິຍານະນິດເທດທີ ໓໔ ຈົບ**

# ໓໕. ປະຣິນິບພານະຍານະນິດເທດ

## ສະແດງປະຣິນິບພານະຍານ

[໗໘] ປັນຍາໃນການກະກະທຳຄວາມດຳຣົງຢູ່ກິເລດໃຫ້ສິ້ນໄປຂອງຜູ້ມີສຳປະຊັນຍະຊື່ວ່າ ປະຣິບພານະຍານ ເປັນແນວໃດ?

ຄື ບຸກຄົນຜູ້ມີສຳປະຊັນຍະໃນສາດສະໜານີ້ ກະທຳຄວາມດຳຣົງຢູ່ກາມສັນທະໃຫ້ສິ້ນໄປດ້ວຍເນກຂຳມະ ກະທຳຄວາມດຳຣົງຢູ່ແຫ່ງພະຍາບາດໃຫ້ສິ້ນໄປດ້ວຍອະພະຍາບາດ ທຳຄວາມດຳຣົງຢູ່ແຫ່ງຖີນະມິດທະໃຫ້ສິ້ນໄປດ້ວຍອາໂລກະສັນຍາ ກະທຳຄວາມດຳຣົງຢູ່ແຫ່ງອຸດທັດຈະໃຫ້ສິ້ນໄປດ້ວຍອະວິກເຂປະ ກະທຳຄວາມດຳຣົງຢູ່ແຫ່ງວິຈິກິດສາໃຫ້ສິ້ນໄປດ້ວຍທຳມະວະວັດຖານ ຯລຯ ແຫ່ງອະວິດຊາໃຫ້ສິ້ນໄປດ້ວຍຍານ ຯລຯ ແຫ່ງອະຣະຕິໃຫ້ສິ້ນໄປດ້ວຍປາມຸດຊະ ຯລຯ ແຫ່ງນິວອນໃຫ້ສິ້ນໄປດ້ວຍປະຖົມຊານ ຯລຯ ກະທຳຄວາມດຳຣົງຢູ່ກິເລດທັງປວງໃຫ້ສິ້ນໄປດ້ວຍອະຣະຫັດຕະມັກ

ອີກປະການໜຶ່ງ ຄວາມເປັນໄປແຫ່ງຈັກຂຸນີ້ ຂອງບຸກຄົນຜູ້ມີສຳປະຊັນຍະຜູ້ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ຍ່ອມສິ້ນໄປ ແລະຄວາມເປັນໄປແຫ່ງຈັກຂຸອື່ນຍ່ອມບໍ່ເກີດຂຶ້ນ ຄວາມເປັນໄປແຫ່ງໂສຕະ ຯລຯ ຄວາມເປັນໄປແຫ່ງຄານະ ຯລຯ ຄວາມເປັນໄປແຫ່ງຊິວຫາ ຯລຯ ຄວາມເປັນໄປແຫ່ງກາຍ ຯລຯ ຄວາມເປັນໄປແຫ່ງມະໂນນີ້ຂອງບຸກຄົນຜູ້ມີສຳປະຊັນຍະ ຜູ້ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ຍ່ອມສິ້ນໄປ ແລະຄວາມເປັນໄປແຫ່ງມະໂນອື່ນ ຍ່ອມບໍ່ເກີດຂຶ້ນ ປັນຍາໃນການກະກະທຳຄວາມດຳຣົງຢູ່ກິເລດໃຫ້ສິ້ນໄປຂອງບຸກຄົນຜູ້ມີສຳປະຊັນຍະ ນີ້ຊື່ວ່າ ປະຣິບພານະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການກະກະທຳຄວາມດຳຣົງຢູ່ກິເລດໃຫ້ສິ້ນໄປຂອງຜູ້ມີສຳປະຊັນຍະ ຊື່ວ່າ ປະຣິບພານະຍານ

**ປະຣິບພານະຍານະນິດເທດທີ ໓໕ ຈົບ**

# ໓໖. ສະມະສີສັດຖະຍານະນິດເທດ

## ສະແດງສະມະສີສັດຖະຍານ

[໗໙] ປັນຍາໃນຄວາມບໍ່ຜາກົດແຫ່ງທຳທັງປວງ ຍ້ອນຕັດຂາດໂດຍຊອບ ແລະດັບໄປ ຊື່ວ່າສະມະສີສັດຖະຍານ (ຍານໃນອັດຖະແຫ່ງທຳທີ່ສະງົບແລະເປັນປະທານ) ເປັນແນວໃດ?

ຄື ຄຳວ່າ ທຳທັງປວງ ໄດ້ແກ່ ຂັນ ໕ ອາຍະຕະນະ ໑໒ ທາດ ໑໘ ກຸສົນທຳ ອະກຸສົນທຳ ອັບພະຍາກະຕະທຳ ກາມາວະຈອນທຳ ຣູບປາວະຈອນທຳ ອະຣູບປາວະຈອນທຳ ອະປະຣິຍາປັນນະທຳ

ຄຳວ່າ ຍ້ອນຕັດຂາດໂດຍຊອບ ອະທິບາຍວ່າ ພຣະໂຍຄາວະຈອນຍ່ອມຕັດກາມສັນທະຂາດໂດຍຊອບດ້ວຍເນກຂຳມະ ຕັດພະຍາບາດຂາດໂດຍຊອບດ້ວຍອະພະຍາບາດ ຕັດຖີນະມິດທະຂາດໂດຍຊອບດ້ວຍອາໂລກະສັນຍາ ຕັດອຸດທັດຈະກຸກກຸດຈະຂາດໂດຍຊອບດ້ວຍອະວິກເຂປະ ຕັດວິຈິກິດສາຂາດໂດຍຊອບດ້ວຍທຳມະວະວັດຖານ ຕັດອະວິດຊາຂາດໂດຍຊອບດ້ວຍຍານ ຕັດອະຣະຕິຂາດ ໂດຍຊອບດ້ວຍປາມຸດຊະ ຕັດນິວອນຂາດໂດຍຊອບດ້ວຍປະຖົມຊານ ຯລຯ ຕັດກິເລດທັງປວງຂາດໂດຍຊອບດ້ວຍອະຣະຫັດຕະມັກ

ຄຳວ່າ ດັບໄປ ອະທິບາຍວ່າ ພຣະໂຍຄາວະຈອນດັບກາມສັນທະໄດ້ດ້ວຍເນກຂຳມະ ດັບພະຍາບາດໄດ້ດ້ວຍອະພະຍາບາດ ດັບຖີນະມິດທະໄດ້ດ້ວຍອາໂລກະສັນຍາ ດັບອຸດທັດຈະໄດ້ ດ້ວຍອະວິກເຂປະ ດັບວິຈິກິດສາໄດ້ດ້ວຍທຳມະວະວັດຖານ ດັບອະວິດຊາໄດ້ດ້ວຍຍານ ດັບອະຣະຕິໄດ້ ດ້ວຍປາມຸດຊະ ດັບນິວອນໄດ້ດ້ວຍປະຖົມຊານ ຯລຯ ດັບກິເລດທັງປວງໄດ້ດ້ວຍອະຣະຫັດຕະມັກ

ຄຳວ່າ ບໍ່ຜາກົດ ອະທິບາຍວ່າ ເມື່ອພຣະໂຍຄາວະຈອນໄດ້ເນກຂຳມະ ກາມສັນທະຍ່ອມບໍ່ຜາກົດ ເມື່ອໄດ້ອະພະຍາບາດ ພະຍາບາດຍ່ອມບໍ່ຜາກົດ ເມື່ອໄດ້ອາໂລກະສັນຍາຖີນະມິດທະຍ່ອມບໍ່ຜາກົດ ເມື່ອໄດ້ອະວິກເຂປະ ອຸດທັດຈະຍ່ອມບໍ່ຜາກົດ ເມື່ອໄດ້ທຳມະວະວັດຖານ ວິຈິກິດສາ ຍ່ອມບໍ່ຜາກົດ ເມື່ອໄດ້ຍານ ອະວິດຊາຍ່ອມບໍ່ຜາກົດ ເມື່ອໄດ້ປາມຸດຊະ ອະຣະຕິຍ່ອມບໍ່ຜາກົດ ເມື່ອໄດ້ປະຖົມຊານ ນິວອນຍ່ອມບໍ່ຜາກົດ ຯລຯ ເມື່ອໄດ້ອະຣະຫັດຕະມັກ ກິເລດທັງປວງຍ່ອມບໍ່ຜາກົດ

ຄຳວ່າ ສະງົບ ອະທິບາຍວ່າ ເນກຂຳມະຊື່ວ່າສະງົບ ຍ້ອນລະກາມສັນທະໄດ້ແລ້ວ ອະພະຍາບາດຊື່ວ່າສະງົບ ຍ້ອນລະພະຍາບາດໄດ້ແລ້ວ ອາໂລກະສັນຍາຊື່ວ່າສະງົບ ຍ້ອນລະຖີນະມິດທະໄດ້ແລ້ວ ອະວິກເຂປະຊື່ວ່າສະງົບ ຍ້ອນລະອຸດທັດຈະໄດ້ແລ້ວ ທຳມະວະວັດຖານຊື່ວ່າສະງົບ ຍ້ອນລະວິຈິກິດສາໄດ້ແລ້ວ ຍານຊື່ວ່າສະງົບ ຍ້ອນລະອະວິດຊາໄດ້ແລ້ວ ປາມຸດຊະ ຊື່ວ່າສະງົບ ຍ້ອນລະອະຣະຕິໄດ້ແລ້ວ ປະຖົມຊານຊື່ວ່າສະງົບ ຍ້ອນລະນິວອນໄດ້ແລ້ວ ຯລຯ ອະຣະຫັດຕະມັກຊື່ວ່າສະງົບ ຍ້ອນລະກິເລດທັງປວງໄດ້ແລ້ວ

ຄຳວ່າ ເປັນປະທານ ອະທິບາຍວ່າ ທຳເປັນປະທານ ໑໖ ປະການ ໄດ້ແກ່

໑. ຕັນຫາມີຄວາມກັງວົນເປັນປະທານ

໒. ມານະມີຄວາມພົວພັນເປັນປະທານ

໓. ທິດຖິມີຄວາມຢຶດຖືເປັນປະທານ
໔. ອຸດທັດຈະມີຄວາມຟຸ້ງຊ່ານເປັນປະທານ
໕. ອະວິດຊາມີກິເລດເປັນປະທານ
໖. ສັດທາມີຄວາມນ້ອມໃຈເຊື່ອເປັນປະທານ
໗. ວິຣິຍະມີຄວາມປະຄອງໄວ້ເປັນປະທານ
໘. ສະຕິມີຄວາມເຂົ້າໄປຕັ້ງໝັ້ນເປັນປະທານ
໙. ສະມາທິມີຄວາມບໍ່ຟຸ້ງຊ່ານເປັນປະທານ
໑໐. ປັນຍາມີຄວາມເຫັນເປັນປະທານ
໑໑. ຊີວິຕິນຊີມີຄວາມເປັນໄປເປັນປະທານ
໑໒. ວິໂມກມີອາລົມເປັນປະທານ
໑໓. ນິໂຣດມີສັງຂານເປັນປະທານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນຄວາມບໍ່ຜາກົດແຫ່ງທຳທັງປວງ ຍ້ອນຕັດຂາດໂດຍຊອບແລະດັບໄປ ຊື່ວ່າສະມະສີສັດຖະຍານ

**ສະມະສີສັດຖະຍານະນິດເທດທີ ໓໖ ຈົບ**

## ໓໗. ສັນເລຂັດຖະຍານະນິດເທດ

### ສະແດງສັນເລຂັດຖະຍານ

[໘໘] ປັນຍາໃນສະພາວະແຕ່ລະຢ່າງ ສະພາວະຕ່າງ ໆ ສະພາວະດຽວ ແລະເດດ ຊື່ວ່າສັນເລຂັດຖະຍານ (ຍານໃນອັດຖະແຫ່ງທຳເຄື່ອງຂັດເກົາ) ເປັນແນວໃດ?

ຄື ຄຳວ່າ ສະພາວະແຕ່ລະຢ່າງ ອະທິບາຍວ່າ ຣາຄະ (ຄວາມກຳໜັດ) ເປັນສະພາວະຢ່າງໜຶ່ງ ໂທສະ (ຄວາມປະທຸດສະຮ້າຍ) ເປັນສະພາວະຢ່າງໜຶ່ງ ໂມຫະ (ຄວາມຫຼົງ) ເປັນສະພາວະຢ່າງໜຶ່ງ ໂກທະ (ຄວາມໂກດ) ຯລຯ ອຸປະນາຫະ (ຄວາມຜູກໂກດ) ຯລຯ ມັກຂະ (ຄວາມລົບຫຼູ່) ຯລຯ ປະລາສະ (ຄວາມຕີສະເໝີ) ຯລຯ ອິດສາ (ຄວາມຣິດສະຫຍາ) ຯລຯ ມັດສະຣິຍະ (ຄວາມຂີ້ຖີ່) ຯລຯ ມາຍາ (ມານຍາ) ຯລຯ ສາເຖີຍຍະ (ຄວາມໂອ້ອວດ) ຯລຯ ຖຳພະ (ຄວາມຫົວດື້) ຯລຯ ສາຣຳພະ (ຄວາມແຂ່ງດີ) ຯລຯ ມານະ (ຄວາມຖືຕົວ) ຯລຯ ອະຕິມານະ (ຄວາມດູໝິ່ນທ່ານ) ຯລຯ ມະທະ (ຄວາມມົວເມົາ) ຯລຯ ປະມາທະ (ຄວາມຜະໝ

໑໐) ຯລຯ ກິເລດທັງປວງ ຯລຯ ທຸດຈະຣິດທັງປວງ ຯລຯ ອະພິສັງຂານທັງປວງ ຯລຯ ກຳອັນເປັນເຫດໃຫ້ສັດໄປສູ່ພົບທັງປວງ ເປັນສະພາວະຢ່າງໜຶ່ງ

ຄຳວ່າ ສະພາວະຕ່າງ ໆ ແລະສະພາວະດຽວ ອະທິບາຍວ່າ ກາມສັນທະຊື່ວ່າສະພາວະຕ່າງ ໆ ເນກຂຳມະຊື່ວ່າສະພາວະດຽວ ພະຍາບາດຊື່ວ່າສະພາວະຕ່າງ ໆ ອະພະຍາບາດຊື່ວ່າສະພາວະດຽວ ຖີນະມິດທະຊື່ວ່າສະພາວະຕ່າງ ໆ ອາໂລກະສັນຍາຊື່ວ່າສະພາວະດຽວ ອຸດທັດຈະຊື່ວ່າສະພາວະຕ່າງ ໆ ອະວິກເຂປະຊື່ວ່າສະພາວະດຽວ ວິຈິກິດສາຊື່ວ່າສະພາວະຕ່າງ ໆ ທຳມະວະວັດຖານຊື່ວ່າສະພາວະດຽວ ອະວິດຊາຊື່ວ່າສະພາວະຕ່າງ ໆ ຍານຊື່ວ່າສະພາວະດຽວ ອະຣະຕິຊື່ວ່າສະພາວະຕ່າງ ໆ ປາມຸດຊະຊື່ວ່າສະພາວະດຽວ ນິວອນຊື່ວ່າສະພາວະຕ່າງ ໆ ປະຖົມຊານຊື່ວ່າສະພາວະດຽວ ຯລຯ ກິເລດທັງປວງຊື່ວ່າສະພາວະຕ່າງ ໆ ອະຣະຫັດຕະມັກຊື່ວ່າສະພາວະດຽວ

ຄຳວ່າ ເດດ ອະທິບາຍວ່າ ເດດມີ ໕ ຄື (໑) ເດດຄື ສິນເຄື່ອງດຳເນີນໄປ (໒) ເດດຄືຄຸນ (໓) ເດດຄືປັນຍາ (໔) ເດດຄືບຸນ (໕) ເດດຄືທຳ ບຸກຄົນຜູ້ມີເດດ ຍ່ອມທຳເດດຄືຄວາມເປັນຜູ້ທຸສິນໃຫ້ສິ້ນໄປດ້ວຍເດດຄືສິນເຄື່ອງດຳເນີນໄປ ຍ່ອມທຳເດດບໍ່ແມ່ນຄຸນໃຫ້ສິ້ນໄປດ້ວຍເດດຄືຄຸນ ຍ່ອມທຳເດດຄືຄວາມເປັນຜູ້ມີປັນຍາຊາມໃຫ້ສິ້ນໄປດ້ວຍເດດຄືປັນຍາ ຍ່ອມທຳເດດບໍ່ແມ່ນບຸນໃຫ້ສິ້ນໄປດ້ວຍເດດຄືບຸນ ຍ່ອມທຳເດດຄືອະທຳໃຫ້ສິ້ນໄປດ້ວຍເດດ ຄືທຳ

ຄຳວ່າ ທຳເຄື່ອງຂັດເກົາ ອະທິບາຍວ່າ ກາມສັນທະບໍ່ແມ່ນທຳເຄື່ອງຂັດເກົາ ເນກຂຳມະເປັນທຳເຄື່ອງຂັດເກົາ ພະຍາບາດບໍ່ແມ່ນທຳເຄື່ອງຂັດເກົາ ອະພະຍາບາດເປັນທຳເຄື່ອງຂັດເກົາ ຖີນະມິດທະບໍ່ແມ່ນທຳເຄື່ອງຂັດເກົາ ອາໂລກະສັນຍາເປັນທຳເຄື່ອງຂັດເກົາ ອຸດທັດຈະບໍ່ແມ່ນທຳເຄື່ອງຂັດເກົາ ອະວິກເຂປະເປັນທຳເຄື່ອງຂັດເກົາ ວິຈິກິດສາບໍ່ແມ່ນທຳເຄື່ອງຂັດເກົາ ທຳມະວະວັດຖານເປັນທຳເຄື່ອງຂັດເກົາ ອະວິດຊາບໍ່ແມ່ນທຳເຄື່ອງຂັດເກົາ ຍານເປັນທຳເຄື່ອງຂັດເກົາ ອະຣະຕິບໍ່ແມ່ນທຳເຄື່ອງຂັດເກົາ ປາມຸດຊະເປັນທຳເຄື່ອງຂັດເກົານິວອນບໍ່ແມ່ນທຳເຄື່ອງຂັດເກົາ ປະຖົມຊານເປັນທຳເຄື່ອງຂັດເກົາ ຯລຯ ກິເລດທັງປວງບໍ່ແມ່ນທຳເຄື່ອງຂັດເກົາ ອະຣະຫັດຕະມັກເປັນທຳເຄື່ອງຂັດເກົາ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນສະພາວະແຕ່ລະຢ່າງ ສະພາວະຕ່າງ ໆ ສະພາວະດຽວ ແລະເດດ ຊື່ວ່າສັນເລຂັດຖະຍານ

**ສັນເລຂັດຖະຍານະນິດເທດທີ ໓໗ ຈົບ**

# ໓໗. ວິຣິຍາຣຳພະຍານະນິດເທດ

## ສະແດງວິຣິຍາຣຳພະຍານ

[໗໙] ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ຊື່ວ່າວິຣິຍາຣຳພະຍານ ເປັນແນວໃດ?

ຄື ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອປ້ອງກັນບາບອະກຸສົນ ທຳທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ ແລະຈິດທີ່ສົ່ງໄປ ເພື່ອລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊື່ວ່າ ວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ ແລະຈິດທີ່ສົ່ງໄປ ເພື່ອຄວາມດຳຣົງໝັ້ນ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ ຊື່ວ່າ ວິຣິຍາຣຳພະຍານ

ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ ແລະຈິດທີ່ສົ່ງໄປ ເພື່ອປ້ອງກັນການສັນທະທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອລະການສັນທະທີ່ເກີດຂຶ້ນແລ້ວ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ ແລະຈິດທີ່ສົ່ງໄປ ເພື່ອກະທຳເນກຂຳມະທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອຄວາມດຳຣົງໝັ້ນ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ແຫ່ງເນກຂຳມະທີ່ເກີດຂຶ້ນແລ້ວ ຊື່ວ່າ ວິຣິຍາຣຳພະຍານ ຯລຯ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອທຳກິເລດທັງປວງທີ່ຍັງບໍ່ເກີດບໍ່ໃຫ້ເກີດຂຶ້ນ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອລະກິເລດທັງປວງທີ່ເກີດຂຶ້ນແລ້ວ ຊື່ວ່າວິຣິຍາຣຳພະຍານ ຯລຯ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອທຳອະຣະຫັດຕະມັກທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊື່ວ່າວິຣິຍາຣຳພະຍານ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ເພື່ອຄວາມດຳຣົງໝັ້ນ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນຈະເລີນເຕັມທີ່ແຫ່ງອະຣະຫັດຕະມັກ ທີ່ເກີດຂຶ້ນແລ້ວ ຊື່ວ່າວິຣິຍາຣຳພະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການປະຄອງຈິດທີ່ບໍ່ທົດທູ່ແລະຈິດທີ່ສົ່ງໄປ ຊື່ວ່າວິຣິຍາຣຳພະຍານ

**ວິຣິຍາຣຳພະຍານະນິດເທດທີ ໓໗ ຈົບ**

# ໓໙. ອັດຖະສັນທັດສະນະຍານະນິດເທດ

## ສະແດງອັດຖະສັນທັດສະນະຍານ

[໗໐] ປັນຍາໃນການປະກາດທຳຕ່າງ ໆ ຊື່ວ່າອັດຖະສັນທັດສະນະຍານ (ຍານໃນການເຫັນຊັດແຈ້ງເຊິ່ງອັດຖະ) ເປັນແນວໃດ?

ຄື ຄຳວ່າ ທຳຕ່າງ ໆ ໄດ້ແກ່ ຂັນ ໕ ອາຍະຕະນະ ໑໘ ທາດ ໑໘ ກຸສົນທຳ ອະກຸສົນທຳ ອັບພະຍາກະຕະທຳ ກາມາວະຈອນທຳ ຣູບປາວະຈອນທຳ ອະຣູບປາວະຈອນທຳ ອະປະຣິຍາປັນນະທຳ

ຄຳວ່າ ປະກາດ ອະທິບາຍວ່າ ປັນຍາຍ່ອມປະກາດຣູບໂດຍຄວາມບໍ່ທ່ຽງ ປະກາດ ຣູບໂດຍຄວາມເປັນທຸກ ປະກາດຣູບໂດຍຄວາມເປັນອະນັດຕາ ປະກາດເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ປະກາດຊະຣາແລະມໍຣະນະໂດຍ ຄວາມບໍ່ທ່ຽງ ປະກາດຊະຣາແລະມໍຣະນະໂດຍຄວາມເປັນທຸກ ປະກາດຊະຣາແລະມໍຣະນະໂດຍຄວາມເປັນອະນັດຕາ

ຄຳວ່າ ການເຫັນຊັດແຈ້ງເຊິ່ງອັດຖະ ອະທິບາຍວ່າ ພຣະໂຍຄາວະຈອນເມື່ອລະກາມສັນທະຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງເນກຂຳມະ ເມື່ອລະພະຍາບາດຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງອະພະຍາບາດ ເມື່ອລະຖີນະມິດທະຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງອາໂລກະສັນຍາ ເມື່ອລະອຸດທັດຈະຍ່ອມເຫັນຊັດແຈ້ງເຊິ່ງອັດຖະ ແຫ່ງອະວິກເຂປະ ເມື່ອລະວິຈິກິດສາຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງທຳມະວະວັດຖານ ເມື່ອລະອະວິດຊາ ຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງຍານ ເມື່ອລະອະຣະຕິຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງປາມຸດຊະ ເມື່ອລະນິວອນຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງປະຖົມຊານ ฯລฯ ເມື່ອລະກິເລດທັງປວງຍ່ອມເຫັນຊັດແຈ້ງເຊິ່ງອັດຖະແຫ່ງອະຣະຫັດຕະມັກ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການປະກາດທຳຕ່າງ ໆ ຊື່ວ່າອັດຖະສັນທັດສະນະຍານ

**ອັດຖະສັນທັດສະນະຍານະນິດເທດທີ ໓໙ ຈົບ**

# ໔໐. ທັດສະນະວິສຸດທິຍານະນິດເທດ

## ສະແດງທັດສະນະວິສຸດທິຍານ

[໗໑] ປັນຍາໃນການລວມທຳທັງປວງເຂົ້າເປັນໝວດດຽວກັນ ໃນການຮູ້ແຈ້ງ ສະພາວະຕ່າງ ໆ ແລະສະພາວະດຽວ ຊື່ວ່າ ທັດສະນະວິສຸດທິຍານ (ຍານໃນຄວາມບໍລິສຸດ ແຫ່ງທັດສະນະ) ເປັນແນວໃດ?

ຄື ຄໍາວ່າ ທໍາທັງປວງ ໄດ້ແກ່ ຂັນ ໕ ຯລຯ ອະປະຣິຍາປັນນະທໍາ

ຄໍາວ່າ ລວມເຂົ້າເປັນໝວດດຽວກັນ ອະທິບາຍວ່າ ທໍາທັງປວງທ່ານລວມເຂົ້າເປັນໝວດດຽວກັນໂດຍອາການ ໑໘ ຄື ໂດຍສະພາວະທີ່ເປັນຂອງແທ້ ໑ ໂດຍສະພາວະທີ່ເປັນອະນັດຕາ ໑ ໂດຍສະພາວະທີ່ເປັນຈິງ ໑ ໂດຍສະພາວະທີ່ຮູ້ແຈ້ງ ໑ ໂດຍສະພາວະທີ່ຮູ້ຍິ່ງ ໑ ໂດຍ ສະພາວະທີ່ກໍານົດຮູ້ ໑ ໂດຍສະພາວະທີ່ເປັນທໍາ ໑ ໂດຍສະພາວະທີ່ເປັນທາດ ໑ ໂດຍສະພາວະທີ່ຮູ້ໄດ້ ໑ ໂດຍສະພາວະທີ່ເຮັດໃຫ້ແຈ້ງ ໑ ໂດຍສະພາວະທີ່ຖືກຕ້ອງ ໑ ໂດຍສະພາວະທີ່ຕັດສະຮູ້ ໑ ທໍາທັງປວງທ່ານສົງເຄາະເຂົ້າເປັນໝວດດຽວກັນ ໂດຍອາການ ໑໘ ແນວນີ້

ຄໍາວ່າ ສະພາວະຕ່າງ ໆ ແລະສະພາວະດຽວ ອະທິບາຍວ່າ ການສັນທະຊື່ວ່າສະພາວະຕ່າງ ໆ ເນກຂໍາມະຊື່ວ່າສະພາວະດຽວ ຯລຯ ກິເລດທັງປວງຊື່ວ່າສະພາວະຕ່າງ ໆ ອະຣະຫັດຕະມັກຊື່ວ່າສະພາວະດຽວ

ຄໍາວ່າ ການຮູ້ແຈ້ງ ອະທິບາຍວ່າ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງທຸກຂະສັດດ້ວຍການກໍານົດຮູ້ ຮູ້ແຈ້ງສະມຸທະຍະສັດດ້ວຍການລະ ຮູ້ແຈ້ງນິໂຣທະສັດດ້ວຍການເຮັດໃຫ້ແຈ້ງ ຮູ້ແຈ້ງມັກຄະສັດດ້ວຍ ການຈະເລີນ

ຄໍາວ່າ ຄວາມມົດຈົດແຫ່ງທັດສະນະ ອະທິບາຍວ່າ ໃນຂະນະແຫ່ງໂສດາປັດຕິມັກ ທັດສະນະກໍາລັງມົດຈົດ ໃນຂະນະແຫ່ງໂສດາປັດຕິຜົນ ທັດສະນະມົດຈົດແລ້ວໃນຂະນະແຫ່ງສະກະທາຄາມິມັກ ທັດສະນະກໍາລັງມົດຈົດ ໃນຂະນະແຫ່ງສະກະທາຄາມິຜົນ ທັດສະນະມົດຈົດແລ້ວ ໃນຂະນະແຫ່ງອະນາຄາມິມັກ ທັດສະນະກໍາລັງມົດຈົດ ໃນຂະນະແຫ່ງອະນາຄາມິຜົນ ທັດສະນະມົດຈົດແລ້ວ ໃນຂະນະແຫ່ງອະຣະຫັດຕະມັກ ທັດສະນະກໍາລັງມົດຈົດ ໃນຂະນະແຫ່ງອະຣະຫັດຕະຜົນ ທັດສະນະມົດຈົດແລ້ວ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທໍານັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການລວມທໍາທັງປວງເຂົ້າເປັນໝວດດຽວກັນ ໃນການຮູ້ແຈ້ງສະພາວະຕ່າງ ໆ ແລະສະພາວະດຽວ ຊື່ວ່າທັດສະນະວິສຸດທິຍານ

**ທັດສະນະວິສຸດທິຍານະນິດເທດທີ ໔໐ ຈົບ**

# ໔໑. ຂັນຕິຍານະນິດເທດ

## ສະແດງຂັນຕິຍານ

[໘໘] ປັນຍາທີ່ຮູ້ຊັດແຈ້ງ ຊື່ວ່າຂັນຕິຍານ ເປັນແນວໃດ?

ຄື ຮູບທີ່ຮູ້ຊັດແຈ້ງໂດຍຄວາມບໍ່ທ່ຽງ ຮູບທີ່ຮູ້ຊັດແຈ້ງໂດຍຄວາມເປັນທຸກ ຮູບທີ່ຮູ້ຊັດແຈ້ງໂດຍຄວາມເປັນອະນັດຕາ ຮູບໃດ ໆ ທີ່ພຣະໂຍຄາວະຈອນຮູ້ຊັດແຈ້ງແລ້ວ ຮູບນັ້ນ ໆ

ພຣະໂຍຄາວະຈອນຍ່ອມພໍໃຈ ຍ້ອນແນວນັ້ນ ປັນຍາທີ່ຮູ້ຊັດແຈ້ງ ຈຶ່ງຊື່ວ່າ ຂັນຕິຍານ ເວທະນາທີ່ຮູ້ຊັດແຈ້ງໂດຍຄວາມບໍ່ທ່ຽງ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ

ຈັກຂຸທີ່ຮູ້ຊັດແຈ້ງໂດຍຄວາມບໍ່ທ່ຽງ ຯລຯ ຊະຣາແລະມໍຣະນະທີ່ຮູ້ຊັດແຈ້ງໂດຍຄວາມບໍ່ທ່ຽງ ຊະຣາແລະມໍຣະນະທີ່ຮູ້ຊັດແຈ້ງໂດຍຄວາມເປັນທຸກ ຊະຣາແລະມໍຣະນະທີ່ຮູ້ຊັດແຈ້ງໂດຍຄວາມເປັນອະນັດຕາ ຊະຣາແລະມໍຣະນະໃດ ໆ ທີ່ພຣະໂຍຄາວະຈອນຮູ້ຊັດແຈ້ງແລ້ວ ຊະຣາແລະມໍຣະນະນັ້ນ ໆ ພຣະໂຍຄາວະຈອນ ຍ່ອມພໍໃຈ ຍ້ອນແນວນັ້ນ ປັນຍາທີ່ຮູ້ຊັດແຈ້ງ ຈຶ່ງຊື່ວ່າຂັນຕິຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ຮູ້ຊັດແຈ້ງ ຊື່ວ່າຂັນຕິຍານ

**ຂັນຕິຍານະນິດເທດທີ ໔໑ ຈົບ**

## ໔໘. ປະຣິໂຍຄາຫະນະຍານະນິດເທດ

### ສະແດງປະຣິໂຍຄາຫະນະຍານ

[໙໓] ປັນຍາທີ່ຖືກຕ້ອງທຳ ຊື່ວ່າປະຣິໂຍຄາຫະນະຍານ ເປັນແນວໃດ?

ຄື ປັນຍາຍ່ອມຖືກຕ້ອງຮູບໂດຍຄວາມບໍ່ທ່ຽງ ຖືກຕ້ອງຮູບໂດຍຄວາມເປັນທຸກ ຖືກຕ້ອງຮູບໂດຍຄວາມເປັນອະນັດຕາ ຖືກຕ້ອງຮູບໃດ ໆ ກໍຢັ່ງລົງສູ່ຮູບນັ້ນ ໆ ຍ້ອນແນວນັ້ນ ປັນຍາທີ່ຖືກຕ້ອງທຳ ຈຶ່ງຊື່ວ່າ ປະຣິໂຍຄາຫະນະຍານ ປັນຍາຍ່ອມຖືກຕ້ອງເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ

ປັນຍາຍ່ອມຖືກຕ້ອງຈັກຂຸ ຯລຯ ປັນຍາຍ່ອມຖືກຕ້ອງຊະຣາ ແລະມໍຣະນະໂດຍຄວາມບໍ່ທ່ຽງ ຖືກຕ້ອງຊະຣາ ແລະມໍຣະນະໂດຍຄວາມເປັນທຸກ ຖືກຕ້ອງຊະຣາແລະມໍຣະນະໂດຍຄວາມເປັນອະນັດຕາ ຖືກຕ້ອງຊະຣາແລະມໍຣະນະໃດ ໆ ກໍຢັ່ງລົງສູ່ຊະຣາ ແລະມໍຣະນະນັ້ນ ໆ ຍ້ອນແນວນັ້ນ ປັນຍາທີ່ຖືກຕ້ອງທຳ ຈຶ່ງຊື່ວ່າປະຣິໂຍຄາຫະນະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ຖືກຕ້ອງທຳ ຊື່ວ່າປະຣິໂຍຄາຫະນະຍານ

**ປະຣິໂຍຄາຫະນະຍານະນິດເທດທີ ໔໘ ຈົບ**

## ໔໓. ປະເທສະວິຫາຣະຍານະນິດເທດ

### ສະແດງປະເທສະວິຫານຍານ

[໙໔] ປັນຍາໃນການລວມປັດໄຈ ຊື່ວ່າປະເທສະວິຫານຍານ ເປັນແນວໃດ? ຄື

| | | |
|---|---|---|
| ຍ້ອນມິດສາທິດຖິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງມິດສາທິດຖິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນສຳມາທິດຖິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງສຳມາທິດຖິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນມິດສາສັງກັບປະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງມິດສາສັງກັບປະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນສຳມາສັງກັບປະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງສຳມາສັງກັບປະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຯລຯ | | |
| ຍ້ອນມິດສາວິມຸດຕິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງມິດສາວິມຸດຕິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນສຳມາວິມຸດຕິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງສຳມາວິມຸດຕິ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນສັນທະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງສັນທະ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນວິຕົກ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງວິຕົກ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນສັນຍາ | ເປັນປັດໄຈ | ເວທະນາຈຶ່ງມີ |
| ຍ້ອນຄວາມສະງົບໄປແຫ່ງສັນຍາ | ເປັນປັດໄຈ | ເວທະນາຈຶ່ງມີ |

ຍ້ອນສັນທະວິຕົກ ແລະສັນຍາເປັນທຳບໍ່ສະງົບໄປເປັນປັດໄຈ ເວທະນາຈຶ່ງມີ

ຍ້ອນສັນທະເປັນທຳສະງົບໄປ ແຕ່ວິຕົກ ແລະສັນຍາເປັນທຳບໍ່ສະງົບໄປເປັນປັດໄຈເວທະນາຈຶ່ງມີ

ຍ້ອນສັນທະ ແລະວິຕົກເປັນທຳສະງົບໄປ ແຕ່ສັນຍາເປັນທຳບໍ່ສະງົບໄປເປັນປັດໄຈເວທະນາຈຶ່ງມີ

ຍ້ອນສັນທະວິຕົກ ແລະສັນຍາເປັນທຳສະງົບໄປເປັນປັດໄຈ ເວທະນາຈຶ່ງມີ

ອາສະວະເພື່ອບັນລຸທຳທີ່ຍັງບໍ່ບັນລຸມີຢູ່ ແຕ່ເພາະຍັງບໍ່ໄດ້ບັນລຸຖານະນັ້ນເປັນປັດໄຈເວທະນາຈຶ່ງມີ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການລວມປັດໄຈ ຊື່ວ່າປະເທສະວິຫານຍານ

**ປະເທສະວິຫາຣະຍານະນິດເທດທີ ໘໓ ຈົບ**

# ໔໔-໔໙. ສະວິວັດຕະຍານະນິດເທດ

## ສະແດງຍານໃນການຫຼີກອອກ ໒ ຢ່າງ

[໔໘] ປັນຍາທີ່ມີກຸສົນທຳເປັນໃຫຍ່ ຊື່ວ່າສັນຍາວິວັດຕະຍານ ເປັນແນວໃດ?

ຄື ປັນຍາທີ່ມີເນກຂຳມະເປັນໃຫຍ່ ຍ່ອມຫຼີກອອກຈາກການສັນທະດ້ວຍສັນຍາ (ຄວາມໝາຍຮູ້) ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ ປັນຍາທີ່ມີອະພະຍາບາດເປັນໃຫຍ່ ຍ່ອມຫຼີກອອກຈາກພະຍາບາດດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ ປັນຍາທີ່ມີອາໂລກະສັນຍາເປັນໃຫຍ່ ຍ່ອມຫຼີກອອກຈາກຖີນະມິດທະດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ ປັນຍາທີ່ມີອະວິກເຂປະເປັນໃຫຍ່ ຍ່ອມຫຼີກອອກຈາກອຸດທັດຈະດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າ ສັນຍາວິວັດຕະຍານ ປັນຍາທີ່ມີທຳມະວະວັດຖານເປັນໃຫຍ່ ຍ່ອມຫຼີກອອກຈາກວິຈິກິດສາດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າ ສັນຍາວິວັດຕະຍານ ປັນຍາທີ່ມີຍານເປັນໃຫຍ່ ຍ່ອມຫຼີກອອກຈາກອະວິດຊາດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ ປັນຍາທີ່ມີປາມຸດຊະເປັນໃຫຍ່ ຍ່ອມຫຼີກອອກຈາກອະຣະຕິດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ ປັນຍາທີ່ມີປະຖົມຊານເປັນໃຫຍ່ ຍ່ອມຫຼີກອອກຈາກນິວອນດ້ວຍສັນຍາ ฯລฯ ປັນຍາທີ່ມີອະຣະຫັດຕະມັກເປັນໃຫຍ່ ຍ່ອມຫຼີກອອກຈາກກິເລດທັງປວງ ດ້ວຍສັນຍາ ຍ້ອນແນວນັ້ນ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຈຶ່ງຊື່ວ່າສັນຍາວິວັດຕະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາທີ່ມີກຸສົນທຳເປັນໃຫຍ່ ຊື່ວ່າສັນຍາ ວິວັດຕະຍານ

[໔໙] ປັນຍາໃນສະພາວະຕ່າງ ໆ ຊື່ວ່າເຈໂຕວິວັດຕະຍານ ເປັນແນວໃດ?

ຄື ການສັນທະເປັນສະພາວະຕ່າງ ໆ ເນກຂຳມະເປັນສະພາວະດຽວ ເມື່ອພຣະໂຍຄາວະຈອນຄິດເຖິງເນກຂຳມະທີ່ເປັນສະພາວະດຽວ ຈິດຍ່ອມຫຼີກອອກຈາກການສັນທະ ຍ້ອນແນວນັ້ນ ປັນຍາໃນສະພາວະຕ່າງ ໆ ຈຶ່ງຊື່ວ່າ ເຈໂຕວິວັດຕະຍານ

ພະຍາບາດເປັນສະພາວະຕ່າງ ໆ ອະພະຍາບາດເປັນສະພາວະດຽວ ເມື່ອພຣະໂຍຄາວະຈອນຄິດເຖິງອະພະຍາບາດທີ່ເປັນສະພາວະດຽວ ຈິດຍ່ອມຫຼີກອອກຈາກພະຍາບາດ ຍ້ອນແນວນັ້ນ ປັນຍາໃນສະພາວະຕ່າງ ໆ ຈຶ່ງຊື່ວ່າ ເຈໂຕວິວັດຕະຍານ

ຖີນະມິດທະເປັນສະພາວະຕ່າງ ໆ ອາໂລກະສັນຍາເປັນສະພາວະດຽວ ເມື່ອພຣະໂຍຄາວະຈອນຄິດເຖິງອາໂລກະສັນຍາທີ່ເປັນສະພາວະດຽວ ຈິດຍ່ອມຫຼີກອອກຈາກຖີນະມິດທະ ຍ້ອນແນວນັ້ນ ປັນຍາໃນສະພາວະຕ່າງ ໆ ຈຶ່ງຊື່ວ່າ ເຈໂຕວິວັດຕະຍານ ฯລฯ

ກິເລດທັງປວງເປັນສະພາວະຕ່າງ ໆ ອະຣະຫັດຕະມັກເປັນສະພາວະດຽວ ເມື່ອພຣະໂຍຄາວະຈອນ ຄິດເຖິງອະຣະຫັດຕະມັກທີ່ເປັນສະພາວະດຽວ ຈິດຍ່ອມຫຼີກອອກຈາກ ກິເລດທັງປວງ ຍ້ອນແນວນັ້ນ ປັນຍາໃນສະພາວະຕ່າງ ໆ ຈຶ່ງຊື່ວ່າເຈໂຕວິວັດຕະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນສະພາວະຕ່າງ ໆ ຊື່ວ່າ ເຈໂຕວິວັດຕະຍານ

[໕໗] ປັນຍາໃນການອະທິຖານ ຊື່ວ່າຈິດຕະວິວັດຕະຍານ ເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອລະການສັນທະ ຍ່ອມອະທິຖານຈິດດ້ວຍອຳນາດແຫ່ງເນກຂຳມະ ຍ້ອນແນວນັ້ນ ປັນຍາໃນການອະທິຖານ ຈຶ່ງຊື່ວ່າຈິດຕະວິວັດຕະຍານ ເມື່ອລະພະຍາບາດຍ່ອມອະທິຖານຈິດດ້ວຍອຳນາດແຫ່ງອະພະຍາບາດ ຍ້ອນແນວນັ້ນ ປັນຍາໃນການອະທິຖານຈຶ່ງຊື່ວ່າຈິດຕະວິວັດຕະຍານ ເມື່ອລະຖີນະມິດທະ ຍ່ອມອະທິຖານຈິດດ້ວຍອຳນາດແຫ່ງອາໂລກະສັນຍາ ຍ້ອນແນວນັ້ນ ປັນຍາໃນການອະທິຖານ ຈຶ່ງຊື່ວ່າຈິດຕະວິວັດຕະຍານ ເມື່ອລະກິເລດທັງປວງ ຍ່ອມອະທິຖານຈິດດ້ວຍອຳນາດແຫ່ງອະຣະຫັດຕະມັກ ຍ້ອນແນວນັ້ນ ປັນຍາໃນການອະທິຖານ ຈຶ່ງຊື່ວ່າຈິດຕະວິວັດຕະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການອະທິຖານ ຊື່ວ່າຈິດຕະວິວັດຕະຍານ

[໕໘] ປັນຍາໃນທຳທີ່ວ່າງ ຊື່ວ່າຍານະວິວັດຕະຍານ ເປັນແນວໃດ?

ຄື ເມື່ອພຣະໂຍຄາວະຈອນຮູ້ຊັດແຈ້ງ ແລະເຫັນແຈ້ງຕາມຄວາມເປັນຈິງວ່າ ຈັກຂຸວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມຄົງທີ່ ຫຼື ຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ຍານຍ່ອມຫຼີກອອກຈາກຄວາມຍຶດຖືໃນການ ຍ້ອນແນວນັ້ນ ປັນຍາໃນທຳທີ່ວ່າງ ຈຶ່ງຊື່ວ່າຍານະວິວັດຕະຍານ

ເມື່ອພຣະໂຍຄາວະຈອນຮູ້ຊັດແຈ້ງ ແລະເຫັນແຈ້ງຕາມຄວາມເປັນຈິງວ່າ ໂສຕະວ່າງ ຯລຯ ຄານະວ່າງ ຯລຯ ຊິວຫາວ່າງ ຯລຯ ກາຍວ່າງ ຯລຯ ມະໂນວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມຄົງທີ່ ຫຼື ຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ຍານຍ່ອມຫຼີກອອກຈາກຄວາມຍຶດຖືໃນການຍ້ອນແນວນັ້ນ ປັນຍາໃນທຳທີ່ວ່າງ ຈຶ່ງຊື່ວ່າ ຍານະວິວັດຕະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນທຳທີ່ວ່າງ ຊື່ວ່າ ຍານະວິວັດຕະຍານ

[໕໙] ປັນຍາໃນຄວາມສະລະ ຊື່ວ່າວິໂມກຂະວິວັດຕະຍານ ເປັນແນວໃດ?

ຄື ພຣະໂຍຄາວະຈອນສະລະການສັນທະດ້ວຍເນກຂຳມະ ຍ້ອນແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ ສະລະພະຍາບາດດ້ວຍອະພະຍາບາດ ຍ້ອນ

ແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ ສະລະຖີນະມິດທະດ້ວຍອາໂລກະສັນຍາ ຍ້ອນແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ ສະລະອຸດທັດຈະດ້ວຍອະວິກເຂປະ ຍ້ອນແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ ສະລະວິຈິກິດສາດ້ວຍທຳມະວະວັດຖານ ຍ້ອນແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ ສະລະກິເລດທັງປວງດ້ວຍອະຣະຫັດຕະມັກ ຍ້ອນແນວນັ້ນ ປັນຍາໃນຄວາມສະລະ ຈຶ່ງຊື່ວ່າວິໂມກຂະວິວັດຕະຍານ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນຄວາມສະລະ ຊື່ວ່າວິໂມກຂະວິວັດຕະຍານ

[໑໐໐] ປັນຍາໃນສະພາວະແທ້ ຊື່ວ່າສັດຈະວິວັດຕະຍານ ເປັນແນວໃດ?

ຄື ພຣະໂຍຄາວະຈອນເມື່ອກຳນົດຮູ້ສະພາວະທີ່ບີບຄັ້ນ ສະພາວະທີ່ປັດໄຈປຸງແຕ່ງ ສະພາວະທີ່ເຮັດໃຫ້ເດືອດຮ້ອນ ສະພາວະທີ່ຜັນປ່ຽນແຫ່ງທຸກ ຍ່ອມຫຼີກໄປ ຍ້ອນແນວນັ້ນ ປັນຍາໃນສະພາວະແທ້ ຈຶ່ງຊື່ວ່າສັດຈະວິວັດຕະຍານ

ເມື່ອລະສະພາວະທີ່ປະມວນມາ ສະພາວະທີ່ເປັນເຫດ ສະພາວະທີ່ກ່ຽວຂ້ອງ ສະພາວະທີ່ພົວພັນແຫ່ງສະມຸໄທ ຍ່ອມຫຼີກໄປ ຍ້ອນແນວນັ້ນ ປັນຍາໃນສະພາວະແທ້ ຈຶ່ງຊື່ວ່າ ສັດຈະວິວັດຕະຍານ

ເມື່ອເຮັດໃຫ້ແຈ້ງສະພາວະທີ່ເປັນເຄື່ອງສະລັດອອກ ສະພາວະທີ່ເປັນວິເວກ ສະພາວະທີ່ເປັນອະສັງຂະຕະ ສະພາວະທີ່ເປັນອະມະຕະແຫ່ງນິໂຣດ ຍ່ອມຫຼີກໄປ ຍ້ອນແນວນັ້ນ ປັນຍາໃນສະພາວະແທ້ ຈຶ່ງຊື່ວ່າສັດຈະວິວັດຕະຍານ

ເມື່ອຈະເລີນສະພາວະທີ່ນຳອອກ ສະພາວະທີ່ເປັນເຫດ ສະພາວະທີ່ເຫັນ ສະພາວະທີ່ເປັນໃຫຍ່ແຫ່ງມັກ ຍ່ອມຫຼີກໄປ ຍ້ອນແນວນັ້ນ ປັນຍາໃນສະພາວະແທ້ ຈຶ່ງຊື່ວ່າ ສັດຈະວິວັດຕະຍານ ສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ວິໂມກຂະວິວັດ ສັດຈະວິວັດ

ພຣະໂຍຄາວະຈອນເມື່ອໝາຍຮູ້ຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າສັນຍາວິວັດ ເມື່ອຄິດຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າເຈໂຕວິວັດ ເມື່ອຮູ້ແຈ້ງຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າຈິດຕະວິວັດ ເມື່ອກະທຳຍານຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າຍານະວິວັດ ເມື່ອສະລະຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າວິໂມກຂະວິວັດ ຍ່ອມຫຼີກໄປໃນສະພາວະຈິງແທ້ ຍ້ອນແນວນັ້ນ ຈຶ່ງຊື່ວ່າສັດຈະວິວັດ

ໃນຂະນະແຫ່ງມັກໃດມີສັນຍາວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີເຈໂຕວິວັດ ໃນຂະນະແຫ່ງມັກໃດມີເຈໂຕວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັນຍາວິວັດ ໃນຂະນະແຫ່ງມັກໃດມີສັນຍາວິວັດ ເຈໂຕວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີຈິດຕະວິວັດ ໃນຂະນະແຫ່ງມັກໃດມີຈິດຕະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັນຍາວິວັດ ເຈໂຕວິວັດ ໃນຂະນະແຫ່ງມັກໃດມີສັນຍາ

ວິວັດ ເຈໂຕວິວັດ ຈິດຕະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີຍານະວິວັດ ໃນຂະນະແຫ່ງມັກໃດມີຍານະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ໃນຂະນະແຫ່ງມັກໃດມີສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີວິໂມກຂະວິວັດ ໃນຂະນະແຫ່ງມັກໃດມີວິໂມກຂະວິວັດ ໃນຂະນະແຫ່ງມັກນັ້ນ ຍ່ອມມີສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ໃນຂະນະແຫ່ງມັກໃດມີສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ວິໂມກຂະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັດຈະວິວັດ ໃນຂະນະແຫ່ງມັກໃດມີສັດຈະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ວິໂມກຂະວິວັດ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນສະພາວະແທ້ ຊື່ວ່າສັດຈະວິວັດຕະຍານ

**ສະວິວັດຕະຍານະນິດເທດທີ ໔໔-໔໙ ຈົບ**

# ໕໐. ອິດທິວິທະຍານະນິດເທດ

## ສະແດງອິດທິວິທະຍານ

[໑໐໑] ປັນຍາໃນສະພາວະທີ່ສຳເລັດດ້ວຍການກຳນົດກາຍ (ຂອງຕົນ) ແລະຈິດ (ມີຊານເປັນບາດ) ເຂົ້ານຳກັນ ດ້ວຍອຳນາດການຕັ້ງໄວ້ເຊິ່ງສຸຂະສັນຍາ ແລະລະຫຸສັນຍາ ຊື່ວ່າ ອິດທິວິທະຍານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກສັນທະແລະຄວາມພຽນສ້າງສັນ) ຈະເລີນອິດທິບາດທີ່ປະກອບດ້ວຍ ວິຣິຍະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິຣິຍະແລະຄວາມພຽນສ້າງສັນ) ຈະເລີນອິດທິບາດ ທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ (ສະມາທິທີ່ເກີດຈາກຈິດແລະຄວາມພຽນສ້າງສັນ) ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ (ສະມາທິທີ່ເກີດຈາກວິມັງສາແລະຄວາມພຽນສ້າງສັນ) ພິກຂຸນັ້ນ ຍ່ອມອົບຮົມຂົ່ມຈິດເຮັດໃຫ້ເປັນຈິດອ່ອນ ຄວນແກ່ວຽກງານ ໃນອິດທິບາດ ໔ ປະການນີ້ ເມື່ອແລ້ວຍ່ອມຕັ້ງກາຍໄວ້ໃນຈິດແດ່ ຕັ້ງຈິດໄວ້ໃນກາຍແດ່ ນ້ອມຈິດ ໄປດ້ວຍອຳນາດກາຍແດ່ ນ້ອມກາຍໄປດ້ວຍອຳນາດຈິດແດ່ ອະທິຖານຈິດດ້ວຍອຳນາດກາຍແດ່ ອະທິຖານກາຍດ້ວຍອຳນາດຈິດແດ່ ເມື່ອນ້ອມຈິດໄປດ້ວຍອຳນາດກາຍນ້ອມກາຍໄປດ້ວຍອຳນາດຈິດ ອະທິຖານຈິດດ້ວຍອຳນາດກາຍ ອະທິຖານກາຍດ້ວຍອຳນາດຈິດ

ແລ້ວ ຍ່ອມໃຫ້ສຸຂະສັນຍາແລະລະຫຸສັນຍາຢັ່ງລົງໃນກາຍຢູ່ ທ່ານມີຈິດອົບຮົມແລ້ວແນວນັ້ນ ບໍລິສຸດ ຜ່ອງແຜ້ວ ຍ່ອມນ້ອມນຳຈິດໄປເພື່ອອິດທິວິທະຍານ ທ່ານຍ່ອມສະແດງລິດໄດ້ຫຼາຍຢ່າງ

[໑໐໘] ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດກໍໄດ້ ຫຼື ໃຫ້ຫາຍໄປກໍໄດ້ ຊອດຜ່ານຝາກຳແພງພູເຂົາໄປໄດ້ບໍ່ຕິດຂັດ ເໝືອນໄປໃນບ່ອນວ່າງກໍໄດ້ ໂປ່ໂລ່ຂຶ້ນຫຼືດຳລົງໃນແຜ່ນດິນເໝືອນໄປໃນນ້ຳກໍໄດ້ ຍ່າງເທິງນ້ຳໂດຍທີ່ນ້ຳບໍ່ແຍກເໝືອນຍ່າງເທິງແຜ່ນດິນກໍໄດ້ ນັ່ງຂັດສະມາທິເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ໃຊ້ຝ່າມືລູບຈັບດວງຈັນດວງອາທິດເຊິ່ງມີລິດຫຼາຍມີອານຸພາບຫຼາຍກໍໄດ້ ໃຊ້ອຳນາດທາງກາຍໄປຮອດຈົນເຖິງພົມມະໂລກກໍໄດ້

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນສະພາວະທີ່ສຳເລັດດ້ວຍການກຳນົດກາຍ (ຂອງຕົນ) ແລະຈິດ (ມີຊານເປັນບາດ) ເຂົ້ານຳກັນດ້ວຍອຳນາດການຕັ້ງໄວ້ເຊິ່ງສຸຂະສັນຍາ ແລະລະຫຸສັນຍາຊື່ວ່າອິດທິວິທະຍານ

**ອິດທິວິທະຍານະນິດເທດທີ ໕໐ ຈົບ**

## ໕໑. ໂສຕະທາດວິສຸດທິຍານະນິດເທດ

### ສະແດງໂສຕະທາດວິສຸດທິຍານ

[໑໐໙] ປັນຍາໃນການຢັ່ງລົງສູ່ສັດທະນິມິດທີ່ມີສະພາວະຕ່າງ ໆ ແລະສະພາວະດຽວດ້ວຍອຳນາດການແຜ່ວິຕົກໄປ ຊື່ວ່າໂສຕະທາດວິສຸດທິຍານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດ ທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາສະມາທິປະທານສັງຂານ ພິກຂຸນັ້ນຍ່ອມອົບຮົມຂົ່ມຈິດ ເຮັດໃຫ້ເປັນຈິດອ່ອນ ຄວນແກ່ວຽກງານ ໃນອິດທິບາດ ໔ ປະການນີ້ແລ້ວ ຍ່ອມໃສ່ໃຈ ສັດທະ ນິມິດແຫ່ງສຽງທັງຫຼາຍໃນບ່ອນໄກແດ່ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍໃນບ່ອນໃກ້ແດ່ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍຫຍາບແດ່ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍລະອຽດແດ່ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍລະອຽດຢ່າງຍິ່ງ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດບູຣະພາ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດປັດສິມ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດອຸດອນ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດ

ທັກຂິນ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດອາຄະເນ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດພາຍັບ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດອີສານ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດຫໍຣະດີ ຍ່ອມໃສ່ໃຈ ສັດທະນິມິດແຫ່ງສຽງທັງຫຼາຍທັງທາງທິດເບື້ອງຕ່ຳ ຍ່ອມໃສ່ໃຈສັດທະນິມິດແຫ່ງສຽງທັງຫຼາຍ ທັງທາງທິດເບື້ອງເທິງ ທ່ານມີຈິດອົບຮົມແລ້ວແນວນັ້ນ ບໍລິສຸດ ຜ່ອງແຜ້ວ ຍ່ອມນ້ອມນຳຈິດໄປເພື່ອໂສຕະທາດວິສຸດທິຍານ ໄດ້ຍິນສຽງ ໒ ຊະນິດ ຄືສຽງ ທິບແລະສຽງມະນຸດທັງທີ່ຢູ່ໄກແລະໃກ້ ດ້ວຍຫູທິບອັນບໍລິສຸດເໜືອມະນຸດ

ຊື່ວ່າຍານ ຍ້ອນມີສະພາວະຮູ້ທຳນັ້ນ ຊື່ວ່າປັນຍາ ຍ້ອນມີສະພາວະຮູ້ຊັດແຈ້ງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປັນຍາໃນການຢັ່ງລົງສູ່ສັດທະນິມິດທີ່ມີສະພາວະຕ່າງ ໆ ແລະສະພາວະດຽວ ດ້ວຍອຳນາດການແຜ່ວິຕົກໄປ ຊື່ວ່າໂສຕະທາດວິສຸດທິຍານ

**ໂສຕະທາດວິສຸດທິຍານະນິດເທດທີ ໕໑ ຈົບ**

# ໕໒. ເຈໂຕປະຣິຍະຍານະນິດເທດ

## ສະແດງເຈໂຕປະຣິຍະຍານ

[໑໐໔] ປັນຍາໃນການຢັ່ງລົງສູ່ວິນຍານຈະຣິຍາທີ່ມີສະພາວະຕ່າງ ໆ ແລະສະພາວະດຽວ ດ້ວຍອຳນາດຄວາມຜ່ອງໃສແຫ່ງອິນຊີທັງຫຼາຍ ຍ້ອນການແຜ່ໄປແຫ່ງຈິດ ໓ ປະເພດ ຊື່ວ່າເຈໂຕປະຣິຍະຍານ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຈະເລີນອິດທິບາດທີ່ປະກອບດ້ວຍສັນທະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດທີ່ປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດທີ່ປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ ຈະເລີນອິດທິບາດທີ່ປະກອບດ້ວຍວິມັງສາ ສະມາທິປະທານສັງຂານ ພິກຂຸນັ້ນຍ່ອມອົບຮົມຂົ່ມຈິດ ເຮັດໃຫ້ເປັນຈິດອ່ອນ ຄວນແກ່ວຽກງານ ໃນອິດທິບາດ ໔ ປະການນີ້ ເມື່ອແລ້ວຍ່ອມຮູ້ວ່າ ຮູບນີ້ເກີດຂຶ້ນດ້ວຍໂສມະນັດສິນຊີ ຮູບນີ້ເກີດຂຶ້ນດ້ວຍໂທມະນັດສິນຊີ ຮູບນີ້ເກີດຂຶ້ນດ້ວຍອຸເປກຂິນຊີ ທ່ານມີຈິດອົບຮົມແລ້ວ ແນວນັ້ນ ບໍລິສຸດ ຜ່ອງແຜ້ວ ຍ່ອມນ້ອມນຳຈິດໄປເພື່ອເຈໂຕປະຣິຍະຍານ ທ່ານຍ່ອມກຳນົດຮູ້ໃຈຂອງສັດອື່ນ ຂອງບຸກຄົນອື່ນດ້ວຍໃຈຂອງຕົນ ຄືຈິດມີຣາຄະກໍຮູ້ວ່າ ຈິດມີຣາຄະ ຫຼື ຈິດປາສະຈາກຣາຄະກໍຮູ້ວ່າ ຈິດປາສະຈາກຣາຄະ ຈິດມີໂທສະກໍຮູ້ວ່າ ຈິດມີໂທສະ ຫຼື ຈິດປາສະຈາກໂທສະກໍຮູ້ວ່າ ຈິດປາສະຈາກໂທສະ ຈິດມີໂມຫະກໍຮູ້ວ່າ ຈິດມີໂມຫະ ຫຼື ຈິດປາສະຈາກໂມຫະກໍຮູ້ວ່າ ຈິດປາສະຈາກໂມຫະ ຈິດຫົດຫູ່ກໍຮູ້ວ່າ ຈິດຫົດຫູ່ ຫຼື ຈິດຟຸ້ງຊ່ານກໍຮູ້ວ່າ ຈິດຟຸ້ງຊ່ານ ຈິດເປັນມະ

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສຮູບເກີດຂຶ້ນ ນີ້ເປັນອັດສາທະ (ເປັນຄຸນ) ແຫ່ງຮູບທິດຖິບໍ່ແມ່ນອັດສາທະ ອັດສາທະກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ອັດສາທະກໍເປັນແນວໜຶ່ງ ທິດຖິແລະອັດສາທະນີ້ ທ່ານກ່າວວ່າ ອັດສາທະທິດຖິ ອັດສາທະທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ບຸກຄົນຜູ້ປະກອບດ້ວຍທິດຖິວິບັດນັ້ນເປັນຜູ້ມີທິດຖິວິບັດ ບຸກຄົນຜູ້ມີທິດຖິວິບັດ ບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນນັ່ງໃກ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ທິດຖິໃດ ຣາຄະໃດ ຣາຄະນັ້ນບໍ່ແມ່ນທິດຖິ ທິດຖິນັ້ນກໍບໍ່ແມ່ນຣາຄະ ທິດຖິເປັນແນວໜຶ່ງ ຣາຄະກໍເປັນແນວໜຶ່ງ ທິດຖິແລະຣາຄະນີ້ ຮຽກວ່າ ທິດຖິຣາຄະ ບຸກຄົນຜູ້ປະກອບດ້ວຍທິດຖິນັ້ນແລະຣາຄະນັ້ນ ເປັນຜູ້ຍິນດີໃນທິດຖິຣາຄະ ທານທີ່ໃຫ້ແກ່ບຸກຄົນຜູ້ຍິນດີທິດຖິຣາຄະ ເປັນທານມີຜົນບໍ່ຫຼາຍ ມີອານິສົງບໍ່ຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ອັດສາທະທິດຖິເປັນມິດສາທິດຖິ

ບຸກຄົນຜູ້ເປັນມິດສາທິດຖິມີຄະຕິເປັນ ໒ ຄື ນະຮົກຫຼືກຳເນີດສັດເດຍຣັດສານ ອັນໜຶ່ງກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳ ຯລຯ ແລະມະໂນກຳ ທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງໝົດນັ້ນຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ

ປຽບເໝືອນເມັດກະເດົາ ເມັດບວບຂົມ ຫຼື ເມັດນ້ຳເຕົ້າຂົມທີ່ບຸກຄົນເພາະໄວ້ໃນດິນຊຸ່ມຊື້ນ ຣົດດິນແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດ ຍ່ອມເປັນໄປເພື່ອຄວາມເປັນຂອງຂົມ ເຜັດຮ້ອນ ບໍ່ໜ້າຍິນດີ ຂໍ້ນັ້ນຍ້ອນເຫດໃດ ຍ້ອນກະເດົາເປັນຕົ້ນນັ້ນມີເມັດຊົ່ວ ສັນໃດ ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳ ຯລຯ ແລະ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງໝົດນັ້ນຍ່ອມ ເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ສັນນັ້ນ ອັດສາທະທິດຖິເປັນມິດສາທິດຖິ ການຕົກຢູ່ໃນທິດຖິ ຄວາມຮົກເຮື້ອ ຄື ທິດຖິ ຯລຯ ຄວາມຖືໝັ້ນ ຄື ທິດຖິ ຄວາມກ່ຽວຂ້ອງແຫ່ງຈິດທີ່ທິດຖິກຸ້ມຮຸມ (ເປັນມິດສາທິດຖິເຊິ່ງຈັດເປັນອັດສາທະທິດຖິ) ດ້ວຍອາການ ໑໗ ປະການນີ້

[໑໘໙] ສັງໂຍດແລະທິດຖິມີຢູ່ ສັງໂຍດແຕ່ບໍ່ເປັນທິດຖິກໍມີຢູ່

ສັງໂຍດແລະທິດຖິ ມີອັນໃດແດ່ ຄື

໑. ສັກກາຍະທິດຖິ

໒. ສີລັບພະຕະປະຣາມາດ

ເຫຼົ່ານີ້ເປັນສັງໂຍດແລະທິດຖິ
ສັງໂຍດແຕ່ບໍ່ເປັນທິດຖິ ມີອັນໃດແດ່ ຄື

໑. ກາມຣາຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ກາມຣາຄະ)
໒. ປະຕິຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ປະຕິຄະ)
໓. ມານະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ມານະ)
໔. ວິຈິກິດສາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ວິຈິກິດສາ)
໕. ພະວະຣາຄະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ພະວະຣາຄະ)
໖. ອິດສາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ອິດສາ)
໗. ມັດສະຣິຍະສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ມັດສະຣິຍະ)
໘. ອະນຸໄສສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ອະນຸໄສ)
໙. ອະວິດຊາສັງໂຍດ (ກິເລດເຄື່ອງປະກອບສັດໄວ້ໃນພົບ ຄື ອະວິດຊາ)

ເຫຼົ່ານີ້ເປັນສັງໂຍດແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກໂສມະນັດທີ່ອາໄສເວທະນາເກີດຂຶ້ນ ນີ້ເປັນອັດສາທະແຫ່ງເວທະນາ ຯລຯ ອາໄສສັນຍາ ຯລຯ ອາໄສສັງຂານ ຯລຯ ອາໄສວິນຍານ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສຈັກຂຸ ຯລຯ ອາໄສໂສຕະ ຯລຯ ອາໄສຄານະ ຯລຯ ອາໄສຊິວຫາ ຯລຯ ອາໄສກາຍ ຯລຯ ອາໄສມະໂນ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສຮູບ ຯລຯ ອາໄສສັດທະ ຯລຯ ອາໄສຄັນທະ ຯລຯ ອາໄສຣະສະ ຯລຯ ອາໄສໂຜດຖັບພະ ຯລຯ ອາໄສທຳມາຣົມ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສຈັກຂຸວິນຍານ ຯລຯ ອາໄສໂສຕະວິນຍານ ຯລຯ ອາໄສຄານະວິນຍານ ຯລຯ ອາໄສຊິວຫາວິນຍານ ຯລຯ ອາໄສ ກາຍະວິນຍານ ຯລຯ ອາໄສມະໂນວິນຍານ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສຈັກຂຸສຳຜັດ ຯລຯ ອາໄສໂສຕະສຳຜັດ ຯລຯ ອາໄສຄານະສຳຜັດ ຯລຯ ອາໄສຊິວຫາສຳຜັດ ຯລຯ ອາໄສ ກາຍະສຳຜັດ ຯລຯ ອາໄສມະໂນສຳຜັດ ຯລຯ ອາໄສຈັກຂຸສຳຜັດສະຊາເວທະນາ ຯລຯ ອາໄສ ໂສຕະສຳຜັດສະຊາເວທະນາ ຯລຯ ອາໄສຄານະສຳຜັດສະຊາເວທະນາ ຯລຯ ອາໄສຊິວຫາ ສຳຜັດສະຊາເວທະນາ ຯລຯ ອາໄສກາຍະສຳຜັດສະຊາເວທະນາ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ສຸກ ໂສມະນັດທີ່ອາໄສມະໂນສຳຜັດສະຊາເວທະນາເກີດຂຶ້ນ ນີ້ເປັນອັດສາທະແຫ່ງມະໂນສຳຜັດສະຊາເວທະນາ ທິດຖິບໍ່ແມ່ນອັດສາທະ ອັດສາທະກໍ

ບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ອັດສາທະກໍເປັນແນວໜຶ່ງ ທິດຖິແລະອັດສາທະນີ້ ທ່ານກ່າວວ່າ ອັດສາທະທິດຖິ

ອັດສາທະທິດຖິ ເປັນມິດສາທິດຖິ ເປັນທິດຖິວິບັດ ບຸກຄົນຜູ້ປະກອບດ້ວຍທິດຖິວິບັດນັ້ນເປັນຜູ້ມີທິດຖິວິບັດ ບຸກຄົນຜູ້ມີທິດຖິວິບັດບໍ່ຄວນເສບ ບໍ່ຄວນຄົບ ບໍ່ຄວນນັ່ງໃກ້ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ທິດຖິໃດ ຣາຄະໃດ ຣາຄະນັ້ນບໍ່ແມ່ນທິດຖິ ທິດຖິນັ້ນກໍບໍ່ແມ່ນຣາຄະ ທິດຖິເປັນແນວໜຶ່ງ ຣາຄະກໍເປັນແນວໜຶ່ງ ທິດຖິແລະຣາຄະນີ້ຮຽກວ່າ ທິດຖິຣາຄະ ບຸກຄົນຜູ້ປະກອບດ້ວຍທິດຖິນັ້ນແລະຣາຄະນັ້ນ ເປັນຜູ້ຍິນດີໃນທິດຖິຣາຄະ ທານທີ່ໃຫ້ແກ່ບຸກຄົນຜູ້ຍິນດີທິດຖິຣາຄະ ເປັນທານມີຜົນບໍ່ຫຼາຍ ມີອານິສົງບໍ່ຫຼາຍ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ອັດສາທະທິດຖິເປັນມິດສາທິດຖິ

ບຸກຄົນຜູ້ເປັນມິດສາທິດຖິ ມີຄະຕິເປັນ ໒ ຄື ນະຣົກຫຼືກຳເນີດສັດເດຍຣັດສານ ອັນໜຶ່ງກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳ ຯລຯ ແລະ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງໝົດນັ້ນຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ

ປຽບເໝືອນເມັດກະເດົາ ເມັດບວບຂົມ ຫຼື ເມັດນ້ຳເຕົ້າຂົມທີ່ບຸກຄົນເພາະໄວ້ໃນດິນຊຸ່ມຊື່ນ ຣົດດິນແລະຣົດນ້ຳທີ່ມັນດູດຊັບເອົາໄວ້ທັງໝົດ ຍ່ອມເປັນໄປເພື່ອຄວາມເປັນຂອງຂົມ ເຜັດຮ້ອນ ບໍ່ໜ້າຍິນດີ ຂໍ້ນັ້ນຍ້ອນເຫດໃດ ຍ້ອນກະເດົາເປັນຕົ້ນນັ້ນມີເມັດຊົ່ວ ສັນໃດ ກາຍຍະກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ວະຈີກຳ ຯລຯ ແລະ ມະໂນກຳທີ່ຖືປະຕິບັດໃຫ້ບໍລິບູນຕາມສົມຄວນແກ່ທິດຖິ ເຈຕະນາ ຄວາມປາຖະໜາ ຄວາມຕັ້ງໃຈ ແລະສັງຂານທັງຫຼາຍຂອງບຸກຄົນຜູ້ເປັນມິດສາທິດຖິ ທຳທັງໝົດນັ້ນຍ່ອມເປັນໄປເພື່ອຜົນທີ່ບໍ່ໜ້າປາຖະໜາ ບໍ່ໜ້າຕ້ອງການ ບໍ່ໜ້າພໍໃຈ ບໍ່ເກື້ອກູນ ເປັນທຸກ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນມີທິດຖິຊົ່ວ ສັນນັ້ນ ອັດສາທະທິດຖິເປັນມິດສາທິດຖິ

ການຕົກຢູ່ໃນທິດຖິ ຄວາມຮົກເຮື້ອຄືທິດຖິ ຯລຯ ຄວາມຖືໝັ້ນຄືທິດຖິ ຄວາມກ່ຽວຂ້ອງແຫ່ງຈິດທີ່ທິດຖິກຸ້ມຮຸມ (ເປັນມິດສາທິດຖິເຊິ່ງຈັດເປັນອັດສາທະທິດຖິ) ດ້ວຍອາການ ໑໘ ປະການນີ້

ສັງໂຍດແລະທິດຖິມີຢູ່ ສັງໂຍດແຕ່ບໍ່ເປັນທິດຖິກໍມີຢູ່

ສັງໂຍດແລະທິດຖິ ມີອັນໃດແດ່ ຄື

໑. ສັກກາຍະທິດຖິ

໒. ສີລັບພະຕະປະຣາມາດ

ເຫຼົ່ານີ້ ເປັນສັງໂຍດແລະທິດຖິ
ສັງໂຍດແຕ່ບໍ່ເປັນທິດຖິ ມີອັນໃດແດ່ ຄື

໑. ກາມຣາຄະສັງໂຍດ
໒. ປະຕິຄະສັງໂຍດ
໓. ມານະສັງໂຍດ
໔. ວິຈິກິດສາສັງໂຍດ
໕. ພະວະຣາຄະສັງໂຍດ
໖. ອິດສາສັງໂຍດ
໗. ມັດສະຣິຍະສັງໂຍດ
໘. ອະນຸໄສສັງໂຍດ
໙. ອະວິດຊາສັງໂຍດ

ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ອັດສາທະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໓໕ ແນວນີ້

**ອັດສາທະທິດຖິນິດເທດທີ ໑ ຈົບ**

# ໒. ອັດຕານຸທິດຖິນິດເທດ

## ສະແດງອັດຕານຸທິດຖິ

[໑໓໐] ອັດຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໐ ຢ່າງ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນ ອັດຕາໃນຮູບແດ່ ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນ ວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່

[໑໓໑] ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນປະຖະວີກະສິນໂດຍຄວາມເປັນອັດຕາ ຄືພິຈາລະນາເຫັນປະຖະວີກະສິນ ແລະອັດຕາບໍ່ເປັນສອງວ່າ ປະຖະວີກະສິນອັນໃດ ເຮົາກໍອັນນັ້ນ

ເຮົາອັນໃດ ປະຖະວີກະສິນກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ບຸກຄົນເຫັນແປວໄຟແລະ ແສງສະຫວ່າງບໍ່ເປັນສອງວ່າ ແປວໄຟອັນໃດ ແສງສະຫວ່າງກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນປະຖະວີກະສິນໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນປະຖະວີກະສິນແລະອັດຕາບໍ່ເປັນສອງວ່າ ປະຖະວີກະສິນອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ປະຖະວີກະສິນກໍອັນນັ້ນ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນ ວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ ເປັນອັດຕານຸທິດຖິມີຮູບເປັນວັດຖຸ ເປັນອາການທີ ໑ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ບຸກຄົນຜູ້ປະກອບດ້ວຍອັດຕານຸທິດຖິຍ່ອມມີຄະຕິເປັນ ໘ ຯລຯ ເຫຼົ່ານີ້ ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນອາໂປກະສິນ ຯລຯ ເຕໂຊກະສິນ ຯລຯ ວາໂຍກະສິນ ຯລຯ ນີລະກະສິນ ຯລຯ ປີຕະກະສິນ ຯລຯ ໂລຫິຕະກະສິນ ຯລຯ ພິຈາລະນາເຫັນໂອທາຕະກະສິນໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນໂອທາຕະກະສິນ ແລະອັດຕາບໍ່ເປັນສອງວ່າ ໂອທາຕະກະສິນອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ໂອທາຕະກະສິນກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ບຸກຄົນ ເຫັນແປວໄຟແລະແສງສະຫວ່າງບໍ່ເປັນສອງວ່າ ແປວໄຟອັນໃດ ແສງສະຫວ່າງກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ

ຯລຯ ພິຈາລະນາເຫັນໂອທາຕະກະສິນ ແລະອັດຕາບໍ່ເປັນສອງ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີຮູບເປັນວັດຖຸ ເປັນອາການທີ ໑ ອັດຕານຸທິດຖິເປັນມິດສາທິດຖິເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແນວນີ້ (໑)

ປຸຖຸຊົນພິຈາລະນາເຫັນອັດຕາມີຮູບ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຮູບຍ້ອນຮູບນີ້ ຊື່ວ່າພິຈາລະນາເຫັນອັດຕາມີຮູບ ຕົ້ນໄມ້ມີເງົາ ບຸຣຸດເພິ່ງເວົ້າເຖິງຕົ້ນໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາສັນໃດ ບຸກຄົນບາງຄົນໃນໂລກນີ້ກໍ ສັນນັ້ນຄືກັນ ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານ ໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຮູບຍ້ອນຮູບນີ້ ຊື່ວ່າພິຈາລະນາເຫັນອັດຕາມີຮູບ ທິດຖິຄື

ຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະ ວັດຖຸນີ້ເປັນອັດຕານຸທິດຖິມີຮູບເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາ ມີຮູບແນວນີ້ (໔)

ປຸຖຸຊົນພິຈາລະນາເຫັນຮູບໃນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີຮູບເຊັ່ນນີ້ ຊື່ວ່າພິຈາລະນາເຫັນຮູບໃນອັດຕາ ດອກໄມ້ມີກິ່ນຫອມ ບຸຣຸດ ເພິ່ງເວົ້າເຖິງດອກໄມ້ນັ້ນແນວນີ້ວ່າ ນີ້ດອກໄມ້ ນີ້ກິ່ນຫອມ ດອກໄມ້ເປັນແນວໜຶ່ງ ກິ່ນຫອມກໍເປັນແນວໜຶ່ງ ແຕ່ກິ່ນຫອມນີ້ມີຢູ່ໃນດອກໄມ້ນີ້ ຊື່ວ່າພິຈາລະນາເຫັນກິ່ນຫອມ ໃນດອກໄມ້ນັ້ນສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນ ແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີຮູບເຊັ່ນນີ້ ຊື່ວ່າພິຈາລະນາເຫັນຮູບໃນອັດຕາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ຯລຯ ນີ້ເປັນອັດຕານຸທິດຖິມີຮູບເປັນວັດຖຸ ເປັນອາການທີ ໓ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນຮູບໃນອັດຕາແນວນີ້ (໓)

ປຸຖຸຊົນພິຈາລະນາເຫັນອັດຕາໃນຮູບ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາ ເຫັນວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນຮູບນີ້ ຊື່ວ່າພິຈາລະນາເຫັນອັດຕາໃນຮູບ ແກ້ວມະນີທີ່ໃສ່ໄວ້ໃນຂວດ ບຸຣຸດເພິ່ງເວົ້າເຖິງແກ້ວມະນີນັ້ນແນວນີ້ວ່າ ນີ້ແກ້ວມະນີ ນີ້ຂວດ ແກ້ວມະນີເປັນແນວໜຶ່ງ ຂວດກໍເປັນແນວໜຶ່ງ ແຕ່ແກ້ວມະນີນີ້ມີຢູ່ໃນຂວດນີ້ ຊື່ວ່າພິຈາລະນາເຫັນແກ້ວມະນີໃນຂວດ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນຮູບນີ້ ຊື່ວ່າພິຈາລະນາເຫັນອັດຕາໃນຮູບ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີຮູບເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິ ເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາໃນຮູບແນວນີ້ (໔)

[໑໓໔] ປຸຖຸຊົນພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຈັກຂຸສຳຜັດສະຊາເວທະນາ ຯລຯ ໂສຕະສຳຜັດສະຊາເວທະນາ ຯລຯ ຄານະສຳຜັດສະຊາເວທະນາ ຯລຯ ຊິວຫາສຳຜັດສະຊາເວທະນາ ຯລຯ ກາຍະສຳຜັດສະຊາ ເວທະນາ ຯລຯ ພິຈາລະນາເຫັນມະໂນສຳຜັດສະຊາເວທະນາໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນ ມະໂນສຳຜັດສະຊາເວທະນາ ແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາເວທະນາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາເວທະນາກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ບຸກຄົນພິຈາລະນາເຫັນແປວໄຟແລະແສງສະຫວ່າງບໍ່ເປັນສອງວ່າ ແປວໄຟອັນໃດ ແສງສະຫວ່າງ ກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນມະໂນສຳຜັດສະຊາເວທະນາໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນມະໂນສຳຜັດສະຊາເວທະນາ ແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາເວທະນາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາເວທະນາກໍອັນນັ້ນ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິ ແລະວັດຖຸນີ້ເປັນອັດຕານຸທິດຖິມີເວທະນາເປັນວັດຖຸ ເປັນອາການທີ ໑ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນເວທະນາໂດຍ ຄວາມເປັນອັດຕາແນວນີ້ (໕)

ປຸຖຸຊົນພິຈາລະນາເຫັນອັດຕາມີເວທະນາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ພິຈາລະນາ ເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າ ອັດຕາຂອງເຮົານີ້ມີເວທະນາຍ້ອນເວທະນານີ້ ຊື່ວ່າ ພິຈາລະນາເຫັນອັດຕາມີເວທະນາ ຕົ້ນໄມ້ມີເງົາ ບຸກຄົນເພິ່ງເວົ້າເຖິງຕົ້ນໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີເວທະນາຍ້ອນເວທະນານີ້ ຊື່ວ່າພິຈາລະນາເຫັນອັດຕາມີເວທະນາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີເວທະນາເປັນວັດຖຸ ເປັນອາການທີ ໘ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາມີເວທະນາແນວນີ້ (໖)

ປຸຖຸຊົນພິຈາລະນາເຫັນເວທະນາໃນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງ

ເຮົາ ກໍໃນອັດຕານີ້ມີເວທະນານີ້ ຊື່ວ່າພິຈາລະນາເຫັນເວທະນາໃນອັດຕາ ດອກໄມ້ມີກິ່ນຫອມ ບຸກຄົນເພິ່ງເວົ້າເຖິງດອກໄມ້ນັ້ນແນວນີ້ວ່າ ນີ້ດອກໄມ້ ນີ້ກິ່ນຫອມ ດອກໄມ້ເປັນແນວໜຶ່ງ ກິ່ນຫອມກໍເປັນແນວໜຶ່ງ ແຕ່ກິ່ນຫອມນີ້ມີຢູ່ໃນດອກໄມ້ນີ້ ຊື່ວ່າພິຈາລະນາເຫັນກິ່ນຫອມໃນດອກໄມ້ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີເວທະນານີ້ ຊື່ວ່າພິຈາລະນາເຫັນເວທະນາໃນອັດຕາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ฯລฯ ນີ້ເປັນອັດຕານຸທິດຖິມີເວທະນາເປັນວັດຖຸ ເປັນອາການທີ ໓ ອັດຕານຸທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ฯລฯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນເວທະນາໃນອັດຕາແນວນີ້ (໗)

ປຸຖຸຊົນພິຈາລະນາເຫັນອັດຕາໃນເວທະນາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ພິຈາລະນາ ເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າ ອັດຕາຂອງເຮົານີ້ມີຢູ່ໃນເວທະນານີ້ ຊື່ວ່າພິຈາລະນາເຫັນອັດຕາໃນເວທະນາ ฯລฯ ຊື່ວ່າ ພິຈາລະນາເຫັນແກ້ວມະນີໃນຂວດ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາ ເຫັນສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນເວທະນານີ້ ຊື່ວ່າພິຈາລະນາເຫັນອັດຕາໃນເວທະນາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີເວທະນາເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິ ເປັນມິດສາທິດຖິ ເປັນທິດຖິວິບັດ ฯລฯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາໃນເວທະນາແນວນີ້ (໘)

[໑໓໓] ປຸຖຸຊົນພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຈັກຂຸສຳຜັດສະຊາສັນຍາ ฯລฯ ໂສຕະສຳຜັດສະຊາສັນຍາ ฯລฯ ຄານະສຳຜັດສະຊາສັນຍາ ฯລฯ ຊິວຫາສຳຜັດສະຊາສັນຍາ ฯລฯ ກາຍະ ສຳຜັດສະຊາສັນຍາ ฯລฯ ພິຈາລະນາເຫັນມະໂນສຳຜັດສະຊາສັນຍາໂດຍຄວາມເປັນອັດຕາ ຄືພິຈາລະນາເຫັນມະໂນສຳຜັດສະຊາສັນຍາແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາສັນຍາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາສັນຍາກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ບຸກຄົນເຫັນແປວໄຟແລະແສງສະຫວ່າງບໍ່ເປັນສອງວ່າ ແປວໄຟອັນໃດ ແສງສະຫວ່າງ ກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນມະໂນສຳຜັດສະຊາສັນຍາໂດຍຄວາມເປັນອັດຕາ ຄື

ພິຈາລະນາເຫັນມະໂນສຳຜັດສະຊາສັນຍາ ແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາສັນຍາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາສັນຍາກໍອັນນັ້ນ ທິດຖິຄືຄວາມ ຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັນຍາເປັນວັດຖຸ ເປັນອາການທີ ໑ ອັດຕານຸທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາແນວນີ້ (໗)

ປຸຖຸຊົນພິຈາລະນາເຫັນອັດຕາມີສັນຍາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີສັນຍາຍ້ອນສັນຍານີ້ ຊື່ວ່າພິຈາລະນາເຫັນອັດຕາມີສັນຍາ ຕົ້ນໄມ້ມີເງົາ ບຸຣຸດເພິ່ງເວົ້າເຖິງຕົ້ນໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີສັນຍາຍ້ອນສັນຍານີ້ ຊື່ວ່າພິຈາລະນາເຫັນອັດຕາມີສັນຍາ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັນຍາເປັນວັດຖຸ ເປັນອາການທີ ໘ ອັດຕານຸທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາມີສັນຍາແນວນີ້ (໑໐)

ປຸຖຸຊົນພິຈາລະນາເຫັນສັນຍາໃນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີສັນຍານີ້ ຊື່ວ່າພິຈາລະນາເຫັນສັນຍາໃນອັດຕາ ດອກໄມ້ມີກິ່ນຫອມ ບຸກຄົນເພິ່ງເວົ້າເຖິງດອກໄມ້ນັ້ນແນວນີ້ວ່າ ນີ້ດອກໄມ້ ນີ້ກິ່ນຫອມ ດອກໄມ້ເປັນແນວໜຶ່ງ ກິ່ນຫອມກໍເປັນແນວໜຶ່ງ ແຕ່ກິ່ນຫອມນີ້ມີຢູ່ໃນດອກໄມ້ນີ້ ຊື່ວ່າພິຈາລະນາເຫັນກິ່ນຫອມໃນດອກໄມ້ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີສັນຍານີ້ ຊື່ວ່າພິຈາລະນາເຫັນສັນຍາໃນອັດຕາ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັນຍາເປັນວັດຖຸ ເປັນອາການທີ ໙ ອັດຕານຸທິດຖິເປັນມິດ

ສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນສັນຍາໃນອັດຕາ ແບບນີ້ (໑໑)

ປຸຖຸຊົນພິຈາລະນາເຫັນອັດຕາໃນສັນຍາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາ ເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແບບນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນສັນຍານີ້ ຊື່ວ່າພິຈາລະນາເຫັນອັດຕາໃນສັນຍາ ແກ້ວມະນີ ທີ່ໃສ່ໄວ້ໃນຂວດ ບຸກຄົນເພິ່ງເວົ້າເຖິງແກ້ວມະນີນັ້ນແບບນີ້ວ່າ ນີ້ແກ້ວມະນີ ນີ້ຂວດ ແກ້ວມະນີເປັນຢ່າງໜຶ່ງ ຂວດກໍເປັນແນວໜຶ່ງ ແຕ່ແກ້ວມະນີນີ້ມີຢູ່ໃນຂວດນີ້ ຊື່ວ່າພິຈາລະນາເຫັນແກ້ວມະນີໃນຂວດ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນສັງຂານ ຯລຯ ວິນຍານ ຯລຯ ຮູບ ຯລຯ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແບບນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນສັນຍານີ້ ຊື່ວ່າພິຈາລະນາເຫັນອັດຕາໃນສັນຍາ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັນຍາເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາໃນສັນຍາແບບນີ້ (໑໔)

[໑໓໔] ປຸຖຸຊົນພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຈັກຂຸສຳຜັດສະຊາເຈຕະນາ ຯລຯ ໂສຕະສຳຜັດສະຊາເຈຕະນາ ຯລຯ ຄານະສຳຜັດສະຊາເຈຕະນາ ຯລຯ ຊິວຫາສຳຜັດສະຊາເຈຕະນາ ຯລຯ ກາຍະສຳຜັດສະຊາເຈຕະນາ ຯລຯ ພິຈາລະນາເຫັນມະໂນສຳຜັດສະຊາເຈຕະນາໂດຍຄວາມເປັນອັດຕາ

ຄື ພິຈາລະນາເຫັນມະໂນສຳຜັດສະຊາເຈຕະນາ ແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາ ເຈຕະນາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາເຈຕະນາກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ບຸກຄົນພິຈາລະນາເຫັນແປວໄຟແລະແສງສະຫວ່າງບໍ່ເປັນສອງວ່າ ແປວໄຟອັນໃດ ແສງສະຫວ່າງກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນ ບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນມະໂນສຳຜັດສະຊາເຈຕະນາໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນມະໂນສຳຜັດສະຊາເຈຕະນາແລະອັດຕາບໍ່ເປັນສອງວ່າ ມະໂນສຳຜັດສະຊາເຈຕະນາອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນສຳຜັດສະຊາເຈຕະນາກໍອັນນັ້ນ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັງຂານເປັນວັດຖຸ ເປັນອາການ

ທີ ໑ ອັດຕານຸທິດຖິເປັນມິດສາທິດຖິ ໗ລ໗ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາແນວນີ້ (໑໓)

ປຸຖຸຊົນພິຈາລະນາເຫັນອັດຕາມີສັງຂານ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນວິນຍານ ຮູບເວທະນາ ສັນຍາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີສັງຂານຍ້ອນສັງຂານເຫຼົ່ານີ້ ຊື່ວ່າພິຈາລະນາເຫັນອັດຕາມີສັງຂານ ຕົ້ນໄມ້ມີເງົາ ບຸຣຸດເພິ່ງເວົ້າເຖິງຕົ້ນໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນພິຈາລະນາເຫັນວິນຍານ ຮູບເວທະນາ ສັນຍາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີສັງຂານຍ້ອນສັງຂານເຫຼົ່ານີ້ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັງຂານເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິເປັນມິດສາທິດຖິ ໗ລ໗ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາມີສັງຂານແນວນີ້ (໑໔)

ປຸຖຸຊົນພິຈາລະນາເຫັນສັງຂານໃນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນວິນຍານ ຮູບ ເວທະນາ ສັນຍາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີສັງຂານເຫຼົ່ານີ້ ຊື່ວ່າພິຈາລະນາເຫັນສັງຂານໃນອັດຕາ ດອກໄມ້ມີກິ່ນຫອມ ບຸຣຸດເພິ່ງເວົ້າເຖິງດອກໄມ້ນັ້ນແນວນີ້ວ່າ ນີ້ດອກໄມ້ ນີ້ກິ່ນຫອມ ດອກໄມ້ເປັນແນວໜຶ່ງ ກິ່ນຫອມກໍເປັນແນວໜຶ່ງ ແຕ່ກິ່ນຫອມນີ້ມີຢູ່ໃນດອກໄມ້ນີ້ ຊື່ວ່າພິຈາລະນາເຫັນກິ່ນຫອມໃນດອກໄມ້ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນວິນຍານ ຮູບ ເວທະນາ ສັນຍາ ໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີສັງຂານເຫຼົ່ານີ້ ຊື່ວ່າພິຈາລະນາເຫັນສັງຂານໃນອັດຕາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີສັງຂານເປັນວັດຖຸ ເປັນອາການທີ ໓ ອັດຕານຸທິດຖິເປັນມິດສາທິດຖິ ໗ລ໗ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນສັງຂານໃນອັດຕາແນວນີ້ (໑໕)

ປຸຖຸຊົນພິຈາລະນາເຫັນອັດຕາໃນສັງຂານ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນວິນຍານ ຮູບເວທະນາ ສັນຍາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນສັງຂານນີ້ ຊື່ວ່າພິຈາລະນາເຫັນອັດຕາໃນສັງຂານ ແກ້ວມະນີທີ່ໃສ່ໄວ້ໃນຂວດ ບຸຣຸດເພິ່ງເວົ້າ

ເຖິງແກ້ວມະນີນັ້ນແນວນີ້ວ່າ ນີ້ແກ້ວມະນີ ນີ້ຂວດ ແກ້ວມະນີເປັນແນວໜຶ່ງ ຂວດກໍເປັນແນວໜຶ່ງ ແຕ່ແກ້ວມະນີນີ້ມີຢູ່ໃນຂວດນີ້ ຊື່ວ່າພິຈາລະນາເຫັນແກ້ວມະນີໃນຂວດ ສັນໃດ ບຸກຄົນບາງຄົນ ໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນວິນຍານ ຮູບເວທະນາ ສັນຍາໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນສັງຂານເຫຼົ່ານີ້ ຊື່ວ່າພິຈາລະນາເຫັນອັດຕາໃນສັງຂານ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະ ວັດຖຸນີ້ເປັນອັດຕານຸທິດຖິມີສັງ ຂານເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິເປັນ ມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາໃນສັງຂານ ແນວນີ້ (໔ ໑໖)

[໑໖໔] ປຸຖຸຊົນພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຈັກຂຸວິນຍານ ຯລຯ ໂສຕະວິນຍານ ຯລຯ ຄານະວິນຍານ ຯລຯ ຊິວຫາວິນຍານ ຯລຯ ກາຍະວິນຍານ ຯລຯ ພິຈາລະນາເຫັນມະໂນວິນ ຍານໂດຍ ຄວາມເປັນອັດຕາ ຄື ພິຈາລະນາເຫັນມະໂນວິນຍານແລະອັດຕາບໍ່ເປັນສອງວ່າ ມະ ໂນວິນຍານອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ມະໂນວິນຍານກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງ ລຸກສະຫວ່າງແຈ້ງຢູ່ ບຸກຄົນພິຈາລະນາເຫັນແປວໄຟ ແລະແສງສະຫວ່າງບໍ່ເປັນສອງວ່າ ແປວ ໄຟອັນໃດ ແສງສະຫວ່າງກໍອັນນັ້ນ ແສງສະຫວ່າງອັນໃດ ແປວໄຟກໍອັນນັ້ນ ສັນໃດ ບຸກຄົນ ບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນມະໂນວິນຍານໂດຍຄວາມເປັນອັດຕາຄື ພິຈາ ລະນາເຫັນມະໂນວິນຍານແລະອັດຕາບໍ່ເປັນສອງວ່າ ມະໂນວິນຍານອັນໃດ ເຮົາກໍອັນນັ້ນ ເຮົາ ອັນໃດ ມະໂນວິນຍານກໍອັນນັ້ນ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນ ທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີວິນຍານ ເປັນວັດຖຸ ເປັນອາການທີ ໑ ອັດຕານຸທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ ເປັນທິດຖິ ປຸຖຸຊົນພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາແນວນີ້ (໑໗)

ປຸຖຸຊົນພິຈາລະນາເຫັນອັດຕາມີວິນຍານ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານໂດຍຄວາມ ເປັນ ອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີວິນ ຍານ ຍ້ອນວິນຍານນີ້ ຊື່ວ່າພິຈາລະນາເຫັນອັດຕາມີວິນຍານ ຕົ້ນໄມ້ມີເງົາ ບຸຣຸດເພິ່ງເວົ້າເຖິງຕົ້ນ ໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ນີ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາ ຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີວິນຍານຍ້ອນວິນຍານນີ້ ຊື່ວ່າພິຈາລະນາ ເຫັນອັດຕາມີວິນຍານ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິ

ເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີວິນຍານເປັນວັດຖຸ ເປັນອາການທີ ໔ ອັດຕານຸທິດຖິເປັນມິດສາທິດຖິຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາມີວິນຍານແນວນີ້ (໑໘)

ປຸຖຸຊົນພິຈາລະນາເຫັນວິນຍານໃນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານໂດຍຄວາມເປັນ ອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີວິນຍານເຊັ່ນນີ້ ຊື່ວ່າພິຈາລະນາເຫັນວິນຍານໃນອັດຕາ ດອກໄມ້ມີກິ່ນຫອມ ບຸຣຸດເພິ່ງເວົ້າເຖິງດອກໄມ້ນັ້ນວ່າ ນີ້ດອກໄມ້ ນີ້ກິ່ນຫອມ ດອກໄມ້ເປັນແນວໜຶ່ງ ກິ່ນຫອມກໍເປັນແນວໜຶ່ງ ແຕ່ວ່າກິ່ນຫອມນີ້ ມີຢູ່ໃນດອກໄມ້ນີ້ ຊື່ວ່າພິຈາລະນາເຫັນກິ່ນຫອມໃນດອກໄມ້ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນເໝືອນກັນ ພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ກໍໃນອັດຕານີ້ມີວິນຍານນີ້ ຊື່ວ່າພິຈາລະນາເຫັນວິນຍານໃນອັດຕາ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີວິນຍານເປັນວັດຖຸ ເປັນອາການທີ ໓ ອັດຕານຸທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນວິນຍານໃນອັດຕາແນວນີ້ (໑໙)

ປຸຖຸຊົນພິຈາລະນາເຫັນອັດຕາໃນວິນຍານ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນຮູບ ເວທະນາ ສັນຍາ ສັງຂານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີຢູ່ໃນວິນຍານນີ້ ຊື່ວ່າພິຈາລະນາເຫັນອັດຕາໃນວິນຍານ ແກ້ວມະນີທີ່ໃສ່ໄວ້ໃນຂວດ ບຸຣຸດເພິ່ງ ເວົ້າເຖິງແກ້ວມະນີນັ້ນແນວນີ້ວ່າ ນີ້ແກ້ວມະນີ ນີ້ຂວດ ແກ້ວມະນີເປັນແນວໜຶ່ງ ຂວດກໍເປັນແນວໜຶ່ງ ແຕ່ວ່າແກ້ວມະນີນີ້ມີຢູ່ໃນຂວດນີ້ ຊື່ວ່າພິຈາລະນາເຫັນແກ້ວມະນີໃນຂວດ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນ ຮູບ ເວທະນາ ສັນຍາ ສັງຂານ ໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ ມີຢູ່ໃນວິນຍານນີ້ ຊື່ວ່າພິຈາລະນາເຫັນອັດຕາໃນວິນຍານ ທິດຖິຄືຄວາມຢຶດໝັ້ນຖືໝັ້ນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັດຕານຸທິດຖິມີວິນຍານເປັນວັດຖຸ ເປັນອາການທີ ໔ ຯລຯ ອັດຕານຸທິດຖິເປັນມິດສາທິດຖິ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາໃນວິນຍານແນວນີ້

ອັດຕານຸທິດຖິມີຄວາມຢຶດໝັ້ນດ້ວຍອາການ ໔໐ ເປັນແນວນີ້ (໔໐)

**ອັດຕານຸທິດຖິນິດເທດທີ ໔ ຈົບ**

# ៣. ມິດສາທິດຖິນິດເທດ

## ສະແດງມິດສາທິດຖິ

[໑៣໙] ມິດສາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໐ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນແຫ່ງມິດສາທິດຖິທີ່ກ່າວເຖິງວັດຖຸແນວນີ້ວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມິດສາທິດຖິມີວັດຖຸຜິດ ເປັນອາການທີ ໑ ມິດສາທິດຖິເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນແຫ່ງມິດສາທິດຖິທີ່ກ່າວເຖິງວັດຖຸແນວນີ້ວ່າ ຍັນທີ່ບູຊາແລ້ວບໍ່ມີຜົນ ຯລຯ ການບວງສວງບໍ່ມີຜົນ ຯລຯ ຜົນວິບາກແຫ່ງກຳທີ່ບຸກຄົນເຮັດດີເຮັດຊົ່ວບໍ່ມີ ຯລຯ ໂລກນີ້ບໍ່ມີ ຯລຯ ໂລກໜ້າບໍ່ມີ ຯລຯ ມານດາບໍ່ມີ ຯລຯ ບິດາບໍ່ມີ ຯລຯ ໂອປະປາຕິກະສັດບໍ່ມີ ຯລຯ ທິດຖິຄືຄວາມຍຶດໝັ້ນຖືໝັ້ນແຫ່ງມິດສາທິດຖິທີ່ກ່າວເຖິງວັດຖຸແນວນີ້ວ່າ ສະມະນະແລະພາມຜູ້ພ້ອມພຽງກັນປະຕິບັດດີປະຕິບັດຊອບ ຮູ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍຕົນເອງແລ້ວປະກາດໃຫ້ຜູ້ອື່ນຮູ້ຕາມບໍ່ມີໃນໂລກ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມິດສາທິດຖິມີຄວາມເຫັນຜິດເປັນວັດຖຸ ເປັນອາການທີ ໑໐ ມິດສາທິດຖິເປັນທິດຖິວິບັດ ຯລຯ ບຸກຄົນຜູ້ພຽບພ້ອມດ້ວຍມິດສາທິດຖິ ຍ່ອມມີຄະຕິເປັນ ໘ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ມິດສາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໐ ແນວນີ້

**ມິດສາທິດຖິນິດເທດທີ ៣ ຈົບ**

# ໔. ສັກກາຍະທິດຖິນິດເທດ

## ສະແດງສັກກາຍະທິດຖິ

[໑៣໗] ສັກກາຍະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໐ ຢ່າງ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່ ພິຈາລະນາເຫັນເວທະນາ ສັນຍາ ສັງຂານ ວິນຍານໂດຍຄວາມເປັນອັດ

ຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່

ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນປະຖະວີກະສິນ ຯລຯ ພິຈາລະນາເຫັນໂອທາຕະກະສິນ ໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນໂອທາຕະກະສິນແລະອັດຕາບໍ່ເປັນສອງວ່າ ໂອທາຕະກະສິນອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ໂອທາຕະກະສິນກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ຯລຯ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນໂອທາຕະກະສິນ ໂດຍຄວາມເປັນອັດຕາ ທິດຖິຄືຄວາມຍຶດໝັ້ນຖືໝັ້ນ ຯລຯ ນີ້ເປັນສັກກາຍະທິດຖິມີຮູບເປັນວັດຖຸ ເປັນອາການທີ ໑ ສັກກາຍະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແນວນີ້ ຯລຯ

ສັກກາຍະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໐ ເປັນແນວນີ້

**ສັກກາຍະທິດຖິນິດເທດທີ ໔ ຈົບ**

# ໕. ສັດສະຕະທິດຖິນິດເທດ

## ສະແດງສັດສະຕະທິດຖິ

[໑໓໗] ສັດສະຕະທິດຖິທີ່ມີສັກກາຍະເປັນວັດຖຸ ມີຄວາມຍຶດໝັ້ນດ້ວຍອາການ ໑໕ ຢ່າງ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນອັດຕາໃນຮູບແດ່ ພິຈາລະນາເຫັນອັດຕາມີເວທະນາແດ່ ພິຈາລະນາເຫັນອັດຕາມີສັນຍາແດ່ ພິຈາລະນາເຫັນອັດຕາມີສັງຂານແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະນາເຫັນອັດຕາໃນວິນຍານແດ່

ປຸຖຸຊົນພິຈາລະນາເຫັນອັດຕາມີຮູບ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນເວທະນາ ສັນຍາ ສັງຂານ ວິນຍານໂດຍຄວາມເປັນອັດຕາ ເຂົາມີຄວາມເຫັນແນວນີ້ວ່າ ນີ້ເປັນອັດຕາຂອງເຮົາ ແຕ່ວ່າອັດຕາຂອງເຮົານີ້ມີ

ຮູບຍ້ອນຮູບນີ້ ຊື່ວ່າພິຈາລະນາເຫັນອັດຕາມີຮູບ ຕົ້ນໄມ້ມີເງົາ ບຸຣຸດເພິ່ງເວົ້າເຖິງຕົ້ນໄມ້ນັ້ນແນວນີ້ວ່າ ນີ້ຕົ້ນໄມ້ ນີ້ເງົາ ຕົ້ນໄມ້ເປັນແນວໜຶ່ງ ເງົາກໍເປັນແນວໜຶ່ງ ແຕ່ຕົ້ນໄມ້ນີ້ມີເງົາຍ້ອນເງົານີ້ ຊື່ວ່າພິຈາລະນາເຫັນຕົ້ນໄມ້ມີເງົາສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນເວທະນາ ຯລຯ ໂດຍຄວາມເປັນອັດຕາ ນີ້ເປັນສັດສະຕະທິດຖິທີ່ມີສັກກາຍະເປັນວັດຖຸ ເປັນອາການທີ ໑ ສັດສະຕະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາເຫັນອັດຕາມີຮູບແນວນີ້ ຯລຯ

ສັດສະຕະທິດຖິທີ່ມີສັກກາຍະເປັນວັດຖຸ ມີຄວາມຍຶດໝັ້ນດ້ວຍອາການ ໑໕ ເປັນແນວນີ້

**ສັດສະຕະທິດຖິນິດເທດທີ ໕ ຈົບ**

# ໖. ອຸດເສທະທິດຖິນິດເທດ

## ສະແດງອຸດເສທະທິດຖິ

[໑໖໙] ອຸດເສທະທິດຖິທີ່ມີສັກກາຍະເປັນວັດຖຸ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ພິຈາລະນາເຫັນເວທະນາໂດຍຄວາມເປັນອັດຕາ ພິຈາລະນາເຫັນສັນຍາໂດຍຄວາມເປັນອັດຕາ ພິຈາລະນາເຫັນສັງຂານໂດຍຄວາມເປັນອັດຕາ ພິຈາລະນາເຫັນວິນຍານໂດຍຄວາມເປັນອັດຕາ

ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນປະຖະວີກະສິນ ຯລຯ ພິຈາລະນາເຫັນໂອທາຕະກະສິນ ໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນໂອທາຕະກະສິນແລະອັດຕາບໍ່ເປັນສອງວ່າ ໂອທາຕະກະສິນອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ໂອທາຕະກະສິນກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ຯລຯ ສັນໃດ ນີ້ເປັນອຸດເສທະທິດຖິທີ່ມີສັກກາຍະເປັນວັດຖຸ ເປັນອາການທີ ໑ ອຸດເສທະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ປຸຖຸຊົນພິຈາລະນາ ເຫັນຮູບໂດຍຄວາມເປັນອັດຕາແນວນີ້ ຯລຯ

ອຸດເສທະທິດຖິທີ່ມີສັກກາຍະເປັນວັດຖຸ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້

**ອຸດເສທະທິດຖິນິດເທດທີ ໖ ຈົບ**

# ກ. ອັນຕັກຄາຫິກະທິດຖິນິດເທດ

## ສະແດງອັນຕັກຄາຫິກະທິດຖິ

[໑໘໐] ອັນຕັກຄາຫິກະທິດຖິ ມີຄວາມຍຶດໝັ້ນດ້ວຍອາການ ໕໐ ຢ່າງ ເປັນແນວໃດ?

ຄື ອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ມີຄວາມຍຶດໝັ້ນດ້ວຍອາການເທົ່າໃດ ອັນຕັກຄາຫິກະທິດຖິວ່າ ໂລກບໍ່ທ່ຽງ ຯລຯ ໂລກມີບ່ອນສຸດ ຯລຯ ໂລກບໍ່ມີບ່ອນສຸດ ຯລຯ ຊີວະກັບສະຣີຣະເປັນແນວດຽວກັນ ຯລຯ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ຯລຯ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ຯລຯ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ມີຄວາມຍຶດໝັ້ນດ້ວຍອາການເທົ່າໃດ?

ຄື ອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ຯລຯ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ

ອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບເປັນໂລກແລະເປັນຂອງທ່ຽງ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາເປັນໂລກແລະເປັນຂອງທ່ຽງ ຯລຯ ສັນຍາເປັນໂລກແລະເປັນຂອງທ່ຽງ ຯລຯ ສັງຂານເປັນໂລກແລະເປັນຂອງທ່ຽງ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານ ເປັນໂລກແລະເປັນຂອງທ່ຽງ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ເປັນອາການທີ ໕ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ມີຄວາມຍຶດໝັ້ນ ດ້ວຍອາການ ໕ ຢ່າງນີ້ (໕)

ອັນຕັກຄາຫິກະທິດຖິວ່າ ໂລກບໍ່ທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບເປັນໂລກແລະເປັນຂອງບໍ່ທ່ຽງ ທິດຖິນັ້ນ ຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ນີ້ເປັນອັນຕັກຄາຫິກະທິດ

ຖືວ່າ ໂລກບໍ່ທ່ຽງ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ເປັນທິດຖິວິບັດ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາເປັນໂລກແລະເປັນຂອງບໍ່ທ່ຽງ ຯລຯ ສັນຍາເປັນໂລກແລະເປັນຂອງບໍ່ທ່ຽງ ຯລຯ ສັງຂານເປັນໂລກແລະເປັນຂອງບໍ່ທ່ຽງ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານເປັນໂລກແລະເປັນຂອງບໍ່ທ່ຽງ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ອັນຕັກຄາຫິກະທິດຖິວ່າ ໂລກບໍ່ທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໑໐)

ອັນຕັກຄາຫິກະທິດຖິວ່າ ໂລກມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ເຮັດສີຂຽວໃຫ້ເປັນອາລົມແຜ່ໄປບໍ່ຫຼາຍ ເຂົາມີຄວາມເຫັນແນວນີ້ວ່າ ໂລກນີ້ມີບ່ອນສຸດກົມ ຈຶ່ງມີຄວາມໝາຍຮູ້ວ່າໂລກມີບ່ອນສຸດ ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ກະສິນທີ່ແຜ່ໄປເປັນວັດຖຸແລະເປັນໂລກ ຈິດທີ່ເປັນເຫດໃຫ້ກະສິນແຜ່ໄປເປັນອັດຕາແລະເປັນໂລກ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ໂລກມີບ່ອນສຸດ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ບຸກຄົນບາງຄົນໃນໂລກນີ້ເຮັດສີເຫຼືອງໃຫ້ເປັນອາລົມແຜ່ໄປ ຯລຯ ເຮັດສີແດງໃຫ້ເປັນອາລົມແຜ່ໄປ ຯລຯ ເຮັດສີຂາວໃຫ້ເປັນອາລົມແຜ່ໄປ ຯລຯ

ບຸກຄົນບາງຄົນໃນໂລກນີ້ເຮັດແສງສະຫວ່າງໃຫ້ເປັນອາລົມແຜ່ໄປບໍ່ຫຼາຍ ເຂົາມີຄວາມເຫັນແນວນີ້ວ່າ ໂລກນີ້ມີບ່ອນສຸດກົມ ຈຶ່ງມີຄວາມໝາຍຮູ້ວ່າໂລກມີບ່ອນສຸດ ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ກະສິນທີ່ແຜ່ໄປເປັນວັດຖຸແລະເປັນໂລກ ຈິດທີ່ເປັນເຫດໃຫ້ກະສິນແຜ່ໄປເປັນອັດຕາແລະເປັນໂລກ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ໂລກມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໑໕)

ອັນຕັກຄາຫິກະທິດຖິວ່າ ໂລກບໍ່ມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ເຮັດສີຂຽວແຜ່ໄປຫຼາຍ ເຂົາມີຄວາມເຫັນແນວນີ້ວ່າ ໂລກນີ້ບໍ່ມີບ່ອນສຸດ ຫາບ່ອນສຸດບໍ່ໄດ້ ຈຶ່ງມີຄວາມໝາຍຮູ້ວ່າໂລກບໍ່ມີບ່ອນສຸດ ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ກະສິນທີ່ແຜ່ໄປເປັນວັດຖຸແລະເປັນໂລກ ຈິດທີ່ເປັນເຫດໃຫ້ກະສິນແຜ່ໄປເປັນອັດຕາແລະເປັນໂລກທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດ

ຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ໂລກບໍ່ມີບ່ອນສຸດ ເປັນອາການທີ ໑ ອັນຕັກຄາຫິກະ ທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ບຸກຄົນບາງຄົນໃນໂລກນີ້ເຮັດສີເຫຼືອງ ຯລຯ ສີແດງ ຯລຯ ສີຂາວ ຯລຯ ບຸກຄົນບາງຄົນໃນໂລກນີ້ເຮັດແສງສະຫວ່າງແຜ່ໄປສູ່ໂອກາດອັນກວ້າງ ເຂົາມີຄວາມເຫັນແນວນີ້ວ່າ ໂລກນີ້ບໍ່ມີບ່ອນສຸດ ຫາບ່ອນສຸດບໍ່ໄດ້ ຈຶ່ງມີຄວາມໝາຍຮູ້ວ່າໂລກບໍ່ມີບ່ອນສຸດ ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ກະສິນທີ່ແຜ່ໄປເປັນວັດຖຸແລະເປັນໂລກ ຈິດທີ່ເປັນເຫດໃຫ້ກະສິນແຜ່ໄປເປັນອັດຕາແລະເປັນໂລກ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ໂລກບໍ່ມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໔໐)

ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບເປັນຊີວະແລະເປັນສະຣີຣະ ຊີວະອັນໃດ ສະຣີຣະກໍອັນນັ້ນ ສະຣີຣະອັນໃດ ຊີວະກໍອັນນັ້ນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າ ອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາເປັນຊີວະແລະເປັນສະຣີຣະ ຯລຯ ສັນຍາເປັນຊີວະ ແລະເປັນສະຣີຣະ ຯລຯ ສັງຂານເປັນຊີວະແລະເປັນສະຣີຣະ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານເປັນຊີວະ ແລະເປັນສະຣີຣະ ຊີວະອັນໃດ ສະຣີຣະກໍອັນນັ້ນ ສະຣີຣະອັນໃດ ຊີວະກໍອັນນັ້ນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໔໕)

ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບເປັນສະຣີຣະ ບໍ່ແມ່ນຊີວະ ຮູບນັ້ນເປັນສະຣີຣະ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາເປັນສະຣີຣະ ບໍ່ແມ່ນຊີວະ ຯລຯ ສັນຍາເປັນສະຣີຣະ ບໍ່ແມ່ນຊີວະ ຯລຯ ສັງຂານເປັນສະຣີຣະ ບໍ່ແມ່ນຊີວະ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານເປັນສະຣີຣະ ບໍ່ແມ່ນຊີວະ ວິນຍານນັ້ນເປັນສະຣີຣະ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໓໐)

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແດ່ ດຳຣົງຢູ່ແດ່ ຖືກຳເນີດແດ່ ບັງເກີດແດ່ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັນຍາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັງຂານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກແດ່ ດຳຣົງຢູ່ແດ່ ຖືກຳເນີດແດ່ ບັງເກີດແດ່ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ (໓໕)

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກກໍມີ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ຮູບຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດຍ່ອມຂາດສູນ ພິນາດໄປ ບໍ່ເກີດອີກ ທິດຖິນັ້ນຖືເອົາບ່ອນສຸດ ເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກກໍມີ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນ ມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ເວທະນາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັນຍາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັງຂານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ

ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ວິນຍານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດຍ່ອມຂາດສູນ ພິນາດໄປ ບໍ່ເກີດອີກ ທິດຖິນັ້ນຖືເອົາບ່ອນສຸດ

ເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ມີຄວາມຢຶດໝັ້ນດ້ວຍອາການ ໕ ແນວນີ້ (໔໐)

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ມີຄວາມຢຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ຮູບຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ເວທະນາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັນຍາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັງຂານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ

ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ວິນຍານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ຯລຯ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ມີຄວາມຢຶດໝັ້ນດ້ວຍອາການ ໕ ແນວນີ້ (໔໕)

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ມີຄວາມຢຶດໝັ້ນດ້ວຍອາການ ໕ ຢ່າງ ເປັນແນວໃດ?

ຄື ທິດຖິຄືຄວາມຢຶດໝັ້ນຖືໝັ້ນວ່າ ຮູບຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ເປັນອາການທີ ໑ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ເວທະນາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັນຍາຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຯລຯ ສັງຂານຕ້ອງຕາຍເປັນ ທຳມະດາໃນໂລກນີ້ແນ່ນອນ ຯລຯ

ທິດຖິຄືຄວາມຍຶດໝັ້ນຖືໝັ້ນວ່າ ວິນຍານຕ້ອງຕາຍເປັນທຳມະດາໃນໂລກນີ້ແນ່ນອນ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ທິດຖິນັ້ນຖືເອົາບ່ອນສຸດເຊັ່ນນັ້ນ ຍ້ອນແນວນັ້ນ ຈຶ່ງຊື່ວ່າອັນຕັກຄາຫິກະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ເປັນອາການທີ ໕ ອັນຕັກຄາຫິກະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍບໍ່ແມ່ນ ບໍ່ເກີດອີກກໍບໍ່ແມ່ນ ມີຄວາມຍຶດໝັ້ນດ້ວຍອາການ ໕ ແນວນີ້ ອັນຕັກຄາຫິກະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໕໐ ເປັນແນວນີ້ (໕໐)

**ອັນຕັກຄາຫິກະທິດຖິນິດເທດທີ ໗ ຈົບ**

# ໘. ປຸບພັນຕານຸທິດຖິນິດເທດ

## ສະແດງປຸບພັນຕານຸທິດຖິ

[໑໔໑] ປຸບພັນຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ມີອັນໃດແດ່

| | | |
|---|---|---|
| ຄື | ສັດສະຕະວາທະ | (ລັດທິທີ່ຖືວ່າອັດຕາແລະໂລກທ່ຽງ) ມີ ໔ ລັດທິ |
| | ເອກັດຈະສັດສະຕິກະວາທະ | (ລັດທິທີ່ຖືວ່າບາງຢ່າງທ່ຽງ) ມີ ໔ ລັດທິ |
| | ອັນຕານັນຕິກະວາທະ | (ລັດທິທີ່ຖືວ່າໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ) ມີ ໔ ລັດທິ |
| | ອະມະຣາວິກເຂປິກະວາທະ | (ລັດທິທີ່ເວົ້າຫຼົບລ່ຽງບໍ່ແນ່ນອນຕາຍຕົວ) ມີ ໔ ລັດທິ |
| | ອະທິດຈະສະມຸບປັນນິກະວາທະ | (ລັດທິທີ່ຖືວ່າອັດຕາແລະໂລກເກີດຂຶ້ນເອງບໍ່ມີເຫດປັດໃຈ) ມີ ໒ ລັດທິ |

ປຸບພັນຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໘ ແນວນີ້

**ປຸບພັນຕານຸທິດຖິນິດເທດທີ ໘ ຈົບ**

# ໙. ອະປະຣັນຕານຸທິດຖິນິດເທດ

## ສະແດງອະປະຣັນຕານຸທິດຖິ

[໑໔໘] ອະປະຣັນຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໔ ຢ່າງ ມີອັນໃດແດ່

| | | |
|---|---|---|
| ຄື | ສັນຍີວາທະ | (ລັດທິທີ່ຖືວ່າຫຼັງຈາກຕາຍແລ້ວອັດຕາມີສັນຍາ) ມີ ໑໖ ລັດທິ |
| | ອະສັນຍີວາທະ | (ລັດທິທີ່ຖືວ່າຫຼັງຈາກຕາຍແລ້ວອັດຕາບໍ່ມີສັນຍາ) ມີ ໘ ລັດທິ |
| | ເນວະສັນຍີນາສັນຍີວາທະ | (ລັດທິທີ່ຖືວ່າຫຼັງຈາກຕາຍແລ້ວອັດຕາມີສັນຍາກໍບໍ່ແມ່ນ ບໍ່ມີສັນຍາກໍບໍ່ແມ່ນ) ມີ ໘ ລັດທິ |
| | ອຸດເສທະວາທະ | (ລັດທິທີ່ຖືວ່າຫຼັງຈາກຕາຍແລ້ວອັດຕາຂາດສູນ) ມີ ໗ ລັດທິ |
| | ທິດຖະທຳມະນິບພານວາທະ | (ລັດທິທີ່ຖືວ່າມີສະພາວະບາງຢ່າງເປັນນິບພານໃນປັດຈຸບັນ) ມີ ໕ ລັດທິ |

ອະປະຣັນຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໔ ແນວນີ້

**ອະປະຣັນຕານຸທິດຖິນິດເທດທີ ໙ ຈົບ**

# ໑໐-໑໘. ສັນໂຍຊະນິກາທິທິດຖິນິດເທດ

## ສະແດງສັນໂຍຊະນິກາທິທິດຖິ

[໑໔໑] ສັນໂຍຊະນິກາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ມີອັນໃດແດ່ ຄື

໑. ການຕົກຢູ່ໃນທິດຖິ                ໔. ຄວາມຮົກເຮື້ອ ຄື ທິດຖິ

ฯลฯ

໑໗. ຄວາມຍຶດໝັ້ນ ຄື ທິດຖິ         ໑໘. ຄວາມຖືໝັ້ນ ຄື ທິດຖິ

ສັນໂຍຊະນິກາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໘ ແນວນີ້

[໑໔໔] ມານະວິນິພັນທາທິດຖິວ່າ ເປັນເຮົາ ມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ເປັນແນວໃດ?

ຄື ຄວາມຍຶດໝັ້ນຖືໝັ້ນວ່າ ຈັກຂຸເປັນເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ເປັນເຮົາ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມານະວິນິພັນທາທິດຖິວ່າ ເປັນເຮົາ ເປັນອາການທີ ໑ ມານະວິນິພັນທາທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ຄວາມຍຶດໝັ້ນຖືໝັ້ນວ່າ ໂສຕະເປັນເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ເປັນເຮົາ ຯລຯ ຄວາມຍຶດໝັ້ນຖືໝັ້ນວ່າ ຄານະເປັນເຮົາ ຯລຯ ຊິວຫາເປັນເຮົາ ຯລຯ ກາຍເປັນເຮົາ ຯລຯ ມະໂນເປັນເຮົາ ຯລຯ ຮູບເປັນເຮົາ ຯລຯ ທຳມາຣົມເປັນເຮົາ ຯລຯ ຈັກຂຸວິນຍານເປັນເຮົາ ຯລຯ

ຄວາມຍຶດໝັ້ນຖືໝັ້ນວ່າ ມະໂນວິນຍານເປັນເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ເປັນເຮົາ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມານະວິນິພັນທາທິດຖິວ່າ ເປັນເຮົາ ເປັນອາການທີ ໑໘ ມານະວິນິພັນທາທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ມານະວິນິພັນທາທິດຖິວ່າ ເປັນເຮົາ ມີຄວາມຍຶດໝັ້ນດ້ວຍອາການ ໑໘ ແນວນີ້

[໑໔໕] ມານະວິນິພັນທາທິດຖິວ່າ ຂອງເຮົາມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ເປັນແນວໃດ?

ຄື ຄວາມຍຶດໝັ້ນຖືໝັ້ນວ່າ ຈັກຂຸຂອງເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ຂອງເຮົາທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມານະວິນິພັນທາທິດຖິວ່າຂອງເຮົາ ເປັນອາການທີ ໑ ມານະວິນິພັນທາທິດຖິເປັນມິດສາທິດຖິຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ຄວາມຍຶດໝັ້ນຖືໝັ້ນວ່າ ໂສຕະຂອງເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ຂອງເຮົາ ຯລຯ ຄວາມຍຶດໝັ້ນຖືໝັ້ນວ່າ ຄານະຂອງເຮົາ ຯລຯ ຊິວຫາຂອງເຮົາ ຯລຯ ມະໂນຂອງເຮົາ ຯລຯ ທຳມາຣົມຂອງເຮົາ ຯລຯ ຈັກຂຸວິນຍານຂອງເຮົາ ຯລຯ

ຄວາມຍຶດໝັ້ນຖືໝັ້ນວ່າ ມະໂນວິນຍານຂອງເຮົາ ຊື່ວ່າມານະວິນິພັນທາທິດຖິວ່າ ຂອງເຮົາ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ຯລຯ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນມານະວິນິພັນທາທິດຖິວ່າ ຂອງເຮົາເປັນອາການທີ ໑໘

ມານະວິນິພັນທາທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ມານະວິນິພັນທາທິດຖິວ່າ ຂອງເຮົາ ມີຄວາມຍຶດໝັ້ນດ້ວຍອາການ ໑໘ ແນວນີ້

**ສັນໂຍຊະນິກາທິທິດຖິນິດເທດທີ ໑໐-໑໔ ຈົບ**

# ໑໓. ອັດຕະວາທະປະຕິສັງຍຸດຕະທິດຖິນິດເທດ

## ສະແດງອັດຕະວາທະປະຕິສັງຍຸດຕະທິດຖິ

[໑໔໖] ອັດຕະວາທະປະຕິສັງຍຸດຕະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໐ ຢ່າງ ເປັນແນວໃດ?

ຄື ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການແນະນຳໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດ ບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການແນະນຳໃນທຳຂອງສັດຕະບຸຣຸດ ພິຈາລະນາເຫັນຮູບໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີຮູບແດ່ ພິຈາລະນາເຫັນຮູບໃນອັດຕາແດ່ ພິຈາລະນາເຫັນ ອັດຕາໃນຮູບແດ່ ຯລຯ ພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ພິຈາລະນາ ເຫັນວິນຍານໂດຍຄວາມເປັນອັດຕາແດ່ ພິຈາລະນາເຫັນອັດຕາມີວິນຍານແດ່ ພິຈາລະນາເຫັນວິນຍານໃນອັດຕາແດ່ ພິຈາລະ ນາເຫັນອັດຕາໃນວິນຍານແດ່

ປຸຖຸຊົນພິຈາລະນາເຫັນຮູບໂດຍຄວາມເປັນອັດຕາ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ພິຈາລະນາເຫັນປະຖະວີກະສິນ ຯລຯ ພິຈາລະນາເຫັນໂອທາຕະກະສິນໂດຍຄວາມເປັນອັດຕາ ຄື ພິຈາລະນາເຫັນໂອທາຕະກະສິນແລະອັດຕາບໍ່ເປັນສອງວ່າ ໂອທາຕະກະສິນອັນໃດ ເຮົາກໍອັນນັ້ນ ເຮົາອັນໃດ ໂອທາຕະກະສິນກໍອັນນັ້ນ ເມື່ອປະທີບນ້ຳມັນກຳລັງລຸກສະຫວ່າງແຈ້ງຢູ່ ບຸກຄົນພິຈາລະນາເຫັນແປວໄຟແລະແສງສະຫວ່າງບໍ່ເປັນສອງ ຯລຯ ສັນໃດ ບຸກຄົນບາງຄົນໃນໂລກນີ້ກໍສັນນັ້ນຄືກັນ ພິຈາລະນາເຫັນໂອທາຕະກະສິນໂດຍຄວາມເປັນອັດຕາ ຯລຯ ນີ້ເປັນອັດຕະວາທະປະຕິສັງຍຸດຕະທິດຖິມີຮູບເປັນວັດຖຸ ເປັນອາການທີ ໑ ອັດຕະວາທະ ປະຕິສັງຍຸດຕະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ ອັດຕະວາທະ ປະຕິສັງຍຸດຕະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໐ ແນວນີ້

**ອັດຕະວາທະປະຕິສັງຍຸດຕະທິດຖິນິດເທດທີ ໑໓ ຈົບ**

# ໑໔. ໂລກະວາທະປະຕິສັງຍຸດຕະທິດຖິນິດເທດ

## ສະແດງໂລກະວາທະປະຕິສັງຍຸດຕະທິດຖິ

[໑໔໗] ໂລກະວາທະປະຕິສັງຍຸດຕະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໘ ຢ່າງເປັນແນວໃດ?

ຄື ຄວາມຍຶດໝັ້ນຖືໝັ້ນວ່າ ອັດຕາແລະໂລກທ່ຽງ ຊື່ວ່າໂລກະວາທະປະຕິສັງຍຸດຕະ ທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະ

ວັດຖຸ ນີ້ເປັນໂລກະວາທະປະຕິສັງຍຸດຕະທິດຖິ ເປັນອາການທີ ໑ ໂລກະວາທະປະຕິສັງຍຸດຕະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ຄວາມຍຶດໝັ້ນຖືໝັ້ນວ່າ ອັດຕາແລະໂລກບໍ່ທ່ຽງ ຊື່ວ່າໂລກະວາທະປະຕິສັງຍຸດຕະທິດຖິ ຯລຯ ຄວາມຍຶດໝັ້ນຖືໝັ້ນວ່າ ອັດຕາແລະໂລກທ່ຽງກໍມີ ບໍ່ທ່ຽງກໍມີ ຯລຯ ອັດຕາແລະໂລກທ່ຽງກໍບໍ່ແມ່ນ ບໍ່ທ່ຽງກໍບໍ່ແມ່ນ ຯລຯ ອັດຕາແລະໂລກມີບ່ອນສຸດກໍມີ ຯລຯ ອັດຕາ ແລະໂລກບໍ່ມີບ່ອນສຸດກໍມີ ຯລຯ ອັດຕາແລະໂລກມີບ່ອນສຸດກໍມີບໍ່ມີບ່ອນສຸດກໍມີ ຯລຯ

ຄວາມຍຶດໝັ້ນຖືໝັ້ນວ່າ ອັດຕາແລະໂລກມີບ່ອນສຸດກໍບໍ່ແມ່ນ ບໍ່ມີບ່ອນສຸດກໍບໍ່ແມ່ນ ຊື່ວ່າໂລກະວາທະປະຕິສັງຍຸດຕະທິດຖິ ທິດຖິບໍ່ແມ່ນວັດຖຸ ວັດຖຸກໍບໍ່ແມ່ນທິດຖິ ທິດຖິເປັນແນວໜຶ່ງ ວັດຖຸກໍເປັນແນວໜຶ່ງ ທິດຖິແລະວັດຖຸນີ້ເປັນໂລກະວາທະປະຕິສັງຍຸດຕະທິດຖິ ເປັນອາການທີ ໘ ໂລກະວາທະປະຕິສັງຍຸດຕະທິດຖິເປັນມິດສາທິດຖິ ຯລຯ ເຫຼົ່ານີ້ເປັນສັງໂຍດ ແຕ່ບໍ່ເປັນທິດຖິ

ໂລກະວາທະປະຕິສັງຍຸດຕະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໘ ແນວນີ້

**ໂລກະວາທະປະຕິສັງຍຸດຕະທິດຖິນິດເທດທີ ໑໔ ຈົບ**

# ໑໕ ໑໖. ພະວະວິພະວະທິດຖິນິດເທດ

## ສະແດງພະວະວິພະວະທິດຖິ

[໑໔໘] ຄວາມຍຶດໝັ້ນດ້ວຍການຕິດຢູ່ ເປັນພະວະທິດຖິ ຄວາມຍຶດໝັ້ນດ້ວຍການແລ່ນເລີຍໄປ ເປັນວິພະວະທິດຖິ

ອັດສາທະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໕ ຢ່າງ ເປັນພະວະທິດຖິເທົ່າໃດ ເປັນວິພະວະທິດຖິເທົ່າໃດ?

ອັດຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໐ ຢ່າງ ເປັນພະວະທິດຖິເທົ່າໃດ ເປັນວິພະວະທິດຖິເທົ່າໃດ ຯລຯ

ໂລກະວາທະປະຕິສັງຍຸດຕະທິດຖິ ມີຄວາມຍຶດໝັ້ນດ້ວຍອາການ ໘ ຢ່າງ ເປັນພະວະທິດຖິເທົ່າໃດ ເປັນວິພະວະທິດຖິເທົ່າໃດ?

ຄື ອັດສາທະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໒໕ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ອັດຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໐ ຢ່າງ ເປັນພະວະທິດຖິ ໑໕ ເປັນວິພະວະທິດຖິ ໕

ມິດສາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໐ ຢ່າງ ເປັນວິພະວະທິດຖິທັງໝົດ

ສັກກາຍະທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໐ ຢ່າງ ເປັນພະວະທິດຖິ ໑໕ ເປັນວິພະວະທິດຖິ ໕

ສັດສະຕະທິດຖິທີ່ມີສັກກາຍະເປັນວັດຖຸມີຄວາມຍຶດໝັ້ນດ້ວຍອາການ ໑໕ ຢ່າງ ເປັນພະວະທິດຖິທັງໝົດ

ອຸດເສທະທິດຖິທີ່ມີສັກກາຍະເປັນວັດຖຸມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນວິພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ໂລກທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ໂລກບໍ່ທ່ຽງ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນວິພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ໂລກມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ອັນຕັກຄາຫິກະທິດຖິວ່າ ໂລກບໍ່ມີບ່ອນສຸດ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນແນວດຽວກັນ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນວິພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ມີຄວາມຍຶດໝັ້ນ ດ້ວຍອາການ ໕ ຢ່າງ ເປັນພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກ ມີຄວາມຍຶດໝັ້ນ ດ້ວຍອາການ ໕ ຢ່າງ ເປັນພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດບໍ່ເກີດອີກ ມີຄວາມຍຶດໝັ້ນ ດ້ວຍອາການ ໕ ຢ່າງ ເປັນວິພະວະທິດຖິທັງໝົດ

ອັນຕັກຄາຫິກະທິດຖິວ່າ ຫຼັງຈາກຕາຍແລ້ວຕະຖາຄົດເກີດອີກກໍມີ ບໍ່ເກີດອີກກໍມີ ມີຄວາມຍຶດໝັ້ນດ້ວຍອາການ ໕ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ອະປະຣັນຕານຸທິດຖິມີຄວາມຍຶດໝັ້ນດ້ວຍອາການ ໔໔ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ສັນໂຍຊະນິກາທິດຖິມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ມານະວິນິພັນທາທິດຖິວ່າ ເປັນເຮົາ ມີຄວາມຍຶດໝັ້ນດ້ວຍອາການ ໑໘ ຢ່າງ ເປັນວິພະວະທິດຖິທັງໝົດ

ມານະວິນິພັນທາທິດຖິວ່າ ຂອງເຮົາ ມີຄວາມຢຶດໝັ້ນດ້ວຍອາການ ໑໘ ຢ່າງ ເປັນພະວະທິດຖິທັງໝົດ

ອັດຕະວາທະປະຕິສັງຍຸດຕະທິດຖິມີຄວາມຢຶດໝັ້ນດ້ວຍອາການ ໔໐ ຢ່າງ ເປັນພະວະທິດຖິ ໑໕ ເປັນວິພະວະທິດຖິ ໕

ໂລກະວາທະປະຕິສັງຍຸດຕະທິດຖິມີຄວາມຢຶດໝັ້ນດ້ວຍອາການ ໘ ຢ່າງ ເປັນພະວະທິດຖິກໍມີ ເປັນວິພະວະທິດຖິກໍມີ

ທິດຖິທັງໝົດ ເປັນອັດຕານຸທິດຖິ ເປັນມິດສາທິດຖິ ເປັນສັກກາຍະທິດຖິ ເປັນອັນຕັກຄາຫິກະທິດຖິ ເປັນສັນໂຍຊະນິກາທິດຖິ ເປັນອັດຕະວາທະປະຕິສັງຍຸດຕະທິດຖິ

ຊົນເຫຼົ່າໃດກ່າວໂດຍການຄາດຄະເນ
ຢຶດຖືທິດຖິທັງ ໒ ຄື ພະວະທິດຖິແລະວິພະວະທິດຖິ
ຍານໃນນິໂຣດຍ່ອມບໍ່ມີແກ່ຊົນເຫຼົ່ານັ້ນ
ສັດໂລກນີ້ພ້ອມທັງເທວະໂລກ
ມີສັນຍາວິປະຣິດວ່າເປັນທຸກໃນນິໂຣດທີ່ເປັນສຸກໃດ
ໃນນິໂຣດນັ້ນບໍ່ມີຍານ ຍ້ອນມີສັນຍາວິປະຣິດ
ວ່າເປັນທຸກ ດັ່ງນີ້

[໑໔໙] ພິກຂຸທັງຫຼາຍ ເທວະດາແລະມະນຸດຜູ້ຖືກທິດຖິ ໒ ແນວນີ້ກຸ້ມຣຸມແລ້ວ ພວກໜຶ່ງຕິດຢູ່ ພວກໜຶ່ງແລ່ນເລີຍໄປ ສ່ວນຜູ້ມີຈັກຂຸຍ່ອມເຫັນ

ເທວະດາແລະມະນຸດພວກໜຶ່ງຕິດຢູ່ ເປັນແນວໃດ?

ຄື ເທວະດາແລະມະນຸດຜູ້ມັກພົບ ຍິນດີໃນພົບ ບັນເທີງຢູ່ໃນພົບ ຈິດຂອງເທວະດາແລະມະນຸດເຫຼົ່ານັ້ນຍ່ອມແລ່ນເລີຍໄປ ບໍ່ເຫຼື້ອມໃສ ບໍ່ຕັ້ງຢູ່ ບໍ່ນ້ອມໄປໃນທຳທີ່ເຮົາສະແດງ ເພື່ອຄວາມດັບພົບ ພິກຂຸທັງຫຼາຍ ເທວະດາແລະມະນຸດພວກໜຶ່ງຕິດຢູ່ແນວນີ້

ເທວະດາແລະມະນຸດພວກໜຶ່ງແລ່ນເລີຍໄປ ເປັນແນວໃດ?

ຄື ເທວະດາແລະມະນຸດພວກໜຶ່ງ ອຶດອັດ ຣະອາ ຣັງກຽດພົບ ຍິນດີປາຖະໜາວິພົບວ່າ ຊາວເຮົາເອີຍ ໄດ້ຍິນວ່າ ເມື່ອໃດ ອັດຕາຫຼັງຈາກຕາຍແລ້ວຍ່ອມຂາດສູນ ພິນາດໄປ ເມື່ອນັ້ນ ອັດຕາຫຼັງຈາກຕາຍແລ້ວຍ່ອມບໍ່ເກີດອີກ ຍ້ອນແນວນັ້ນ ຄວາມບໍ່ເກີດອີກນີ້ລະອຽດ ປະນີດຕາມທີ່ມີ ພິກຂຸທັງຫຼາຍ ເທວະດາແລະມະນຸດພວກໜຶ່ງແລ່ນເລີຍໄປເປັນແນວນີ້

ສ່ວນຜູ້ມີຈັກຂຸຍ່ອມເຫັນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ່ອມເຫັນພູຕະໂດຍຄວາມເປັນພູຕະ ເມື່ອແລ້ວຍ່ອມປະຕິບັດເພື່ອຄວາມເບື່ອໜ່າຍ ເພື່ອຄາຍກຳໜັດ ເພື່ອດັບພູຕະ ພິກຂຸທັງຫຼາຍ ຜູ້ມີຈັກຂຸຍ່ອມເຫັນແນວນີ້

ຖ້າພິກຂຸໃດເຫັນພູຕະໂດຍຄວາມເປັນພູຕະ
ແລະກ້າວລ່ວງພູຕະໄດ້ແລ້ວ
ຍ່ອມນ້ອມໄປໃນທຳຕາມຄວາມເປັນຈິງ
ຍ້ອນຄວາມໝົດສິ້ນແຫ່ງພະວະຕັນຫາ
ພິກຂຸນັ້ນກຳນົດຮູ້ພູຕະໄດ້ແລ້ວ
ປາສະຈາກຕັນຫາໃນພົບນ້ອຍພົບໃຫຍ່
ຍ່ອມບໍ່ມາສູ່ພົບໃໝ່ ຍ້ອນບໍ່ມີພູຕະ ດັ່ງນີ້

[໑໕໐] ບຸກຄົນ ໓ ຈຳພວກມີທິດຖິວິບັດ ບຸກຄົນ ໓ ຈຳພວກມີທິດຖິສົມບັດ
ບຸກຄົນຜູ້ມີທິດຖິວິບັດ ໓ ຈຳພວກ ເປັນແນວໃດ?ແດ່ ຄື

໑. ເດຍຣະຖີ
໒. ສາວົກຂອງເດຍຣະຖີ
໓. ບຸກຄົນຜູ້ເປັນມິດສາທິດຖິ

ບຸກຄົນ ໓ ຈຳພວກນີ້ມີທິດຖິວິບັດ
ບຸກຄົນຜູ້ມີທິດຖິສົມບັດ ໓ ຈຳພວກ ເປັນແນວໃດ?ແດ່ ຄື

໑. ພຣະຕະຖາຄົດ
໒. ສາວົກຂອງພຣະຕະຖາຄົດ
໓. ບຸກຄົນຜູ້ເປັນສຳມາທິດຖິ

ບຸກຄົນຜູ້ມີທິດຖິສົມບັດ ໓ ຈຳພວກນີ້

ນໍຣະຊົນໃດເປັນຄົນມັກໂກດ
ຜູກໂກດ ມີຄວາມລົບຫຼູ່ອັນຊົ່ວຮ້າຍ
ມີທິດຖິວິບັດ ເຈົ້າເລ້
ເພິ່ງຮູ້ຈັກນໍຣະຊົນນັ້ນວ່າ ເປັນຄົນຊົ່ວ
ນໍຣະຊົນໃດບໍ່ເປັນຄົນມັກໂກດ
ບໍ່ຜູກໂກດ ບໍ່ລົບຫຼູ່ຄຸນທ່ານ
ເຖິງຄວາມເປັນຜູ້ບໍລິສຸດ ມີທິດຖິສົມບັດ ມີປັນຍາ
ເພິ່ງຮູ້ຈັກນໍຣະຊົນນັ້ນວ່າ ເປັນຜູ້ປະເສີດ ດັ່ງນີ້

ທິດຖິວິບັດ ໓ ປະການ ທິດຖິສົມບັດ ໓ ປະການ

ທິດຖິວິບັດ ໓ ປະການ ມີອັນໃດແດ່ ຄື

໑. ທິດຖິວິບັດວ່າ ນັ້ນຂອງເຮົາ
໒. ທິດຖິວິບັດວ່າ ເຮົາເປັນນັ້ນ
໓. ທິດຖິວິບັດວ່າ ນັ້ນເປັນອັດຕາຂອງເຮົາ

ທິດຖິວິບັດ ໓ ປະການນີ້
ທິດຖິສົມບັດ ໓ ປະການ ມີອັນໃດແດ່ ຄື

໑. ທິດຖິສົມບັດວ່າ ນັ້ນບໍ່ແມ່ນຂອງເຮົາ
໒. ທິດຖິສົມບັດວ່າ ເຮົາບໍ່ເປັນນັ້ນ
໓. ທິດຖິສົມບັດວ່າ ນັ້ນບໍ່ແມ່ນອັດຕາຂອງເຮົາ

ທິດຖິສົມບັດ ໓ ປະການນີ້

ການຖືວ່າ ນັ້ນຂອງເຮົາ ເປັນທິດຖິອັນໃດ ເປັນທິດຖິເທົ່າໃດ ທິດຖິເຫຼົ່ານັ້ນຕາມຖືສ່ວນສຸດອັນໃດ

ການຖືວ່າ ເຮົາເປັນນັ້ນ ເປັນທິດຖິອັນໃດ ເປັນທິດຖິເທົ່າໃດ ທິດຖິເຫຼົ່ານັ້ນຕາມຖືສ່ວນສຸດອັນໃດ

ການຖືວ່າ ນັ້ນເປັນອັດຕາຂອງເຮົາ ເປັນທິດຖິອັນໃດ ເປັນທິດຖິເທົ່າໃດ ທິດຖິເຫຼົ່ານັ້ນຕາມຖືສ່ວນສຸດອັນໃດ

ການຖືວ່າ ນັ້ນຂອງເຮົາ ເປັນປຸບພັນຕານຸທິດຖິ ເປັນທິດຖິ ໑໘ ທິດຖິເຫຼົ່ານັ້ນຕາມຖື ຂັ້ນສ່ວນອະດີດ

ການຖືວ່າ ເຮົາເປັນນັ້ນ ເປັນອະປະຣັນຕານຸທິດຖິ ເປັນທິດຖິ ໔໔ ທິດຖິເຫຼົ່ານັ້ນຕາມຖືຂັ້ນສ່ວນອະນາຄົດ

ການຖືວ່າ ນັ້ນເປັນອັດຕາຂອງເຮົາ ເປັນອັດຕານຸທິດຖິມີວັດຖຸ ໒໐ ເປັນສັກກາຍະທິດຖິມີວັດຖຸ ໒໐ ທິດຖິ ໖໒ ມີສັກກາຍະທິດຖິເປັນປະທານ ທິດຖິເຫຼົ່ານັ້ນຕາມຖືຂັ້ນ ສ່ວນອະດີດແລະສ່ວນອະນາຄົດ

[໑໕໑] ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເປັນຜູ້ມີຄວາມເຊື່ອໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນຜູ້ເຖິງພ້ອມດ້ວຍທິດຖິ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເຫຼົ່ານັ້ນ ໕ ຈໍາພວກສໍາເລັດໃນໂລກນີ້ ໕ ຈໍາພວກລະໂລກນີ້ແລ້ວຈຶ່ງສໍາເລັດ

ບຸກຄົນ ໕ ຈໍາພວກໃດສໍາເລັດໃນໂລກນີ້ ຄື

໑. ສັດຕັກຂັດຕຸປະຣະມະໂສດາບັນ
໒. ໂກລັງໂກລະໂສດາບັນ
໓. ເອກະພິຊີໂສດາບັນ
໔. ພຣະສະກະທາຄາມີ
໕. ພຣະອະຣະຫັນໃນປັດຈຸບັນ

ບຸກຄົນ ໕ ຈຳພວກນີ້ສຳເລັດໃນໂລກນີ້
ບຸກຄົນ ໕ ຈຳພວກໃດລະໂລກນີ້ແລ້ວຈຶ່ງສຳເລັດ ຄື

໑. ອັນຕະຣາປະຣິນິບພາຍີອະນາຄາມີບຸກຄົນ
໒. ອຸປະຫັດຈະປະຣິນິບພາຍີອະນາຄາມີບຸກຄົນ
໓. ອະສັງຂາຣະປະຣິນິບພາຍີອະນາຄາມີບຸກຄົນ
໔. ສະສັງຂາຣະປະຣິນິບພາຍີອະນາຄາມີບຸກຄົນ
໕. ອຸດທັງໂສໂຕອະກະນິດຖະຄາມີອະນາຄາມີບຸກຄົນ

ບຸກຄົນ ໕ ຈຳພວກນີ້ລະໂລກນີ້ແລ້ວຈຶ່ງສຳເລັດ

ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເປັນຜູ້ມີຄວາມເຊື່ອໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນຜູ້ເຖິງພ້ອມດ້ວຍທິດຖິ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິເຫຼົ່ານັ້ນ ໕ ຈຳພວກນີ້ ສຳເລັດໃນໂລກນີ້ ໕ ຈຳພວກນີ້ລະໂລກນີ້ແລ້ວຈຶ່ງສຳເລັດ

ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ເປັນຜູ້ມີຄວາມເຫຼື້ອມໃສບໍ່ຄອນແຄນໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນພຣະໂສດາບັນ ພຣະໂສດາບັນເຫຼົ່ານັ້ນ ໕ ຈຳພວກ ສຳເລັດໃນໂລກນີ້ ໕ ຈຳພວກລະໂລກນີ້ແລ້ວຈຶ່ງສຳເລັດ

ບຸກຄົນ ໕ ຈຳພວກໃດສຳເລັດໃນໂລກນີ້ ຄື

໑. ສັດຕັກຂັດຕຸປະຣະມະໂສດາບັນ
໒. ໂກລັງໂກລະໂສດາບັນ
໓. ເອກະພິຊີໂສດາບັນ
໔. ພຣະສະກະທາຄາມີ
໕. ພຣະອະຣະຫັນໃນປັດຈຸບັນ

ບຸກຄົນ ໕ ຈຳພວກນີ້ສຳເລັດໃນໂລກນີ້
ບຸກຄົນ ໕ ຈຳພວກໃດລະໂລກນີ້ແລ້ວຈຶ່ງສຳເລັດ ຄື

໑. ອັນຕະຣາປະຣິນິບພາຍີອະນາຄາມີບຸກຄົນ

໔. ອຸປະທັດຈະປະຣິນິບພາຍີອະນາຄາມີບຸກຄົນ
໖. ອະສັງຂາຣະປະຣິນິບພາຍີອະນາຄາມີບຸກຄົນ
໔. ສະສັງຂາຣິປະຣິນິບພາຍີອະນາຄາມີບຸກຄົນ
໕. ອຸດທັງໂສໂຕອະກະນິດຖະຄາມີອະນາຄາມີບຸກຄົນ

ບຸກຄົນ ໕ ຈຳພວກນີ້ລະໂລກນີ້ແລ້ວຈຶ່ງສຳເລັດ

ພິກຂຸທັງຫຼາຍ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເປັນຜູ້ມີຄວາມເຫຼື້ອມໃສບໍ່ຄອນແຄນໃນເຮົາ ບຸກຄົນເຫຼົ່ານັ້ນທັງໝົດເປັນພຣະໂສດາບັນ ພຣະໂສດາບັນເຫຼົ່ານັ້ນ ໕ ຈຳພວກນີ້ ສຳເລັດໃນໂລກນີ້ ໕ ຈຳພວກນີ້ລະໂລກນີ້ແລ້ວຈຶ່ງສຳເລັດ

**ພະວະວິພະວະທິດຖິນິດເທດທີ ໑໕-໑໖ ຈົບ**

**ທິດຖິກະຖາ ຈົບ**

# ໒. ອານາປານັດສະຕິກະຖາ

## ວ່າດ້ວຍສະຕິກຳນົດລົມຫັນໃຈເຂົ້າລົມຫັນໃຈອອກ

## ໑. ຄະນະນະວາຣະ

## ວາຣະວ່າດ້ວຍການນັບ

[໑໕໔] ເມື່ອພຣະໂຍຄາວະຈອນຈະເລີນສະມາທິທີ່ປະກອບດ້ວຍອານາປານະສະຕິອັນມີວັດຖຸ ໑໖ ຍານເກີນກວ່າ ໔໐໐ ຍ່ອມເກີດຂຶ້ນ (ຄື) ຍານໃນທຳທີ່ເປັນອັນຕະລາຍ ໗ ຍານໃນທຳທີ່ເປັນອຸປະກາຣະ ໗ ຍານໃນອຸປະກິເລດ ໑໗ ຍານໃນໂວທະນະ ໑໓ ຍານໃນການເຮັດສະຕິ ໓໔ ຍານດ້ວຍອຳນາດສະມາທິ ໔໔ ຍານດ້ວຍອຳນາດວິປັດສະນາ ໗໔ ນິບພິທາຍານ ໗ ນິບພິທານຸໂລມະຍານ ໗ ນິບພິທາປະຕິປັດສັດທິຍານ ໗ ຍານໃນວິມຸດຕິສຸກ ໔໑

ຍານໃນທຳທີ່ເປັນອັນຕະລາຍ ໗ ແລະຍານໃນທຳທີ່ເປັນອຸປະກາຣະ ໗ ເປັນແນວໃດ? ຄື

ກາມສັນທະ ເປັນອັນຕະລາຍຕໍ່ສະມາທິ ເນກຂຳມະ ເປັນອຸປະກາຣະແກ່ສະມາທິ ພະຍາບາດ ເປັນອັນຕະລາຍຕໍ່ສະມາທິ

ອະພະຍາບາດ ເປັນອຸປະກາຣະແກ່ສະມາທິ ຖີນະມິດທະເປັນອັນຕະລາຍຕໍ່ສະມາທິອາໂລກະສັນຍາ ເປັນອຸປະກາຣະແກ່ສະມາທິ

ອຸດທັດຈະ ເປັນອັນຕະລາຍຕໍ່ສະມາທິ ອະວິກເຂປະ ເປັນອຸປະກາຣະແກ່ສະມາທິ
ວິຈິກິດສາ ເປັນອັນຕະລາຍຕໍ່ສະມາທິ ທຳມະວະວັດຖານ ເປັນອຸປະກາຣະແກ່ສະມາທິ
ອະວິດຊາ ເປັນອັນຕະລາຍຕໍ່ສະມາທິ ຍານ ເປັນອຸປະກາຣະແກ່ສະມາທິ
ອະຣະຕິ ເປັນອັນຕະລາຍຕໍ່ສະມາທິ ປາມຸດຊະ ເປັນອຸປະກາຣະແກ່ສະມາທິ
ອະກຸສົນທຳທັງປວງເປັນອັນຕະລາຍຕໍ່ສະມາທິ ກຸສົນທຳທັງປວງເປັນອຸປະກາຣະແກ່ສະມາທິ

ຍານໃນທຳທີ່ເປັນອັນຕະລາຍ ໘ ແລະຍານໃນທຳທີ່ເປັນອຸປະກາຣະ ໘ ເປັນແນວນີ້

**ຄະນະນະວາຣະທີ ໑ ຈົບ**

# ໔. ໂສລະສະຍານະນິດເທດ

## ສະແດງຍານ ໑໖

[໑໘໓] ຈິດທີ່ຟຸ້ງຊ່ານແລະຈິດທີ່ສະງົບ ຍ່ອມດຳຣົງຢູ່ໃນທຳທີ່ມີສະພາວະດຽວ ແລະຍ່ອມມົດຈົດຈາກນິວອນດ້ວຍອາການ ໑໖ ແນວນີ້

ທຳທີ່ມີສະພາວະດຽວເຫຼົ່ານັ້ນ ມີອັນໃດແດ່ ຄື

| | | |
|---|---|---|
| ໑. ເນກຂຳມະ | (ການຫຼີກອອກຈາກກາມ) | ເປັນສະພາວະດຽວ |
| ໒. ອະພະຍາບາດ | (ຄວາມບໍ່ຄິດຮ້າຍ) | ເປັນສະພາວະດຽວ |
| ໓. ອາໂລກະສັນຍາ | (ຄວາມໝາຍຮູ້ແສງສະຫວ່າງ) | ເປັນສະພາວະດຽວ |
| ໔. ອະວິກເຂປະ | (ຄວາມບໍ່ຟຸ້ງຊ່ານ) | ເປັນສະພາວະດຽວ |
| ໕. ທຳມະວະວັດຖານ | (ການກຳນົດທຳ) | ເປັນສະພາວະດຽວ |
| ໖. ຍານ | (ຄວາມຮູ້) | ເປັນສະພາວະດຽວ |
| ໗. ປາມຸດຊະ | (ຄວາມປາໂມດ) | ເປັນສະພາວະດຽວ |

໘. ກຸສົນທຳທັງປວງ ເປັນສະພາວະດຽວ

ບົດວ່າ ນິວອນ ອະທິບາຍວ່າ ນິວອນເຫຼົ່ານັ້ນ ມີອັນໃດແດ່ ຄື

| | | |
|---|---|---|
| ໑. ກາມສັນທະ | (ຄວາມພໍໃຈໃນກາມ) | ເປັນນິວອນ |
| ໒. ພະຍາບາດ | (ຄວາມຄິດຮ້າຍ) | ເປັນນິວອນ |
| ໓. ຖີນະມິດທະ | (ຄວາມທໍດຫູ່ແລະເຊື່ອງຊຶມ) | ເປັນນິວອນ |
| ໔. ອຸດທັດຈະກຸກກຸດຈະ | (ຄວາມຟຸ້ງຊ່ານແລະຮ້ອນໃຈ) | ເປັນນິວອນ |

໕. ວິຈິກິດສາ (ຄວາມລັງເລສົງໄສ) ເປັນນິວອນ
໖. ອະວິດຊາ (ຄວາມບໍ່ຮູ້ແຈ້ງ) ເປັນນິວອນ
໗. ອະຣະຕິ (ຄວາມບໍ່ຍິນດີ) ເປັນນິວອນ
໘. ອະກຸສົນທຳທັງປວງ ເປັນນິວອນ

ບົດວ່າ ນິວອນ ອະທິບາຍວ່າ ຊື່ວ່ານິວອນ ຍ້ອນມີຄວາມໝາຍວ່າເປັນແນວໃດ?
ຄື ຊື່ວ່ານິວອນ ຍ້ອນມີຄວາມໝາຍວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ທຳເຄື່ອງນຳອອກເຫຼົ່ານັ້ນ ເປັນແນວໃດ?
ຄື ເນກຂຳມະ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກ ດ້ວຍເນກຂຳມະນັ້ນ ກາມສັນທະ ເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກ ເນກຂຳມະທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກກາມສັນທະນັ້ນກັ້ນໄວ້ ຍ້ອນເຫດນັ້ນ ກາມສັນທະຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ອະພະຍາບາດ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກ ດ້ວຍ ອະພະຍາບາດນັ້ນ ພະຍາບາດ ເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກ ອະພະຍາບາດທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກພະຍາບາດນັ້ນກັ້ນໄວ້ ຍ້ອນເຫດນັ້ນ ພະຍາບາດຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ອາໂລກະສັນຍາ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກ ດ້ວຍອາໂລກະສັນຍານັ້ນ ຖີນະມິດທະ ເປັນເຄື່ອງກັ້ນທຳເຄື່ອງນຳອອກແລະບຸກຄົນຍ່ອມ ບໍ່ຮູ້ ຈັກອາໂລກະສັນຍາທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກຖີນະມິດທະ ນັ້ນ ກັ້ນໄວ້ ຍ້ອນເຫດນັ້ນ ຖີນະມິດທະຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ອະວິກເຂປະ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກ ດ້ວຍອະວິກເຂປະນັ້ນ ອຸດທັດຈະ ເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກ ອະ ວິກເຂປະທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກອຸດທັດຈະນັ້ນກັ້ນໄວ້ ຍ້ອນ ເຫດນັ້ນ ອຸດທັດຈະຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ທຳມະວະວັດຖານ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມ ອອກ ດ້ວຍທຳມະວະວັດຖານນັ້ນ ວິຈິກິດສາ ເປັນເຄື່ອງກັ້ນທຳເຄື່ອງນຳອອກແລະບຸກຄົນຍ່ອມ ບໍ່ຮູ້ຈັກທຳມະວະວັດຖານທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກວິຈິກິດສາ ນັ້ນກັ້ນໄວ້ ຍ້ອນເຫດນັ້ນ ວິຈິກິດສາຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ຍານ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກດ້ວຍ ຍານນັ້ນ ອະວິດຊາເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກຍານທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກອະວິດຊານັ້ນກັ້ນໄວ້ ຍ້ອນເຫດນັ້ນ ອະວິດຊາຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ປາມຸດຊະ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກດ້ວຍປາມຸດຊະນັ້ນ ອະຣະຕິ ເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກປາມຸດຊະທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກອະຣະຕິນັ້ນກັ້ນໄວ້ ຍ້ອນເຫດນັ້ນ ອະຣະຕິຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ກຸສົນທຳແມ່ນທັງປວງ ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ແລະພຣະອະຣິຍະຍ່ອມອອກດ້ວຍກຸສົນທຳເຫຼົ່ານັ້ນ ອະກຸສົນທຳແມ່ນທັງປວງ ເປັນເຄື່ອງກັ້ນທຳເຄື່ອງນຳອອກ ແລະບຸກຄົນຍ່ອມບໍ່ຮູ້ຈັກກຸສົນທຳທີ່ເປັນທຳເຄື່ອງນຳອອກຂອງພຣະອະຣິຍະ ຍ້ອນເປັນຜູ້ຖືກອະກຸສົນທຳເຫຼົ່ານັ້ນກັ້ນໄວ້ ຍ້ອນເຫດນັ້ນ ອະກຸສົນທຳແມ່ນທັງປວງຈຶ່ງຊື່ວ່າເປັນເຄື່ອງກັ້ນທຳເຄື່ອງນຳອອກ

ເມື່ອພຣະໂຍຄາວະຈອນຜູ້ມີຈິດບໍລິສຸດຈາກນີວອນເຫຼົ່ານີ້ ຈະເລີນສະມາທິທີ່ປະກອບດ້ວຍອານາປານະສະຕິອັນມີວັດຖຸ ໑໖ ຄວາມທີ່ຈິດຕັ້ງໝັ້ນເປັນໄປພຽງຊົ່ວຂະນະຍ່ອມມີໄດ້

**ໂສລະສະຍານະນິດເທດທີ ໔ ຈົບ**

# ໕. ອຸປະກິເລດຍານະນິດເທດ

## ສະແດງຍານໃນອຸປະກິເລດ

## ປະຖົມສັກກະ

### ໝວດທີ່ກາ ທີ ໑

[໑໕໔] ອຸປະກິເລດ ໑໘ ເຫຼົ່າໃດຍ່ອມເກີດຂຶ້ນ

ຄື ເມື່ອພຣະໂຍຄາວະຈອນໃຊ້ສະຕິໄປຕາມລົມຫັນໃຈເຂົ້າທີ່ຖານເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດ ຈິດທີ່ເຖິງຄວາມຟຸ້ງຊ່ານໃນພາຍໃນ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນໃຊ້ສະຕິໄປຕາມລົມຫັນໃຈອອກທີ່ຖານເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດ ຈິດທີ່ເຖິງຄວາມຟຸ້ງຊ່ານໃນພາຍນອກ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ຄວາມເປັນໄປແຫ່ງຕັນຫາ ຄື ຄວາມຕິດໃຈຫວັງລົມຫັນໃຈເຂົ້າ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ຄວາມເປັນໄປແຫ່ງຕັນຫາຄືຄວາມຕິດໃຈຫວັງລົມຫັນໃຈອອກ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ຄວາມຫຼົງໃນການໄດ້ລົມຫັນໃຈອອກຂອງພຣະໂຍຄາວະຈອນຜູ້ຖືກລົມຫັນໃຈເຂົ້າຄອບງຳ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ຄວາມຫຼົງໃນການໄດ້ລົມຫັນໃຈເຂົ້າຂອງພຣະໂຍຄາວະຈອນຜູ້ຖືກລົມຫັນໃຈອອກຄອບງຳ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ສະຕິໄປຕາມລົມຫັນໃຈເຂົ້າ ໑
ສະຕິໄປຕາມລົມຫັນໃຈອອກ ໑
ຄວາມຫວັງ (ລົມຫັນໃຈເຂົ້າ) ທີ່ຟຸ້ງຊ່ານພາຍໃນ ໑
ຄວາມຫວັງ (ລົມຫັນໃຈອອກ) ທີ່ຟຸ້ງຊ່ານພາຍນອກ ໑
(ຄວາມຫຼົງໃນການໄດ້ລົມຫັນໃຈອອກ
ຂອງພຣະໂຍຄາວະຈອນຜູ້ຖືກລົມຫັນໃຈເຂົ້າຄອບງຳ ໑
ຄວາມຫຼົງໃນການໄດ້ລົມຫັນໃຈເຂົ້າ
ຂອງພຣະໂຍຄາວະຈອນຜູ້ຖືກລົມຫັນໃຈອອກຄອບງຳ ໑)

ອຸປະກິເລດ ໖ ປະການນີ້ເປັນອັນຕະລາຍ
ຕໍ່ສະມາທິທີ່ປະກອບດ້ວຍອານາປານະສະຕິ
ແລະເປັນເຫດໃຫ້ຈິດຂອງພຣະໂຍຄາວະຈອນ
ຜູ້ຫວັ່ນໄຫວບໍ່ລຸດພົ້ນ
ພຣະໂຍຄາວະຈອນທັງຫຼາຍຍັງບໍ່ເຂົ້າໃຈວິໂມກ
ຈຶ່ງສົມຄວນເຊື່ອບຸກຄົນອື່ນ ແນວນີ້ແລ

## ທຸຕິຍະສັກກະ

### ໝວດທີ່ກ ທີ ໔

[໑໕໔] ເມື່ອພຣະໂຍຄາວະຈອນຄຳນຶງເຖິງນິມິດ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້າ ນີ້ເປັນອັນຕະລາຍຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນຄຳນຶງເຖິງລົມຫັນໃຈເຂົ້າ ຈິດກວັດແກວ່ງຢູ່ທີ່ນິມິດ ນີ້ເປັນອັນຕະລາຍຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນຄຳນຶງເຖິງນິມິດ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກ ນີ້ເປັນອັນຕະລາຍຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນຄຳນຶງເຖິງລົມຫັນໃຈອອກ ຈິດກວັດແກວ່ງຢູ່ທີ່ນິມິດ ນີ້ເປັນອັນຕະລາຍ ຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນຄຳນຶງເຖິງລົມຫັນໃຈເຂົ້າ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກນີ້ເປັນ ອັນຕະລາຍຕໍ່ສະມາທິ

ເມື່ອພຣະໂຍຄາວະຈອນຄຳນຶງເຖິງລົມຫັນໃຈອອກ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້ານີ້ເປັນອັນຕະລາຍຕໍ່ສະມາທິ

ເມື່ອຄຳນຶງເຖິງນິມິດ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້າ
ເມື່ອຄຳນຶງເຖິງລົມຫັນໃຈເຂົ້າ ຈິດກວັດແກວ່ງຢູ່ທີ່ນິມິດ
ເມື່ອຄຳນຶງເຖິງນິມິດ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກ
ເມື່ອຄຳນຶງເຖິງລົມຫັນໃຈອອກ ຈິດກວັດແກວ່ງຢູ່ທີ່ນິມິດ
ເມື່ອຄຳນຶງເຖິງລົມຫັນໃຈເຂົ້າ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກ
ເມື່ອຄຳນຶງເຖິງລົມຫັນໃຈອອກ ຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້າ

ອຸປະກິເລດ ໖ ປະການນີ້ ເປັນອັນຕະລາຍ
ຕໍ່ສະມາທິທີ່ປະກອບດ້ວຍອານາປານະສະຕິ
ແລະເປັນເຫດໃຫ້ຈິດຂອງພຣະໂຍຄາວະຈອນ
ຜູ້ຫວັ່ນໄຫວບໍ່ລຸດພົ້ນ
ພຣະໂຍຄາວະຈອນທັງຫຼາຍຍັງບໍ່ເຂົ້າໃຈວິໂມກ
ຈຶ່ງສົມຄວນເຊື່ອບຸກຄົນອື່ນ ແນວນີ້ແລ

## ຕະຕິຍະສັກກະ

### ໝວດທີ່ ທີ ໑

[໑໕໖] ຈິດທີ່ແລ່ນໄປສູ່ອະຕີຕາຣົມ ຕົກໄປຝ່າຍຟຸ້ງຊ່ານ ຍ່ອມເປັນອັນຕະລາຍຕໍ່ສະມາທິ
ຈິດທີ່ຫວັງອະນາຄະຕາຣົມເຖິງຄວາມກວັດແກວ່ງຍ່ອມເປັນອັນຕະລາຍຕໍ່ສະມາທິ
ຈິດທີ່ຫົດຫູ່ຕົກໄປຝ່າຍຂີ້ຄ້ານ ຍ່ອມເປັນອັນຕະລາຍຕໍ່ສະມາທິ
ຈິດທີ່ມີຄວາມພຽນກ້າ ຕົກໄປຝ່າຍອຸດທັດຈະຍ່ອມເປັນອັນຕະລາຍຕໍ່ສະມາທິ
ຈິດທີ່ນ້ອມຮັບຕົກໄປຝ່າຍກຳໜັດ ຍ່ອມເປັນອັນຕະລາຍຕໍ່ສະມາທິ
ຈິດທີ່ຜະອອກຕົກໄປຝ່າຍພະຍາບາດ ຍ່ອມເປັນອັນຕະລາຍຕໍ່ສະມາທິ

ຈິດທີ່ແລ່ນໄປຕາມອະຕີຕາຣົມ
ຈິດທີ່ຫວັງອະນາຄະຕາຣົມ
ຈິດທີ່ຫົດຫູ່ ຈິດທີ່ມີຄວາມພຽນກ້າ
ຈິດທີ່ນ້ອມຮັບ ຈິດທີ່ຜະອອກ ຍ່ອມບໍ່ຕັ້ງໝັ້ນ

ອຸປະກິເລດ ໖ ປະການນີ້ ເປັນອັນຕະລາຍ
ຕໍ່ສະມາທິທີ່ປະກອບດ້ວຍອານາປານະສະຕິ
ເປັນເຫດໃຫ້ບຸກຄົນຜູ້ມີຄວາມດຳຣິເສົ້າໝອງ
ບໍ່ຮູ້ຊັດແຈ້ງເຊິ່ງອະທິຈິດ ແນວນີ້ແລ

[໑໕໗] ເມື່ອພຣະໂຍຄາວະຈອນໃຊ້ສະຕິໄປຕາມລົມຫັນໃຈເຂົ້າທີ່ຖານະເບື້ອງຕົ້ນ ທ່າມກາງ ແລະບ່ອນສຸດກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນຈິດເຖິງຄວາມຟຸ້ງຊ່ານໃນພາຍໃນ

ເມື່ອພຣະໂຍຄາວະຈອນໃຊ້ສະຕິໄປຕາມລົມຫັນໃຈອອກຂະນະເລີ່ມຕົ້ນ ທ່າມກາງ ແລະບ່ອນສຸດ ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນຈິດເຖິງຄວາມຟຸ້ງຊ່ານໃນພາຍນອກ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນຄວາມເປັນໄປແຫ່ງຕັນຫາຄືຄວາມຕິດໃຈຫວັງລົມຫັນໃຈເຂົ້າ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນຄວາມເປັນໄປແຫ່ງຕັນຫາຄືຄວາມຕິດໃຈຫວັງລົມຫັນໃຈອອກ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຖືກລົມຫັນໃຈເຂົ້າຄອບງຳ ເປັນຜູ້ຫຼົງໃນການໄດ້ລົມຫັນໃຈອອກ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຖືກລົມຫັນໃຈອອກຄອບງຳ ເປັນຜູ້ຫຼົງໃນການໄດ້ລົມຫັນໃຈເຂົ້າ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງນິມິດ ມີຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້າ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງລົມຫັນໃຈເຂົ້າ ມີຈິດກວັດແກວ່ງຢູ່ທີ່ນິມິດ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງນິມິດ ມີຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດີ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງລົມຫັນໃຈອອກ ມີຈິດກວັດແກວ່ງຢູ່ທີ່ນິມິດ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງລົມຫັນໃຈເຂົ້າ ມີຈິດກວັດແກວ່ງຢູ່ທີ່ລົມຫັນໃຈອອກ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນພຣະໂຍຄາວະຈອນ ຜູ້ຄຳນຶງເຖິງລົມຫັນໃຈອອກ ມີຈິດກວັດແກວ່ງຢູ່ທີ່ລົມຫັນໃຈເຂົ້າ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດແລ່ນໄປຕາມອະຕີຕາຣົມ ຕົກໄປຝ່າຍຟຸ້ງຊ່ານ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດຫວັງອະນາຄະຕາຣົມ ເຖິງຄວາມກວັດແກວ່ງ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດຫົດຫູ່ຕົກໄປ ຝ່າຍຂີ້ຄ້ານ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດມີຄວາມພຽນກ້າຕົກໄປຝ່າຍອຸດທັດຈະ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດນ້ອມຮັບ ຕົກໄປຝ່າຍກຳໜັດ

ກາຍແລະຈິດຍ່ອມກະສັບກະສ່າຍ ຫວັ່ນໄຫວ ແລະດິ້ນຮົນ ຍ້ອນຈິດຜະອອກ ຕົກໄປຝ່າຍພະຍາບາດ

ຜູ້ໃດບໍ່ພ່ຳເພັງ ບໍ່ຈະເລີນອານາປານະສະຕິ
ກາຍແລະຈິດຂອງຜູ້ນັ້ນຍ່ອມຫວັ່ນໄຫວ
ກາຍແລະຈິດຂອງຜູ້ນັ້ນຍ່ອມດິ້ນຮົນ
ສ່ວນຜູ້ໃດພ່ຳເພັງ ຈະເລີນອານາປານະສະຕິດີແລ້ວ
ກາຍແລະຈິດຂອງຜູ້ນັ້ນຍ່ອມບໍ່ຫວັ່ນໄຫວ
ກາຍແລະຈິດຂອງຜູ້ນັ້ນຍ່ອມບໍ່ດິ້ນຮົນ ແນວນີ້ແລ

ອັນໜຶ່ງ ເມື່ອພຣະໂຍຄາວະຈອນຜູ້ມີຈິດມົດຈິດຈາກນິວອນເຫຼົ່ານັ້ນ ຈະເລີນສະມາທິທີ່ປະກອບ ດ້ວຍອານາປານະສະຕິອັນມີວັດຖຸ ໑໖ ຄວາມທີ່ຈິດຕັ້ງໝັ້ນເປັນໄປພຽງຊົ່ວຂະນະຍ່ອມມີໄດ້ ອຸປະກິເລດ ໑໘ ປະການນີ້ຍ່ອມເກີດຂຶ້ນ

**ອຸປະກິເລດຍານະນິດເທດທີ ໖ ຈົບ**

# ໔. ໂອທະນະຍານະນິດເທດ

## ສະແດງຍານໃນໂອທະນະ

[໑໔໗] ຍານໃນໂອທະນະ ໑໓ ປະການ ມີອັນໃດແດ່ ຄື

໑. ຈິດທີ່ແລ່ນໄປຕາມອະຕີຕາທຳ ຕົກໄປຝ່າຍຟຸ້ງຊ່ານ ພຣະໂຍຄາວະຈອນລະຈິດນັ້ນແລ້ວຕັ້ງຈິດໄວ້ໝັ້ນໃນຖານໜຶ່ງ

໒. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໓. ຈິດທີ່ຫວັງອະນາຄະຕາທຳເຖິງຄວາມກວັດແກວ່ງ ພຣະໂຍຄາວະຈອນເວັ້ນຈິດນັ້ນແລ້ວນ້ອມຈິດໄປໃນຖານນັ້ນ

໔. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໕. ຈິດທີ່ຫົດຫູ່ ຕົກໄປຝ່າຍຂີ້ຄ້ານ ພຣະໂຍຄາວະຈອນຍົກຈິດນັ້ນໄວ້ແລ້ວ ລະຄວາມຂີ້ຄ້ານ

໖. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໗. ຈິດທີ່ມີຄວາມພຽນກ້າ ຕົກໄປຝ່າຍອຸດທັດຈະ ພຣະໂຍຄາວະຈອນຂົ່ມຈິດນັ້ນແລ້ວລະອຸດທັດຈະ

໘. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໙. ຈິດນ້ອມຮັບ ຕົກໄປຝ່າຍກຳໜັດ ພຣະໂຍຄາວະຈອນຮູ້ທັນຈິດນັ້ນແລ້ວລະຄວາມກຳໜັດ

໑໐. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໑໑. ຈິດລະອອກ ຕົກໄປຝ່າຍພະຍາບາດ ພຣະໂຍຄາວະຈອນຮູ້ທັນຈິດນັ້ນແລ້ວລະພະຍາບາດ

໑໒. ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານແມ່ນດ້ວຍອາການແບບນີ້

໑໓. ຈິດບໍລິສຸດຜຸດຜ່ອງເຖິງສະພາວະດຽວ ດ້ວຍຖານະ ໖ ປະການນີ້

ທຳທີ່ມີສະພາວະດຽວເຫຼົ່ານັ້ນ ເປັນແບບໃດ?

ຄື ຄວາມຜາກົດແຫ່ງການບໍລິຈາກທານ ເປັນສະພາວະດຽວ ຄວາມຜາກົດແຫ່ງສະມະຖະນິມິດ ເປັນສະພາວະດຽວ ຄວາມຜາກົດແຫ່ງລັກສະນະຄວາມເສື່ອມ ເປັນສະພາວະດຽວ ຄວາມຜາກົດແຫ່ງຄວາມດັບ ເປັນສະພາວະດຽວ ຄວາມຜາກົດແຫ່ງການບໍລິຈາກທານຂອງບຸກຄົນຜູ້ນ້ອມໃຈໄປໃນຈາຄະທັງຫຼາຍ ເປັນສະພາວະດຽວ ຄວາມຜາກົດແຫ່ງສະມະຖະນິມິດຂອງບຸກຄົນຜູ້ປະກອບໃນອະທິຈິດທັງຫຼາຍ ເປັນສະພາວະດຽວ ຄວາມຜາກົດແຫ່ງລັກສະນະຄວາມ

ເສື່ອມຂອງບຸກຄົນຜູ້ຈະເລີນວິປັດສະນາທັງຫຼາຍ ເປັນສະພາວະດຽວຄວາມຜາກົດແຫ່ງຄວາມດັບຂອງພຣະອະຣິຍະບຸກຄົນທັງຫຼາຍ ເປັນສະພາວະດຽວ

ຈິດທີ່ເຖິງສະພາວະດຽວດ້ວຍຖານ ໔ ນີ້ ຍ່ອມເປັນຈິດທີ່ມີປະຕິປະທາມົດຈົດ ຜ່ອງໃສຈະເລີນງອກງາມດ້ວຍອຸເປກຂາ ແລະເຖິງຄວາມເບີກບານດ້ວຍຍານ

ອັນໃດເປັນເບື້ອງຕົ້ນແຫ່ງປະຖົມຊານ ອັນໃດເປັນທ່າມກາງແຫ່ງປະຖົມຊານ ອັນໃດເປັນບ່ອນສຸດແຫ່ງປະຖົມຊານ

ຄື ຄວາມມົດຈົດແຫ່ງປະຕິປະທາເປັນເບື້ອງຕົ້ນແຫ່ງປະຖົມຊານ ຄວາມເພີ່ມພູນ ອຸເປກຂາເປັນທ່າມກາງແຫ່ງປະຖົມຊານ ຄວາມເບີກບານເປັນບ່ອນສຸດແຫ່ງປະຖົມຊານ

ຄວາມມົດຈົດແຫ່ງປະຕິປະທາທີ່ເປັນເບື້ອງຕົ້ນແຫ່ງປະຖົມຊານ ມີລັກສະນະເທົ່າໃດ?

ຄື ມີລັກສະນະ ໓ ປະການ ໄດ້ແກ່

໑. ຈິດມົດຈົດຈາກອັນຕະລາຍແຫ່ງຊານນັ້ນ
໔. ຈິດດຳເນີນໄປສູ່ສະມະຖະນິມິດອັນເປັນທ່າມກາງ ຍ້ອນເປັນຈິດມົດຈົດ
໓. ຈິດແລ່ນໄປສູ່ສະມະຖະນິມິດນັ້ນ ຍ້ອນເປັນຈິດດຳເນີນໄປແລ້ວ

ຈິດມົດຈົດຈາກອັນຕະລາຍ ໑ ຈິດດຳເນີນໄປສູ່ສະມະຖະນິມິດອັນເປັນທ່າມກາງ ຍ້ອນເປັນຈິດມົດຈົດ ໑ ຈິດແລ່ນໄປສູ່ສະມະຖະນິມິດນັ້ນ ຍ້ອນເປັນຈິດດຳເນີນໄປແລ້ວ ໑ ຄວາມມົດຈົດແຫ່ງປະຕິປະທາທີ່ເປັນເບື້ອງຕົ້ນແຫ່ງປະຖົມຊານມີລັກສະນະ ໓ ປະການນີ້ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ປະຖົມຊານເປັນຊານມີຄວາມງາມໃນເບື້ອງຕົ້ນແລະເຖິງພ້ອມດ້ວຍລັກສະນະ ຄວາມເພີ່ມພູນອຸເປກຂາທີ່ເປັນທ່າມກາງແຫ່ງປະຖົມຊານ ມີລັກສະນະເທົ່າໃດ

ຄື ມີລັກສະນະ ໓ ປະການ ໄດ້ແກ່

໑. ເພ່ງເສີຍຈິດທີ່ມົດຈົດ
໔. ເພ່ງເສີຍຈິດທີ່ດຳເນີນໄປໃນສະມະຖະ
໓. ເພ່ງເສີຍຄວາມຜາກົດໃນສະພາວະດຽວ

ຄວາມເພີ່ມພູນອຸເປກຂາທີ່ເປັນທ່າມກາງແຫ່ງປະຖົມຊານເພ່ງເສີຍຈິດທີ່ມົດຈົດ ໑ ເພ່ງເສີຍຈິດທີ່ດຳເນີນໄປໃນສະມະຖະ ໑ ເພ່ງເສີຍຄວາມຜາກົດໃນສະພາວະດຽວ ໑ ຄວາມເພີ່ມພູນອຸເປກຂາທີ່ເປັນທ່າມກາງແຫ່ງປະຖົມຊານ ມີລັກສະນະ ໓ ປະການນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປະຖົມຊານເປັນຊານມີຄວາມງາມໃນທ່າມກາງແລະເຖິງພ້ອມດ້ວຍລັກສະນະຄວາມເບີກບານທີ່ເປັນບ່ອນສຸດແຫ່ງປະຖົມຊານ ມີລັກສະນະເທົ່າໃດ

ຄື ມີລັກສະນະ ໔ ປະການ ໄດ້ແກ່

໑. ຄວາມເບີກບານຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນປະຖົມຊານນັ້ນບໍ່ລ່ວງເລີຍກັນ

໒. ຄວາມເບີກບານຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

໓. ຄວາມເບີກບານຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ

໔. ຄວາມເບີກບານຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄວາມເບີກບານທີ່ເປັນບ່ອນສຸດແຫ່ງປະຖົມຊານ ມີລັກສະນະ ໔ ປະການນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ປະຖົມຊານມີຄວາມງາມໃນບ່ອນສຸດແລະເຖິງພ້ອມດ້ວຍລັກສະນະ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍວິຕົກ ວິຈານ ປີຕິ ສຸກ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

ອັນໃດເປັນເບື້ອງຕົ້ນແຫ່ງທຸຕິຍະຊານ ອັນໃດເປັນທ່າມກາງແຫ່ງທຸຕິຍະຊານ ອັນໃດເປັນບ່ອນສຸດແຫ່ງທຸຕິຍະຊານ

ຄື ຄວາມມົດຈົດແຫ່ງປະຕິປະທາເປັນເບື້ອງຕົ້ນແຫ່ງທຸຕິຍະຊານ ຄວາມເພີ່ມພູນອຸເປກຂາ ເປັນທ່າມກາງແຫ່ງທຸຕິຍະຊານ ຄວາມເບີກບານເປັນບ່ອນສຸດແຫ່ງທຸຕິຍະຊານ ຯລຯ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍປີຕິ ສຸກ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

ອັນໃດເປັນເບື້ອງຕົ້ນແຫ່ງຕະຕິຍະຊານ ອັນໃດເປັນທ່າມກາງແຫ່ງຕະຕິຍະຊານ ອັນໃດເປັນ ບ່ອນສຸດແຫ່ງຕະຕິຍະຊານ ຯລຯ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍສຸກ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

ອັນໃດເປັນເບື້ອງຕົ້ນແຫ່ງຈະຕຸດຖະຊານ ອັນໃດເປັນທ່າມກາງແຫ່ງຈະຕຸດຖະຊານ ອັນໃດເປັນບ່ອນສຸດແຫ່ງຈະຕຸດຖະຊານ ຯລຯ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍອຸເປກຂາ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

ອັນໃດເປັນເບື້ອງຕົ້ນແຫ່ງອາກາສານັນຈາຍະຕະນະສະມາບັດ ອັນໃດເປັນທ່າມກາງແຫ່ງອາກາສານັນຈາຍະຕະນະສະມາບັດ ອັນໃດເປັນບ່ອນສຸດແຫ່ງອາກາສານັນຈາຍະຕະນະສະມາບັດ ຯລຯ

ອັນໃດເປັນເບື້ອງຕົ້ນແຫ່ງວິນຍານັນຈາຍະຕະນະສະມາບັດ ຯລຯ

ອັນໃດເປັນເບື້ອງຕົ້ນແຫ່ງອາກິນຈັນຍາຍະຕະນະສະມາບັດ ຯລຯ

ອັນໃດເປັນເບື້ອງຕົ້ນແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ອັນໃດເປັນທ່າມກາງ ແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ອັນໃດເປັນບ່ອນສຸດແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ຯລຯ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍອຸເປກຂາ ການອະທິຖານຈິດ ຯລຯ ແລະເຖິງພ້ອມດ້ວຍປັນຍາ

ອັນໃດເປັນເບື້ອງຕົ້ນແຫ່ງອະນິດຈານຸປັດສະນາ ອັນໃດເປັນທ່າມກາງແຫ່ງອະນິດຈານຸປັດສະນາ ອັນໃດເປັນບ່ອນສຸດແຫ່ງອະນິດຈານຸປັດສະນາ ຯລຯ

ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກ ສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍວິຕົກ ວິຈານ ປີຕິ ສຸກ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

| | | |
|---|---|---|
| ອັນໃດເປັນເບື້ອງຕົ້ນແຫ່ງ | ທຸກຂານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ອະນັດຕານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ນິບພິທານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ວິຣາຄານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ນິໂຣທານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ຂະຍານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ວະຍານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ວິປະຣິນາມານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ອະນິມິດຕານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ອັບປະນິຫິຕານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ສູນຍະຕານຸປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ອະທິປັນຍາທຳມະວິປັດສະນາ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ຍະຖາພູຕະຍານທັດສະນະ | ຯລຯ |
| ອັນໃດເປັນເບື້ອງຕົ້ນແຫ່ງ | ອາທີນະວານຸປັດສະນາ | ຯລຯ |

ອັນໃດເປັນເບື້ອງຕົ້ນແຫ່ງ ປະຕິສັງຂານຸປັດສະນາ ຯລຯ
ອັນໃດເປັນເບື້ອງຕົ້ນແຫ່ງ ວິວັດຕະນານຸປັດສະນາ ຯລຯ
ອັນໃດເປັນເບື້ອງຕົ້ນແຫ່ງ ໂສດາປັດຕິມັກ ຯລຯ
ອັນໃດເປັນເບື້ອງຕົ້ນແຫ່ງ ສະກະທາຄາມິມັກ ຯລຯ
ອັນໃດເປັນເບື້ອງຕົ້ນແຫ່ງ ອະນາຄາມິມັກ ຯລຯ

ອັນໃດເປັນເບື້ອງຕົ້ນແຫ່ງອະຣະຫັດຕະມັກ ອັນໃດເປັນເປັນທ່າມກາງແຫ່ງອະຣະຫັດຕະມັກ ອັນໃດເປັນບ່ອນສຸດແຫ່ງອະຣະຫັດຕະມັກ

ຄວາມມົດຈົດແຫ່ງປະຕິປະທາທີ່ເປັນເບື້ອງຕົ້ນແຫ່ງອະຣະຫັດຕະມັກ ຄວາມເພີ່ມພູນ ອຸເປກຂາທີ່ເປັນທ່າມກາງແຫ່ງອະຣະຫັດຕະມັກ ຄວາມເບີກບານທີ່ເປັນບ່ອນສຸດແຫ່ງອະຣະຫັດຕະມັກ ຄວາມມົດຈົດແຫ່ງປະຕິປະທາທີ່ເປັນເບື້ອງຕົ້ນແຫ່ງອະຣະຫັດຕະມັກ ມີລັກສະນະເທົ່າໃດ

ຄື ມີລັກສະນະ ໓ ປະການ ໄດ້ແກ່

໑. ຈິດມົດຈົດຈາກອັນຕະລາຍແຫ່ງຊານນັ້ນ
໒. ຈິດດຳເນີນໄປສູ່ສະມະຖະນິມິດອັນເປັນທ່າມກາງ ຍ້ອນເປັນຈິດມົດຈົດ
໓. ຈິດແລ່ນໄປສູ່ສະມະຖະນິມິດນັ້ນ ຍ້ອນເປັນຈິດດຳເນີນໄປແລ້ວ

ຈິດມົດຈົດຈາກອັນຕະລາຍ ໑ ຈິດດຳເນີນໄປສູ່ສະມະຖະນິມິດອັນເປັນທ່າມກາງ ຍ້ອນເປັນຈິດມົດຈົດ ໑ ຈິດແລ່ນໄປສູ່ສະມະຖະນິມິດນັ້ນ ຍ້ອນເປັນຈິດດຳເນີນໄປແລ້ວ ຄວາມມົດຈົດແຫ່ງປະຕິປະທາທີ່ເປັນເບື້ອງຕົ້ນແຫ່ງອະຣະຫັດຕະມັກ ມີລັກສະນະ ໓ ປະການນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ອະຣະຫັດຕະມັກເປັນທຳມີຄວາມງາມໃນເບື້ອງຕົ້ນ ແລະເຖິງພ້ອມດ້ວຍລັກສະນະ

ຄວາມເພີ່ມພູນອຸເປກຂາທີ່ເປັນທ່າມກາງແຫ່ງອະຣະຫັດຕະມັກ ມີລັກສະນະເທົ່າໃດ?

ຄື ມີລັກສະນະ ໓ ປະການ ໄດ້ແກ່

໑. ເພ່ງເສີຍຈິດທີ່ມົດຈົດ
໒. ເພ່ງເສີຍຈິດທີ່ດຳເນີນໄປໃນສະມະຖະ
໓. ເພ່ງເສີຍຄວາມຜາກົດໃນສະພາວະດຽວ

ຄວາມເພີ່ມພູນອຸເປກຂາທີ່ເປັນທ່າມກາງແຫ່ງອະຣະຫັດຕະມັກເພ່ງເສີຍຈິດທີ່ມົດຈົດ ໑ ເພ່ງເສີຍຈິດທີ່ດຳເນີນໄປໃນສະມະຖະ ໑ ເພ່ງເສີຍຄວາມຜາກົດໃນສະພາວະດຽວ ໑ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ອະຣະຫັດຕະມັກເປັນທຳມີຄວາມງາມໃນທ່າມກາງແລະເຖິງພ້ອມດ້ວຍລັກສະນະ

ຄວາມເບີກບານທີ່ເປັນບ່ອນສຸດແຫ່ງອະຣະຫັດຕະມັກ ມີລັກສະນະເທົ່າໃດ?

ຄື ມີລັກສະນະ ໔ ປະການ ໄດ້ແກ່

໑. ຄວາມເບີກບານຍ້ອນມີຄວາມໝາຍວ່າ ທຳທັງຫຼາຍທີ່ເກີດໃນອະຣະຫັດຕະມັກ ນັ້ນບໍ່ລ່ວງເລີຍກັນ

໒. ຄວາມເບີກບານຍ້ອນມີຄວາມໝາຍວ່າ ອິນຊີທັງຫຼາຍມີຣົດເປັນແນວດຽວກັນ

໓. ຄວາມເບີກບານຍ້ອນມີຄວາມໝາຍວ່າ ນຳຄວາມພຽນທີ່ສົມຄວນແກ່ທຳນັ້ນ ເຂົ້າໄປ

໔. ຄວາມເບີກບານຍ້ອນມີຄວາມໝາຍວ່າ ປະຕິບັດເນືອງ ໆ

ຄວາມເບີກບານທີ່ເປັນບ່ອນສຸດແຫ່ງອະຣະຫັດຕະມັກ ມີລັກສະນະ ໔ ປະການນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ອະຣະຫັດຕະມັກເປັນທຳມີຄວາມງາມໃນບ່ອນສຸດ ແລະເຖິງພ້ອມດ້ວຍລັກສະນະ ຈິດທີ່ເຖິງຄວາມເປັນໄປ ໓ ປະການ ມີຄວາມງາມ ໓ ປະການ ເຖິງພ້ອມດ້ວຍລັກສະນະ ໑໐ ປະການແນວນີ້ ຍ່ອມເປັນຈິດທີ່ເຖິງພ້ອມດ້ວຍວິຕົກ ວິຈານ ປີຕິ ສຸກ ການອະທິຖານຈິດ ສັດທາ ວິຣິຍະ ສະຕິ ສະມາທິ ແລະເຖິງພ້ອມດ້ວຍປັນຍາ

[໑໔໙] ນິມິດ ລົມຫັນໃຈເຂົ້າຫັນໃຈອອກ
ບໍ່ເປັນອາລົມແຫ່ງຈິດດວງດຽວ
ຍ້ອນບໍ່ຮູ້ທຳ ໓ ປະການ ຈຶ່ງບໍ່ໄດ້ພາວະນາ
ນິມິດ ລົມຫັນໃຈເຂົ້າຫັນໃຈອອກ
ບໍ່ເປັນອາລົມແຫ່ງຈິດດວງດຽວ
ຍ້ອນຮູ້ທຳ ໓ ປະການ ຈຶ່ງໄດ້ພາວະນາ ແນວນີ້ແລ

ທຳ ໓ ປະການນີ້ ບໍ່ເປັນອາລົມແຫ່ງຈິດດວງດຽວ ເປັນທຳບໍ່ຜາກົດ

ຈິດບໍ່ເຖິງຄວາມຟຸ້ງຊ່ານ ປະທານຜາກົດ ໃຫ້ປະໂຍຄະສຳເລັດແລະບັນລຸຜົນວິເສດ ເປັນແນວໃດ?

ຄື ປຽບເໝືອນຕົ້ນໄມ້ທີ່ເຂົາວາງໄວ້ເທິງພື້ນດິນທີ່ຮາບພຽງ ບຸຣຸດໃຊ້ເລື່ອຍຕັດຕົ້ນໄມ້ນັ້ນ ຕັ້ງສະຕິໄວ້ທີ່ແຂ້ວເລື່ອຍທີ່ຖືກຕົ້ນໄມ້ ບໍ່ໄດ້ໃສ່ໃຈເຖິງແຂ້ວເລື່ອຍທີ່ມາຫຼືທີ່ໄປ ແຂ້ວເລື່ອຍທີ່ມາຫຼືທີ່ໄປຈະບໍ່ຜາກົດກໍຫາບໍ່ໄດ້ ປະທານຜາກົດ ໃຫ້ປະໂຍຄະສຳເລັດແລະບັນລຸຜົນວິເສດ ນິມິດ ທີ່ຜູກຈິດໄວ້ ເໝືອນຕົ້ນໄມ້ທີ່ເຂົາວາງໄວ້ເທິງພື້ນດິນທີ່ຮາບພຽງ ລົມຫັນໃຈເຂົ້າຫັນໃຈອອກເໝືອນແຂ້ວເລື່ອຍ ພິກຂຸນັ່ງຕັ້ງສະຕິໄວ້ໝັ້ນທີ່ປາຍດັງຫຼືທີ່ຮິມຝີປາກ ບໍ່ໄດ້ໃສ່ໃຈເຖິງລົມຫັນໃຈເຂົ້າຫັນໃຈອອກທີ່ເຂົ້າມາຫຼືອອກໄປ ລົມຫັນໃຈເຂົ້າຫັນໃຈອອກ ທີ່ເຂົ້າມາຫຼື ອອກໄປຈະບໍ່ຜາກົດກໍຫາບໍ່ໄດ້ ປະທານຜາກົດ ໃຫ້ປະໂຍຄະສຳເລັດແລະບັນລຸຜົນວິເສດ ເໝືອນບຸຣຸດນັ່ງຕັ້ງສະຕິໄວ້ທີ່

ແຂ້ວເລື່ອຍທີ່ຖືກຕົ້ນໄມ້ ບໍ່ໄດ້ໃສ່ໃຈເຖິງແຂ້ວເລື່ອຍທີ່ມາຫຼືທີ່ໄປ ແຂ້ວເລື່ອຍທີ່ມາ ຫຼືທີ່ໄປຈະບໍ່ຜາກົດກໍຫາບໍ່ໄດ້ ປະທານຜາກົດ ໃຫ້ປະໂຍຄະສຳເລັດແລະບັນລຸຜົນວິເສດ ສັນນັ້ນ

ປະທານ ເປັນແນວໃດ?

ຄື ກາຍແລະຈິດຂອງພິກຂຸຜູ້ມີຄວາມພຽນ ຍ່ອມຄວນແກ່ວຽກງານ ນີ້ເປັນປະທານ

ປະໂຍຄະ ເປັນແນວໃດ?

ຄື ພິກຂຸຜູ້ມີຄວາມພຽນ ຍ່ອມລະອຸປະກິເລດໄດ້ ວິຕົກຍ່ອມສະງົບໄປ ນີ້ເປັນປະໂຍຄະ

ຜົນວິເສດ ເປັນແນວໃດ?

ຄື ພິກຂຸຜູ້ມີຄວາມພຽນຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມເຖິງຄວາມພິນາດໄປ ນີ້ເປັນຜົນວິເສດ

ທຳ ໓ ປະການນີ້ ຍ່ອມບໍ່ເປັນອາລົມແຫ່ງຈິດດວງດຽວແນວນີ້ ແລະທຳ ໓ ປະການນີ້ຈະບໍ່ຜາກົດກໍຫາບໍ່ໄດ້ ຈິດບໍ່ເຖິງຄວາມຟຸ້ງຊ່ານ ປະທານຜາກົດ ໃຫ້ປະໂຍຄະສຳເລັດແລະບັນລຸຜົນວິເສດ

[໑໖໐] ບຸກຄົນໃດ ພາວະນາອານາປານະສະຕິດີແລ້ວ ບໍລິບູນແລ້ວ ອົບຮົມແລ້ວຕາມລຳດັບ ຕາມສະພາວະທີ່ພຣະພຸດທະເຈົ້າຊົງສະແດງໄວ້

ບຸກຄົນນັ້ນຍ່ອມເຮັດໂລກນີ້ໃຫ້ສະຫວ່າງສະໄຫວ<br>
ເໝືອນດວງຈັນພົ້ນຈາກໝອກ ສັນນັ້ນ

ຄຳວ່າ ອານະ ອະທິບາຍວ່າ ລົມຫັນໃຈເຂົ້າ ບໍ່ແມ່ນລົມຫັນໃຈອອກ

ຄຳວ່າ ອະປານະ ອະທິບາຍວ່າ ລົມຫັນໃຈອອກ ບໍ່ແມ່ນລົມຫັນໃຈເຂົ້າ ສະຕິເຂົ້າໄປຕັ້ງຢູ່ທີ່ລົມຫັນໃຈເຂົ້າຫັນໃຈອອກ ຜູ້ໃດຫັນໃຈເຂົ້າ ສະຕິຍ່ອມຜາກົດແກ່ຜູ້ນັ້ນ ຜູ້ໃດຫັນໃຈອອກສະຕິຍ່ອມຜາກົດແກ່ຜູ້ນັ້ນ

ຄຳວ່າ ບໍລິບູນແລ້ວ ອະທິບາຍວ່າ ຊື່ວ່າບໍລິບູນແລ້ວ ຍ້ອນມີຄວາມໝາຍວ່າຖືເອົາຮອບ ຊື່ວ່າບໍລິບູນແລ້ວ ຍ້ອນມີຄວາມໝາຍວ່າລວມໄວ້ ຊື່ວ່າບໍລິບູນແລ້ວ ຍ້ອນມີຄວາມໝາຍວ່າເຕັມຮອບແລ້ວ

ຄຳວ່າ ພາວະນາ ໆລໆ ດີແລ້ວ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນ ເຂົ້າໄປ

໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄວາມໝາຍແຫ່ງພາວະນາ ໔ ປະການນີ້ ເປັນອັນພິກຂຸນັ້ນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ນ້ອມໄປ ອົບຮົມແລ້ວ ຜາຣົບສະເໝີດີແລ້ວ

ຄຳວ່າ ກະເຮັດໃຫ້ເປັນເໝືອນຍານ ອະທິບາຍວ່າ ພິກຂຸນັ້ນຫວັງໃນທຳໃດ ໆ ຍ່ອມເປັນຜູ້ເຖິງ ຄວາມຊຳນານ ມີກຳລັງ ເຖິງຄວາມແກ່ກ້າໃນທຳນັ້ນ ໆ ທຳເຫຼົ່ານັ້ນເປັນທຳທີ່ເນື່ອງດ້ວຍຄວາມຄຳນຶງເຖິງ ເນື່ອງດ້ວຍຄວາມຫວັງ ເນື່ອງດ້ວຍມະນະສິການ ເນື່ອງດ້ວຍຈິດຕຸບບາດ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ກະເຮັດໃຫ້ເປັນເໝືອນຍານ

ຄຳວ່າ ກະເຮັດໃຫ້ເປັນບ່ອນຕັ້ງ ອະທິບາຍວ່າ ຈິດຕັ້ງໝັ້ນດີໃນວັດຖຸໃດ ໆ ສະຕິກໍຜາກົດດີໃນວັດຖຸນັ້ນ ໆ ຫຼື ສະຕິຜາກົດດີໃນວັດຖຸໃດ ໆ ຈິດກໍຕັ້ງໝັ້ນດີໃນວັດຖຸນັ້ນ ໆ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ກະເຮັດໃຫ້ເປັນບ່ອນຕັ້ງ

ຄຳວ່າ ນ້ອມໄປ ອະທິບາຍວ່າ ຈິດນ້ອມໄປດ້ວຍອາການໃດ ໆ ສະຕິກໍໝຸນໄປຕາມ (ຄຸມຢູ່) ດ້ວຍອາການນັ້ນ ໆ ກໍຫຼືວ່າ ສະຕິໝຸນໄປດ້ວຍອາການໃດ ໆ ຈິດກໍນ້ອມໄປດ້ວຍອາການນັ້ນ ໆ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ນ້ອມໄປ

ຄຳວ່າ ອົບຮົມແລ້ວ ອະທິບາຍວ່າ ຊື່ວ່າອົບຮົມແລ້ວ ຍ້ອນມີຄວາມໝາຍວ່າ ຖືເອົາຮອບ ຊື່ວ່າອົບຮົມແລ້ວ ຍ້ອນມີຄວາມໝາຍວ່າລວມໄວ້ ຊື່ວ່າອົບຮົມແລ້ວ ຍ້ອນມີຄວາມໝາຍວ່າເຕັມຮອບ ພິກຂຸກຳນົດຖືເອົາດ້ວຍສະຕິ ຍ່ອມຊະນະບາບອະກຸສົນທຳໄດ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ອົບຮົມແລ້ວ

ຄຳວ່າ ຜາຣົບສະເໝີດີແລ້ວ ອະທິບາຍວ່າ ພາວະນາ ໔ ຢ່າງ ພິກຂຸຜາຣົບສະເໝີ ດີແລ້ວ ຄື

໑. ຜາຣົບສະເໝີດີແລ້ວ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນ ພາວະນານັ້ນບໍ່ລ່ວງເລີຍກັນ

໒. ຜາຣົບສະເໝີດີແລ້ວ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

໓. ຜາຣົບສະເໝີດີແລ້ວ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນ ເຂົ້າໄປ

໔. ຜາຣົບສະເໝີດີແລ້ວ ຍ້ອນເພີກຖອນກິເລດທັງຫຼາຍເຊິ່ງເປັນຂ້າເສິກແກ່ທຳນັ້ນ

[໑໖໑] ຄຳວ່າ ສະເໝີດີ ອະທິບາຍວ່າ ຄວາມສະເໝີກໍມີ ຄວາມສະເໝີດີກໍມີ

ຄວາມສະເໝີ ເປັນແນວໃດ?

ຄື ກຸສົນທຳທັງຫຼາຍອັນບໍ່ມີໂທດ ເກີດໃນທຳນັ້ນ ເປັນຝ່າຍແຫ່ງຄວາມຕັດສະຣູ້ ນີ້ຊື່ວ່າ ຄວາມສະເໝີ

ຄວາມສະເໝີດີ ເປັນແນວໃດ?

ຄື ຄວາມດັບອາລົມແຫ່ງທຳເຫຼົ່ານັ້ນເປັນນິບພານ ນີ້ຊື່ວ່າຄວາມສະເໝີດີ

ກໍຄວາມສະເໝີແລະຄວາມສະເໝີດີ ດັ່ງນີ້ ພິກຂຸນັ້ນຮູ້ແລ້ວ ເຫັນແລ້ວ ຮູ້ແລ້ວເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ຄວາມພຽນພິກຂຸນັ້ນຜາຣົບແລ້ວ ບໍ່ຫຍໍ້ຫຍ່ອນ ສະຕິຕັ້ງໝັ້ນ ບໍ່ຫຼົງລືມ ກາຍສະງົບບໍ່ກະສັບກະສ່າຍ ຈິດຕັ້ງໝັ້ນເປັນເອກັກຄະຕາຣົມ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຜາຣົບສະເໝີດີແລ້ວ

ຄຳວ່າ ອົບຣົມແລ້ວຕາມລຳດັບ ອະທິບາຍວ່າ ພິກຂຸນັ້ນອົບຣົມອານາປານະສະຕິຂໍ້ ຕົ້ນ ໆ ດ້ວຍອຳນາດລົມຫັນໃຈເຂົ້າຍາວ ກໍຊື່ວ່າອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບອົບຣົມອານາປານະສະຕິຂໍ້ຕົ້ນ ໆ ດ້ວຍອຳນາດລົມຫັນໃຈອອກຍາວ ກໍຊື່ວ່າອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບ ອົບຣົມອານາປານະສະຕິຂໍ້ຕົ້ນ ໆ ດ້ວຍອຳນາດລົມຫັນໃຈເຂົ້າສັ້ນກໍຊື່ວ່າ ອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບ ຯລຯ ອົບຣົມອານາປານະສະຕິຂໍ້ຕົ້ນ ໆ

ດ້ວຍອຳນາດລົມຫັນໃຈເຂົ້າສັ້ນ ກໍຊື່ວ່າອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບ ອົບຣົມ ອານາປານະສະຕິຂໍ້ຕົ້ນ ໆ ດ້ວຍອຳນາດລົມຫັນໃຈອອກສັ້ນ ກໍຊື່ວ່າອົບຣົມອານາປານະສະຕິ ຂໍ້ຫຼັງ ໆ ຕາມລຳດັບ ຯລຯ ອົບຣົມອານາປານະສະຕິຂໍ້ຕົ້ນ ໆ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າ ກໍຊື່ວ່າອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບ ອົບຣົມອານາປານະສະຕິຂໍ້ຕົ້ນ ໆ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ ກໍຊື່ວ່າອົບຣົມອານາປານະສະຕິຂໍ້ຫຼັງ ໆ ຕາມລຳດັບ ອານາປານະສະຕິອັນມີວັດຖຸ ໑໖ ແມ່ນທັງປວງອາໄສກັນ ພິກຂຸນັ້ນອົບຣົມແລ້ວແລະອົບຣົມແລ້ວຕາມລຳດັບ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ອົບຣົມແລ້ວຕາມລຳດັບ

ຄຳວ່າ ຕາມສະພາວະ ອະທິບາຍວ່າ ຕາມສະພາວະມີຄວາມໝາຍ ໑໐ ຢ່າງ ຄື

໑. ຕາມສະພາວະທີ່ມີຄວາມໝາຍວ່າ ຝຶກຕົນ
໒. ຕາມສະພາວະທີ່ມີຄວາມໝາຍວ່າ ສະງົບຕົນ
໓. ຕາມສະພາວະທີ່ມີຄວາມໝາຍວ່າ ຍັງຕົນໃຫ້ປະຣິນິບພານ
໔. ຕາມສະພາວະທີ່ມີຄວາມໝາຍວ່າ ຮູ້ຍິ່ງ
໕. ຕາມສະພາວະທີ່ມີຄວາມໝາຍວ່າ ກຳນົດຮູ້
໖. ຕາມສະພາວະທີ່ມີຄວາມໝາຍວ່າ ລະ
໗. ຕາມສະພາວະທີ່ມີຄວາມໝາຍວ່າ ຈະເລີນ

໗. ຕາມສະພາວະທີ່ມີຄວາມໝາຍວ່າ ເຮັດໃຫ້ແຈ້ງ

໙. ຕາມສະພາວະທີ່ມີຄວາມໝາຍວ່າ ຕັດສະຮູ້ສັດຈະ

໑໐. ຕາມສະພາວະທີ່ມີຄວາມໝາຍວ່າ ຍັງຕົນໃຫ້ຕັ້ງຢູ່ໃນນິໂຣດ

ຄຳວ່າ ພຣະພຸດທະເຈົ້າ ອະທິບາຍວ່າ ພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນພຣະສະຍຳພູ ບໍ່ມີຄູອາຈານ ໄດ້ຕັດສະຮູ້ສັດຈະໃນທຳທີ່ບໍ່ເຄີຍສະດັບມາກ່ອນດ້ວຍພຣະອົງເອງ ຊົງບັນລຸ ຄວາມເປັນພຣະສັບພັນຍູໃນສັດຈະນັ້ນ ແລະເຖິງຄວາມເປັນຜູ້ຊົງຊຳນານໃນພະລະຍານທັງຫຼາຍ

[໑໙໔] ຄຳວ່າ ພຣະພຸດທະເຈົ້າ ອະທິບາຍວ່າ ຊື່ວ່າພຣະພຸດທະເຈົ້າ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຄື

ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຮູ້ສັດຈະທັງຫຼາຍແລ້ວ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເຮັດໝູ່ສັດໃຫ້ຕັດສະຮູ້

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະສັບພັນຍູ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ເຫັນທຳທັງປວງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນບໍ່ມີຄົນອື່ນແນະນຳ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ເບີກບານ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນພຣະຂີນາສົບ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ປາສະຈາກອຸປະກິເລດ

ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກຣາຄະໂດຍສິ້ນເຊີງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກໂທສະໂດຍສິ້ນເຊີງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກໂມຫະໂດຍສິ້ນເຊີງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນປາສະຈາກກິເລດໂດຍສິ້ນເຊີງ

ຊື່ວ່າພຣະພຸດທະເຈົ້າ ຍ້ອນສະເດັດເຖິງທາງສາຍເອກ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຕັດສະຮູ້ອະນຸດຕະຣະສຳມາສຳໂພທິຍານລຳພັງພຣະອົງດຽວ

ຊື່ວ່າພຣະພຸດທະເຈົ້າ ຍ້ອນຊົງເປັນຜູ້ຂະຈັດຄວາມບໍ່ຮູ້ໄດ້ແລ້ວ ຍ້ອນຊົງເປັນຜູ້ໄດ້ສະເພາະເຊິ່ງຄວາມຮູ້

ຄຳວ່າ ພຣະພຸດທະເຈົ້າ ນີ້ ບໍ່ແມ່ນພຣະຊົນນີຊົງຕັ້ງ ບໍ່ແມ່ນພຣະຊະນົກຊົງຕັ້ງບໍ່ແມ່ນພຣະພາດາຊົງຕັ້ງ ບໍ່ແມ່ນພຣະພະຄິນີຊົງຕັ້ງ ບໍ່ແມ່ນມິດອຳມາດຕັ້ງ ບໍ່ແມ່ນພຣະຍາດສາຍໂລຫິດຊົງຕັ້ງ ບໍ່ແມ່ນສະມະນະພາມຕັ້ງ ບໍ່ແມ່ນເທວະດາຕັ້ງ

ຄຳວ່າ ພຣະພຸດທະເຈົ້າ ນີ້ ເປັນວິໂມກຂັນຕິກະນາມ ເປັນສັດສິກາບັນຍັດຂອງພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ເກີດຂຶ້ນພ້ອມກັບການຊົງໄດ້ສະເພາະເຊິ່ງພຣະສັບພັນຍຸຕະຍານທີ່ເຫງົ້າຕົ້ນໂພລວມຄວາມວ່າ ພຣະພຸດທະເຈົ້າພຣະອົງນັ້ນ

ຄຳວ່າ ຊົງສະແດງໄວ້ ອະທິບາຍວ່າ ຕາມສະພາວະທີ່ມີຄວາມໝາຍວ່າຝຶກຕົນ ຊື່ວ່າ ພຣະພຸດທະເຈົ້າຊົງສະແດງໄວ້ຕາມສະພາວະ ຕາມສະພາວະທີ່ມີຄວາມໝາຍວ່າສະງົບຕົນ ຊື່ວ່າພຣະພຸດທະເຈົ້າຊົງສະແດງໄວ້ຕາມສະພາວະ ຕາມສະພາວະທີ່ມີຄວາມໝາຍວ່າຍັງຕົນໃຫ້ປະຣິນິບພານ

ຊື່ວ່າພຣະພຸດທະເຈົ້າຊົງສະແດງໄວ້ຕາມສະພາວະ ຯລຯ ຕາມສະພາວະທີ່ມີຄວາມໝາຍວ່າຍັງຕົນໃຫ້ຕັ້ງຢູ່ໃນນິໂຣດ ຊື່ວ່າພຣະພຸດທະເຈົ້າຊົງສະແດງໄວ້ຕາມສະພາວະ

ຄຳວ່າ ບຸກຄົນນັ້ນ ອະທິບາຍວ່າ ຜູ້ທີ່ເປັນຄະລິຫັດ ຫຼື ຜູ້ທີ່ເປັນບັນພະຊິດ

ຄຳວ່າ ໂລກ ອະທິບາຍວ່າ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ວິປັດຕິພະວະໂລກ ວິປັດຕິ ສຳພະວະໂລກ ສຳປັດຕິພະວະໂລກ ສຳປັດຕິວິພະວະໂລກ

ໂລກ ໑ ຄື ສັດໂລກທັງປວງດຳຣົງຢູ່ໄດ້ຍ້ອນອາຫານ ຯລຯ

ໂລກ ໑໗ ຄື ທາດ ໑໗

ຄຳວ່າ ໃຫ້ສະຫວ່າງສະໄຫວ ອະທິບາຍວ່າ ບຸກຄົນນັ້ນເຮັດໂລກນີ້ໃຫ້ສະຫວ່າງສະໄຫວ ແຈ້ງຊັດ ຍ້ອນເປັນຜູ້ຮູ້ພ້ອມສະເພາະຕາມສະພາວະທີ່ມີຄວາມໝາຍວ່າຝຶກຕົນກະທຳໂລກນີ້ໃຫ້ສະຫວ່າງສະໄຫວ ແຈ້ງຊັດ ຍ້ອນເປັນຜູ້ຮູ້ພ້ອມສະເພາະຕາມສະພາວະທີ່ມີຄວາມໝາຍວ່າສະງົບຕົນ ກະທຳໂລກນີ້ໃຫ້ສະຫວ່າງສະໄຫວ ແຈ້ງຊັດ ຍ້ອນເປັນຜູ້ຮູ້ພ້ອມສະເພາະຕາມສະພາວະທີ່ມີຄວາມໝາຍວ່າຍັງຕົນໃຫ້ປະຣິນິບພານ ຯລຯ ກະທຳໂລກນີ້ໃຫ້ສະຫວ່າງສະໄຫວ ແຈ້ງຊັດ ຍ້ອນເປັນຜູ້ຮູ້ພ້ອມສະເພາະຕາມສະພາວະທີ່ມີຄວາມໝາຍວ່າຍັງຕົນໃຫ້ຕັ້ງຢູ່ໃນນິໂຣດ

ຄຳວ່າ ເໝືອນດວງຈັນພົ້ນຈາກໝອກ ອະທິບາຍວ່າ ກິເລດເໝືອນໝອກ

ອະຣິຍະຍານເໝືອນດວງຈັນ ພິກຂຸເໝືອນຈັນທິມະເທບພະບຸດ ພິກຂຸພົ້ນຈາກກິເລດທັງປວງແລ້ວ ກະທຳໂລກນີ້ໃຫ້ສະຫວ່າງສະໄຫວ ເປ່ງປັ່ງ ແລະຮຸ່ງເຮືອງ ເໝືອນດວງຈັນພົ້ນຈາກໝອກ ພົ້ນຈາກຄວັນແລະທຸລີ ພົ້ນຈາກຝາມືຣາຫູ ເຮັດໂອກາດໂລກໃຫ້ສະຫວ່າງສະໄຫວ ເປ່ງປັ່ງ ແລະ ຮຸ່ງເຮືອງສັນນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເໝືອນດວງຈັນພົ້ນຈາກໝອກ

ຍານໃນໂວທະນະ ໑໓ ປະການ ເປັນແນວນີ້

**ໂວທະນະຍານະນິດເທດທີ ໔ ຈົບ**

**ພານະວານຈົບ**

# ໕. ສະໂຕກາຣິຍານະນິດເທດ

## ສະແດງຍານໃນການກະທຳສະຕິ

[໑໖໓] ຍານໃນການກະທຳສະຕິ ໓໒ ປະການ ເປັນແນວໃດ?

ຄື ພິກຂຸໃນບ່ອນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ນັ່ງຄູ້ບັນລັງ ຕັ້ງກາຍກົງ ດຳຣົງສະຕິໄວ້ສະເພາະໜ້າ ພິກຂຸນັ້ນມີສະຕິຫັນໃຈເຂົ້າມີສະຕິຫັນໃຈອອກ ຄື

| | | |
|---|---|---|
| ໑. ເມື່ອຫັນໃຈເຂົ້າຍາວ | ກໍຣູ້ຊັດແຈ້ງວ່າຫັນໃຈ | ເຂົ້າຍາວ |
| ໒. ເມື່ອຫັນໃຈອອກຍາວ | ກໍຣູ້ຊັດແຈ້ງວ່າຫັນໃຈ | ອອກຍາວ |
| ໓. ເມື່ອຫັນໃຈເຂົ້າສັ້ນ | ກໍຣູ້ຊັດແຈ້ງວ່າຫັນໃຈ | ເຂົ້າສັ້ນ |
| ໔. ເມື່ອຫັນໃຈອອກສັ້ນ | ກໍຣູ້ຊັດແຈ້ງວ່າຫັນໃຈ | ອອກສັ້ນ |
| ໕. ຕັ້ງໃຈຣູ້ວ່າ ເຮົາກຳນົດ | ຣູ້ກອງລົມທັງປວງ | ຫັນໃຈເຂົ້າ |
| ໖. ຕັ້ງໃຈຣູ້ວ່າ ເຮົາກຳນົດ | ຣູ້ກອງລົມທັງປວງ | ຫັນໃຈອອກ |
| ໗. ຕັ້ງໃຈຣູ້ວ່າ ເຮົາຣະງັບ | ກາຍສັງຂານ | ຫັນໃຈເຂົ້າ |
| ໘. ຕັ້ງໃຈຣູ້ວ່າ ເຮົາຣະງັບ | ກາຍສັງຂານ | ຫັນໃຈອອກ |
| ໙. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ປີຕິ | ຫັນໃຈເຂົ້າ |
| ໑໐. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ປີຕິ | ຫັນໃຈອອກ |
| ໑໑. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ສຸກ | ຫັນໃຈເຂົ້າ |
| ໑໒. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ສຸກ | ຫັນໃຈອອກ |
| ໑໓. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ຈິດຕະສັງຂານ | ຫັນໃຈເຂົ້າ |
| ໑໔. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ຈິດຕະສັງຂານ | ຫັນໃຈອອກ |
| ໑໕. ຕັ້ງໃຈຣູ້ວ່າ ເຮົາຣະງັບ | ຈິດຕະສັງຂານ | ຫັນໃຈເຂົ້າ |
| ໑໖. ຕັ້ງໃຈຣູ້ວ່າ ເຮົາຣະງັບ | ຈິດຕະສັງຂານ | ຫັນໃຈອອກ |
| ໑໗. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ຈິດ | ຫັນໃຈເຂົ້າ |
| ໑໘. ຕັ້ງໃຈຣູ້ວ່າ ເຮົາກຳນົດຣູ້ | ຈິດ | ຫັນໃຈອອກ |
| ໑໙. ຕັ້ງໃຈຣູ້ວ່າ ເຮົາທຳ | ຈິດໃຫ້ບັນເທີງ | ຫັນໃຈເຂົ້າ |
| ໒໐. ຕັ້ງໃຈຣູ້ວ່າ ເຮົາທຳ | ຈິດໃຫ້ບັນເທີງ | ຫັນໃຈອອກ |
| ໒໑. ຕັ້ງໃຈຣູ້ວ່າ ເຮົາຕັ້ງ | ຈິດໄວ້ | ຫັນໃຈເຂົ້າ |
| ໒໒. ຕັ້ງໃຈຣູ້ວ່າ ເຮົາຕັ້ງ | ຈິດໄວ້ | ຫັນໃຈອອກ |
| ໒໓. ຕັ້ງໃຈຣູ້ວ່າ ເຮົາເປື້ອງ | ຈິດ | ຫັນໃຈເຂົ້າ |
| ໒໔. ຕັ້ງໃຈຣູ້ວ່າ ເຮົາເປື້ອງ | ຈິດ | ຫັນໃຈອອກ |

| | | | |
|---|---|---|---|
| ໔໕. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນວ່າ | ບໍ່ທ່ຽງ | ຫັນໃຈເຂົ້າ |
| ໔໖. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນວ່າ | ບໍ່ທ່ຽງ | ຫັນໃຈອອກ |
| ໔໗. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມຄາຍອອກໄດ້ | ຫັນໃຈເຂົ້າ |
| ໔໘. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມຄາຍອອກໄດ້ | ຫັນໃຈອອກ |
| ໔໙. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມດັບໄປ | ຫັນໃຈເຂົ້າ |
| ໕໐. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມດັບໄປ | ຫັນໃຈອອກ |
| ໕໑. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມສະລະຄືນ | ຫັນໃຈເຂົ້າ |
| ໕໔. ຕັ້ງໃຈຮູ້ວ່າ | ເຮົາພິຈາລະນາເຫັນ | ຄວາມສະລະຄືນ | ຫັນໃຈອອກ |

[໑໖໔] ຄຳວ່າ ໃນບ່ອນນີ້ ອະທິບາຍວ່າ ໃນຄວາມເຫັນນີ້ ຄື ໃນຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃນບ່ອນນີ້

ຄຳວ່າ ພິກຂຸ ອະທິບາຍວ່າ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ພຣະເສຂະ ຫຼື ເປັນພຣະອະຣະຫັນ ຜູ້ມີທຳບໍ່ກຳເຣີບ

ຄຳວ່າ ປ່າ ອະທິບາຍວ່າ ສະຖານທີ່ທຸກແຫ່ງນອກຈາກເສົາເຂື່ອນອອກໄປ ສະຖານທີ່ນັ້ນ ທັງໝົດ ຊື່ວ່າປ່າ

ຄຳວ່າ ເຫງົ້າໄມ້ ອະທິບາຍວ່າ ອາສະນະຂອງພິກຂຸເຊິ່ງຈັດໄວ້ທີ່ເຫງົ້າໄມ້ ຄື ຕຽງ ຕັ່ງ ຟູກ ເສື່ອອ່ອນ ທ່ອນໜັງ ເຄື່ອງປູລາດເຮັດດ້ວຍຫຍ້າ ເຄື່ອງປູລາດເຮັດດ້ວຍໃບໄມ້ ຫຼືເຄື່ອງປູລາດເຮັດດ້ວຍເຟືອງ ພິກຂຸຍືນ ຍ່າງ ນັ່ງ ຫຼືນອນທີ່ອາສະນະນັ້ນ

ຄຳວ່າ ວ່າງ ອະທິບາຍວ່າ ເປັນສະຖານທີ່ບໍ່ມີຄົນຫຼາຍ ບໍ່ວ່າຈະເປັນຄະລືຫັດ ຫຼືບັນພະຊິດ

ຄຳວ່າ ເຮືອນ ອະທິບາຍວ່າ ວິຫານ ໂຮງທີ່ມຸງໄວ້ເຄິ່ງໜຶ່ງ ຜາສາດ ເຮືອນໂລ້ນ ຖ້ຳ

ຄຳວ່າ ນັ່ງຄູ້ບັນລັງ ອະທິບາຍວ່າ ພິກຂຸນັ້ນເປັນຜູ້ນັ່ງຄູ້ບັນລັງ

ຄຳວ່າ ຕັ້ງກາຍກົງ ອະທິບາຍວ່າ ກາຍເປັນກາຍທີ່ພິກຂຸນັ້ນຕັ້ງໄວ້ກົງ

ຄຳວ່າ ສະເພາະ ໃນຄຳວ່າ ດຳຣົງສະຕິໄວ້ສະເພາະໜ້າ ມີການກຳນົດຖືເອົາເປັນອັດຖະ ຄຳວ່າ ໜ້າ ມີການນຳອອກເປັນອັດຖະ ຄຳວ່າ ສະຕິ ມີການເຂົ້າໄປຕັ້ງໄວ້ເປັນອັດຖະ

ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ດຳຣົງສະຕິໄວ້ສະເພາະໜ້າ

[໑໖໕] ຄຳວ່າ ມີສະຕິ ຫັນໃຈເຂົ້າ ອະທິບາຍວ່າ ພິກຂຸເຮັດສະຕິໂດຍອາການ ໕໔ ຢ່າງ

ຄື ພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ສະຕິຍ່ອມຕັ້ງໝັ້ນ ຊື່ວ່າເປັນຜູ້ເຮັດສະຕິດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນ ເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ຊື່ວ່າເປັນ ຜູ້ເຮັດສະຕິດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ດ້ວຍ

ອຳນາດລົມຫັນໃຈເຂົ້າສັ້ນ ສະຕິຍ່ອມຕັ້ງໝັ້ນ ຊື່ວ່າເປັນຜູ້ເຮັດສະຕິດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກສັ້ນ ສະຕິຍ່ອມຕັ້ງໝັ້ນ ຊື່ວ່າເປັນຜູ້ເຮັດສະຕິດ້ວຍສະຕິນັ້ນ ດ້ວຍຍານນັ້ນ ฯລฯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າ ສະຕິຍ່ອມຕັ້ງໝັ້ນ ฯລฯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນຫັນໃຈອອກ ສະຕິຍ່ອມຕັ້ງໝັ້ນ ຊື່ວ່າເປັນຜູ້ເຮັດສະຕິດ້ວຍສະຕິນັ້ນ ດ້ວຍຍານນັ້ນ

## ປະຖົມຈະຕຸກກະນິດເທດ

### ສະແດງໝວດ ໔ ແຫ່ງຍານທີ ໑

[໑໖໖] ພິກຂຸເມື່ອຫັນໃຈເຂົ້າຍາວກໍຮູ້ຊັດແຈ້ງວ່າຫັນໃຈເຂົ້າຍາວ ເມື່ອຫັນໃຈອອກຍາວກໍຮູ້ຊັດແຈ້ງວ່າຫັນໃຈອອກຍາວ ເປັນແນວໃດ?

ຄື ພິກຂຸຫັນໃຈເຂົ້າຍາວໃນການທີ່ນັບວ່າຍາວ ຫັນໃຈອອກຍາວໃນການທີ່ນັບວ່າຍາວ ຫັນໃຈເຂົ້າຫັນໃຈອອກຍາວໃນການທີ່ນັບວ່າຍາວ ສັນທະເກີດຂຶ້ນແກ່ທ່ານຜູ້ທັງຫັນໃຈເຂົ້າ ຫັນໃຈອອກຍາວໃນການທີ່ນັບວ່າຍາວ ຫັນໃຈເຂົ້າຍາວທີ່ລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບວ່າຍາວ ຫັນໃຈອອກຍາວລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບວ່າຍາວ ທ່ານທັງຫັນໃຈເຂົ້າຫັນໃຈອອກຍາວທີ່ລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບວ່າຍາວ ຄວາມປາໂມດ ເກີດຂຶ້ນແກ່ທ່ານຜູ້ທັງຫັນໃຈເຂົ້າຫັນໃຈອອກຍາວທີ່ລະອຽດກວ່ານັ້ນ ດ້ວຍອຳນາດສັນທະ ໃນການທີ່ນັບວ່າຍາວ ຫັນໃຈເຂົ້າຍາວລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບວ່າຍາວ ຫັນໃຈອອກຍາວລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບວ່າຍາວ ຫັນໃຈເຂົ້າຫັນໃຈອອກຍາວລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບວ່າຍາວ ຈິດຂອງທ່ານຜູ້ທັງຫັນໃຈເຂົ້າຫັນໃຈອອກຍາວທີ່ລະອຽດກວ່ານັ້ນ ດ້ວຍອຳນາດຄວາມປາໂມດໃນການທີ່ນັບວ່າຍາວ ຍ່ອມຫຼີກອອກຈາກການຫັນໃຈເຂົ້າຫັນໃຈອອກຍາວ ອຸເປກຂາຍ່ອມຕັ້ງຢູ່

ກາຍຄືລົມຫັນໃຈເຂົ້າຫັນໃຈອອກຍາວດ້ວຍອາການ ໙ ແນວນີ້ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນກາຍໃນກາຍ

[໑໖໗] ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນກາຍນັ້ນເປັນແນວໃດ?

ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນບໍ່ຢຶດຖື ເມື່ອພິຈາລະນາ ເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິ (ຄວາມຍິນດີ) ໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະ (ຄວາມຢຶດຖື)ໄດ້ ພິກຂຸນັ້ນພິຈາລະນາເຫັນກາຍນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ
໒. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າ ຫັນໃຈອອກຍາວ ເວທະນາຈຶ່ງຜາກົດເກີດຂື້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ ສັນຍາຈຶ່ງຜາກົດເກີດຂື້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ ວິຕົກຈຶ່ງຜາກົດເກີດຂື້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ

ເວທະນາຍ່ອມຜາກົດເກີດຂື້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປເປັນແນວໃດ?

ຄວາມເກີດຂື້ນແຫ່ງເວທະນາຍ່ອມຜາກົດ ເປັນແນວໃດ?

ຄື ຄວາມເກີດຂື້ນແຫ່ງເວທະນາຍ່ອມຜາກົດໂດຍຄວາມເກີດຂື້ນແຫ່ງປັດໄຈວ່າ ເພາະອະວິດຊາເກີດ ເວທະນາຈຶ່ງເກີດ ฯลฯ ຍ້ອນຕັນຫາເກີດ ເວທະນາຈຶ່ງເກີດ ฯลฯ ຍ້ອນກຳເກີດເວທະນາຈຶ່ງເກີດ ຄວາມເກີດຂື້ນແຫ່ງເວທະນາຍ່ອມຜາກົດໂດຍຄວາມເກີດຂື້ນແຫ່ງປັດໄຈວ່າຍ້ອນຜັດສະເກີດ ເວທະນາຈຶ່ງເກີດ ແມ່ນເມື່ອເຫັນລັກສະນະແຫ່ງຄວາມເກີດຂື້ນ ຄວາມເກີດຂື້ນແຫ່ງເວທະນາກໍຍ່ອມຜາກົດ ຄວາມເກີດຂື້ນແຫ່ງເວທະນາຍ່ອມຜາກົດແນວນີ້

ຄວາມເຂົ້າໄປຕັ້ງຢູ່ແຫ່ງເວທະນາຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸມະນະສິການໂດຍຄວາມບໍ່ທ່ຽງ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມສິ້ນໄປຍ່ອມຜາກົດ ເມື່ອມະນະສິການໂດຍຄວາມເປັນທຸກ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມເປັນໄພ ຍ່ອມ

ຜາກົດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຄວາມເຂົ້າໄປຕັ້ງຢູ່ໂດຍສູນຍະຕະ (ຄວາມວ່າງ) ຍ່ອມຜາກົດ ຄວາມເຂົ້າໄປຕັ້ງຢູ່ແຫ່ງເວທະນາຍ່ອມຜາກົດແນວນີ້

ຄວາມດັບໄປແຫ່ງເວທະນາຍ່ອມຜາກົດ ເປັນແນວໃດ?

ຄື ຄວາມດັບໄປແຫ່ງເວທະນາ ຍ່ອມຜາກົດໂດຍຄວາມດັບໄປແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ເວທະນາຈຶ່ງດັບ ฯລฯ ຍ້ອນຕັນຫາດັບ ເວທະນາຈຶ່ງດັບ ฯລฯ ຍ້ອນກຳດັບ ເວທະນາຈຶ່ງດັບ ຄວາມດັບໄປແຫ່ງເວທະນາ ຍ່ອມຜາກົດໂດຍຄວາມດັບໄປແຫ່ງປັດໄຈວ່າ ຍ້ອນຜັດສະດັບ ເວທະນາຈຶ່ງດັບ ແມ່ນເມື່ອເຫັນລັກສະນະແຫ່ງຄວາມຜັນປ່ຽນ ຄວາມດັບໄປແຫ່ງເວທະນາກໍຍ່ອມຜາກົດ ຄວາມດັບໄປແຫ່ງເວທະນາຍ່ອມຜາກົດແນວນີ້ ເວທະນາຍ່ອມ ຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປແນວນີ້

ສັນຍາຍ່ອມຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປເປັນແນວໃດ?

ຄວາມເກີດຂຶ້ນແຫ່ງສັນຍາຍ່ອມຜາກົດ ເປັນແນວໃດ?

ຄື ຄວາມເກີດຂຶ້ນແຫ່ງສັນຍາຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອະວິດຊາເກີດ ສັນຍາຈຶ່ງເກີດ ฯລฯ ຍ້ອນຕັນຫາເກີດ ສັນຍາຈຶ່ງເກີດ ฯລฯ ຍ້ອນກຳເກີດ ສັນຍາຈຶ່ງເກີດ ຄວາມເກີດຂຶ້ນແຫ່ງສັນຍາຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນຜັດສະເກີດ ສັນຍາຈຶ່ງເກີດ ຄວາມເກີດຂຶ້ນແຫ່ງສັນຍາຍ່ອມຜາກົດແນວນີ້

ຄວາມເຂົ້າໄປຕັ້ງຢູ່ແຫ່ງສັນຍາຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸມະນະສິການໂດຍຄວາມບໍ່ທ່ຽງ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມສິ້ນໄປຍ່ອມຜາກົດ ເມື່ອມະນະສິການໂດຍຄວາມເປັນທຸກ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມເປັນໄພຍ່ອມຜາກົດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຄວາມເຂົ້າໄປຕັ້ງຢູ່ໂດຍສູນຍະຕະຍ່ອມຜາກົດ ຄວາມເຂົ້າໄປຕັ້ງຢູ່ແຫ່ງສັນຍາຍ່ອມຜາກົດແນວນີ້

ຄວາມດັບໄປແຫ່ງສັນຍາຍ່ອມຜາກົດ ເປັນແນວໃດ?

ຄື ຄວາມດັບໄປແຫ່ງສັນຍາຍ່ອມຜາກົດໂດຍຄວາມດັບໄປແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ສັນຍາຈຶ່ງດັບ ฯລฯ ຍ້ອນຕັນຫາດັບ ສັນຍາຈຶ່ງດັບ ฯລฯ ຍ້ອນກຳດັບ ສັນຍາຈຶ່ງດັບ ຄວາມດັບໄປແຫ່ງສັນຍາຍ່ອມຜາກົດໂດຍຄວາມດັບໄປແຫ່ງປັດໄຈວ່າ ຍ້ອນຜັດສະດັບ ສັນຍາຈຶ່ງດັບ ແມ່ນເມື່ອເຫັນລັກສະນະແຫ່ງຄວາມຜັນປ່ຽນ ຄວາມດັບໄປແຫ່ງສັນຍາຍ່ອມຜາກົດ ຄວາມດັບໄປແຫ່ງສັນຍາຍ່ອມຜາກົດແນວນີ້ ສັນຍາຍ່ອມ ຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປແນວນີ້

ວິຕົກຍ່ອມຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປເປັນແນວໃດ?

ຄວາມເກີດຂຶ້ນແຫ່ງວິຕົກຍ່ອມຜາກົດ ເປັນແນວໃດ?

ຄື ຄວາມເກີດຂຶ້ນແຫ່ງວິຕົກຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອະວິດຊາເກີດ ວິຕົກຈຶ່ງເກີດ ຯລຯ ຍ້ອນຕັນຫາເກີດ ວິຕົກຈຶ່ງເກີດ ຯລຯ ຍ້ອນກຳເກີດວິຕົກຈຶ່ງເກີດ ຄວາມເກີດຂຶ້ນແຫ່ງວິຕົກຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນສັນຍາເກີດ ວິຕົກຈຶ່ງເກີດ ແມ່ນເມື່ອເຫັນລັກສະນະແຫ່ງຄວາມເກີດຂຶ້ນ ຄວາມເກີດຂຶ້ນແຫ່ງວິຕົກກໍຍ່ອມຜາກົດ ຄວາມເກີດຂຶ້ນແຫ່ງວິຕົກຍ່ອມຜາກົດແນວນີ້

ຄວາມເຂົ້າໄປຕັ້ງຢູ່ແຫ່ງວິຕົກຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອມະນະສິການໂດຍຄວາມບໍ່ທ່ຽງ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມສິ້ນໄປຍ່ອມຜາກົດ ເມື່ອມະນະສິການໂດຍຄວາມເປັນທຸກ ຄວາມເຂົ້າໄປຕັ້ງຢູ່ໂດຍຄວາມເປັນໄພຍ່ອມຜາກົດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຄວາມເຂົ້າໄປຕັ້ງຢູ່ໂດຍສູນຍະຕະຍ່ອມຜາກົດ ຄວາມເຂົ້າໄປຕັ້ງຢູ່ແຫ່ງວິຕົກຍ່ອມຜາກົດແນວນີ້

ຄວາມດັບໄປແຫ່ງວິຕົກຍ່ອມຜາກົດ ເປັນແນວໃດ?

ຄື ຄວາມດັບໄປແຫ່ງວິຕົກຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນອະວິດຊາດັບ ວິຕົກຈຶ່ງດັບ ຯລຯ ຍ້ອນຕັນຫາດັບ ວິຕົກຈຶ່ງດັບ ຯລຯ ຍ້ອນກຳດັບ ວິຕົກຈຶ່ງດັບ ຄວາມດັບໄປແຫ່ງວິຕົກຍ່ອມຜາກົດໂດຍຄວາມເກີດຂຶ້ນແຫ່ງປັດໄຈວ່າ ຍ້ອນສັນຍາດັບ ວິຕົກຈຶ່ງດັບ ແມ່ນເມື່ອເຫັນລັກສະນະຄວາມຜັນປ່ຽນ ຄວາມດັບໄປແຫ່ງວິຕົກກໍຍ່ອມຜາກົດ ຄວາມດັບໄປແຫ່ງວິຕົກຍ່ອມຜາກົດແນວນີ້ ວິຕົກຍ່ອມຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປແນວນີ້

[໑໖໗] ພິກຂຸເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຫັນໃຈອອກຍາວ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນແລະຮູ້ແຈ້ງທຳ ອັນມີຄວາມສະງົບເປັນປະໂຫຍດ ໃຫ້ພະລະທັງຫຼາຍປະຊຸມລົງ ຯລຯ ໃຫ້ໂພດຊົງທັງຫຼາຍປະຊຸມລົງ ຯລຯ ໃຫ້ມັກປະຊຸມລົງ ຯລຯ ໃຫ້ທຳທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ

ຄຳວ່າ ໃຫ້ອິນຊີທັງຫຼາຍປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ອິນຊີທັງຫຼາຍ ປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ສັດທິນຊີປະຊຸມລົງ ຍ້ອນມີສະພາວະນ້ອມໃຈເຊື່ອ ໃຫ້ວິຣິຍິນຊີປະຊຸມລົງ ຍ້ອນມີສະພາວະປະຄອງໄວ້ ໃຫ້ສະຕິນຊີປະຊຸມລົງ ຍ້ອນມີສະພາວະເຂົ້າໄປຕັ້ງໄວ້ໃຫ້ສະມາທິນຊີປະຊຸມລົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໃຫ້ປັນຍິນຊີປະຊຸມລົງ ຍ້ອນມີສະພາວະເຫັນ ບຸກຄົນນີ້ໃຫ້ອິນຊີເຫຼົ່ານີ້ປະຊຸມລົງໃນອາລົມນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃຫ້ອິນຊີທັງຫຼາຍປະຊຸມລົງ

ຄຳວ່າ ຮູ້ຊັດແຈ້ງໂຄຈອນ ອະທິບາຍວ່າ ຮູ້ຊັດແຈ້ງສິ່ງທີ່ເປັນອາລົມຂອງບຸກຄົນນັ້ນວ່າເປັນໂຄຈອນແຫ່ງທຳນັ້ນ ຮູ້ຊັດແຈ້ງສິ່ງທີ່ເປັນໂຄຈອນຂອງບຸກຄົນນັ້ນວ່າເປັນອາລົມແຫ່ງທຳນັ້ນ

ຄຳວ່າ ຮູ້ຊັດແຈ້ງ ອະທິບາຍວ່າ ບຸກຄົນຜູ້ຮູ້ຊັດແຈ້ງ ຄືຜູ້ມີປັນຍາ

ຄຳວ່າ ສະຫງົບ ອະທິບາຍວ່າ ອາລົມຜາກົດເປັນຄວາມສະຫງົບ ຈິດບໍ່ຟຸ້ງຊ່ານເປັນຄວາມສະຫງົບ ຈິດຕັ້ງໝັ້ນເປັນຄວາມສະຫງົບ ຈິດຜ່ອງແຜ້ວເປັນຄວາມສະຫງົບ

ຄຳວ່າ ປະໂຫຍດ ອະທິບາຍວ່າ ສະພາວະທີ່ບໍ່ມີໂທດເປັນປະໂຫຍດ ສະພາວະທີ່ບໍ່ມີກິເລດເປັນປະໂຫຍດ ສະພາວະທີ່ມີຄວາມຜ່ອງແຜ້ວເປັນປະໂຫຍດ ສະພາວະທີ່ປະເສີດເປັນປະໂຫຍດ

ຄຳວ່າ ຮູ້ແຈ້ງ ອະທິບາຍວ່າ ຮູ້ແຈ້ງສະພາວະທີ່ອາລົມຜາກົດ ຮູ້ແຈ້ງສະພາວະທີ່ຈິດບໍ່ຟຸ້ງຊ່ານ ຮູ້ແຈ້ງສະພາວະທີ່ຈິດຕັ້ງໝັ້ນ ຮູ້ແຈ້ງສະພາວະທີ່ຈິດຜ່ອງແຜ້ວ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະຫງົບເປັນປະໂຫຍດ

ຄຳວ່າ ໃຫ້ພະລະທັງຫຼາຍປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ພະລະທັງຫຼາຍປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ສັດທາພະລະປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ໃຫ້ວິຣິຍະພະລະປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ໃຫ້ສະຕິພະລະປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ໃຫ້ສະມາທິພະລະປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອຸດທັດຈະ ໃຫ້ປັນຍາພະລະປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອະວິດຊາ ບຸກຄົນນີ້ໃຫ້ພະລະເຫຼົ່ານີ້ປະຊຸມລົງໃນອາລົມນີ້ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃຫ້ພະລະທັງຫຼາຍປະຊຸມລົງ

ຄຳວ່າ ຮູ້ຊັດແຈ້ງໂຄຈອນ ອະທິບາຍວ່າ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງ ທຳອັນມີຄວາມສະຫງົບເປັນປະໂຫຍດ

ຄຳວ່າ ໃຫ້ໂພດຊົງທັງຫຼາຍປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ໂພດຊົງທັງຫຼາຍປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ສະຕິສຳໂພດຊົງປະຊຸມລົງ ຍ້ອນມີສະພາວະເຂົ້າໄປຕັ້ງໄວ້ ໃຫ້ທຳມະວິຈະຍະສຳໂພດຊົງປະຊຸມລົງ ຍ້ອນມີສະພາວະເລືອກເຟັ້ນ ໃຫ້ວິຣິຍະສຳໂພດຊົງປະຊຸມລົງ ຍ້ອນມີສະພາວະປະຄອງໄວ້ ໃຫ້ປີຕິສຳໂພດຊົງປະຊຸມລົງ ຍ້ອນມີສະພາວະແຜ່ຊ່ານໄປ ໃຫ້ປັດສັດທິສຳໂພດຊົງປະຊຸມລົງ ຍ້ອນມີສະພາວະສະຫງົບ ໃຫ້ສະມາທິສຳໂພດຊົງປະຊຸມລົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໃຫ້ອຸເປກຂາສຳໂພດຊົງປະຊຸມລົງ ຍ້ອນມີສະພາວະພິຈາລະນາ ບຸກຄົນນີ້ໃຫ້ໂພດຊົງເຫຼົ່ານີ້ປະຊຸມລົງໃນອາລົມນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃຫ້ໂພດຊົງທັງຫຼາຍປະຊຸມລົງ

ຄຳວ່າ ຮູ້ຊັດແຈ້ງໂດຍຈອບ ອະທິບາຍວ່າ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງ ທຳອັນມີຄວາມສະງົບເປັນປະໂຫຍດ

ຄຳວ່າ ໃຫ້ມັກປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ມັກປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ສຳມາທິດຖິປະຊຸມລົງ ຍ້ອນມີສະພາວະເຫັນ ໃຫ້ສຳມາສັງກັບປະປະຊຸມລົງ ຍ້ອນມີສະພາວະນຶກຕອງ ໃຫ້ສຳມາວາຈາປະຊຸມລົງ ຍ້ອນມີສະພາວະກຳນົດ ໃຫ້ສຳມາກຳມັນຕະປະຊຸມລົງ ຍ້ອນມີສະພາວະເກີດຂຶ້ນ ໃຫ້ສຳມາອາຊີວະປະຊຸມລົງ ຍ້ອນມີສະພາວະຜ່ອງແຜ້ວ ໃຫ້ສຳມາວາຍາມະປະຊຸມລົງ ຍ້ອນມີສະພາວະປະຄອງໄວ້ ໃຫ້ສຳມາສະຕິປະຊຸມລົງ ຍ້ອນມີສະພາວະເຂົ້າໄປຕັ້ງໄວ້ ໃຫ້ສຳມາສະມາທິປະຊຸມລົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ບຸກຄົນນີ້ໃຫ້ມັກນີ້ປະຊຸມລົງໃນອາລົມນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃຫ້ມັກປະຊຸມລົງ

ຄຳວ່າ ຮູ້ຊັດແຈ້ງໂດຍຈອບ ອະທິບາຍວ່າ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງ ທຳອັນມີຄວາມສະງົບເປັນປະໂຫຍດ

ຄຳວ່າ ໃຫ້ທຳທັງຫຼາຍປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ທຳທັງຫຼາຍ ປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ອິນຊີທັງຫຼາຍປະຊຸມລົງ ຍ້ອນມີສະພາວະເປັນໃຫຍ່ ໃຫ້ພະລະທັງຫຼາຍປະຊຸມລົງ ຍ້ອນມີສະພາວະບໍ່ຫວັ່ນໄຫວ ໃຫ້ໂພດຊົງທັງຫຼາຍປະຊຸມລົງ ຍ້ອນມີສະພາວະເປັນທຳເຄື່ອງນຳອອກ ໃຫ້ມັກປະຊຸມລົງ ຍ້ອນມີສະພາວະເປັນເຫດ ໃຫ້ສະຕິປັດຖານປະຊຸມລົງ ຍ້ອນມີສະພາວະເຂົ້າໄປຕັ້ງໄວ້ ໃຫ້ສຳມັບປະທານປະຊຸມລົງ ຍ້ອນມີສະພາວະເລີ່ມຕັ້ງຄວາມພຽນ ໃຫ້ອິດທິບາດປະຊຸມລົງ ຍ້ອນມີສະພາວະໃຫ້ສຳເລັດ ໃຫ້ສັດຈະປະຊຸມລົງ ຍ້ອນມີສະພາວະເປັນຂອງແທ້ ໃຫ້ສະມະຖະປະຊຸມລົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໃຫ້ວິປັດສະນາປະຊຸມລົງ ຍ້ອນມີສະພາວະພິຈາລະນາເຫັນ ໃຫ້ສະມະຖະ ແລະວິປັດສະນາປະຊຸມລົງ ຍ້ອນມີສະພາວະເປັນທຳມີຣົດເປັນແນວດຽວກັນ ໃຫ້ທຳເປັນຄູ່ກັນ ປະຊຸມລົງ ຍ້ອນມີສະພາວະບໍ່ລ່ວງເລີຍກັນ ໃຫ້ສີລະວິສຸດທິປະຊຸມລົງ ຍ້ອນມີສະພາວະສັງລວມ ໃຫ້ຈິດຕະວິສຸດທິປະຊຸມລົງ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ໃຫ້ທິດຖິວິສຸດທິປະຊຸມລົງ ຍ້ອນມີສະພາວະເຫັນ ໃຫ້ວິໂມກປະຊຸມລົງ ຍ້ອນມີສະພາວະລຸດພົ້ນ ໃຫ້ວິດຊາປະຊຸມລົງ ຍ້ອນມີສະພາວະແທງຕະຫຼອດ ໃຫ້ວິມຸດຕິປະຊຸມລົງ ຍ້ອນມີສະພາວະສະລະ ໃຫ້ຍານໃນຄວາມສິ້ນໄປປະຊຸມລົງ ຍ້ອນມີສະພາວະຕັດຂາດ ໃຫ້ອະນຸບປາທະຍານປະຊຸມລົງ ຍ້ອນມີສະພາວະຣະງັບ ໃຫ້ສັນທະປະຊຸມລົງ ຍ້ອນມີສະພາວະເປັນມູນໃຫ້ມະນະສິການປະຊຸມລົງ ຍ້ອນມີສະພາວະເປັນສະມຸດຖານ ໃຫ້ຜັດສະປະຊຸມລົງ ຍ້ອນມີສະພາວະເປັນທີ່ປະຊຸມ ໃຫ້ເວທະນາປະຊຸມລົງ ຍ້ອນມີສະພາວະເປັນທີ່ລວມ ໃຫ້ສະມາທິປະຊຸມລົງ ຍ້ອນມີສະພາວະເປັນປະທານ ໃຫ້ສະຕິປະຊຸມລົງຍ້ອນມີສະພາວະເປັນໃຫຍ່ ໃຫ້ສະຕິສຳປະຊັນຍະປະຊຸມລົງ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່ານັ້ນ ໃຫ້ວິມຸດຕິປະຊຸມລົງ ຍ້ອນມີສະພາວະ

ເປັນແກ່ນສານ ໃຫ້ທຳທີ່ຢັ່ງລົງສູ່ອະມະຕະຄືນິບພານປະຊຸມລົງ ຍ້ອນມີສະພາວະເປັນບ່ອນສຸດບຸກຄົນນີ້ ໃຫ້ທຳເຫຼົ່ານີ້ປະຊຸມລົງໃນອາລົມນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃຫ້ທຳທັງຫຼາຍປະຊຸມລົງ

ຄຳວ່າ ຮູ້ຊັດແຈ້ງໂຄຈອນ ອະທິບາຍວ່າ ຮູ້ຊັດແຈ້ງສິ່ງທີ່ເປັນອາລົມຂອງບຸກຄົນນັ້ນວ່າເປັນໂຄຈອນ ຂອງບຸກຄົນນັ້ນ ຮູ້ຊັດແຈ້ງສິ່ງທີ່ເປັນໂຄຈອນຂອງບຸກຄົນນັ້ນວ່າ ເປັນອາລົມຂອງບຸກຄົນນັ້ນ

ຄຳວ່າ ຮູ້ຊັດແຈ້ງ ອະທິບາຍວ່າ ບຸກຄົນຜູ້ຮູ້ຊັດແຈ້ງ ຄື ຜູ້ມີປັນຍາ

ຄຳວ່າ ສະງົບ ອະທິບາຍວ່າ ອາລົມຜາກົດເປັນຄວາມສະງົບ ຈິດບໍ່ຟຸ້ງຊ່ານເປັນຄວາມສະງົບ ຈິດຕັ້ງໝັ້ນເປັນຄວາມສະງົບ ຈິດຜ່ອງແຜ້ວເປັນຄວາມສະງົບ

ຄຳວ່າ ປະໂຫຍດ ອະທິບາຍວ່າ ສະພາວະທີ່ບໍ່ມີໂທດເປັນປະໂຫຍດ ສະພາວະທີ່ບໍ່ມີກິເລດເປັນປະໂຫຍດ ສະພາວະທີ່ມີຄວາມຜ່ອງແຜ້ວເປັນປະໂຫຍດ ສະພາວະທີ່ປະເສີດເປັນປະໂຫຍດ

ຄຳວ່າ ຮູ້ແຈ້ງ ອະທິບາຍວ່າ ຮູ້ແຈ້ງສະພາວະທີ່ອາລົມຜາກົດ ຮູ້ແຈ້ງສະພາວະທີ່ຈິດບໍ່ຟຸ້ງຊ່ານ ຮູ້ແຈ້ງສະພາວະທີ່ຈິດຕັ້ງໝັ້ນ ຮູ້ແຈ້ງສະພາວະທີ່ຈິດຜ່ອງແຜ້ວ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໑)

[໑໖໙] ພິກຂຸເມື່ອຫັນໃຈເຂົ້າສັ້ນກໍຮູ້ຊັດແຈ້ງວ່າຫັນໃຈເຂົ້າສັ້ນ ເມື່ອຫັນໃຈອອກສັ້ນກໍຮູ້ຊັດແຈ້ງວ່າຫັນໃຈອອກສັ້ນ ເປັນແນວໃດ?

ຄື ພິກຂຸຫັນໃຈເຂົ້າສັ້ນໃນການທີ່ນັບໄດ້ບໍ່ຫຼາຍ ຫັນໃຈອອກສັ້ນໃນການທີ່ນັບໄດ້ບໍ່ຫຼາຍທ່ານທັງຫັນໃຈເຂົ້າຫັນໃຈອອກສັ້ນໃນການທີ່ນັບໄດ້ບໍ່ຫຼາຍ ສັນທະເກີດຂຶ້ນແກ່ທ່ານຜູ້ທັງຫັນໃຈເຂົ້າຫັນໃຈອອກສັ້ນໃນການທີ່ນັບໄດ້ບໍ່ຫຼາຍ

ຫັນໃຈເຂົ້າສັ້ນລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບໄດ້ບໍ່ຫຼາຍ ຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບໄດ້ບໍ່ຫຼາຍ ທ່ານທັງຫັນໃຈເຂົ້າ ຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດສັນທະໃນການທີ່ນັບໄດ້ບໍ່ຫຼາຍ ຄວາມປາໂມດຍ່ອມເກີດແກ່ທ່ານຜູ້ທັງຫັນໃຈເຂົ້າຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດ ສັນທະ ໃນການທີ່ນັບໄດ້ບໍ່ຫຼາຍ

ຫັນໃຈເຂົ້າສັ້ນລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບໄດ້ບໍ່ຫຼາຍ ຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບໄດ້ບໍ່ຫຼາຍ ທ່ານທັງຫັນໃຈເຂົ້າຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບໄດ້ບໍ່ຫຼາຍ ຈິດຂອງທ່ານຜູ້ທັງຫັນໃຈເຂົ້າຫັນໃຈອອກສັ້ນລະອຽດກວ່ານັ້ນດ້ວຍອຳນາດຄວາມປາໂມດໃນການທີ່ນັບໄດ້ບໍ່ຫຼາຍ ຍ່ອມຫຼີກອອກຈາກການຫັນໃຈເຂົ້າ ຫັນໃຈອອກສັ້ນ ອຸເປກຂາຍ່ອມຕັ້ງຢູ່

ກາຍຄືລົມຫັນໃຈເຂົ້າຫັນໃຈອອກສັ້ນດ້ວຍອາການ ໙ ແນວນີ້ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນກາຍໃນກາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນກາຍນັ້ນເປັນແນວໃດ? ฯລฯ ພິຈາລະນາເຫັນກາຍນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ๔ ຢ່າງ ຄື ฯລฯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຫັນໃຈອອກສັ້ນ ເວທະນາຈຶ່ງຜາກົດເກີດຂຶ້ນ ฯລฯ ພິກຂຸເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຫັນໃຈອອກສັ້ນ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (๔)

[໑໗໐] ພິກຂຸຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ກອງລົມທັງປວງຫັນໃຈອອກ ເປັນແນວໃດ?

ຄຳວ່າ ກາຍ ອະທິບາຍວ່າ ກາຍມີ ๒ ຢ່າງ ຄື

໑. ນາມກາຍ
๒. ຮູບກາຍ

ນາມກາຍ ເປັນແນວໃດ?

ຄື ເວທະນາ ສັນຍາ ເຈຕະນາ ຜັດສະ ມະນະສິການ ນາມ ນາມກາຍ ແລະສິ່ງທີ່ຮຽກວ່າຈິດຕະສັງຂານ ນີ້ຊື່ວ່ານາມກາຍ

ຮູບກາຍ ເປັນແນວໃດ?

ຄື ມະຫາພູຕະຮູບ ๔ ຮູບທີ່ອາໄສມະຫາພູຕະຮູບ ๔ ລົມຫັນໃຈເຂົ້າຫັນໃຈອອກ ນິມິດແລະສິ່ງທີ່ເນື່ອງກັນເຊິ່ງຮຽກວ່າ ກາຍສັງຂານ ນີ້ຊື່ວ່າຮູບກາຍ

ກາຍເຫຼົ່ານັ້ນຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ສະຕິຍ່ອມຕັ້ງໝັ້ນ ກາຍເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ກາຍ

ເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າສັ້ນ ສະຕິຍ່ອມຕັ້ງໝັ້ນ ກາຍເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ດ້ວຍອຳນາດລົມຫັນໃຈອອກສັ້ນ ສະຕິຍ່ອມຕັ້ງໝັ້ນ ກາຍເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ

ເມື່ອຄຳນຶງເຖິງ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອຮູ້ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອເຫັນ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອພິຈາລະນາ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອອະທິຖານຈິດ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອປະຄອງຄວາມພຽນ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອຕັ້ງສະຕິໄວ້ໝັ້ນ ກາຍເຫຼົ່ານັ້ນ ຍ່ອມຜາກົດ ເມື່ອຕັ້ງຈິດໄວ້ໝັ້ນ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອລະທຳທີ່ຄວນລະ ກາຍເຫຼົ່ານັ້ນ ຍ່ອມຜາກົດ ເມື່ອຈະເລີນທຳທີ່ຄວນຈະເລີນ ກາຍເຫຼົ່ານັ້ນຍ່ອມຜາກົດ ເມື່ອເຮັດໃຫ້ແຈ້ງ ທຳທີ່ຄວນເຮັດໃຫ້ແຈ້ງ ກາຍເຫຼົ່ານັ້ນຍ່ອມຜາກົດ ກາຍເຫຼົ່ານັ້ນຍ່ອມຜາກົດແນວນີ້ ກາຍຄືຄວາມເປັນຜູ້ຮູ້ແຈ້ງກອງລົມທັງປວງຫັນໃຈເຂົ້າຫັນໃຈອອກຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນກາຍໃນກາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນກາຍນັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນກາຍນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ຮູ້ຊັດແຈ້ງກອງລົມທັງປວງຣະວັງລົມຫັນໃຈເຂົ້າຫັນໃຈອອກ ຊື່ວ່າຈິດຕະວິສຸດທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ ຊື່ວ່າ ທິດຖິວິສຸດທິຍ້ອນມີຄວາມໝາຍວ່າເຫັນ

ບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານແລະຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ

ພິກຂຸເມື່ອຄຳນຶງເຖິງສິກຂາ ໓ ນີ້ ຊື່ວ່າສຶກສາ ເມື່ອຮູ້ ຊື່ວ່າສຶກສາ ເມື່ອເຫັນ ຊື່ວ່າ ສຶກສາ ເມື່ອພິຈາລະນາ ຊື່ວ່າສຶກສາ ເມື່ອອະທິຖານຈິດ ຊື່ວ່າສຶກສາ ເມື່ອນ້ອມໃຈເຊື່ອດ້ວຍສັດທາຊື່ວ່າສຶກສາ ເມື່ອປະຄອງຄວາມພຽນ ຊື່ວ່າສຶກສາ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າ ສຶກສາ ເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າສຶກສາ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າສຶກສາ ເມື່ອຮູ້ຍິ່ງທຳ ທີ່ຄວນຮູ້ຍິ່ງ ຊື່

ວ່າສຶກສາ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າສຶກສາ ເມື່ອລະທຳທີ່ຄວນລະ ຊື່ວ່າສຶກສາ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າສຶກສາ ເມື່ອເຮັດໃຫ້ແຈ້ງທຳ ທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າສຶກສາ

ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າຫັນໃຈອອກ ເວທະນາຍ່ອມຜາກົດເກີດຂຶ້ນ ຯລຯ ພິກຂຸ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າຫັນໃຈອອກ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໓)

[໑໗໑] ພິກຂຸຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານຫັນໃຈອອກ ເປັນແນວໃດ?

ກາຍສັງຂານ ເປັນແນວໃດ?

ຄື ລົມຫັນໃຈເຂົ້າຍາວ ເປັນໄປໃນກາຍ ທຳເຫຼົ່ານີ້ເນື່ອງດ້ວຍກາຍ ເປັນກາຍສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດກາຍສັງຂານເຫຼົ່ານັ້ນໃຫ້ສະງົບ ຊື່ວ່າຕັ້ງໃຈຮູ້ຢູ່ ລົມຫັນໃຈອອກຍາວເປັນໄປໃນກາຍ ທຳເຫຼົ່ານີ້ເນື່ອງດ້ວຍກາຍ ເປັນກາຍສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດກາຍສັງຂານເຫຼົ່ານັ້ນໃຫ້ສະງົບ ຊື່ວ່າຕັ້ງໃຈຮູ້ຢູ່ ລົມຫັນໃຈເຂົ້າສັ້ນ ຯລຯ ລົມຫັນໃຈອອກສັ້ນ ຯລຯ ລົມທີ່ພິກຂຸກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າ ຯລຯ

ລົມທີ່ພິກຂຸກຳນົດຮູ້ກອງລົມທັງປວງຫັນໃຈອອກ ເປັນໄປໃນກາຍ ທຳເຫຼົ່ານີ້ເນື່ອງດ້ວຍກາຍ ເປັນກາຍສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດກາຍສັງຂານເຫຼົ່ານັ້ນໃຫ້ສະງົບ ຊື່ວ່າ ຕັ້ງໃຈຮູ້ຢູ່ ຄວາມອ່ອນໄປ ຄວາມນ້ອມໄປ ຄວາມເອນໄປ ຄວາມໂອນໄປ ຄວາມຫວັ່ນໄຫວ ຄວາມດິ້ນຮົນ ຄວາມໂຍກ ຄວາມອຽງແຫ່ງກາຍ ມີຢູ່ ຍ້ອນກາຍສັງຂານເຫັນປານໃດ ພິກຂຸ ຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານເຫັນປານນັ້ນຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບ ກາຍສັງຂານເຫັນປານນັ້ນຫັນໃຈອອກ ຄວາມບໍ່ອ່ອນໄປ ຄວາມບໍ່ນ້ອມໄປ ຄວາມບໍ່ເອນໄປ ຄວາມບໍ່ໂອນໄປ ຄວາມບໍ່ຫວັ່ນໄຫວ ຄວາມບໍ່ດິ້ນຮົນ ຄວາມບໍ່ໂຍກ ຄວາມບໍ່ອຽງແຫ່ງກາຍມີຢູ່ ຍ້ອນກາຍສັງຂານເຫັນປານໃດ ພິກຂຸຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານ ທີ່ລະອຽດສຸຂຸມເຫັນປານນັ້ນຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານທີ່ລະອຽດ ສຸຂຸມເຫັນປານນັ້ນຫັນໃຈອອກ ພິກຂຸຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານຫັນໃຈອອກ ຕາມໄນທີ່ວ່າມານີ້

ເມື່ອເປັນແນວນີ້ ຄວາມໄດ້ລົມກໍບໍ່ຜາກົດ ລົມຫັນໃຈເຂົ້າຫັນໃຈອອກກໍບໍ່ຜາກົດ ອານາປານະສະຕິກໍບໍ່ຜາກົດ ສະມາທິທີ່ປະກອບດ້ວຍອານາປານະສະຕິກໍບໍ່ຜາກົດ ແລະພິກຂຸຜູ້ສະ

ຫຼາດຈະເຂົ້າສະມາບັດ ຫຼື ອອກຈາກສະມາບັດນັ້ນກໍບໍ່ໄດ້ ພິກຂຸຕັ້ງໃຈຮູ້ວ່າ ເຮົາຈະຣະງັບກາຍສັງຂານຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບກາຍສັງຂານຫັນໃຈອອກ

ເມື່ອເປັນແນວນີ້ ຄວາມໄດ້ລົມກໍຜາກົດ ລົມຫັນໃຈເຂົ້າຫັນໃຈອອກກໍຜາກົດ ອານາປານະສະຕິກໍຜາກົດ ສະມາທິທີ່ປະກອບດ້ວຍອານາປານະສະຕິກໍຜາກົດ ແລະພິກຂຸຜູ້ສະຫຼາດຈະເຂົ້າສະມາບັດ ຫຼື ອອກຈາກສະມາບັດນັ້ນກໍໄດ້ ຂໍ້ນັ້ນເໝືອນອັນໃດ

ເໝືອນເມື່ອບຸກຄົນເຄາະກັງສະດານ ສຽງດັງຍ່ອມເປັນໄປກ່ອນ ຍ້ອນກໍານົດໃສ່ໃຈຈົດຈໍານິມິດແຫ່ງສຽງດັງໄດ້ດີແລ້ວ ເມື່ອສຽງດັງຄ່ອຍລົງ ຕໍ່ມາພາຍຫຼັງ ສຽງຄ່ອຍຍ່ອມເປັນໄປ ຍ້ອນກໍານົດໃສ່ໃຈ ຈົດຈໍານິມິດແຫ່ງສຽງດັງໄດ້ດີແລ້ວ ເມື່ອສຽງຄ່ອຍເບົາລົງອີກ ຕໍ່ມາພາຍຫຼັງ ຈິດຈຶ່ງເປັນໄປໄດ້ ແມ່ນຍ້ອນນິມິດແຫ່ງສຽງຄ່ອຍເປັນອາລົມ ລົມຫັນໃຈເຂົ້າຫັນໃຈອອກທີ່ຫຍາບ ກໍສັນນັ້ນຄືກັນ ຍ່ອມເປັນໄປກ່ອນ ຍ້ອນກໍານົດ ໃສ່ໃຈ ຈົດຈໍານິມິດແຫ່ງລົມຫັນໃຈເຂົ້າຫັນໃຈອອກຢ່າງຫຍາບໄດ້ດີແລ້ວ ເມື່ອລົມຫັນໃຈເຂົ້າຫັນໃຈອອກຢ່າງຫຍາບເບົາລົງ ຕໍ່ມາພາຍຫຼັງ ລົມຫັນໃຈເຂົ້າຫັນໃຈອອກຢ່າງລະອຽດຈຶ່ງເປັນໄປ ຍ້ອນກໍານົດ ໃສ່ໃຈ ຈົດຈໍານິມິດແຫ່ງລົມຫັນໃຈເຂົ້າຫັນໃຈອອກ ຢ່າງລະອຽດໄດ້ດີແລ້ວ ເມື່ອລົມຫັນໃຈເຂົ້າຫັນໃຈອອກຢ່າງລະອຽດເບົາລົງອີກ ຕໍ່ມາພາຍຫຼັງ ຈິດຍ່ອມບໍ່ເຖິງຄວາມຟຸ້ງຊ່ານ ແມ່ນຍ້ອນນິມິດແຫ່ງລົມຫັນໃຈເຂົ້າຫັນໃຈອອກຢ່າງລະອຽດເປັນອາລົມ

ເມື່ອເປັນແນວນີ້ ຄວາມໄດ້ລົມກໍຜາກົດ ລົມຫັນໃຈເຂົ້າຫັນໃຈອອກກໍຜາກົດ ອານາປານະສະຕິກໍຜາກົດ ສະມາທິທີ່ປະກອບດ້ວຍອານາປານະສະຕິກໍຜາກົດ ແລະພິກຂຸຜູ້ສະຫຼາດຈະເຂົ້າຫຼືອອກຈາກສະມາບັດນັ້ນກໍໄດ້ ກາຍຄືຄວາມທີ່ບຸກຄົນຣະງັບກາຍສັງຂານຫັນໃຈເຂົ້າຫັນໃຈອອກ ກາຍຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນກາຍໃນກາຍ

ຄໍາວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນກາຍນັ້ນເປັນແນວໃດ? ໆລໆ ພິຈາລະນາເຫັນກາຍນັ້ນ ເປັນແນວນີ້

ຄໍາວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ໆລໆ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ຣະງັບກາຍສັງຂານຣະວັງລົມຫັນໃຈເຂົ້າຫັນໃຈອອກ ຊື່ວ່າຈິດຕະວິສຸດທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ ຊື່ວ່າທິດຖິວິສຸດທິ ຍ້ອນມີຄວາມໝາຍວ່າເຫັນ ໃນບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານແລະຄວາມເຫັນນັ້ນ ຄວາມ

ສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ

ພິກຂຸເມື່ອຄຳນຶງເຖິງສິກຂາ ໓ ນີ້ ຊື່ວ່າສຶກສາ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າສຶກສາ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານທັນໃຈເຂົ້າທັນໃຈອອກ ເວທະນາຍ່ອມຜາກົດເກີດຂຶ້ນ ຯລຯ ພິກຂຸເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານທັນໃຈເຂົ້າທັນໃຈອອກ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໔)

ອະນຸປັດສະນາຍານ ໗ ອຸປັດຖານຸດສະຕິ ໗ ແລະສູດຕັນຕິກະວັດຖຸ ໔ ໃນການພິຈາລະນາເຫັນກາຍໃນກາຍ

**ພານະວານຈົບ**

## ທຸຕິຍະຈະຕຸກກະນິດເທດ

### ສະແດງໝວດ ໔ ແຫ່ງຍານທີ ໔

[໑໓໔] ພິກຂຸຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ປີຕິທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ປີຕິທັນໃຈອອກ ເປັນແນວໃດ?

ປີຕິ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມທັນໃຈເຂົ້າຍາວ ປີຕິແລະປາໂມດຍ່ອມເກີດຂຶ້ນ ຯລຯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມທັນໃຈອອກຍາວ ປີຕິແລະປາໂມດຍ່ອມເກີດຂຶ້ນ ຯລຯ ດ້ວຍ ອຳນາດລົມທັນໃຈເຂົ້າສັ້ນ ຯລຯ ດ້ວຍອຳນາດລົມທັນໃຈອອກສັ້ນ ຯລຯ ດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງທັນໃຈເຂົ້າ ຯລຯ ດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງທັນໃຈອອກ ຯລຯ ດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານທັນໃຈເຂົ້າ ຯລຯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານ ທັນໃຈອອກ ປີຕິແລະປາໂມດຍ່ອມເກີດຂຶ້ນ ປີຕິແລະປາໂມດຄືຄວາມເບີກບານໃຈ ຄວາມບັນເທີງ ຄວາມທັນສາຄວາມຣື່ນເຣີງຈິດ ຄວາມປີ້ມຈິດ ຄວາມດີໃຈ ຄວາມພໍໃຈ ນີ້ຊື່ວ່າປີຕິ

ປີຕິນັ້ນຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມທັນໃຈເຂົ້າທັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ປີຕິນັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມ

ທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ປີຕິນັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ฯລฯ ດ້ວຍອຳນາດລົມຫັນໃຈເຂົ້າສັ້ນ ฯລฯ ດ້ວຍອຳນາດລົມຫັນໃຈອອກສັ້ນ ฯລฯ ດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງຫັນໃຈເຂົ້າ ฯລฯ ດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ກອງລົມທັງປວງຫັນໃຈອອກ ฯລฯ ດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານ ຫັນໃຈເຂົ້າ ฯລฯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ຣະງັບກາຍສັງຂານຫັນໃຈອອກ ສະຕິຍ່ອມຕັ້ງໝັ້ນ ປີຕິນັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຄຳນຶງເຖິງ ປີຕິນັ້ນຍ່ອມຜາກົດ

ເມື່ອຮູ້ ฯລฯ ເມື່ອເຫັນ ฯລฯ ເມື່ອພິຈາລະນາ ฯລฯ ເມື່ອອະທິຖານຈິດ ฯລฯ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ฯລฯ ເມື່ອປະຄອງຄວາມພຽນ ฯລฯ ເມື່ອຕັ້ງສະຕິໄວ້ໝັ້ນ ฯລฯ ເມື່ອຕັ້ງຈິດໄວ້ໝັ້ນ ฯລฯ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ฯລฯ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ฯລฯ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ฯລฯ ເມື່ອລະທຳທີ່ຄວນລະ ฯລฯ ເມື່ອຈະເລີນທຳທີ່ຄວນຈະເລີນ ฯລฯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ປີຕິນັ້ນຍ່ອມຜາກົດ ປີຕິນັ້ນຍ່ອມຜາກົດແນວນີ້

ເວທະນາດ້ວຍອຳນາດຄວາມເປັນຜູ້ຮູ້ຊັດແຈ້ງປີຕິຫັນໃຈເຂົ້າຫັນໃຈອອກ ຍ່ອມຜາກົດຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນເວທະນານັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາ ເຫັນເວທະນາໃນເວທະນາ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນເວທະນານັ້ນເປັນແນວໃດ? ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ฯລฯ ພິຈາລະນາເຫັນເວທະນານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ฯລฯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ກຳນົດຮູ້ປີຕິຣະວັງລົມຫັນໃຈເຂົ້າຫັນໃຈອອກ ฯລฯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດ ຄວາມເປັນຜູ້ກຳນົດຮູ້ປີຕິຫັນໃຈເຂົ້າຫັນໃຈອອກ ฯລฯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໑)

[໑໗໖] ພິກຂຸຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ສຸກຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ສຸກຫັນໃຈອອກ ເປັນແນວໃດ?

ຄຳວ່າ ສຸກ ອະທິບາຍວ່າ ສຸກມີ ໒ ຢ່າງ ຄື

໑. ກາຍິກະສຸກ

໒. ເຈຕະສິກະສຸກ

ກາຍິກະສຸກ ເປັນແນວໃດ?

ຄື ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍສຸກທີ່ເປັນຄວາມສຳຣານເຊິ່ງເກີດຈາກກາຍສຳຜັດ ສຸກຂະເວທະນາທີ່ເປັນຄວາມສຳຣານເຊິ່ງເກີດຈາກກາຍສຳຜັດ ນີ້ເປັນກາຍິກະສຸກ

ເຈຕະສິກສຸກ ເປັນແນວໃດ?

ຄື ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍສຸກທີ່ເປັນຄວາມສຳຣານເຊິ່ງເກີດຈາກເຈໂຕສຳຜັດ ສຸກຂະເວທະນາທີ່ເປັນຄວາມສຳຣານເຊິ່ງເກີດຈາກເຈໂຕສຳຜັດ ນີ້ເປັນເຈຕະສິກະສຸກ

ສຸກເຫຼົ່ານັ້ນຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ສະຕິຍ່ອມຕັ້ງໝັ້ນ ສຸກເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ສຸກເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ສຸກເຫຼົ່ານັ້ນຍ່ອມຜາກົດ ສຸກເຫຼົ່ານັ້ນຍ່ອມຜາກົດແນວນີ້ ເວທະນາດ້ວຍອຳນາດຄວາມເປັນຜູ້ຮູ້ແຈ້ງສຸກຫັນໃຈເຂົ້າຫັນໃຈອອກຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເວທະນານັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາ ຄືການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນເວທະນາເປັນແນວໃດ? ຄືພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຯລຯ ພິຈາລະນາເຫັນເວທະນານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ກຳນົດຮູ້ສຸກຣະວັງລົມຫັນໃຈເຂົ້າ ຫັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດ ຄວາມເປັນຜູ້ກຳນົດຮູ້ສຸກຫັນໃຈເຂົ້າຫັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນ ປະໂຫຍດ (໔)

[໑໗໔] ພິກຂຸຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ຈິດຕະສັງຂານຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ຈິດຕະສັງຂານຫັນໃຈອອກ ເປັນແນວໃດ?

ຈິດຕະສັງຂານ ເປັນແນວໃດ?

ຄື ສັນຍາແລະເວທະນາດ້ວຍອຳນາດລົມຫັນໃຈເຂົ້າຍາວ ເປັນເຈຕະສິກທຳເຫຼົ່ານີ້ເນື່ອງດ້ວຍຈິດ ເປັນຈິດຕະສັງຂານ ສັນຍາແລະເວທະນາດ້ວຍອຳນາດລົມຫັນໃຈເຂົ້າຫັນໃຈອອກຍາວ ເປັນເຈຕະສິກ ທຳເຫຼົ່ານີ້ເນື່ອງດ້ວຍຈິດ ເປັນຈິດຕະສັງຂານ ຯລຯ ສັນຍາແລະ ເວທະນາດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ສຸກຫັນໃຈເຂົ້າ ຯລຯ ສັນຍາແລະເວທະນາ ດ້ວຍອຳນາດຄວາມເປັນຜູ້ຮູ້ແຈ້ງສຸກຫັນໃຈອອກ ເປັນເຈຕະສິກ ທຳເຫຼົ່ານີ້ເນື່ອງດ້ວຍຈິດ ນີ້ຊື່ວ່າ ຈິດຕະສັງຂານ

ຈິດຕະສັງຂານເຫຼົ່ານັ້ນຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ສະຕິຍ່ອມຕັ້ງໝັ້ນ ຈິດຕະສັງຂານເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ຈິດຕະສັງຂານເຫຼົ່ານັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຈິດຕະສັງຂານເຫຼົ່ານັ້ນຍ່ອມຜາກົດ ຈິດຕະສັງຂານເຫຼົ່ານັ້ນຍ່ອມຜາກົດແນວນີ້ ເວທະນາດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຕະສັງຂານຫັນໃຈເຂົ້າຫັນໃຈອອກຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນເວທະນານັ້ນ ດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນເວທະນານັ້ນເປັນແນວໃດ? ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຯລຯ ພິຈາລະນາເຫັນເວທະນານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ກຳນົດຮູ້ຈິດຕະສັງຂານຣະວັງລົມຫັນໃຈເຂົ້າຫັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຕະສັງຂານຫັນໃຈເຂົ້າຫັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໓)

[໑໗໕] ພິກຂຸຕັ້ງໃຈຮູ້ວ່າ ເຮົາຣະງັບຈິດຕະສັງຂານຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຣະງັບຈິດຕະສັງຂານຫັນໃຈອອກ ເປັນແນວໃດ?

ຈິດຕະສັງຂານ ເປັນແນວໃດ?

ຄື ສັນຍາ ແລະເວທະນາດ້ວຍອຳນາດລົມຫັນໃຈເຂົ້າຍາວ ເປັນເຈຕະສິກ ທຳເຫຼົ່ານີ້ເນື່ອງດ້ວຍຈິດ ເປັນຈິດຕະສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດຈິດຕະສັງຂານເຫຼົ່ານັ້ນໃຫ້ສະງົບ

ຊື່ວ່າຕັ້ງໃຈຮູ້ຢູ່ ສັນຍາແລະເວທະນາດ້ວຍອຳນາດລົມຫັນໃຈອອກຍາວ ເປັນເຈຕະສິກ ທຳເຫຼົ່ານີ້ເນື່ອງດ້ວຍຈິດ ເປັນຈິດຕະສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດຈິດຕະສັງຂານເຫຼົ່ານັ້ນໃຫ້ສະງົບ ຊື່ວ່າຕັ້ງໃຈຮູ້ຢູ່ ສັນຍາແລະເວທະນາດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຕະສັງຂານຫັນໃຈ ຯລຯ ສັນຍາແລະເວທະນາດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດ ສັງຂານຫັນໃຈອອກ ເປັນເຈຕະສິກ ທຳເຫຼົ່ານີ້ເນື່ອງດ້ວຍຈິດ ເປັນຈິດຕະສັງຂານ ພິກຂຸເມື່ອຣະງັບ ດັບ ເຮັດຈິດຕະສັງຂານເຫຼົ່ານັ້ນໃຫ້ສະງົບ ຊື່ວ່າຕັ້ງໃຈຮູ້ຢູ່ ເວທະນາດ້ວຍອຳນາດຄວາມເປັນຜູ້ຣະງັບຈິດຕະສັງຂານຫັນໃຈເຂົ້າຫັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນເວທະນານັ້ນ ດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາ ຄື ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນເວທະນານັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນເວທະນານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າ ເປັນຜູ້ຣະງັບຈິດຕະສັງຂານຣະວັງລົມຫັນໃຈເຂົ້າ ຫັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ຣະງັບຈິດຕະສັງຂານຫັນໃຈເຂົ້າຫັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍ ປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບ ເປັນປະໂຫຍດ (໔)

ອະນຸປັດສະນາຍານ ໗ ອຸປັດຖານານຸດສະຕິ ໗ ສູດຕັນຕິກະວັດຖຸ ໔ ໃນການພິຈາລະນາເຫັນເວທະນາ

**ພານະວານ ຈົບ**

## ຕະຕິຍະຈະຕຸກກະນິດເທດ

### ສະແດງໝວດ ໔ ແຫ່ງຍານທີ ໓

[໑໗໖] ພິກຂຸຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ຈິດຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາກຳນົດຮູ້ຈິດຫັນໃຈອອກ ເປັນແນວໃດ?

ຈິດນັ້ນ ເປັນແນວໃດ?

ຄື ວິນຍານດ້ວຍອຳນາດລົມຫັນໃຈເຂົ້າຍາວເປັນຈິດ ຈິດ ຄື ມະໂນ ມານັດ ຫົວໃຈ ປັນດະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດອັນຄວນແກ່ຈິດນັ້ນໃດ ນີ້ຊື່ວ່າຈິດ ວິນຍານດ້ວຍອຳນາດລົມຫັນໃຈອອກຍາວ ຯລຯ ດ້ວຍອຳນາດຄວາມເປັນຜູ້ຣະງັບຈິດຕະສັງຂານຫັນໃຈເຂົ້າ ຯລຯ ວິນຍານດ້ວຍອຳນາດຄວາມເປັນຜູ້ຣະງັບຈິດຕະສັງຂານຫັນໃຈອອກເປັນຈິດ ຈິດ ຄື ມະໂນ ມານັດ ຫົວໃຈ ປັນດະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດອັນຄວນແກ່ຈິດນັ້ນໃດ ນີ້ຊື່ວ່າຈິດ

ຈິດນັ້ນຍ່ອມຜາກົດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ສະຕິຍ່ອມຕັ້ງໝັ້ນ ຈິດນັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ສະຕິຍ່ອມຕັ້ງໝັ້ນ ຈິດນັ້ນຍ່ອມຜາກົດດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຈິດນັ້ນຍ່ອມຜາກົດ ຈິດນັ້ນຍ່ອມຜາກົດແນວນີ້ ວິນຍານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຫັນໃຈເຂົ້າຫັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ຈິດຍ່ອມຜາກົດບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນຈິດນັ້ນດ້ວຍສະຕິນັ້ນດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນຈິດໃນຈິດ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນຈິດນັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນຈິດນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ກຳນົດຮູ້ຈິດຣະວັງລົມຫັນໃຈເຂົ້າ ຫັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຫັນໃຈເຂົ້າຫັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໑)

[໑໗໗] ພິກຂຸຕັ້ງໃຈຮູ້ວ່າ ເຮົາທຳຈິດໃຫ້ບັນເທີງຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາທຳຈິດໃຫ້ບັນເທີງຫັນໃຈອອກ ເປັນແນວໃດ?

ຄວາມເບີກບານແຫ່ງຈິດ ເປັນແນວໃດ?

ຄື ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ຄວາມເບີກບານແຫ່ງຈິດຍ່ອມເກີດຂຶ້ນ ຄວາມຣື່ນເຣີງ ຄວາມບັນເທີງ ຄວາມຫັນສາ ຄວາມຣ່າເຣີງຈິດ ຄວາມປີ້ມຈິດ ຄວາມປີຕິຍິນດີ ຄວາມດີໃຈໃດ ນີ້ເປັນຄວາມເບີກບານແຫ່ງຈິດ

ຯລຯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດ ລົມຫັນໃຈອອກຍາວ ຄວາມເບີກບານແຫ່ງຈິດຍ່ອມເກີດຂຶ້ນ ຄວາມຣື່ນເຣີງ ຄວາມບັນເທີງ ຄວາມຫັນສາ ຄວາມຣ່າເຣີງຈິດ ຄວາມປື້ມຈິດ ຄວາມປິຕິຍິນດີ ຄວາມດີໃຈໃດ ຯລຯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຫັນໃຈເຂົ້າ ຯລຯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ກຳນົດຮູ້ຈິດຫັນໃຈອອກ ຄວາມເບີກບານແຫ່ງຈິດຍ່ອມເກີດຂຶ້ນ ຄວາມຣື່ນເຣີງ ຄວາມບັນເທີງ ຄວາມຫັນສາ ຄວາມຣ່າເຣີງຈິດ ຄວາມປື້ມຈິດ ຄວາມປິຕິຍິນດີ ຄວາມດີໃຈໃດ ນີ້ເປັນຄວາມ ເບີກບານແຫ່ງຈິດ ວິນຍານດ້ວຍອຳນາດຄວາມເປັນຜູ້ໃຫ້ຈິດເບີກບານຫັນໃຈເຂົ້າຫັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ຈິດຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນຈິດນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາ ເຫັນຈິດໃນຈິດ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນຈິດນັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນຈິດນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ທຳຈິດໃຫ້ບັນເທີງຣະວັງລົມຫັນໃຈເຂົ້າຫັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ທຳຈິດໃຫ້ບັນເທີງຫັນໃຈເຂົ້າຫັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບ ເປັນປະໂຫຍດ (໔)

[໑໗໗] ພິກຂຸຕັ້ງໃຈຮູ້ວ່າ ເຮົາຕັ້ງຈິດໄວ້ຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາຕັ້ງຈິດໄວ້ຫັນໃຈອອກ ເປັນແນວໃດ?

ສະມາທິນຊີ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈເຂົ້າຍາວ ເປັນສະມາທິ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດລົມຫັນໃຈອອກຍາວ ເປັນສະມາທິ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດຕັ້ງຈິດໝັ້ນຫັນໃຈເຂົ້າ ເປັນສະມາທິ ຄວາມຕັ້ງຢູ່ ຄວາມຕັ້ງຢູ່ດີ ຄວາມຕັ້ງຢູ່ສະເພາະ ຄວາມບໍ່ກວັດແກວ່ງ ຄວາມບໍ່ຟຸ້ງຊ່ານແຫ່ງຈິດ ຄວາມມີຈິດບໍ່ກວັດແກວ່ງ ຄວາມສະງົບ ສະມາທິນຊີ ສະມາທິພະລະ ສຳມາສະມາທິໃດ ນີ້ເປັນສະມາທິນຊີ ວິນຍານດ້ວຍອຳນາດຕັ້ງຈິດໝັ້ນຫັນໃຈເຂົ້າເປັນຈິດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ຈິດຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ

ພິກຂຸພິຈາລະນາເຫັນຈິດນັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນຈິດໃນຈິດ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນຈິດນັ້ນເປັນແນວໃດ? ฯລฯ ພິຈາລະນາເຫັນຈິດນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ฯລฯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ຕັ້ງຈິດໄວ້ຣະວັງລົມຫັນໃຈເຂົ້າ ຫັນໃຈອອກ ฯລฯ ເມື່ອບຸກຄົນຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດ ຄວາມເປັນຜູ້ຕັ້ງໝັ້ນຫັນໃຈເຂົ້າ ฯລฯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໓)

[໑໗໙] ພິກຂຸຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຫັນໃຈອອກເປັນແນວໃດ?

ຄື ພິກຂຸຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກຣາຄະຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກຣາຄະຫັນໃຈອອກ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກໂທສະຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກໂທສະຫັນໃຈອອກ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກໂມຫະຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກໂມຫະຫັນໃຈອອກ ຕັ້ງໃຈຮູ້ ວ່າ ເຮົາເປື້ອງຈິດຈາກມານະ ฯລฯ ເຮົາເປື້ອງຈິດຈາກທິດຖິ ฯລฯ ເຮົາເປື້ອງຈິດຈາກວິຈິກິດສາ ฯລฯ ເຮົາເປື້ອງຈິດຈາກຖີນະມິດທະ ฯລฯ ເຮົາເປື້ອງຈິດຈາກອຸດທັດຈະ ฯລฯ ເຮົາເປື້ອງຈິດຈາກອະຫິຣິກະ (ຄວາມບໍ່ລະອາຍ) ฯລฯ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກອະໂນດັບປະ (ຄວາມບໍ່ເກງກົວບາບ) ຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາເປື້ອງຈິດຈາກ ອະໂນດັບປະຫັນໃຈອອກ ວິນຍານດ້ວຍອຳນາດການເປື້ອງຈິດຫັນໃຈເຂົ້າຫັນໃຈອອກຍ່ອມຜາກົດ ຄວາມຜາກົດເປັນສະຕິ ฯລฯ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນຈິດນັ້ນເປັນແນວໃດ? ฯລฯ ພິຈາລະນາເຫັນຈິດນັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ฯລฯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ເປື້ອງຈິດຫວັງລົມຫັນໃຈເຂົ້າ ຫັນໃຈອອກ ฯລฯ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ເປື້ອງຈິດຫັນໃຈເຂົ້າ ฯລฯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໔)

ອະນຸປັດສະນາຍານ ໗ ອຸປັດຖານານຸດສະຕິ ໗ ສູດຕັນຕິກະວັດຖຸ ໔ ໃນການພິຈາລະນາເຫັນຈິດໃນຈິດ

**ພານະວານ ຈົບ**

## ຈະຕຸດຖະຈະຕຸກກະນິດເທດ

### ສະແດງໝວດ ໔ ແຫ່ງຍານທີ ໔

[໑໗໐] ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນວ່າບໍ່ທ່ຽງທັນໃຈເຂົ້າ ຕັ້ງໃຈຮູ້ວ່າເຮົາພິຈາລະນາເຫັນວ່າບໍ່ທ່ຽງທັນໃຈອອກ ເປັນແນວໃດ?

ຄື ຄຳວ່າ ບໍ່ທ່ຽງ ອະທິບາຍວ່າ ອັນໃດບໍ່ທ່ຽງ ຄືປັນຈະຂັນບໍ່ທ່ຽງ ບໍ່ທ່ຽງ ຍ້ອນມີສະພາວະເປັນແນວໃດ? ຄືບໍ່ທ່ຽງຍ້ອນມີສະພາວະເກີດຂຶ້ນແລະເສື່ອມໄປ

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງປັນຈະຂັນ ຍ່ອມເຫັນລັກສະນະເທົ່າໃດ ເມື່ອເຫັນຄວາມເສື່ອມໄປ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະເທົ່າໃດ? ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມໄປ (ແຫ່ງປັນຈະຂັນ) ຍ່ອມເຫັນລັກສະນະເທົ່າໃດ?

ພຣະໂຍຄາວະຈອນເມື່ອເຫັນຄວາມເກີດຂຶ້ນແຫ່ງປັນຈະຂັນ ຍ່ອມເຫັນລັກສະນະ ໒໕ ຯລຯ ເມື່ອເຫັນຄວາມເກີດຂຶ້ນແລະຄວາມເສື່ອມໄປແຫ່ງປັນຈະຂັນ ຍ່ອມເຫັນລັກສະນະ ໕໐ ນີ້

ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນວ່າບໍ່ທ່ຽງໃນຮູບທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນວ່າບໍ່ທ່ຽງໃນຮູບທັນໃຈອອກ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນວ່າ ບໍ່ທ່ຽງໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນວ່າບໍ່ທ່ຽງໃນຊະຣາແລະມໍລະນະ ທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາ ລະນາເຫັນວ່າ ບໍ່ທ່ຽງໃນຊະຣາແລະມໍລະນະທັນໃຈອອກ ທຳທັງສົມບູນອຳນາດຄວາມເປັນຜູ້ພິຈາລະນາເຫັນວ່າບໍ່ທ່ຽງທັນໃຈເຂົ້າທັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ທຳຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນ ດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາ ຄື ການພິຈາລະນາເຫັນທຳໃນທຳທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນທຳເຫຼົ່ານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ພິຈາລະນາເຫັນວ່າບໍ່ທ່ຽງ ຣະວັງ ລົມຫັນໃຈເຂົ້າຫັນໃຈອອກ ฯລฯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນວ່າບໍ່ທ່ຽງຫັນໃຈເຂົ້າຫັນໃຈອອກ ฯລฯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໑)

ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈອອກ ເປັນແນວໃດ?

ຄື ພິກຂຸເຫັນໂທດໃນຮູບແລ້ວເກີດສັນທະໃນຄວາມຄາຍອອກໄດ້ໃນຮູບ ນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ ໃນຮູບຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ໃນຮູບຫັນໃຈອອກ ພິກຂຸເຫັນໂທດໃນເວທະນາ ฯລฯ ໃນສັນຍາ ฯລฯ ໃນສັງຂານ ฯລฯ ໃນວິນຍານ ฯລฯ ໃນຈັກຂຸ ฯລฯ ເຫັນໂທດໃນຊະຣາ ແລະມໍຣະນະແລ້ວເກີດສັນທະໃນຄວາມຄາຍອອກໄດ້ໃນຊະຣາ ແລະມໍຣະນະນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ໃນຊະຣາ ແລະມໍລະນະຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມຄາຍອອກໄດ້ໃນຊະຣາແລະມໍລະນະຫັນໃຈອອກ ທຳທັງສິ້ນບູນອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈເຂົ້າຫັນໃຈອອກ ຍ່ອມຜາກົດ ຄວາມຜາກົດ ເປັນສະຕິ ການພິຈາລະນາເຫັນເປັນຍານ ທຳຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນທຳໃນທຳທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນເປັນແນວໃດ? ฯລฯ ພິຈາລະນາເຫັນທຳເຫຼົ່ານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ฯລฯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ພິຈາລະນາເຫັນຄວາມຄາຍອອກໄດ້ ຣະວັງລົມຫັນໃຈເຂົ້າຫັນໃຈອອກ ฯລฯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈເຂົ້າຫັນໃຈອອກ ฯລฯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ฯລฯ ຍ້ອນເຫດນັ້ນ ທ່ານຈຶ່ງ ກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໔)

ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບຫັນໃຈອອກ ເປັນແນວໃດ?

ຄື ພິກຂຸເຫັນໂທດໃນຮູບແລ້ວເກີດສັນທະໃນຄວາມດັບແຫ່ງຮູບ ນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຮູບທັນໃຈເຂົ້າຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຮູບທັນໃຈອອກ ພິກຂຸເຫັນໂທດໃນເວທະນາໆລໆ ໃນສັນຍາ ໆລໆ ໃນສັງຂານ ໆລໆ ໃນວິນຍານ ໆລໆ ໃນຈັກຂຸ ໆລໆ ເຫັນໂທດໃນຊະຣາ ແລະມໍຣະນະແລ້ວເກີດສັນທະໃນຄວາມດັບແຫ່ງຊະຣາແລະມໍລະນະ ນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຊະຣາ ແລະມໍລະນະທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຊະຣາ ແລະມໍລະນະທັນໃຈອອກ

[໑໘໑] ໂທດໃນອະວິດຊາມີ ຍ້ອນອາການເທົ່າໃດ ອະວິດຊາດັບ ຍ້ອນອາການເທົ່າໃດ?
ຄື ໂທດໃນອະວິດຊາມີ ຍ້ອນອາການ ໕ ຢ່າງ ອະວິດຊາດັບ ຍ້ອນອາການ ໘ ຢ່າງ
ໂທດໃນອະວິດຊາມີ ຍ້ອນອາການ ໕ ຢ່າງ ມີອັນໃດແດ່ ຄື

໑. ໂທດໃນອະວິດຊາມີ ຍ້ອນມີສະພາວະ ບໍ່ທ່ຽງ
໒. ໂທດໃນອະວິດຊາມີ ຍ້ອນມີສະພາວະ ເປັນທຸກ
໓. ໂທດໃນອະວິດຊາມີ ຍ້ອນມີສະພາວະ ເປັນອະນັດຕາ
໔. ໂທດໃນອະວິດຊາມີ ຍ້ອນມີສະພາວະ ເປັນເຫດໃຫ້ເດືອດຮ້ອນ
໕. ໂທດໃນອະວິດຊາມີ ຍ້ອນມີສະພາວະ ຜັນປ່ຽນ

ໂທດໃນອະວິດຊາມີ ຍ້ອນອາການ ໕ ແນວນີ້
ອະວິດຊາດັບ ຍ້ອນອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ອະວິດຊາດັບ ຍ້ອນຕົ້ນເຫດດັບ
໒. ອະວິດຊາດັບ ຍ້ອນສະມຸໄທດັບ
໓. ອະວິດຊາດັບ ຍ້ອນຊາດດັບ
໔. ອະວິດຊາດັບ ຍ້ອນອາຫານດັບ
໕. ອະວິດຊາດັບ ຍ້ອນເຫດດັບ
໖. ອະວິດຊາດັບ ຍ້ອນປັດໄຈດັບ
໗. ອະວິດຊາດັບ ຍ້ອນຍານເກີດຂຶ້ນ
໘. ອະວິດຊາດັບ ຍ້ອນນິໂຣດຜາກົດ

ອະວິດຊາດັບ ຍ້ອນອາການ ໘ ແນວນີ້

ພິກຂຸເຫັນໂທດໃນອະວິດຊາ ຍ້ອນອາການ ໕ ແນວນີ້ແລ້ວ ເກີດສັນທະໃນຄວາມດັບອະວິດຊາ ຍ້ອນອາການ ໘ ແນວນີ້ ນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈ

ຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບແຫ່ງອະວິດຊາຫັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະ /ນາເຫັນຄວາມດັບແຫ່ງອະວິດຊາຫັນໃຈອອກ

ໂທດໃນສັງຂານມີ ຍ້ອນອາການເທົ່າໃດ ສັງຂານດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນວິນຍານມີ ຍ້ອນອາການເທົ່າໃດ ວິນຍານດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນນາມຮູບມີ ຍ້ອນອາການເທົ່າໃດ ນາມຮູບດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນສະລາຍະຕະນະມີ ຍ້ອນອາການເທົ່າໃດ ສະລາຍະຕະນະດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນຜັດສະມີ ຍ້ອນອາການເທົ່າໃດ ຜັດສະດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນເວທະນາມີ ຍ້ອນອາການເທົ່າໃດ ເວທະນາດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນຕັນຫາມີ ຍ້ອນອາການເທົ່າໃດ ຕັນຫາດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນອຸປາທານມີ ຍ້ອນອາການເທົ່າໃດ ອຸປາທານດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນພົບມີ ຍ້ອນອາການເທົ່າໃດ ພົບດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນຊາດມີ ຍ້ອນອາການເທົ່າໃດ ຊາດດັບ ຍ້ອນອາການເທົ່າໃດ ຯລຯ

ໂທດໃນຊະຣາແລະມໍຣະນະມີ ຍ້ອນອາການເທົ່າໃດ ຊະຣາແລະມໍຣະນະດັບ ຍ້ອນອາການເທົ່າໃດ

ຄື ໂທດໃນຊະຣາແລະມໍຣະນະມີ ຍ້ອນອາການ ໕ ຢ່າງ ຊະຣາແລະມໍຣະນະດັບ ຍ້ອນອາການ ໘ ຢ່າງ

ໂທດໃນຊະຣາແລະມໍຣະນະມີ ຍ້ອນອາການ ໕ ຢ່າງ ມີອັນໃດແດ່ ຄື

໑. ໂທດໃນຊະຣາແລະມໍຣະນະມີ ຍ້ອນມີສະພາວະບໍ່ທ່ຽງ
໒. ຯລຯ ຍ້ອນມີສະພາວະເປັນທຸກ
໓. ຯລຯ ຍ້ອນມີສະພາວະເປັນອະນັດຕາ
໔. ຯລຯ ຍ້ອນມີສະພາວະເປັນເຫດໃຫ້ເດືອດຮ້ອນ
໕. ໂທດໃນຊະຣາແລະມໍຣະນະມີ ຍ້ອນມີສະພາວະຜັນປ່ຽນ

ໂທດໃນຊະຣາແລະມໍຣະນະມີ ຍ້ອນອາການ ໕ ແນວນີ້

ຊະຣາແລະມໍຣະນະດັບ ຍ້ອນອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ຊະຣາແລະມໍຣະນະດັບ ຍ້ອນຕົ້ນເຫດດັບ
໒. ຯລຯ ຍ້ອນສະມຸໄທດັບ
໓. ຯລຯ ຍ້ອນຊາດດັບ
໔. ຊະຣາແລະມໍຣະນະດັບ ຍ້ອນພົບດັບ

໕. ຯລຯ ຍ້ອນເຫດດັບ
໖. ຯລຯ ຍ້ອນປັດໄຈດັບ
໗. ຯລຯ ຍ້ອນຍານເກີດຂື້ນ
໘. ຊະຣາແລະມໍຣະນະດັບ ຍ້ອນນິໂຣດຜາກົດ

ຊະຣາແລະມໍຣະນະດັບ ຍ້ອນອາການ ໘ ແນວນີ້

ພິກຂຸເຫັນໂທດໃນຊະຣາແລະມໍລະນະ ຍ້ອນອາການ ໕ ແນວນີ້ແລ້ວ ເກີດສັນທະໃນຄວາມດັບແຫ່ງຊະຣາແລະມໍລະນະ ຍ້ອນອາການ ໘ ແນວນີ້ ນ້ອມໃຈເຊື່ອດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຊະຣາແລະມໍລະນະທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມດັບໃນຊະຣາແລະມໍລະນະທັນໃຈອອກ ທຳທັງຫຼາຍ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມດັບທັນໃຈເຂົ້າທັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ທຳຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນທຳໃນທຳທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນເປັນແນວໃດ? ຯລຯ ພິຈາລະນາເຫັນທຳເຫຼົ່ານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ພິຈາລະນາເຫັນຄວາມດັບຣະວັງລົມທັນໃຈເຂົ້າທັນໃຈອອກ ຯລຯ ເມື່ອພິກຂຸຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມດັບທັນໃຈເຂົ້າທັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຯລຯ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳ ອັນມີຄວາມສະງົບເປັນປະໂຫຍດ (໓)

[໑໘໔] ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນທັນໃຈອອກ ເປັນແນວໃດ?

ຄຳວ່າ ຄວາມສະລະຄືນ ອະທິບາຍວ່າ ຄວາມສະລະຄືນມີ ໒ ຢ່າງ ຄື

໑. ຄວາມສະລະຄືນດ້ວຍການບໍລິຈາກ
໒. ຄວາມສະລະຄືນດ້ວຍຄວາມແລ່ນໄປ

ຈິດສະລະຮູບ ຍ້ອນແນວນັ້ນ ຈຶ່ງເປັນຄວາມສະລະຄືນດ້ວຍການບໍລິຈາກ ຈິດແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຮູບ ຍ້ອນແນວນັ້ນ ຈຶ່ງເປັນຄວາມສະລະຄືນດ້ວຍຄວາມແລ່ນໄປ ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນໃນຮູບທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນໃນຮູບທັນໃຈອອກ ຈິດສະລະເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂຸ ຯລຯ ຈິດສະລະຊະຣາແລະມໍລະນະ ຍ້ອນແນວນັ້ນ ຈຶ່ງເປັນຄວາມສະລະຄືນດ້ວຍການບໍລິຈາກ ຈິດແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຊະຣາແລະມໍລະນະ ຍ້ອນແນວນັ້ນ ຈຶ່ງເປັນຄວາມສະລະຄືນດ້ວຍຄວາມແລ່ນໄປ

ພິກຂຸຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນໃນຊະຣາ ແລະມໍລະນະທັນໃຈເຂົ້າ ຕັ້ງໃຈຮູ້ວ່າ ເຮົາພິຈາລະນາເຫັນຄວາມສະລະຄືນໃນຊະຣາ ແລະມໍລະນະທັນໃຈອອກ ທຳທັງສິ້ນບູນອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າທັນໃຈອອກ ຍ່ອມຜາກົດ ຄວາມຜາກົດເປັນສະຕິ ການພິຈາລະນາເຫັນເປັນຍານ ທຳຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນດ້ວຍສະຕິນັ້ນ ດ້ວຍຍານນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ສະຕິປັດຖານພາວະນາຄືການພິຈາລະນາເຫັນທຳໃນທຳທັງຫຼາຍ

ຄຳວ່າ ພິຈາລະນາເຫັນ ອະທິບາຍວ່າ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນເປັນແນວໃດ?

ຄື ພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ຯລຯ ສະລະຄືນ ບໍ່ຍຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ຯລຯ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິຈາລະນາເຫັນທຳເຫຼົ່ານັ້ນແນວນີ້

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າເປັນຜູ້ພິຈາລະນາເຫັນຄວາມສະລະຄືນຣະວັງລົມທັນໃຈເຂົ້າທັນໃຈອອກ ຊື່ວ່າຈິດຕະວິສຸດທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ ຊື່ວ່າທິດຖິວິສຸດທິ ຍ້ອນມີຄວາມໝາຍວ່າເຫັນບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານແລະຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ

ພິກຂຸເມື່ອຄຳນຶງເຖິງສິກຂາ ໓ ນີ້ ຊື່ວ່າສຶກສາ ເມື່ອຮູ້ ຊື່ວ່າສຶກສາ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າສຶກສາ ເມື່ອຮູ້ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນ ທັນໃຈເຂົ້າທັນໃຈອອກ ເວທະນາຍ່ອມຜາກົດເກີດຂຶ້ນ ຜາກົດເຂົ້າໄປຕັ້ງຢູ່ ຜາກົດເຖິງຄວາມດັບໄປ ຯລຯ ເມື່ອຮູ້ຄວາມທີ່ຈິດ

ເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນ ທັນໃຈເຂົ້າທັນໃຈອອກ ຯລຯ ຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ ໃຫ້ພະລະທັງຫຼາຍປະຊຸມລົງ ຯລຯ ໃຫ້ໂພດຊົງທັງຫຼາຍປະຊຸມລົງ ຯລຯ ໃຫ້ມັກປະຊຸມລົງ ຯລຯ ໃຫ້ທຳທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ

ຄຳວ່າ ໃຫ້ອິນຊີທັງຫຼາຍປະຊຸມລົງ ອະທິບາຍວ່າ ພິກຂຸໃຫ້ອິນຊີທັງຫຼາຍ ປະຊຸມລົງເປັນແນວໃດ?

ຄື ພິກຂຸໃຫ້ສັດທິນຊີປະຊຸມລົງ ຍ້ອນມີສະພາວະນ້ອມໃຈເຊື່ອ ຯລຯ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (໔)

ອະນຸປັດສະນາຍານ ໗ ອຸປັດຖານານຸດສະຕິ ໗ ສຸຕະຕັນຕິກະວັດຖຸ ໔ ໃນການພິຈາລະນາເຫັນທຳໃນທຳທັງຫຼາຍ ຍານໃນການກະທຳສະຕິ ໓໔ ປະການເຫຼົ່ານີ້

**ສະໂຕກາຣິຍານະນິດເທດທີ ໕ ຈົບ**

# ໖. ຍານະທາສິສັກກະນິດເທດ

## ສະແດງໝວດ ໖ ແຫ່ງກອງຍານ

[໑໗໓] ຍານດ້ວຍອຳນາດແຫ່ງສະມາທິ ໔໔ ປະການ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງລົມທັນໃຈເຂົ້າຍາວເປັນສະມາທິ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງລົມທັນໃຈອອກຍາວເປັນສະມາທິ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງຄວາມເປັນຜູ້ເປື້ອງຈິດທັນໃຈເຂົ້າທັນໃຈອອກ ເປັນສະມາທິ ຯລຯ ຍານດ້ວຍອຳນາດແຫ່ງສະມາທິ ໔໔ ນີ້ (໑)

ຍານດ້ວຍອຳນາດແຫ່ງວິປັດສະນາ ໗໔ ປະການ ເປັນແນວໃດ?

ຄື ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມທັນໃຈເຂົ້າຍາວໂດຍຄວາມບໍ່ທ່ຽງ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມທັນໃຈເຂົ້າຍາວໂດຍຄວາມເປັນທຸກ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມທັນໃຈເຂົ້າຍາວ ໂດຍຄວາມເປັນອະນັດຕາ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມທັນໃຈອອກຍາວ ໂດຍຄວາມບໍ່ທ່ຽງ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມທັນໃຈອອກຍາວໂດຍຄວາມເປັນທຸກ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນລົມຫັນໃຈອອກຍາວ ໂດຍຄວາມເປັນອະນັດຕາ

໗໒໗

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຄວາມເປັນຜູ້ເປື້ອງຈິດຫັນໃຈເຂົ້າ ໂດຍຄວາມບໍ່ທ່ຽງ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຄວາມເປັນຜູ້ເປື້ອງຈິດຫັນໃຈອອກ ໂດຍຄວາມບໍ່ທ່ຽງ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຄວາມເປັນຜູ້ເປື້ອງຈິດຫັນໃຈອອກ ໂດຍຄວາມເປັນທຸກ

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຄວາມເປັນຜູ້ເປື້ອງຈິດຫັນໃຈອອກ ໂດຍຄວາມເປັນອະນັດຕາ

ຍານດ້ວຍອຳນາດແຫ່ງວິປັດສະນາ ໗໒ ນີ້ (໒)

ນິບພິທາຍານ ໘ ປະການ ມີອັນໃດແດ່ ຄື

໑. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນວ່າ ບໍ່ທ່ຽງຫັນໃຈເຂົ້າຮູ້ເຫັນຕາມຄວາມເປັນຈິງ
໒. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນວ່າ ບໍ່ທ່ຽງຫັນໃຈອອກຮູ້ເຫັນຕາມຄວາມເປັນຈິງ
໓. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈເຂົ້າຮູ້ ເ ຫັ ນ ຕາມຄວາມເປັນຈິງ
໔. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມຄາຍອອກໄດ້ຫັນໃຈອອກຮູ້ເຫັນຕາມຄວາມເປັນຈິງ
໕. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມດັບໄປຫັນໃຈເຂົ້າຮູ້ເຫັນຕາມຄວາມເປັນຈິງ
໖. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມດັບໄປຫັນໃຈອອກຮູ້ເຫັນ ຕາມຄວາມເປັນຈິງ
໗. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມສະລະຄືນຫັນໃຈເຂົ້າຮູ້ເຫັນຕາມຄວາມເປັນຈິງ
໘. ຊື່ວ່ານິບພິທາຍານ ຍ້ອນພິຈາລະນາເຫັນຄວາມສະລະຄືນຫັນໃຈອອກຮູ້ເຫັນຕາມຄວາມເປັນຈິງ

ນິບພິທາຍານ ໘ ປະການນີ້ (໓)

ນິບພິທານຸໂລມະຍານ ໗ ປະການ ມີອັນໃດແດ່ ຄື

໑. ປັນຍາໃນການເຫັນສັງຂານຜາກົດໂດຍຄວາມເປັນໄພຂອງບຸກຄົນຜູ້ ພິຈາລະນາ ເຫັນຄວາມບໍ່ທ່ຽງທັນໃຈເຂົ້າ ຊື່ວ່ານິບພິທານຸໂລມະຍານ

໔. ປັນຍາໃນການເຫັນສັງຂານຜາກົດໂດຍຄວາມເປັນໄພຂອງບຸກຄົນຜູ້ ພິຈາລະນາເຫັນຄວາມບໍ່ທ່ຽງທັນໃຈອອກ ຊື່ວ່ານິບພິທານຸໂລມະຍານ

ຯລຯ

໗. ປັນຍາໃນການເຫັນສັງຂານຜາກົດໂດຍຄວາມເປັນໄພຂອງບຸກຄົນຜູ້ ພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ຊື່ວ່ານິບພິທານຸໂລມະຍານ

໘. ປັນຍາໃນການເຫັນສັງຂານຜາກົດໂດຍຄວາມເປັນໄພຂອງບຸກຄົນຜູ້ ພິຈາລະນາເຫັນຄວາມສະລະຄືນທັນໃຈອອກ ຊື່ວ່ານິບພິທານຸໂລມະຍານ

ນິບພິທານຸໂລມະຍານ ໘ ປະການນີ້ (໔)

ນິບພິທາປະຕິປັດສັດທິຍານ ໘ ປະການ ມີອັນໃດແດ່ ຄື

໑. ປັນຍາທີ່ພິຈາລະນາແລ້ວດຳຣົງໝັ້ນຢູ່ຂອງບຸກຄົນຜູ້ພິຈາລະນາເຫັນຄວາມບໍ່ ທ່ຽງທັນໃຈເຂົ້າ ຊື່ວ່ານິບພິທາປະຕິປັດສັດທິຍານ

໔. ປັນຍາທີ່ພິຈາລະນາແລ້ວດຳຣົງໝັ້ນຢູ່ຂອງບຸກຄົນຜູ້ພິຈາລະນາເຫັນຄວາມບໍ່ ທ່ຽງທັນໃຈອອກ ຊື່ວ່ານິບພິທາປະຕິປັດສັດທິຍານ

ຯລຯ

ນິບພິທາປະຕິປັດສັດທິຍານ ໘ ປະການນີ້ (໕)

ຍານໃນວິມຸດຕິ ໔໑ ປະການ ເປັນແນວໃດ?

ຄື ດ້ວຍໂສດາປັດຕິມັກ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດສັກກາຍະທິດຖິ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດວິຈິກິດສາ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດສີລັບພະຕະປະຣາມາດ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດທິດຖານຸໄສ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດວິຈິກິດສານຸໄສ

ດ້ວຍສະກະທາຄາມີມັກ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະ ຕັດຂາດການຣາຄະສັງໂຍດຢ່າງຫຍາບ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະ ຕັດຂາດປະຕິຄະສັງໂຍດຢ່າງຫຍາບ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດການຣາຄານຸໄສຢ່າງຫຍາບ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະ ຕັດຂາດປະຕິຄານຸໄສຢ່າງຫຍາບ ດ້ວຍອະນາຄາມີມັກ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະຕັດຂາດການຣາຄະ ສັງໂຍດຢ່າງລະອຽດ ຯລຯ ປະຕິຄະສັງໂຍດຢ່າງລະອຽດ

ຯລຯ ການຣາຄານຸໄສຢ່າງລະອຽດ ຯລຯ ປະຕິຄານຸໄສຢ່າງລະອຽດດ້ວຍອະຣະຫັດຕະມັກ ຍານໃນວິມຸດຕິສຸກເກີດຂຶ້ນ ຍ້ອນລະ ຕັດຂາດຮູບຣາຄະ ຯລຯ ອະຮູບຣາຄະ ຯລຯ ມານະ ຯລຯ ອຸດທັດຈະ ຯລຯ ອະວິດຊາ ຯລຯ ມານານຸໄສ ຯລຯ ພະວະຣາຄານຸໄສ ຯລຯ ອະວິດ ຊານຸໄສ

ຍານໃນວິມຸດຕິສຸກ ໘໑ ປະການນີ້ແລ ເມື່ອບຸກຄົນຈະເລີນສະມາທິທີ່ປະກອບດ້ວຍອານາ ປານະສະຕິອັນມີວັດຖຸ ໑໖ ຍານເກີນກວ່າ ໘໐໐ ນີ້ຍ່ອມເກີດຂຶ້ນ (໖)

**ອານາປານັດສະຕິກະຖາ ຈົບ**

# ໔. ອິນທະຣິຍະກະຖາ

## ວ່າດ້ວຍອິນຊີ

## ໑. ປະຖົມສູດຕັນຕະນິດເທດ

### ສະແດງສູດທີ ໑

[໑໗໔] ຂ້າພະເຈົ້າ (ພຣະອານົນ) ໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິ ກະເສດຖີ ເຂດເມືອງສາວັດຖີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກຮັບສັ່ງຮຽກພິກຂຸທັງຫຼາຍມາ ຕັດ ວ່າ ພິກຂຸທັງຫຼາຍ ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະດຳຣັດແລ້ວ ພຣະຜູ້ມີພຣະພາກຈຶ່ງໄດ້ຕັດ ເລື້ອງນີ້ວ່າ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ມີອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວີຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)
໔. ສະມາທິນຊີ (ອິນຊີຄືສະມາທິ)
໕. ປັນຍິນຊີ (ອິນຊີຄືປັນຍາ)

ພິກຂຸທັງຫຼາຍ ອິນຊີ ໕ ປະການເປັນແນວນີ້ແລ

[໑໗໕] ອິນຊີ ໕ ປະການນີ້ ຍ່ອມມີດຈິດດ້ວຍອາການເທົ່າໃດ

ຄື ອິນຊີ ໕ ປະການນີ້ ຍ່ອມມົດຈົດດ້ວຍອາການ ໑໕ ຢ່າງ ໄດ້ແກ່

ເມື່ອບຸກຄົນເວັ້ນບຸກຄົນຜູ້ບໍ່ມີສັດທາ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນຜູ້ມີສັດທາ (ແລະ) ພິຈາລະນາພຣະສູດທີ່ເປັນເຫດນຳມາເຊິ່ງຄວາມເຫຼື້ອມໃສ ສັດທິນຊີຍ່ອມມົດຈົດດ້ວຍອາການ ໓ ແບບນີ້

ເມື່ອບຸກຄົນເວັ້ນບຸກຄົນຜູ້ຂີ້ຄ້ານ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນຜູ້ມີຄວາມພຽນ (ແລະ) ພິຈາລະນາສຳມັບປະທານ ວິຣິຍິນຊີຍ່ອມມົດຈົດດ້ວຍອາການ ໓ ແບບນີ້

ເມື່ອບຸກຄົນເວັ້ນບຸກຄົນຜູ້ມີສະຕິຫຼົງລືມ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນຜູ້ມີສະຕິ ຕັ້ງໝັ້ນ (ແລະ) ພິຈາລະນາສະຕິປັດຖານ ສະຕິນຊີຍ່ອມມົດຈົດດ້ວຍອາການ ໓ ແບບນີ້

ເມື່ອບຸກຄົນເວັ້ນບຸກຄົນຜູ້ມີຈິດບໍ່ຕັ້ງໝັ້ນ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນຜູ້ມີຈິດຕັ້ງໝັ້ນ (ແລະ) ພິຈາລະນາຊານວິໂມກ ສະມາທິນຊີຍ່ອມມົດຈົດດ້ວຍອາການ ໓ ແບບນີ້

ເມື່ອບຸກຄົນເວັ້ນບຸກຄົນຜູ້ມີປັນຍາຊາມ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນຜູ້ມີປັນຍາດີ (ແລະ) ພິຈາລະນາຍານຈະຣິຍາອັນເລິກເຊິ່ງ ປັນຍິນຊີຍ່ອມມົດຈົດດ້ວຍອາການ ໓ ແບບນີ້

ເມື່ອບຸກຄົນເວັ້ນບຸກຄົນ ໕ ຈຳພວກ ສະມາຄົມ ຄົບຫາ ນັ່ງໃກ້ບຸກຄົນ ໕ ຈຳພວກ (ແລະ) ພິຈາລະນາຈຳນວນພຣະສູດ ໕ ປະການດັ່ງກ່າວມານີ້ ອິນຊີ ໕ ປະການນີ້ຍ່ອມມົດຈົດດ້ວຍອາການ ໑໕ ແບບນີ້

ອິນຊີ ໕ ອັນບຸກຄົນຍ່ອມຈະເລີນ ດ້ວຍອາການເທົ່າໃດ ການຈະເລີນອິນຊີ ໕ ມີໄດ້ດ້ວຍອາການເທົ່າໃດ?

ຄື ອິນຊີ ໕ ອັນບຸກຄົນຍ່ອມຈະເລີນດ້ວຍອາການ ໑໐ ຢ່າງ ການຈະເລີນອິນຊີ ໕ ມີໄດ້ດ້ວຍອາການ ໑໐ ຢ່າງ ບຸກຄົນເມື່ອລະຄວາມບໍ່ມີສັດທາ ຊື່ວ່າຈະເລີນສັດທິນຊີ ເມື່ອຈະເລີນສັດທິນຊີ ຊື່ວ່າລະຄວາມບໍ່ມີສັດທາ ເມື່ອລະຄວາມຂີ້ຄ້ານ ຊື່ວ່າຈະເລີນວິຣິຍິນຊີ ເມື່ອຈະເລີນວິຣິຍິນຊີ ຊື່ວ່າລະຄວາມຂີ້ຄ້ານ ເມື່ອລະຄວາມຜະໝາດ ຊື່ວ່າຈະເລີນສະຕິນຊີ ເມື່ອຈະເລີນສະຕິນຊີ ຊື່ວ່າລະຄວາມຜະໝາດ ເມື່ອລະອຸດທັດຈະ ຊື່ວ່າຈະເລີນສະມາທິນຊີ ເມື່ອຈະເລີນສະມາທິນຊີ ຊື່ວ່າລະອຸດທັດຈະ ເມື່ອລະອະວິດຊາ ຊື່ວ່າຈະເລີນປັນຍິນຊີ ເມື່ອຈະເລີນປັນຍິນຊີ ຊື່ວ່າລະອະວິດຊາ ອິນຊີ ໕ ອັນບຸກຄົນ ຍ່ອມຈະເລີນດ້ວຍອາການ ໑໐ ແບບນີ້ ການຈະເລີນອິນຊີ ໕ ມີໄດ້ດ້ວຍອາການ ໑໐ ແບບນີ້

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ດ້ວຍອາການເທົ່າໃດ

ຄື ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວດ້ວຍອາການ ໑໐ ຢ່າງ ໄດ້ແກ່

໑. ສັດທິນຊີເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຍ້ອນລະ ລະຄວາມບໍ່ມີສັດທາດີແລ້ວ

໔. ຄວາມບໍ່ມີສັດທາເປັນອັນບຸກຄົນລະແລ້ວ ລະດີແລ້ວ ຍ້ອນຈະເລີນ ຈະເລີນສັດ ທິນຊີດີແລ້ວ

໓. ວິຣິຍິນຊີເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຍ້ອນລະ ລະຄວາມ ຂີ້ຄ້ານດີແລ້ວ

໔. ຄວາມຂີ້ຄ້ານເປັນອັນບຸກຄົນລະແລ້ວ ລະດີແລ້ວ ຍ້ອນຈະເລີນ ຈະເລີນວິຣິຍິນ ຊີດີແລ້ວ

໕. ສະຕິນຊີເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຍ້ອນລະ ລະຄວາມຜະ ໝາດດີແລ້ວ

໖. ຄວາມຜະໝາດເປັນອັນບຸກຄົນລະແລ້ວ ລະດີແລ້ວ ຍ້ອນຈະເລີນ ຈະເລີນ ສະຕິນຊີດີແລ້ວ

໗. ສະມາທິນຊີເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຍ້ອນລະ ລະອຸດທັດ ຈະດີແລ້ວ

໘. ອຸດທັດຈະເປັນອັນບຸກຄົນລະແລ້ວ ລະດີແລ້ວ ຍ້ອນຈະເລີນ ຈະເລີນ ສະມາ ທິນຊີດີແລ້ວ

໙. ປັນຍິນຊີເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຍ້ອນລະ ລະອະວິດຊາດີ ແລ້ວ

໑໐. ອະວິດຊາເປັນອັນບຸກຄົນລະແລ້ວ ລະດີແລ້ວ ຍ້ອນຈະເລີນ ຈະເລີນປັນຍິນຊີດີ ແລ້ວ

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວດ້ວຍອາການ ໑໐ ແນວນີ້

[໑໘໖] ອິນຊີ ໕ ອັນບຸກຄົນຍ່ອມຈະເລີນດ້ວຍອາການເທົ່າໃດ ອິນຊີ ໕ ເປັນອັນບຸກຄົນ ຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ດ້ວຍອາການເທົ່າໃດ

ຄື ອິນຊີ ໕ ອັນບຸກຄົນຍ່ອມຈະເລີນດ້ວຍອາການ ໔ ຢ່າງ ອິນຊີ ໕ ເປັນອັນບຸກຄົນ ຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ດ້ວຍອາການ ໔ ຢ່າງ

ອິນຊີ ໕ ອັນບຸກຄົນຍ່ອມຈະເລີນໃນຂະນະແຫ່ງໂສດາປັດຕິມັກ

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ໃນ ຂະນະແຫ່ງໂສດາປັດຕິຜົນ ອິນຊີ ໕ ອັນບຸກຄົນຍ່ອມຈະເລີນ ໃນຂະນະແຫ່ງສະກະທາຄາມິມັກ

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ໃນ ຂະນະແຫ່ງສະກະທາຄາມິຜົນ ອິນຊີ ໕ ອັນບຸກຄົນຍ່ອມຈະເລີນໃນຂະນະແຫ່ງອະນາຄາມິມັກ

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ໃນຂະນະແຫ່ງອະນາຄາມິຜົນ ອິນຊີ ໕ ອັນບຸກຄົນຍ່ອມຈະເລີນໃນຂະນະແຫ່ງອະຣະຫັດຕະມັກ

ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ຣະງັບດີແລ້ວໃນຂະນະແຫ່ງອະຣະຫັດຕະຜົນ

ມັກຄະວິສຸດທິ ໔ ຜົນວິສຸດທິ ໔ ສະມຸດເສດວິສຸດທິ ໔ ປະຕິປັດສັດທິວິສຸດທິ ໔ ດ້ວຍປະການດັ່ງນີ້ ອິນຊີ ໕ ອັນບຸກຄົນຍ່ອມຈະເລີນດ້ວຍອາການ ໔ ແບບນີ້ ອິນຊີ ໕ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ ດ້ວຍອາການ ໔ ແບບນີ້

ບຸກຄົນຈັກຈຳພວກ ຊື່ວ່າກຳລັງຈະເລີນອິນຊີ ບຸກຄົນຈັກຈຳພວກ ຊື່ວ່າຈະເລີນອິນຊີແລ້ວ

ຄື ບຸກຄົນ ໘ ຈຳພວກຊື່ວ່າກຳລັງຈະເລີນອິນຊີ ບຸກຄົນ ໓ ຈຳພວກຊື່ວ່າຈະເລີນອິນຊີແລ້ວ

ບຸກຄົນ ໘ ຈຳພວກໃດ ຊື່ວ່າ ກຳລັງຈະເລີນອິນຊີ

ຄື ພຣະເສຂະບຸກຄົນ ໗ ກັນລະຍານະປຸຖຸຊົນ ໑ ບຸກຄົນ ໘ ຈຳພວກນີ້ຊື່ວ່າກຳລັງຈະເລີນອິນຊີ

ບຸກຄົນ ໓ ຈຳພວກໃດ ຊື່ວ່າຈະເລີນອິນຊີແລ້ວ ຄື

໑. ພຣະຂີນາສົບສາວົກຂອງພຣະຕະຖາຄົດເຈົ້າ ຊື່ວ່າຈະເລີນອິນຊີແລ້ວ ຍ້ອນຮູ້ດ້ວຍອຳນາດຄວາມເປັນຜູ້ຈະເລີນອິນຊີແລ້ວ
໒. ພຣະປັດເຈກພຸດທະເຈົ້າ ຊື່ວ່າຈະເລີນອິນຊີແລ້ວ ຍ້ອນມີສະພາວະຕັດສະຮູ້ເອງ
໓. ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຊື່ວ່າຈະເລີນອິນຊີແລ້ວ ຍ້ອນມີສະພາວະມີພຣະຄຸນຫາປະມານບໍ່ໄດ້

ບຸກຄົນ ໓ ຈຳພວກນີ້ ຊື່ວ່າຈະເລີນອິນຊີແລ້ວ

ຍ້ອນແນວນັ້ນ ບຸກຄົນ ໘ ຈຳພວກນີ້ ຊື່ວ່າກຳລັງຈະເລີນອິນຊີ ບຸກຄົນ ໓ ຈຳພວກນີ້ ຊື່ວ່າຈະເລີນອິນຊີແລ້ວ

**ສູດຕັນຕະນິດເທດທີ ໑ ຈົບ**

# ໒. ທຸຕິຍະສູດຕັນຕະນິດເທດ

## ສະແດງສູດທີ ໒

[໑໘໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ມີອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)

໓. ສະຕິນຊີ (ອິນຊີຄືສະຕິ)

໔. ສະມາທິນຊີ (ອິນຊີຄືສະມາທິ)

໕. ປັນຍິນຊີ (ອິນຊີຄືປັນຍາ)

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ບໍ່ຮູ້ຊັດແຈ້ງເຊິ່ງເຫດເກີດ ຄວາມດັບ ຄຸນ ໂທດ ແຫ່ງອິນຊີ ໕ ນີ້ແລະເຄື່ອງສະລັດອອກຈາກອິນຊີ ໕ ນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ບໍ່ໄດ້ຮັບຍ້ອງຍໍວ່າ ເປັນສະມະນະໃນໝູ່ສະມະນະ ຫຼືໄດ້ຮັບຍ້ອງຍໍວ່າເປັນພາມໃນໝູ່ພາມເລີຍ ແລະທ່ານເຫຼົ່ານັ້ນບໍ່ໄດ້ເຮັດໃຫ້ແຈ້ງສາມັນຍະຜົນ ແລະ ພົມມັນຍະຜົນ ດ້ວຍປັນຍາອັນຍິ່ງເອງແລ້ວເຂົ້າເຖິງຢູ່ໃນປັດຈຸບັນເລີຍ

ພິກຂຸທັງຫຼາຍ ສະມະນະຫຼືພາມເຫຼົ່າໃດເຫຼົ່າໜຶ່ງ ຮູ້ຊັດແຈ້ງເຊິ່ງເຫດເກີດ ຄວາມດັບ ຄຸນ ໂທດ ແຫ່ງອິນຊີ ໕ ນີ້ ແລະເຄື່ອງສະລັດອອກຈາກອິນຊີ ໕ ນີ້ຕາມຄວາມເປັນຈິງ ສະມະນະຫຼືພາມເຫຼົ່ານັ້ນ ຍ່ອມໄດ້ຮັບຍ້ອງຍໍວ່າ ເປັນສະມະນະໃນໝູ່ສະມະນະ ໄດ້ຮັບຍ້ອງຍໍວ່າ ເປັນພາມໃນໝູ່ພາມ ແລະທ່ານເຫຼົ່ານັ້ນຍ່ອມເຮັດໃຫ້ແຈ້ງສາມັນຍະຜົນ ແລະພົມມັນຍະຜົນ ດ້ວຍປັນຍາອັນຍິ່ງເອງແລ້ວເຂົ້າເຖິງຢູ່ໃນປັດຈຸບັນ

[໑໗໗] ອິນຊີ ໕ ມີເຫດເກີດ ດ້ວຍອາການເທົ່າໃດ ບຸກຄົນຮູ້ຊັດແຈ້ງເຫດເກີດແຫ່ງ ອິນຊີ ໕ ດ້ວຍອາການເທົ່າໃດ?

ອິນຊີ ໕ ມີຄວາມດັບ ດ້ວຍອາການເທົ່າໃດ ບຸກຄົນຮູ້ຊັດແຈ້ງຄວາມດັບແຫ່ງອິນຊີ ໕ ດ້ວຍອາການເທົ່າໃດ?

ອິນຊີ ໕ ມີຄຸນ ດ້ວຍອາການເທົ່າໃດ ບຸກຄົນຮູ້ຊັດແຈ້ງຄຸນແຫ່ງອິນຊີ ໕ ດ້ວຍ ອາການເທົ່າໃດ?

ອິນຊີ ໕ ມີໂທດ ດ້ວຍອາການເທົ່າໃດ ບຸກຄົນຮູ້ຊັດແຈ້ງໂທດແຫ່ງອິນຊີ ໕ ດ້ວຍອາການເທົ່າໃດ?

ອິນຊີ ໕ ມີເຄື່ອງສະລັດອອກ ດ້ວຍອາການເທົ່າໃດ ບຸກຄົນຮູ້ຊັດແຈ້ງເຄື່ອງສະລັດອອກຈາກອິນຊີ ໕ ດ້ວຍອາການເທົ່າໃດ?

ຄື ອິນຊີ ໕ ມີເຫດເກີດດ້ວຍອາການ ໔໐ ຢ່າງ ບຸກຄົນຮູ້ຊັດແຈ້ງເຫດເກີດແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ຢ່າງ

ອິນຊີ ໕ ມີຄວາມດັບດ້ວຍອາການ ໔໐ ຢ່າງ ບຸກຄົນຮູ້ຊັດແຈ້ງຄວາມດັບແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ຢ່າງ

ອິນຊີ ໕ ມີຄຸນດ້ວຍອາການ ໒໕ ຢ່າງ ບຸກຄົນຮູ້ຊັດແຈ້ງຄຸນແຫ່ງອິນຊີ ໕ ດ້ວຍອາການ ໒໕ ຢ່າງ

ອິນຊີ ໕ ມີໂທດດ້ວຍອາການ ໔໕ ຢ່າງ ບຸກຄົນຮູ້ຊັດແຈ້ງໂທດແຫ່ງອິນຊີ ໕ ດ້ວຍອາການ ໔໕ ຢ່າງ

ອິນຊີ ໕ ມີເຄື່ອງສະລັດອອກດ້ວຍອາການ ໑໗໐ ຢ່າງ ບຸກຄົນຮູ້ຊັດແຈ້ງເຄື່ອງສະລັດອອກຈາກອິນຊີ ໕ ດ້ວຍອາການ ໑໗໐ ຢ່າງ

ອິນຊີ ໕ ມີເຫດເກີດດ້ວຍອາການ ໔໐ ມີອັນໃດແດ່ ບຸກຄົນຮູ້ຊັດແຈ້ງເຫດເກີດແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ຢ່າງ ມີອັນໃດແດ່ ຄື

໑. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ

໒. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ

໓. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ

໔. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສັດທິນຊີ ເປັນເຫດເກີດແຫ່ງສັດທິນຊີ

໕. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ການປະຄອງໄວ້ ເປັນເຫດເກີດແຫ່ງວິຣິຍິນຊີ

໖. ເຫດເກີດແຫ່ງສັນທະດ້ວຍອຳນາດການປະຄອງໄວ້ ເປັນເຫດເກີດແຫ່ງວິຣິຍິນຊີ

໗. ເຫດເກີດແຫ່ງມະນະສິການດ້ວຍອຳນາດການປະຄອງໄວ້ ເປັນເຫດເກີດແຫ່ງວິຣິຍິນຊີ

໘. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດວິຣິຍິນຊີ ເປັນເຫດເກີດແຫ່ງວິຣິຍິນຊີ

໙. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງສະຕິນຊີ

໑໐. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງສະຕິນຊີ

໑໑. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງສະຕິນຊີ

໑໒. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສະຕິນຊີ ເປັນເຫດເກີດແຫ່ງສະຕິນຊີ

໑໓. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງສະມາທິນຊີ

໑໔. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງສະມາທິນຊີ
໑໕. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງສະມາທິນຊີ
໑໖. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສະມາທິນຊີ ເປັນເຫດເກີດແຫ່ງສະມາທິນຊີ
໑໗. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ
໑໘. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ
໑໙. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ
໒໐. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດປັນຍິນຊີ ເປັນເຫດເກີດແຫ່ງປັນຍິນຊີ
໒໑. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ
໒໒. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ການປະຄອງໄວ້ ເປັນເຫດເກີດແຫ່ງວິຣິຍິນຊີ
໒໓. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງສະຕິນຊີ
໒໔. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງສະມາທິນຊີ
໒໕. ເຫດເກີດແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ
໒໖. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ
໒໗. ເຫດເກີດແຫ່ງສັນທະດ້ວຍອຳນາດການປະຄອງໄວ້ ເປັນເຫດເກີດແຫ່ງວິຣິຍິນຊີ
໒໘. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງສະຕິນຊີ
໒໙. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງສະມາທິນຊີ
໓໐. ເຫດເກີດແຫ່ງສັນທະດ້ວຍອຳນາດຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ
໓໑. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນເຫດເກີດແຫ່ງສັດທິນຊີ

໓໒. ເຫດເກີດແຫ່ງມະນະສິການດ້ວຍອຳນາດການປະຄອງໄວ້ ເປັນເຫດເກີດແຫ່ງວິ
ຣິຍິນຊີ

໓໓. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມຕັ້ງໝັ້ນ ເປັນເຫດເກີດແຫ່ງ
ສະຕິນຊີ

໓໔. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນເຫດເກີດແຫ່ງ
ສະມາທິນຊີ

໓໕. ເຫດເກີດແຫ່ງມະນະສິການດ້ວຍອຳນາດຄວາມເຫັນ ເປັນເຫດເກີດແຫ່ງປັນຍິນຊີ

໓໖. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສັດທິນຊີ ເປັນເຫດເກີດແຫ່ງສັດ
ທິນຊີ

໓໗. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດວິຣິຍິນຊີ ເປັນເຫດເກີດແຫ່ງວິຣິ
ຍິນຊີ

໓໘. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສະຕິນຊີ ເປັນເຫດເກີດແຫ່ງ
ສະຕິນຊີ

໓໙. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດສະມາທິນຊີ ເປັນເຫດເກີດແຫ່ງ
ສະມາທິນຊີ

໔໐. ຄວາມຜາກົດເປັນສະພາວະດຽວດ້ວຍອຳນາດປັນຍິນຊີ ເປັນເຫດເກີດແຫ່ງປັນ
ຍິນຊີ

ອິນຊີ ໕ ມີເຫດເກີດດ້ວຍອາການ ໔໐ ແນວນີ້ ບຸກຄົນຮູ້ຊັດແຈ້ງເຫດເກີດແຫ່ງອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ອິນຊີ ໕ ມີຄວາມດັບ ດ້ວຍອາການ ໔໐ ຢ່າງ ມີອັນໃດແດ່ ບຸກຄົນຮູ້ຊັດແຈ້ງຄວາມດັບແຫ່ງອິນຊີ ໕ ດ້ວຍອາການ ໔໐ ຢ່າງ ມີອັນໃດແດ່ ຄື

໑. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມນ້ອມໃຈເຊື່ອ ເປັນ
ຄວາມດັບແຫ່ງສັດທິນຊີ

໒. ຄວາມດັບແຫ່ງສັນທະດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນຄວາມດັບແຫ່ງສັດ
ທິນຊີ

໓. ຄວາມດັບແຫ່ງມະນະສິການດ້ວຍອຳນາດຄວາມນ້ອມໃຈເຊື່ອ ເປັນຄວາມດັບ
ແຫ່ງສັດທິນຊີ

໔. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອຳນາດສັດທິນຊີ ເປັນຄວາມດັບແຫ່ງ
ສັດທິນຊີ

໕. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໖. ຄວາມດັບແຫ່ງສັນທະດ້ວຍອຳນາດການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໗. ຄວາມດັບແຫ່ງມະນະສິການດ້ວຍອຳນາດການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໘. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອຳນາດວິຣິຍິນຊີ ເປັນຄວາມດັບແຫ່ງວິຣິຍິນຊີ

໙. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໑໐. ຄວາມດັບແຫ່ງສັນທະດ້ວຍອຳນາດຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໑໑. ຄວາມດັບແຫ່ງມະນະສິການດ້ວຍອຳນາດຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໑໒. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອຳນາດສະຕິນຊີ ເປັນຄວາມດັບແຫ່ງສະຕິນຊີ

໑໓. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໑໔. ຄວາມດັບແຫ່ງສັນທະດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໑໕. ຄວາມດັບແຫ່ງມະນະສິການດ້ວຍອຳນາດຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໑໖. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອຳນາດສະມາທິນຊີ ເປັນຄວາມດັບແຫ່ງສະມາທິນຊີ

໑໗. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໑໘. ຄວາມດັບແຫ່ງສັນທະດ້ວຍອຳນາດຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໑໙. ຄວາມດັບແຫ່ງມະນະສິການດ້ວຍອຳນາດຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໒໐. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອຳນາດປັນຍິນຊີ ເປັນຄວາມດັບແຫ່ງປັນຍິນຊີ

໒໑. ຄວາມດັບແຫ່ງຄວາມຄຳນຶງເຖິງເພື່ອປະໂຫຍດແກ່ຄວາມນ້ອມໃຈເຊື່ອເປັນຄວາມດັບແຫ່ງສັດທິນຊີ

໔໒. ຄວາມດັບແຫ່ງຄວາມຄໍານຶງເຖິງເພື່ອປະໂຫຍດແກ່ການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໔໓. ຄວາມດັບແຫ່ງຄວາມຄໍານຶງເຖິງເພື່ອປະໂຫຍດແກ່ຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໔໔. ຄວາມດັບແຫ່ງຄວາມຄໍານຶງເຖິງເພື່ອປະໂຫຍດແກ່ຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໔໕. ຄວາມດັບແຫ່ງຄວາມຄໍານຶງເຖິງເພື່ອປະໂຫຍດແກ່ຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໔໖. ຄວາມດັບແຫ່ງສັນທະດ້ວຍອໍານາດຄວາມນ້ອມໃຈເຊື່ອ ເປັນຄວາມດັບແຫ່ງສັດທິນຊີ

໔໗. ຄວາມດັບແຫ່ງສັນທະດ້ວຍອໍານາດການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໔໘. ຄວາມດັບແຫ່ງສັນທະດ້ວຍອໍານາດຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໔໙. ຄວາມດັບແຫ່ງສັນທະດ້ວຍອໍານາດຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໕໐. ຄວາມດັບແຫ່ງສັນທະດ້ວຍອໍານາດຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໕໑. ຄວາມດັບແຫ່ງມະນະສິການດ້ວຍອໍານາດຄວາມນ້ອມໃຈເຊື່ອ ເປັນຄວາມດັບແຫ່ງສັດທິນຊີ

໕໒. ຄວາມດັບແຫ່ງມະນະສິການດ້ວຍອໍານາດການປະຄອງໄວ້ ເປັນຄວາມດັບແຫ່ງວິຣິຍິນຊີ

໕໓. ຄວາມດັບແຫ່ງມະນະສິການດ້ວຍອໍານາດຄວາມຕັ້ງໝັ້ນ ເປັນຄວາມດັບແຫ່ງສະຕິນຊີ

໕໔. ຄວາມດັບແຫ່ງມະນະສິການດ້ວຍອໍານາດຄວາມບໍ່ຟຸ້ງຊ່ານ ເປັນຄວາມດັບແຫ່ງສະມາທິນຊີ

໕໕. ຄວາມດັບແຫ່ງມະນະສິການດ້ວຍອໍານາດຄວາມເຫັນ ເປັນຄວາມດັບແຫ່ງປັນຍິນຊີ

໕໖. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອໍານາດສັດທິນຊີ ເປັນຄວາມດັບແຫ່ງສັດທິນຊີ

໕໗. ຄວາມບໍ່ຜາກົດເປັນສະພາວະດຽວດ້ວຍອໍານາດວິຣິຍິນຊີ ເປັນຄວາມດັບແຫ່ງວິຣິຍິນຊີ

໓໗. ຄວາມບໍ່ຫວັ່ນໄຫວເປັນສະພາວະດຽວດ້ວຍອຳນາດສະຕິນຊີ ເປັນຄວາມດັບແຫ່ງ ສະຕິນຊີ

໓໙. ຄວາມບໍ່ຫວັ່ນໄຫວເປັນສະພາວະດຽວດ້ວຍອຳນາດສະມາທິນຊີ ເປັນຄວາມດັບແຫ່ງ ສະມາທິນຊີ

໔໐. ຄວາມບໍ່ຫວັ່ນໄຫວເປັນສະພາວະດຽວດ້ວຍອຳນາດປັນຍິນຊີ ເປັນຄວາມດັບແຫ່ງປັນ ຍິນຊີ

ອິນຊີ ໕ ມີຄວາມດັບດ້ວຍອາການ ໔໐ ແນວນີ້ ບຸກຄົນຮູ້ຊັດແຈ້ງຄວາມດັບແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ແນວນີ້

## ກ. ອັດສາທະນິດເທດ

### ສະແດງຄຸນ (ແຫ່ງອິນຊີ ໕)

[໑໗໙] ອິນຊີ ໕ ມີຄຸນ ດ້ວຍອາການ ໒໕ ຢ່າງ ມີອັນໃດແດ່ ບຸກຄົນຮູ້ຊັດແຈ້ງຄຸນແຫ່ງ ອິນຊີ ໕ ດ້ວຍອາການ ໒໕ ຢ່າງ ມີອັນໃດແດ່ ຄື

໑. ຄວາມບໍ່ຫວັ່ນໄຫວແຫ່ງຄວາມບໍ່ມີສັດທາ ເປັນຄຸນແຫ່ງສັດທິນຊີ

໒. ຄວາມບໍ່ຫວັ່ນໄຫວແຫ່ງຄວາມຮ້ອນຮົນ ຍ້ອນຄວາມບໍ່ມີສັດທາ ເປັນຄຸນແຫ່ງສັດທິນຊີ

໓. ຄວາມແກ່ກ້າແຫ່ງຄວາມປະພຶດດ້ວຍຄວາມນ້ອມໃຈເຊື່ອເປັນຄຸນແຫ່ງສັດທິນຊີ

໔. ຄວາມສະງົບແລະການບັນລຸສຸກວິຫາຣະທຳ ເປັນຄຸນແຫ່ງສັດທິນຊີ

໕. ສຸກໂສມະນັດທີ່ອາໄສສັດທິນຊີເກີດຂຶ້ນ ເປັນຄຸນແຫ່ງສັດທິນຊີ

໖. ຄວາມບໍ່ຫວັ່ນໄຫວແຫ່ງຄວາມຂີ້ຄ້ານ ເປັນຄຸນແຫ່ງວິຣິຍິນຊີ

໗. ຄວາມບໍ່ຫວັ່ນໄຫວແຫ່ງຄວາມຮ້ອນຮົນ ຍ້ອນຄວາມບໍ່ຂີ້ຄ້ານເປັນຄຸນແຫ່ງວິຣິຍິນຊີ

໘. ຄວາມແກ່ກ້າແຫ່ງຄວາມປະພຶດດ້ວຍການປະຄອງໄວ້ ເປັນຄຸນແຫ່ງວິຣິຍິນຊີ

໙. ຄວາມສະງົບແລະການບັນລຸສຸກວິຫາຣະທຳ ເປັນຄຸນແຫ່ງວິຣິຍິນຊີ

໑໐. ສຸກໂສມະນັດທີ່ອາໄສວິຣິຍິນຊີເກີດຂຶ້ນ ເປັນຄຸນແຫ່ງວິຣິຍິນຊີ

໑໑. ຄວາມບໍ່ຫວັ່ນໄຫວແຫ່ງຄວາມປະໝາດ ເປັນຄຸນແຫ່ງສະຕິນຊີ

໑໒. ຄວາມບໍ່ຫວັ່ນໄຫວແຫ່ງຄວາມຮ້ອນຮົນຍ້ອນເຫດແຫ່ງຄວາມປະໝາດ ເປັນຄຸນແຫ່ງ ສະຕິນຊີ

໑໓. ຄວາມແກ່ກ້າແຫ່ງຄວາມປະພຶດດ້ວຍຄວາມຕັ້ງໝັ້ນ ເປັນຄຸນແຫ່ງສະຕິນຊີ

໑໔. ຄວາມສະງົບແລະການບັນລຸສຸກວິຫາຣະທຳ ເປັນຄຸນແຫ່ງສະຕິນຊີ

໑໕. ສຸກໂສມະນັດທີ່ອາໄສສະຕິນຊີເກີດຂຶ້ນ ເປັນຄຸນແຫ່ງສະຕິນຊີ

໑໖. ຄວາມບໍ່ຫວັ່ນໄຫວແຫ່ງອຸດທັດຈະ ເປັນຄຸນແຫ່ງສະມາທິນຊີ

໑໗. ຄວາມບໍ່ຜາກົດແຫ່ງຄວາມຮ້ອນຮົນຍ້ອນອຸດທັດຈະ ເປັນຄຸນແຫ່ງສະມາທິນຊີ
໑໘. ຄວາມແກ່ກ້າແຫ່ງຄວາມປະພຶດດ້ວຍຄວາມບໍ່ຟຸ້ງຊ່ານ ເປັນຄຸນແຫ່ງສະມາທິນຊີ
໑໙. ຄວາມສະງົບແລະການບັນລຸສຸກວິຫາຣະທຳ ເປັນຄຸນແຫ່ງສະມາທິນຊີ
໒໐. ສຸກໂສມະນັດທີ່ອາໄສສະມາທິນຊີເກີດຂຶ້ນ ເປັນຄຸນແຫ່ງສະມາທິນຊີ
໒໑. ຄວາມບໍ່ຜາກົດແຫ່ງອະວິດຊາ ເປັນຄຸນແຫ່ງປັນຍິນຊີ
໒໒. ຄວາມບໍ່ຜາກົດແຫ່ງຄວາມຮ້ອນຮົນຍ້ອນອະວິດຊາ ເປັນຄຸນແຫ່ງປັນຍິນຊີ
໒໓. ຄວາມແກ່ກ້າແຫ່ງຄວາມປະພຶດດ້ວຍຄວາມເຫັນ ເປັນຄຸນແຫ່ງປັນຍິນຊີ
໒໔. ຄວາມສະງົບແລະການບັນລຸສຸກວິຫາຣະທຳ ເປັນຄຸນແຫ່ງປັນຍິນຊີ
໒໕. ສຸກໂສມະນັດທີ່ອາໄສປັນຍິນຊີເກີດຂຶ້ນ ເປັນຄຸນແຫ່ງປັນຍິນຊີ

ອິນຊີ ໕ ມີຄຸນດ້ວຍອາການ ໒໕ ແນວນີ້ ບຸກຄົນຮູ້ຊັດແຈ້ງຄຸນແຫ່ງອິນຊີ ໕ ດ້ວຍອາການ ໒໕ ແນວນີ້

## ຂ. ອາທີນະວະນິດເທດ

### ສະແດງໂທດ (ແຫ່ງອິນຊີ ໕)

[໑໒໐] ອິນຊີ ໕ ມີໂທດ ຍ້ອນອາການ ໒໕ ຢ່າງ ເປັນແນວໃດ? ບຸກຄົນ
ຮູ້ຊັດໂທດແຫ່ງອິນຊີ ໕ ຍ້ອນອາການ ໒໕ ຢ່າງ ເປັນແນວໃດ? ຄື
໑. ຄວາມຜາກົດແຫ່ງຄວາມບໍ່ມີສັດທາ ເປັນໂທດແຫ່ງສັດທິນຊີ
໒. ຄວາມຜາກົດແຫ່ງຄວາມຮ້ອນຮົນຍ້ອນຄວາມບໍ່ມີສັດທາ ເປັນໂທດແຫ່ງສັດທິນຊີ
໓. ສັດທິນຊີມີໂທດ ຍ້ອນມີສະພາວະບໍ່ທ່ຽງ
໔. ສັດທິນຊີມີໂທດ ຍ້ອນມີສະພາວະເປັນທຸກ
໕. ສັດທິນຊີມີໂທດ ຍ້ອນມີສະພາວະເປັນອະນັດຕາ
໖. ຄວາມຜາກົດແຫ່ງຄວາມຂີ້ຄ້ານ ເປັນໂທດແຫ່ງວິຣິຍິນຊີ
໗. ຄວາມຜາກົດແຫ່ງຄວາມຮ້ອນຮົນຍ້ອນຄວາມຂີ້ຄ້ານ ເປັນໂທດແຫ່ງວິຣິຍິນຊີ
໘. ວິຣິຍິນຊີມີໂທດ ຍ້ອນມີສະພາວະບໍ່ທ່ຽງ
໙. ວິຣິຍິນຊີມີໂທດ ຍ້ອນມີສະພາວະເປັນທຸກ
໑໐. ວິຣິຍິນຊີມີໂທດ ຍ້ອນມີສະພາວະເປັນອະນັດຕາ
໑໑. ຄວາມຜາກົດແຫ່ງຄວາມຜະໝາດ ເປັນໂທດແຫ່ງສະຕິນຊີ
໑໒. ຄວາມຜາກົດແຫ່ງຄວາມຮ້ອນຮົນຍ້ອນຄວາມຜະໝາດ ເປັນໂທດແຫ່ງສະຕິນຊີ
໑໓. ສະຕິນຊີມີໂທດ ຍ້ອນມີສະພາວະບໍ່ທ່ຽງ
໑໔. ສະຕິນຊີມີໂທດ ຍ້ອນມີສະພາວະເປັນທຸກ
໑໕. ສະຕິນຊີມີໂທດ ຍ້ອນມີສະພາວະເປັນອະນັດຕາ

໑໖. ຄວາມຜາກົດແຫ່ງອຸດທັດຈະ ເປັນໂທດແຫ່ງສະມາທິນຊີ

໑໗. ຄວາມຜາກົດແຫ່ງຄວາມຮ້ອນຮົນຍ້ອນອຸດທັດຈະ ເປັນໂທດແຫ່ງສະມາທິນຊີ

໑໘. ສະມາທິນຊີມີໂທດ ຍ້ອນມີສະພາວະບໍ່ທ່ຽງ

໑໙. ສະມາທິນຊີມີໂທດ ຍ້ອນມີສະພາວະເປັນທຸກ

໒໐. ສະມາທິນຊີມີໂທດ ຍ້ອນມີສະພາວະເປັນອະນັດຕາ

໒໑. ຄວາມຜາກົດແຫ່ງອະວິດຊາ ເປັນໂທດແຫ່ງປັນຍິນຊີ

໒໒. ຄວາມຜາກົດແຫ່ງຄວາມຮ້ອນຮົນຍ້ອນອະວິດຊາ ເປັນໂທດແຫ່ງປັນຍິນຊີ

໒໓. ປັນຍິນຊີມີໂທດ ຍ້ອນມີສະພາວະບໍ່ທ່ຽງ

໒໔. ປັນຍິນຊີມີໂທດ ຍ້ອນມີສະພາວະເປັນທຸກ

໒໕. ປັນຍິນຊີມີໂທດ ຍ້ອນມີສະພາວະເປັນອະນັດຕາ

ອິນຊີ ໕ ມີໂທດ ຍ້ອນອາການ ໒໕ ແນວນີ້ ບຸກຄົນຮູ້ຊັດແຈ້ງໂທດແຫ່ງອິນຊີ ໕ ຍ້ອນອາການ ໒໕ ແນວນີ້

## ຄ. ນິດສະຣະນະນິດເທດ

### ສະແດງເຄື່ອງສະລັດອອກ (ຈາກອິນຊີ ໕)

[໑໙໑] ອິນຊີ ໕ ມີເຄື່ອງສະລັດອອກດ້ວຍອາການ ໑໘໐ ຢ່າງ ເປັນແນວໃດ? ບຸກຄົນຮູ້ຊັດແຈ້ງເຄື່ອງສະລັດອອກຈາກອິນຊີ ໕ ດ້ວຍອາການ ໑໘໐ ຢ່າງ ເປັນແນວໃດ? ຄື

ຍ້ອນມີສະພາວະນ້ອມໃຈເຊື່ອ ສັດທິນຊີຈຶ່ງ

໑. ສະລັດອອກຈາກຄວາມບໍ່ມີສັດທາ

໒. ສະລັດອອກຈາກຄວາມຮ້ອນຮົນຍ້ອນຄວາມບໍ່ມີສັດທາ

໓. ສະລັດອອກຈາກເຫຼົ່າກິເລດທີ່ເປັນໄປຕາມຄວາມບໍ່ມີສັດທາແລະຈາກຂັນ

໔. ສະລັດອອກຈາກສັບພະນິມິດພາຍນອກ

໕. ສະລັດອອກຈາກສັດທິນຊີທີ່ມີຢູ່ກ່ອນແຕ່ການໄດ້ສັດທິນຊີທີ່ປະນີດກວ່ານັ້ນ

ຍ້ອນມີສະພາວະປະຄອງໄວ້ ວິຣິຍິນຊີຈຶ່ງ

໑. ສະລັດອອກຈາກຄວາມຂີ້ຄ້ານ

໒. ສະລັດອອກຈາກຄວາມຮ້ອນຮົນຍ້ອນຄວາມຂີ້ຄ້ານ

໓. ສະລັດອອກຈາກເຫຼົ່າກິເລດທີ່ເປັນໄປຕາມຄວາມຂີ້ຄ້ານແລະຈາກຂັນ

໔. ສະລັດອອກຈາກສັບພະນິມິດພາຍນອກ

໕. ສະລັດອອກຈາກວິຣິຍິນຊີເຊິ່ງມີຢູ່ກ່ອນແຕ່ການໄດ້ວິຣິຍິນຊີທີ່ປະນີດກວ່ານັ້ນ

ຍ້ອນມີສະພາວະຕັ້ງໝັ້ນ ສະຕິນຊີຈຶ່ງ

໑. ສະລັດອອກຈາກຄວາມຜະໝາດ
໒. ສະລັດອອກຈາກຄວາມຮ້ອນຮົນຍ້ອນຄວາມຜະໝາດ
໓. ສະລັດອອກຈາກເຫຼົ່າກິເລດທີ່ເປັນໄປຕາມຄວາມຜະໝາດແລະຈາກຂັນ
໔. ສະລັດອອກຈາກສັບພະນິມິດພາຍນອກ
໕. ສະລັດອອກຈາກສະຕິນຊີເຊິ່ງມີຢູ່ກ່ອນແຕ່ການໄດ້ສະຕິນຊີທີ່ປະນີດກວ່ານັ້ນ

ຍ້ອນມີສະພາວະບໍ່ຟຸ້ງຊ່ານ ສະມາທິນຊີຈຶ່ງ

໑. ສະລັດອອກຈາກອຸດທັດຈະ
໒. ສະລັດອອກຈາກຄວາມຮ້ອນຮົນຍ້ອນອຸດທັດຈະ
໓. ສະລັດອອກຈາກເຫຼົ່າກິເລດທີ່ເປັນໄປຕາມອຸດທັດຈະນັ້ນແລະຈາກຂັນ
໔. ສະລັດອອກຈາກສັບພະນິມິດພາຍນອກ
໕. ສະລັດອອກຈາກສະມາທິນຊີ ເຊິ່ງມີຢູ່ກ່ອນແຕ່ການໄດ້ສະມາທິນຊີທີ່ປະນີດ ກວ່ານັ້ນ

ຍ້ອນມີສະພາວະເຫັນ ປັນຍິນຊີຈຶ່ງ

໑. ສະລັດອອກຈາກອະວິດຊາ
໒. ສະລັດອອກຈາກຄວາມຮ້ອນຮົນຍ້ອນອະວິດຊາ
໓. ສະລັດອອກຈາກເຫຼົ່າກິເລດທີ່ເປັນໄປຕາມອະວິດຊາແລະຈາກຂັນ
໔. ສະລັດອອກຈາກສັບພະນິມິດພາຍນອກ
໕. ສະລັດອອກຈາກປັນຍິນຊີເຊິ່ງມີຢູ່ກ່ອນແຕ່ການໄດ້ປັນຍິນຊີທີ່ປະນີດກວ່ານັ້ນ

[໑໗໒] ດ້ວຍອຳນາດແຫ່ງປະຖົມຊານ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນສ່ວນເບື້ອງຕົ້ນ

ດ້ວຍອຳນາດແຫ່ງທຸຕິຍະຊານ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນປະຖົມຊານ

ດ້ວຍອຳນາດແຫ່ງຕະຕິຍະຊານ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນທຸຕິຍະຊານ

ດ້ວຍອຳນາດແຫ່ງຈະຕຸດຖະຊານ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນຕະຕິຍະຊານ

ດ້ວຍອຳນາດແຫ່ງອາກາສານັນຈາຍະຕະນະສະມາບັດ ອິນຊີ ໕ ຈຶ່ງສະລັດອອກ ຈາກອິນຊີ ໕ ໃນຈະຕຸດຖະຊານ

ດ້ວຍອຳນາດແຫ່ງວິນຍານັນຈາຍະຕະນະສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອາກາສານັນຈາຍະຕະນະສະມາບັດ

ດ້ວຍອຳນາດແຫ່ງອາກິນຈັນຍາຍະຕະນະສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນວິນຍານັນຈາຍະຕະນະສະມາບັດ

ດ້ວຍອຳນາດແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອາກິນຈັນຍາຍະຕະນະສະມາບັດ

ດ້ວຍອຳນາດແຫ່ງອະນິດຈານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນເນວະສັນຍານາສັນຍາຍະຕະນະສະມາບັດ (໘)

ດ້ວຍອຳນາດແຫ່ງທຸກຂານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະນິດຈານຸປັດສະນາ

ດ້ວຍອຳນາດແຫ່ງອະນັດຕານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນທຸກຂານຸປັດສະນາ

ດ້ວຍອຳນາດແຫ່ງນິບພິທານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະນັດຕານຸປັດສະນາ

ດ້ວຍອຳນາດແຫ່ງວິຣາຄານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນນິບພິທານຸປັດສະນາ

ດ້ວຍອຳນາດແຫ່ງນິໂຣທານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນວິຣາຄານຸປັດສະນາ

ດ້ວຍອຳນາດແຫ່ງປະຕິນິດສັກຄານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນນິໂຣທານຸປັດສະນາ

ດ້ວຍອຳນາດແຫ່ງຂະຍານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນປະຕິນິດສັກຄານຸປັດສະນາ

ດ້ວຍອຳນາດແຫ່ງວະຍານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນ ຂະຍານຸປັດສະນາ

ດ້ວຍອຳນາດແຫ່ງວິປະຣິນາມານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນວະຍານຸປັດສະນາ

ດ້ວຍອຳນາດແຫ່ງອະນິມິດຕານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນວິປະຣິນາມານຸປັດສະນາ

ດ້ວຍອຳນາດແຫ່ງອັບປະນິຫິຕານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະນິມິດຕານຸປັດສະນາ

ດ້ວຍອຳນາດແຫ່ງສູນຍະຕານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອັບປະນິຫິຕານຸປັດສະນາ

ດ້ວຍອຳນາດແຫ່ງອະທິປັນຍາທຳມະວິປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນສູນຍະຕານຸປັດສະນາ

ດ້ວຍອຳນາດແຫ່ງຍະຖາພູຕະຍານະທັດສະນະ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະທິປັນຍາທຳມະວິປັດສະນາ

ດ້ວຍອຳນາດແຫ່ງອາທີນະວານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນຍະຖາພູຕະຍານະທັດສະນະ

ດ້ວຍອຳນາດແຫ່ງປະຕິສັງຂານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອາທີນະວານຸປັດສະນາ

ດ້ວຍອຳນາດແຫ່ງວິວັດຕະນານຸປັດສະນາ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນປະຕິສັງຂານຸປັດສະນາ

ດ້ວຍອຳນາດແຫ່ງໂສດາປັດຕິມັກ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນວິວັດຕະນານຸປັດສະນາ (໑໘-໔໖)

ດ້ວຍອຳນາດແຫ່ງໂສດາປັດຕິຜົນສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນໂສດາປັດຕິມັກ

ດ້ວຍອຳນາດແຫ່ງສະກະທາຄາມິມັກ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນໂສດາປັດຕິຜົນ

ດ້ວຍອຳນາດແຫ່ງສະກະທາຄາມິຜົນສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນສະກະທາຄາມິມັກ

ດ້ວຍອຳນາດແຫ່ງອະນາຄາມິມັກ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນສະກະທາຄາມິຜົນສະມາບັດ

ດ້ວຍອຳນາດແຫ່ງອະນາຄາມິຜົນສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະນາຄາມິມັກ

ດ້ວຍອຳນາດແຫ່ງອະຣະຫັດຕະມັກ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະນາຄາມິຜົນ

ດ້ວຍອຳນາດແຫ່ງອະຣະຫັດຕະຜົນສະມາບັດ ອິນຊີ ໕ ຈຶ່ງສະລັດອອກຈາກອິນຊີ ໕ ໃນອະຣະຫັດຕະມັກ

| | |
|---|---|
| ອິນຊີ ໕ ໃນເນກຂຳມະ | ສະລັດອອກຈາກກາມສັນທະ |
| ອິນຊີ ໕ ໃນອະພະຍາບາດ | ສະລັດອອກຈາກພະຍາບາດ |
| ອິນຊີ ໕ ໃນອາໂລກະສັນຍາ | ສະລັດອອກຈາກຖີນະມິດທະ |

ອິນຊີ ໕ ໃນອະວິກເຂປະ ສະລັດອອກຈາກອຸດທັດຈະ
ອິນຊີ ໕ ໃນທຳມະວະວັດຖານ ສະລັດອອກຈາກວິຈິກິດສາ
ອິນຊີ ໕ ໃນຍານ ສະລັດອອກຈາກອະວິດຊາ
ອິນຊີ ໕ ໃນປາມຸດຊະ ສະລັດອອກຈາກອະຣະຕິ

[໑໘໓] ອິນຊີ ໕ ໃນປະຖົມຊານ ສະລັດອອກຈາກນິວອນ
ອິນຊີ ໕ ໃນທຸຕິຍະຊານ ສະລັດອອກຈາກວິຕົກວິຈານ
ອິນຊີ ໕ ໃນຕະຕິຍະຊານ ສະລັດອອກຈາກປີຕິ
ອິນຊີ ໕ ໃນຈະຕຸດຖະຊານ ສະລັດອອກຈາກສຸກແລະທຸກ

ອິນຊີ ໕ ໃນອາກາສານັນຈາຍະຕະນະສະມາບັດ ສະລັດອອກຈາກຣູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ

ອິນຊີ ໕ ໃນວິນຍານັນຈາຍະຕະນະສະມາບັດ ສະລັດອອກຈາກອາກາສານັນຈາຍະຕະນະສັນຍາ

ອິນຊີ ໕ ໃນອາກິນຈັນຍາຍະຕະນະສະມາບັດ ສະລັດອອກຈາກວິນຍານັນຈາຍະຕະນະສັນຍາ

ອິນຊີ ໕ ໃນເນວະສັນຍານາສັນຍາຍະຕະນະສະມາບັດ ສະລັດອອກຈາກອາກິນຈັນຍາຍະຕະນະສັນຍາ

ອິນຊີ ໕ ໃນອະນິດຈານຸປັດສະນາ ສະລັດອອກຈາກນິດຈະສັນຍາ
ອິນຊີ ໕ ໃນທຸກຂານຸປັດສະນາ ສະລັດອອກຈາກສຸຂະສັນຍາ
ອິນຊີ ໕ ໃນອະນັດຕານຸປັດສະນາ ສະລັດອອກຈາກອັດຕະສັນຍາ
ອິນຊີ ໕ ໃນນິບພິທານຸປັດສະນາ ສະລັດອອກຈາກນັນທິ
ອິນຊີ ໕ ໃນວິຣາຄານຸປັດສະນາ ສະລັດອອກຈາກຣາຄະ
ອິນຊີ ໕ ໃນນິໂຣທານຸປັດສະນາ ສະລັດອອກຈາກສະມຸໄທ
ອິນຊີ ໕ ໃນປະຕິນິດສັກຄານຸປັດສະນາ ສະລັດອອກຈາກອາທານະ
ອິນຊີ ໕ ໃນຂະຍານຸປັດສະນາ ສະລັດອອກຈາກຄະນະສັນຍາ
ອິນຊີ ໕ ໃນວະຍານຸປັດສະນາ ສະລັດອອກຈາກອາຍຸຫະນະ
ອິນຊີ ໕ ໃນວິປະຣິນາມານຸປັດສະນາ ສະລັດອອກຈາກທຸວະສັນຍາ
ອິນຊີ ໕ ໃນອະນິມິດຕານຸປັດສະນາ ສະລັດອອກຈາກນິມິດ
ອິນຊີ ໕ ໃນອັບປະນິຫິຕານຸປັດສະນາ ສະລັດອອກຈາກປະນິທິ
ອິນຊີ ໕ ໃນສູນຍະຕານຸປັດສະນາ ສະລັດອອກຈາກອະພິນິເວສະ
ອິນຊີ ໕ ໃນອະທິປັນຍາທຳມະວິປັດສະນາສະລັດອອກຈາກສາຣາທານາພິນິເວສະ
ອິນຊີ ໕ ໃນຍະຖາພູຕະຍານະທັດສະນະ ສະລັດອອກຈາກສຳໂມຫາພິນິເວສະ

ອິນຊີ ໕ ໃນອາທີນະວານຸປັດສະນາ ສະລັດອອກຈາກອາລະຍາພິນິເວສະ
ອິນຊີ ໕ ໃນປະຕິສັງຂານຸປັດສະນາ ສະລັດອອກຈາກອັບປະຕິສັງຂາ
ອິນຊີ ໕ ໃນວິວັດຕະນານຸປັດສະນາ ສະລັດອອກຈາກສັນໂຍຄາພິນິເວສະ
ອິນຊີ ໕ ໃນໂສດາປັດຕິມັກ ສະລັດອອກຈາກກິເລດເຊິ່ງຢູ່ຮ່ວມກັນກັບທິດຖິ
ອິນຊີ ໕ ໃນສະກະທາຄາມິມັກ ສະລັດອອກຈາກກິເລດຢ່າງຫຍາບ
ອິນຊີ ໕ ໃນອະນາຄາມິມັກ ສະລັດອອກຈາກກິເລດຢ່າງລະອຽດ
ອິນຊີ ໕ ໃນອະຣະຫັດຕະມັກ ສະລັດອອກຈາກກິເລດທັງປວງ

ອິນຊີ ໕ ໃນທຳນັ້ນ ໆ ອັນພຣະຂີນາສົບທັງປວງສະລັດອອກໄດ້ແລ້ວ ສະລັດອອກດີແລ້ວ ຣະງັບແລ້ວ ແລະຣະງັບດີແລ້ວ

ອິນຊີ ໕ ມີເຄື່ອງສະລັດອອກດ້ວຍອາການ ໑໗໐ ແນວນີ້ ບຸກຄົນຮູ້ຊັດແຈ້ງເຄື່ອງສະລັດອອກຈາກອິນຊີ ໕ ດ້ວຍອາການ ໑໗໐ ແນວນີ້

**ສູດຕັນຕະນິດເທດທີ ໒ ຈົບ**

**ປະຖົມພານະວານ ຈົບ**

## ໓. ຕະຕິຍະສູດຕັນຕະນິດເທດ

### ສະແດງສູດທີ ໓

[໑໘໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ
ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້
ອິນຊີ ໕ ປະການ ມີອັນໃດແດ່ ຄື

໑. ສັດທິນຊີ (ອິນຊີຄືສັດທາ)
໒. ວິຣິຍິນຊີ (ອິນຊີຄືວິຣິຍະ)
໓. ສະຕິນຊີ (ອິນຊີຄືສະຕິ)
໔. ສະມາທິນຊີ (ອິນຊີຄືສະມາທິ)
໕. ປັນຍິນຊີ (ອິນຊີຄືປັນຍາ)

ພິກຂຸທັງຫຼາຍ ເພິ່ງເຫັນສັດທິນຊີໄດ້ຢູ່ໃສ?

ເພິ່ງເຫັນໄດ້ໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນສັດທິນຊີໄດ້ບ່ອນນີ້
ເພິ່ງເຫັນວິຣິຍິນຊີໄດ້ຢູ່ໃສ?

ເພິ່ງເຫັນໄດ້ໃນສຳມັບປະທານ ໔ ເພິ່ງເຫັນວິຣິຍິນຊີໄດ້ບ່ອນນີ້
ເພິ່ງເຫັນສະຕິນຊີໄດ້ຢູ່ໃສ?
ເພິ່ງເຫັນໄດ້ໃນສະຕິປັດຖານ ໔ ເພິ່ງເຫັນສະຕິນຊີໄດ້ບ່ອນນີ້
ເພິ່ງເຫັນສະມາທິນຊີໄດ້ຢູ່ໃສ?
ເພິ່ງເຫັນໄດ້ໃນຊານ ໔ ເພິ່ງເຫັນສະມາທິນຊີໄດ້ບ່ອນນີ້
ເພິ່ງເຫັນປັນຍິນຊີໄດ້ຢູ່ໃສ?
ເພິ່ງເຫັນໄດ້ໃນອະຣິຍະສັດ ໔ ເພິ່ງເຫັນປັນຍິນຊີໄດ້ບ່ອນນີ້

ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການເທົ່າໃດ?

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ເທົ່າໃດ?
ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການເທົ່າໃດ
ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການເທົ່າໃດ
ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການເທົ່າໃດ

ຄື ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ
ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ
ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ
ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ

## (໑) ປະເພທະຄະນະນະນິດເທດ

### ສະແດງອິນຊີຕາມໝວດທຳຕ່າງ ໆ

[໑໗໕] ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໒໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະຄືການຄົບສັດຕະບຸຣຸດ (ແລະ) ດ້ວຍອຳນາດແຫ່ງສັດທິນຊີ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ

ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະ ຄື ການຟັງສັດທຳຂອງສັດຕະບຸຣຸດ ໗໒໗

ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະ ຄື ການມະນະສິການໂດຍອຸບາຍແຍບຄາຍ ຯລຯ

ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະ ຄືການປະຕິບັດທຳສົມຄວນແກ່ທຳ (ແລະ) ດ້ວຍອຳນາດແຫ່ງສັດທິນຊີ ເພິ່ງເຫັນ ວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ

ດ້ວຍອຳນາດແຫ່ງສັດທິນຊີ ໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນອິນຊີ ໕ ດ້ວຍ ອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານ ຄືການບໍ່ເຮັດບາບອະກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ (ແລະ) ດ້ວຍອຳນາດແຫ່ງວິຣິຍິນຊີ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານ ຄື ການລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ຯລຯ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານຄື ການທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຯລຯ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານຄື ຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ (ແລະ) ດ້ວຍອຳນາດແຫ່ງວິຣິຍິນຊີ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໄປ

ດ້ວຍອຳນາດແຫ່ງວິຣິຍິນຊີ ໃນສຳມັບປະທານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການຕັ້ງໝັ້ນໃນສະຕິປັດຖານຄື

ການພິຈາລະນາເຫັນກາຍໃນກາຍ (ແລະ) ດ້ວຍອຳນາດແຫ່ງສະຕິນຊີ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ໆລໆ

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນຈິດໃນຈິດ ໆລໆ

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນທຳໃນທຳທັງຫຼາຍ (ແລະ) ດ້ວຍອຳນາດແຫ່ງສະຕິນຊີ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ດ້ວຍອຳນາດແຫ່ງສະຕິນຊີ ໃນສະຕິປັດຖານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ຢ່າງເປັນແນວໃດ?

ຄື ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນປະຖົມຊານ (ແລະ) ດ້ວຍອຳນາດແຫ່ງສະມາທິນຊີ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ

ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານ ໃນທຸຕິຍະຊານ ໆລໆ

ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນຕະຕິຍະຊານ ໆລໆ

ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນຈະຕຸດຖະຊານ (ແລະ) ດ້ວຍອຳນາດແຫ່ງສະມາທິນຊີ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ

ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ຢ່າງເປັນແນວໃດ?

ຄື ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນໃນອະຣິຍະສັດຄືທຸກ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນໃນອະຣິຍະສັດຄືທຸກຂະສະມຸໄທ ຯລຯ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນໃນອະຣິຍະສັດຄືທຸກຂະນິໂຣທະ ຯລຯ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນໃນອະຣິຍະສັດຄືທຸກຂະນິໂຣທະຄາມິນີປະຕິປະທາ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນອິນຊີ ໕ ດ້ວຍອາການ ໔໐ ແນວນີ້

## (໔) ຈະຣິຍະວານ

### ວາຣະວ່າດ້ວຍຄວາມປະພຶດ

[໑໙໖] ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການເທົ່າໃດ?

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ຯລຯ

ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ຯລຯ

ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ຯລຯ

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການເທົ່າໃດ?

ຄື ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ຢ່າງ

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ຯລຯ

ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ຯລຯ

ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ຯລຯ

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ຢ່າງ

ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມນ້ອມໃຈເຊື່ອ ໃນໂສຕາປັດຕິຍັງຄະຄືການຄົບຫາສັດຕະບຸຣຸດ (ແລະ) ດ້ວຍອຳນາດສັດທິນຊີ

ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເຫັນ

ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະຄືການຟັງທຳຂອງສັດຕະບຸຣຸດ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະຄືການມະນະສິການໂດຍອຸບາຍແຍບຄາຍ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມນ້ອມໃຈເຊື່ອໃນໂສຕາປັດຕິຍັງຄະຄືການປະຕິບັດທຳສົມຄວນແກ່ທຳ (ແລະ) ດ້ວຍອຳນາດສັດທິນຊີ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເຫັນ

ດ້ວຍອຳນາດແຫ່ງສັດທິນຊີໃນໂສຕາປັດຕິຍັງຄະ ໔ ເພິ່ງເຫັນຄວາມປະພຶດແຫ່ງ ອິນຊີ ໕ ດ້ວຍອາການ ໒໐ ແນວນີ້

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໒໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານຄືການບໍ່ເຮັດບາບອະກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ (ແລະ) ດ້ວຍອຳນາດແຫ່ງວິຣິຍິນຊີ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານຄືການລະບາບອະກຸສົນທຳທີ່ເກີດຂຶ້ນແລ້ວ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ໃນສຳມັບປະທານຄືການທຳກຸສົນທຳທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການປະຄອງໄວ້ ໃນສຳມັບປະທານຄືຄວາມດຳຣົງຢູ່ ບໍ່ເລືອນຫາຍ ຍິ່ງຂຶ້ນໄປ ໄພບູນ ຈະເລີນເຕັມທີ່ ແຫ່ງກຸສົນທຳທີ່ເກີດຂຶ້ນແລ້ວ (ແລະ) ດ້ວຍອຳນາດແຫ່ງວິຣິຍິນຊີ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ຯລຯ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ດ້ວຍອຳນາດແຫ່ງວິຣິຍິນຊີໃນສຳມັບປະທານ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໒໐ ແນວນີ້

ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ເພິ່ງເຫັນຄວາມປະພຶດແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນກາຍໃນກາຍ (ແລະ) ດ້ວຍອຳນາດແຫ່ງສະຕິນຊີ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມຕັ້ງໝັ້ນໃນສະຕິປັດຖານຄືການພິຈາລະນາເຫັນຈິດໃນຈິດ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມຕັ້ງໝັ້ນ ໃນສະຕິປັດຖານຄືການພິຈາລະນາເຫັນທຳໃນທຳທັງຫຼາຍ (ແລະ) ດ້ວຍອຳນາດແຫ່ງສະຕິນຊີ ຯລຯ ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ດ້ວຍອຳນາດແຫ່ງສະຕິນຊີໃນສະຕິປັດຖານ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນປະຖົມຊານ (ແລະ) ດ້ວຍອຳນາດແຫ່ງສະມາທິນຊີ ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ

ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນທຸຕິຍະຊານ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ ຟຸ້ງຊ່ານໃນຕະຕິຍະຊານ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມບໍ່ຟຸ້ງຊ່ານໃນຈະຕຸດຖະຊານ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ດ້ວຍອຳນາດແຫ່ງສະມາທິນຊີໃນຊານ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ແນວນີ້

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນຄວາມປະພຶດແຫ່ງ ອິນຊີ ໕ ດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນການເຫັນອະຣິຍະສັດ ຄື ທຸກ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມເຫັນອະຣິຍະສັດຄືທຸກຂະສະມຸໄທ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມເຫັນອະຣິຍະສັດຄືທຸກຂະນິໂຣທະ ຯລຯ

ເພິ່ງເຫັນຄວາມປະພຶດແຫ່ງປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ ໃນຄວາມເຫັນອະຣິຍະສັດຄືທຸກຂະນິໂຣທະຄາມິນີປະຕິປະທາ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນຄວາມປະພຶດແຫ່ງສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນຄວາມປະພຶດແຫ່ງວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນຄວາມປະພຶດແຫ່ງສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນຄວາມປະພຶດແຫ່ງສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ດ້ວຍອຳນາດແຫ່ງປັນຍິນຊີໃນອະຣິຍະສັດ ໔ ເພິ່ງເຫັນຄວາມປະພຶດແຫ່ງອິນຊີ ໕ ດ້ວຍອາການ ໔໐ ແນວນີ້

## ຈາຣະວິຫາຣະນິດເທດ

### ສະແດງຄວາມປະພຶດແລະຄວາມເປັນຢູ່

[໑໙໗] ຄວາມປະພຶດແລະຄວາມເປັນຢູ່ ເປັນອັນຕັດສະຣູ້ແລ້ວ ຮູ້ແຈ້ງແລ້ວ ເໝືອນຢ່າງສະພົມມະຈາຣີຜູ້ຮູ້ແຈ້ງ ໝັ້ນໃຈບຸກຄົນ ຕາມທີ່ປະພຶດ ຕາມທີ່ເປັນຢູ່ໃນຖານະທີ່ເລິກເຊິ່ງວ່າທ່ານຜູ້ນີ້ບັນລຸແລ້ວຫຼືວ່າຈັກບັນລຸຢ່າງແນ່ນອນ

ຄຳວ່າ ຄວາມປະພຶດ ອະທິບາຍວ່າ ຄວາມປະພຶດ ໘ ຢ່າງ ໄດ້ແກ່

໑. ຄວາມປະພຶດໃນອິຣິຍາບົດ

໒. ຄວາມປະພຶດໃນອາຍະຕະນະ

໓. ຄວາມປະພຶດໃນສະຕິ

໔. ຄວາມປະພຶດໃນສະມາທິ

໕. ຄວາມປະພຶດໃນຍານ

໖. ຄວາມປະພຶດໃນມັກ

໗. ຄວາມປະພຶດໃນຜົນ

໘. ຄວາມປະພຶດເພື່ອປະໂຫຍດແກ່ໂລກ

ຄຳວ່າ ຄວາມປະພຶດໃນອິຣິຍາບົດ ໄດ້ແກ່ ຄວາມປະພຶດໃນອິຣິຍາບົດ ໔

ຄຳວ່າ ຄວາມປະພຶດໃນອາຍະຕະນະ ໄດ້ແກ່ ຄວາມປະພຶດໃນອາຍະຕະນະພາຍໃນ ແລະອາຍະຕະນະພາຍນອກຢ່າງລະ ໖

ຄຳວ່າ ຄວາມປະພຶດໃນສະຕິ ໄດ້ແກ່ ຄວາມປະພຶດໃນສະຕິປັດຖານ ໔

ຄຳວ່າ ຄວາມປະພຶດໃນສະມາທິ ໄດ້ແກ່ ຄວາມປະພຶດໃນຊານ ໔

ຄຳວ່າ ຄວາມປະພຶດໃນຍານ ໄດ້ແກ່ ຄວາມປະພຶດໃນອະຣິຍະສັດ ໔

ຄຳວ່າ ຄວາມປະພຶດໃນມັກ ໄດ້ແກ່ ຄວາມປະພຶດໃນອະຣິຍະມັກ ໔

ຄຳວ່າ ຄວາມປະພຶດໃນຜົນ ໄດ້ແກ່ ຄວາມປະພຶດໃນສາມັນຍະຜົນ ໔

ຄຳວ່າ ຄວາມປະພຶດເພື່ອປະໂຫຍດແກ່ໂລກ ໄດ້ແກ່ ຄວາມປະພຶດໃນພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຄວາມປະພຶດໃນພຣະປັດເຈກພຸດທະເຈົ້າບາງສ່ວນ ຄວາມປະພຶດໃນພຣະສາວົກບາງສ່ວນ ຄວາມປະພຶດໃນອິຣິຍາບົດມີແກ່ຜູ້ຕັ້ງຕົນໄວ້ຊອບ ຄວາມປະພຶດໃນອາຍະຕະນະມີແກ່ຜູ້ສັງລວມອິນຊີ ຄວາມປະພຶດໃນສະຕິມີແກ່ຜູ້ທີ່ຢູ່ດ້ວຍຄວາມບໍ່ຜະໝາດ ຄວາມປະພຶດໃນສະມາທິມີແກ່ຜູ້ຂວນຂວາຍໃນອະທິຈິດ ຄວາມປະພຶດໃນຍານມີແກ່ຜູ້ບັນລຸປັນຍາເຄື່ອງຕັດສະຣູ້ ຄວາມປະພຶດໃນມັກມີແກ່ຜູ້ປະຕິບັດຊອບ ຄວາມປະພຶດໃນຜົນມີແກ່ຜູ້ໄດ້ບັນລຸຜົນ ແລະຄວາມປະພຶດເພື່ອປະໂຫຍດແກ່ໂລກມີແກ່ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າບາງສ່ວນ ພຣະສາວົກ ບາງສ່ວນ ເຫຼົ່ານີ້ ຊື່ວ່າຄວາມປະພຶດ ໘ ຢ່າງ

ອີກໄນໜຶ່ງ ຄວາມປະພຶດ ໘ ຢ່າງ ຄື

໑. ເມື່ອນ້ອມໃຈເຊື່ອ ຊື່ວ່າຍ່ອມປະພຶດດ້ວຍສັດທາ

໒. ເມື່ອປະຄອງໃຈ ຊື່ວ່າຍ່ອມປະພຶດດ້ວຍວິຣິຍະ

໓. ເມື່ອຕັ້ງຈິດໝັ້ນ ຊື່ວ່າຍ່ອມປະພຶດດ້ວຍສະຕິ

໔. ເມື່ອທຳຄວາມບໍ່ຟຸ້ງຊ່ານ ຊື່ວ່າຍ່ອມປະພຶດດ້ວຍສະມາທິ

໕. ເມື່ອຮູ້ຊັດແຈ້ງ ຊື່ວ່າຍ່ອມປະພຶດດ້ວຍປັນຍາ

໖. ເມື່ອຮູ້ແຈ້ງ ຊື່ວ່າຍ່ອມປະພຶດດ້ວຍວິນຍານ

໗. ເມື່ອມະນະສິການວ່າ ກຸສົນທຳທັງຫຼາຍຍ່ອມດຳເນີນໄປແກ່ຜູ້ປະຕິບັດແນວນີ້ ຊື່ວ່າຍ່ອມປະພຶດດ້ວຍຄວາມປະພຶດໃນອາຍະຕະນະ

໘. ເມື່ອມະນະສິການວ່າ ຜູ້ປະຕິບັດແນວນີ້ ຍ່ອມບັນລຸຄຸນວິເສດ ຊື່ວ່າຍ່ອມປະພຶດດ້ວຍຄວາມປະພຶດດ້ວຍຄຸນວິເສດ

ເຫຼົ່ານີ້ ຊື່ວ່າຄວາມປະພຶດ ໘ ຢ່າງ

ອີກໄນໜຶ່ງ ຄວາມປະພຶດ ໘ ຢ່າງ ຄື

໑. ຄວາມປະພຶດສຳມາທິດຖິ ຊື່ວ່າທັດສະນະຈະຣິຍາ (ຄວາມປະພຶດດ້ວຍຄວາມເຫັນ)

໒. ຄວາມປະພຶດສຳມາສັງກັປປະ ຊື່ວ່າອະພິນິໂຣປະນະຈະຣິຍາ (ຄວາມປະພຶດດ້ວຍການປູກຝັງຄວາມດຳຣິ)

໓. ຄວາມປະພຶດສຳມາວາຈາ ຊື່ວ່າປະຣິກຄະຫະຈະຣິຍາ (ຄວາມປະພຶດດ້ວຍການກຳນົດສັງລວມວະຈີ ໔ ຢ່າງ )

໔. ຄວາມປະພຶດສຳມາກຳມັນຕະ ຊື່ວ່າສະມຸດຖານະຈະຣິຍາ (ຄວາມປະພຶດ ດ້ວຍຄວາມໝັ້ນ)

໕. ຄວາມປະພຶດສຳມາອາຊີວະ ຊື່ວ່າໂວທະນະຈະຣິຍາ (ຄວາມປະພຶດດ້ວຍຄວາມຜ່ອງແຜ້ວ)

໖. ຄວາມປະພຶດສຳມາວາຍາມະ ຊື່ວ່າປັກຄະຫະຈະຣິຍາ (ຄວາມປະພຶດດ້ວຍການປະຄອງຄວາມພຽນ)

໗. ຄວາມປະພຶດສຳມາສະຕິ ຊື່ວ່າອຸປັດຖານະຈະຣິຍາ (ຄວາມປະພຶດດ້ວຍການເຂົ້າໄປຕັ້ງສະຕິ)

໘. ຄວາມປະພຶດສຳມາສະມາທິ ຊື່ວ່າອະວິກເຂປະຈະຣິຍາ (ຄວາມປະພຶດດ້ວຍຄວາມບໍ່ຟຸ້ງຊ່ານ)

ເຫຼົ່ານີ້ ຊື່ວ່າຄວາມປະພຶດ ໘ ຢ່າງ

ຄຳວ່າ ຄວາມເປັນຢູ່ ອະທິບາຍວ່າ ບຸກຄົນຜູ້ນ້ອມໃຈເຊື່ອຍ່ອມຢູ່ດ້ວຍສັດທາ ຜູ້ປະຄອງໄວ້ຍ່ອມຢູ່ດ້ວຍຄວາມພຽນ ຜູ້ຕັ້ງໝັ້ນຍ່ອມຢູ່ດ້ວຍສະຕິ ຜູ້ທຳຄວາມບໍ່ຟຸ້ງຊ່ານຍ່ອມຢູ່ດ້ວຍສະມາທິ ຜູ້ຮູ້ຊັດແຈ້ງຍ່ອມຢູ່ດ້ວຍປັນຍາ

ຄຳວ່າ ຕັດສະຣູ້ແລ້ວ ອະທິບາຍວ່າ ສະພາວະທີ່ນ້ອມໃຈເຊື່ອແຫ່ງສັດທິນຊືເປັນອັນຕັດສະຣູ້ແລ້ວ ສະພາວະທີ່ປະຄອງໄວ້ແຫ່ງວິຣິຍິນຊີເປັນອັນຕັດສະຣູ້ແລ້ວ ສະພາວະທີ່ຕັ້ງໝັ້ນແຫ່ງສະຕິນຊີເປັນອັນຕັດສະຣູ້ແລ້ວ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມາທິນຊີເປັນອັນຕັດສະຣູ້ແລ້ວ ສະພາວະທີ່ເຫັນແຫ່ງປັນຍິນຊີເປັນອັນຕັດສະຣູ້ແລ້ວ

ຄຳວ່າ ຮູ້ແຈ້ງແລ້ວ ອະທິບາຍວ່າ ສະພາວະທີ່ນ້ອມໃຈເຊື່ອແຫ່ງສັດທິນຊີເປັນອັນຮູ້ແຈ້ງແລ້ວ ສະພາວະທີ່ປະຄອງໄວ້ແຫ່ງວິຣິຍິນຊີເປັນອັນຮູ້ແຈ້ງແລ້ວ ສະພາວະທີ່ຕັ້ງໝັ້ນແຫ່ງສະຕິນຊີເປັນອັນຮູ້ແຈ້ງແລ້ວ ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມາທິນຊີເປັນອັນຮູ້ແຈ້ງແລ້ວ ສະພາວະທີ່ເຫັນແຫ່ງປັນຍິນຊີເປັນອັນຮູ້ແຈ້ງແລ້ວ

ຄຳວ່າ ຕາມທີ່ປະພຶດ ອະທິບາຍວ່າ ປະພຶດດ້ວຍສັດທາແນວນີ້ ປະພຶດດ້ວຍຄວາມພຽນແນວນີ້ ປະພຶດດ້ວຍສະຕິແນວນີ້ ປະພຶດດ້ວຍສະມາທິແນວນີ້ ປະພຶດດ້ວຍປັນຍາແນວນີ້

ຄຳວ່າ ຕາມທີ່ເປັນຢູ່ ອະທິບາຍວ່າ ເປັນຢູ່ດ້ວຍສັດທາແນວນີ້ ເປັນຢູ່ດ້ວຍຄວາມພຽນແນວນີ້ ເປັນຢູ່ດ້ວຍສະຕິແນວນີ້ ເປັນຢູ່ດ້ວຍສະມາທິແນວນີ້ ເປັນຢູ່ດ້ວຍປັນຍາແນວນີ້

ຄຳວ່າ ຜູ້ຮູ້ແຈ້ງ ອະທິບາຍວ່າ ຜູ້ຮູ້ແຈ້ງ ຜູ້ມີປັນຍາແຈ້ງຊັດ ຜູ້ມີປັນຍາທຳລາຍກິເລດ ຜູ້ເປັນບັນດິດ ຜູ້ເຖິງພ້ອມດ້ວຍປັນຍາເຄື່ອງຕັດສະຮູ້

ຄຳວ່າ ສະພົມມະຈາຣີ ອະທິບາຍວ່າ ຜູ້ທີ່ມີການກະທຳຢ່າງດຽວກັນ ມີອຸດເທດຢ່າງດຽວກັນ ມີສິກຂາສະເໝີກັນ

ຄຳວ່າ ໃນຖານະທີ່ເລີກເຊີ່ງ ອະທິບາຍວ່າ ຊານ ວິໂມກ ສະມາທິ ສະມາບັດ ມັກ ຜົນອະພິນຍາ ແລະປະຕິສຳພິທາ ທ່ານກ່າວວ່າ ເປັນຖານະທີ່ເລີກເຊີ່ງ

ຄຳວ່າ ໝັ້ນໃຈ ໄດ້ແກ່ ເພິ່ງເຊື່ອ ຄື ເພິ່ງນ້ອມໄປ

ຄຳວ່າ ຢ່າງແນ່ນອນ ນີ້ເປັນຄຳກ່າວໂດຍໄນດຽວ ເປັນຄຳກ່າວໂດຍບໍ່ສົງໄສ ເປັນຄຳກ່າວໂດຍບໍ່ເຄືອບແຄງ ເປັນຄຳກ່າວໂດຍບໍ່ເປັນ ໒ ໄນ ເປັນຄຳກ່າວໂດຍບໍ່ເປັນ ໒ ຢ່າງ ເປັນຄຳກ່າວໂດຍຮັດກຸມ ເປັນຄຳກ່າວໂດຍບໍ່ຜິດ ຄຳວ່າ ຢ່າງແນ່ນອນ ນີ້ ເປັນຄຳກ່າວທີ່ກຳນົດໄວ້ວ່າແນ່ນອນ

ຄຳວ່າ ທ່ານ ນີ້ເປັນຄຳກ່າວດ້ວຍຄວາມຮັກ ເປັນຄຳກ່າວໂດຍຄວາມເຄົາລົບ ຄຳວ່າທ່ານນີ້ ເປັນຄຳກ່າວທີ່ໃຫ້ຄວາມເຄົາລົບແລະຄວາມຢຳເກງ

ຄຳວ່າ ບັນລຸແລ້ວ ໄດ້ແກ່ ເຖິງແລ້ວ

ຄຳວ່າ ຫຼືວ່າຈັກບັນລຸ ໄດ້ແກ່ ຫຼືວ່າຈັກເຖິງ

## ໔. ຈະຕຸດຖະສູດຕັນຕະນິດເທດ

### ສະແດງສູດທີ່ ໔

[໑໙໗] ເທດເກີດຂຶ້ນເໝືອນໃນສູດຂ້າງຕົ້ນ

ພິກຂຸທັງຫຼາຍ ອິນຊີ ໕ ປະການນີ້

ອິນຊີ ໕ ປະການ ມີອັນໃດແດ່ ຄື

໑. ສັດທິນຊີ

໒. ວິຣິຍິນຊີ
໓. ສະຕິນຊີ
໔. ສະມາທິນຊີ
໕. ປັນຍິນຊີ

ພິກຂຸທັງຫຼາຍ ອິນຊີ ໕ ປະການ ນີ້ແລ

ອິນຊີ ໕ ປະການນີ້ເພິ່ງເຫັນດ້ວຍອາການເທົ່າໃດ ຍ້ອນມີສະພາວະເປັນແນວໃດ?

ຄື ອິນຊີ ໕ ປະການນີ້ເພິ່ງເຫັນດ້ວຍອາການ ໖ ຢ່າງ ຍ້ອນມີສະພາວະແນວນີ້

ຄື ເພິ່ງເຫັນຍ້ອນມີສະພາວະເປັນໃຫຍ່ ຍ້ອນມີສະພາວະເປັນເຄື່ອງຊໍາຣະສິນທີ່ເປັນເບື້ອງຕົ້ນໃຫ້ມົດຈົດ ຍ້ອນມີສະພາວະມີປະມານຍິ່ງ ຍ້ອນມີສະພາວະຕັ້ງໝັ້ນ ຍ້ອນມີສະພາວະເຮັດໃຫ້ສິ້ນໄປ ຍ້ອນມີສະພາວະໃຫ້ຕັ້ງຢູ່

## (໑) ອາທິປະເຕີຍຍັດສະນິດເທດ

### ສະແດງສະພາວະເປັນໃຫຍ່

[໑໙] ເພິ່ງເຫັນອິນຊີຍ້ອນມີສະພາວະເປັນໃຫຍ່ ເປັນແນວໃດ?

ຄື ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມນ້ອມໃຈເຊື່ອແຫ່ງບຸກຄົນຜູ້ລະຄວາມບໍ່ມີສັດທາ (ແລະ) ດ້ວຍອໍານາດແຫ່ງສັດທິນຊີ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການປະຄອງໄວ້ແຫ່ງບຸກຄົນຜູ້ລະຄວາມຂີ້ຄ້ານ (ແລະ) ດ້ວຍອໍານາດແຫ່ງວິຣິຍິນຊີ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມຕັ້ງໝັ້ນແຫ່ງບຸກຄົນຜູ້ລະຄວາມຜະໝາດ (ແລະ) ດ້ວຍອໍານາດແຫ່ງສະຕິນຊີ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະ ນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້

ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວັະເປັນໃຫຍ່ໃນຄວາມບໍ່ຟຸ້ງຊ່ານແຫ່ງບຸກຄົນຜູ້ລະອຸດທັດຈະ (ແລະ) ດ້ວຍອໍານາດແຫ່ງສະມາທິນຊີ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງ

ເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນແຫ່ງບຸກຄົນຜູ້ລະອະວິດຊາ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມນ້ອມໃຈເຊື່ອ ດ້ວຍອຳນາດແຫ່ງເນກຂຳມະຂອງບຸກຄົນຜູ້ລະການສັນທະ (ແລະ) ດ້ວຍອຳນາດແຫ່ງສັດທິນຊີ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການປະຄອງໄວ້ ດ້ວຍອຳນາດແຫ່ງເນກຂຳມະຂອງບຸກຄົນຜູ້ລະການສັນທະ (ແລະ) ດ້ວຍອຳນາດແຫ່ງວິຣິຍິນຊີ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນ ປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມຕັ້ງໝັ້ນ ດ້ວຍອຳນາດແຫ່ງ ເນກຂຳມະຂອງບຸກຄົນຜູ້ລະການສັນທະ (ແລະ) ດ້ວຍອຳນາດແຫ່ງສະຕິນຊີ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ

ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມບໍ່ຟຸ້ງຊ່ານ ດ້ວຍອຳນາດແຫ່ງເນກຂຳມະຂອງບຸກຄົນຜູ້ລະການສັນທະ (ແລະ) ດ້ວຍອຳນາດແຫ່ງສະມາທິນຊີ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມເຫັນ ດ້ວຍອຳນາດແຫ່ງ ເນກຂຳມະຂອງບຸກຄົນຜູ້ລະການສັນທະ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະເປັນໃຫຍ່ໃນຄວາມນ້ອມໃຈເຊື່ອ ດ້ວຍອຳນາດແຫ່ງອະພະຍາບາດຂອງບຸກຄົນຜູ້ລະພະຍາບາດ ຯລຯ ດ້ວຍອຳນາດແຫ່ງອາໂລກະສັນຍາຂອງບຸກຄົນຜູ້ລະຖີນະມິດທະ ຯລຯ ດ້ວຍອຳນາດແຫ່ງອະຣະຫັດຕະມັກຂອງບຸກຄົນຜູ້ລະກິເລດທັງປວງ (ແລະ) ດ້ວຍອຳນາດແຫ່ງສັດທິນຊີ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເຫັນ ຯລຯ

ເພິ່ງເຫັນປັນຍິນຊີ ຍ້ອນມີສະພາວະເປັນໃຫຍ່ໃນການເຫັນ ດ້ວຍອຳນາດແຫ່ງອະຣະຫັດຕະມັກຂອງບຸກຄົນຜູ້ລະກິເລດທັງປວງ (ແລະ) ດ້ວຍອຳນາດແຫ່ງປັນຍິນຊີ ເພິ່ງເຫັນສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ເພິ່ງເຫັນວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ເພິ່ງເຫັນສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ເພິ່ງເຫັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ

ເພິ່ງເຫັນອິນຊີ ຍ້ອນມີສະພາວະເປັນໃຫຍ່ ແນວນີ້ (໑)

## (໔) ອາທິວິໂສທະນັດຖະນິດເທດ

### ສະແດງສະພາວະເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນໃຫ້ມົດຈົດ

[໔໐໐] ເພິ່ງເຫັນອິນຊີ ຍ້ອນມີສະພາວະເປັນເຄື່ອງຊຳຣະສິນທີ່ເປັນຊຳຣະໃຫ້ມົດຈົດເປັນແນວໃດ?

ຄື ຊື່ວ່າສັດທິນຊີ ຍ້ອນມີສະພາວະນ້ອມໃຈເຊື່ອ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງຄວາມບໍ່ມີສັດທາ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງສັດທິນຊີໃຫ້ມົດຈົດ

ຊື່ວ່າວິຣິຍິນຊີ ຍ້ອນມີສະພາວະປະຄອງໄວ້ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງຄວາມຂີ້ຄ້ານ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງວິຣິຍິນຊີໃຫ້ມົດຈົດ

ຊື່ວ່າສະຕິນຊີ ຍ້ອນມີສະພາວະຕັ້ງໝັ້ນ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງຄວາມຜະໝາດ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງສະຕິນຊີໃຫ້ມົດຈົດ

ຊື່ວ່າສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງອຸດທັດຈະ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງສະມາທິນຊີໃຫ້ມົດຈົດ

ຊື່ວ່າປັນຍິນຊີ ຍ້ອນມີສະພາວະເຫັນ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງອະວິດຊາ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງປັນຍິນຊີໃຫ້ມົດຈົດ

ອິນຊີ ໕ ໃນເນກຂຳມະ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງການສັນທະ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງອິນຊີ ໕ ໃຫ້ມົດຈົດ

ອິນຊີ ໕ ໃນອະພະຍາບາດ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງພະຍາບາດ ເປັນເຄື່ອງຊຳຣະສິນທີ່ເປັນເບື້ອງຕົ້ນແຫ່ງອິນຊີ ໕ ໃຫ້ມົດຈົດ ຯລຯ

ອິນຊີ ໕ ໃນອະຣະຫັດຕະມັກ ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະຣະວັງກິເລດທັງປວງ ເປັນເຄື່ອງຊໍາຣະສິນທີ່ເປັນເບື້ອງຕົ້ນແຫ່ງອິນຊີ ໕ ໃຫ້ມົດຈິດ

ເພິ່ງເຫັນອິນຊີ ຍ້ອນມີສະພາວະເປັນເຄື່ອງຊໍາຣະສິນທີ່ເປັນເບື້ອງຕົ້ນໃຫ້ມົດຈິດແນວນີ້ (໔)

## (ສ) ອະທິມັດຕັດຖະນິດເທດ

### ສະແດງສະພາວະມີປະມານຍິ່ງ

[໔໐໑] ເພິ່ງເຫັນອິນຊີ ຍ້ອນມີສະພາວະມີປະມານຍິ່ງ ເປັນແນວໃດ?

ຄື ຍ້ອນຈະເລີນສັດທິນຊີ ສັນທະຈຶ່ງເກີດຂຶ້ນ ດ້ວຍອໍານາດສັນທະປາມຸດຊະຈຶ່ງເກີດຂຶ້ນ ດ້ວຍອໍານາດປາມຸດຊະ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດປາມຸດຊະ ປີຕິຈຶ່ງເກີດຂຶ້ນ ດ້ວຍອໍານາດປີຕິ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດປີຕິ ປັດສັດທິຈຶ່ງເກີດຂຶ້ນ ດ້ວຍອໍານາດປັດສັດທິ ດ້ວຍອໍານາດສັດທາສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດປັດສັດທິ ສຸກຈຶ່ງເກີດຂຶ້ນ ດ້ວຍອໍານາດສຸກ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດສຸກໂອພາດຈຶ່ງເກີດຂຶ້ນ ດ້ວຍອໍານາດໂອພາດ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດໂອພາດ ຄວາມສັງເວດຈຶ່ງເກີດຂຶ້ນ ດ້ວຍອໍານາດຄວາມສັງເວດ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຈິດສັງເວດແລ້ວຍ່ອມຕັ້ງໝັ້ນ ດ້ວຍອໍານາດສະມາທິ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຈິດຕັ້ງໝັ້ນແນວນັ້ນແລ້ວຍ່ອມປະຄອງໄວ້ດີ ດ້ວຍອໍານາດການປະຄອງໄວ້ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຈິດປະຄອງໄວ້ແລ້ວແນວນັ້ນຍ່ອມວາງເສີຍດີ ດ້ວຍອໍານາດອຸເປກຂາ ດ້ວຍອໍານາດ ສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ດ້ວຍອໍານາດອຸເປກຂາ ຈິດຈຶ່ງລຸດພົ້ນຈາກກິເລດທີ່ມີສະພາວະຕ່າງ ໆ ດ້ວຍອໍານາດຄວາມລຸດພົ້ນ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຍ້ອນຈິດລຸດພົ້ນແລ້ວ ທໍາເຫຼົ່ານັ້ນຈຶ່ງມີຣົດເປັນແນວດຽວກັນ ຍ້ອນມີຄວາມໝາຍວ່າທໍາທັງຫຼາຍມີຣົດເປັນແນວດຽວກັນ ດ້ວຍອໍານາດພາວະນາ ດ້ວຍອໍານາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຍ້ອນເປັນທຳທີ່ຈະເລີນແລ້ວ ທຳເຫຼົ່ານັ້ນຈຶ່ງຫຼີກອອກຈາກທຳນັ້ນໄປສູ່ທຳທີ່ປະນີດກວ່າ ດ້ວຍອຳນາດຄວາມຫຼີກອອກ ດ້ວຍອຳນາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຍ້ອນຫຼີກອອກແລ້ວ ດັ່ງນັ້ນ ບຸກຄົນຈຶ່ງສະລະ (ກິເລດແລະຂັນ) ໄດ້ດ້ວຍອຳນາດຄວາມສະລະ ດ້ວຍອຳນາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຍ້ອນສະລະແລ້ວ ດັ່ງນັ້ນ ກິເລດແລະຂັນຈຶ່ງດັບ ດ້ວຍອຳນາດຄວາມດັບ ດ້ວຍອຳນາດສັດທາ ສັດທິນຊີຈຶ່ງມີປະມານຍິ່ງ

ຄວາມສະລະດ້ວຍອຳນາດຄວາມດັບມີ ໒ ປະການ ຄື

໑. ຄວາມສະລະດ້ວຍການບໍລິຈາກ
໒. ຄວາມສະລະດ້ວຍຄວາມແລ່ນໄປ

ຊື່ວ່າຄວາມສະລະດ້ວຍການບໍລິຈາກ ຍ້ອນສະລະກິເລດແລະຂັນ ຊື່ວ່າຄວາມສະລະດ້ວຍຄວາມແລ່ນໄປ ຍ້ອນຈິດແລ່ນໄປສູ່ນິບພານທາດທີ່ເປັນຄວາມດັບ ຄວາມສະລະດ້ວຍອຳນາດຄວາມດັບມີ ໒ ປະການນີ້

ຍ້ອນລະຄວາມບໍ່ມີສັດທາ ສັນທະຈຶ່ງເກີດຂຶ້ນ ຍ້ອນລະຄວາມຮ້ອນຮົນຍ້ອນຄວາມບໍ່ມີສັດທາ ສັນທະຈຶ່ງເກີດຂຶ້ນ ຍ້ອນລະກິເລດທີ່ຕັ້ງຢູ່ລວມກັນກັບທິດຖິ ສັນທະ ຈຶ່ງເກີດຂຶ້ນ ຍ້ອນລະກິເລດສ່ວນທີ່ຫຍາບ ສັນທະຈຶ່ງເກີດຂຶ້ນ ຍ້ອນລະກິເລດສ່ວນທີ່ລະອຽດ ສັນທະຈຶ່ງເກີດຂຶ້ນ ຍ້ອນລະກິເລດທັງປວງ ສັນທະຈຶ່ງເກີດຂຶ້ນ ດ້ວຍອຳນາດສັດທາ ດ້ວຍອຳນາດ ສັນທະ ສັດທິນຊີຈຶ່ງມີປະມານຍິ່ງ

ຍ້ອນຈະເລີນວິຣິຍິນຊີ ສັນທະຈຶ່ງເກີດຂຶ້ນ ຯລຯ ຍ້ອນລະຄວາມຂີ້ຄ້ານ ສັນທະຈຶ່ງເກີດຂຶ້ນ ຍ້ອນລະຄວາມຮ້ອນຮົນຍ້ອນຄວາມຂີ້ຄ້ານ ສັນທະຈຶ່ງເກີດຂຶ້ນ ຯລຯ

ຍ້ອນຈະເລີນສະຕິນຊີ ສັນທະຈຶ່ງເກີດຂຶ້ນ ຯລຯ ຍ້ອນລະຄວາມຜະໝາດ ສັນທະຈຶ່ງເກີດຂຶ້ນ ຍ້ອນລະຄວາມຮ້ອນຮົນຍ້ອນຄວາມຜະໝາດ ສັນທະຈຶ່ງເກີດຂຶ້ນ ຯລຯ

ຍ້ອນຈະເລີນສະມາທິນຊີ ສັນທະຈຶ່ງເກີດຂຶ້ນ ຯລຯ ຍ້ອນລະອຸດທັດຈະ ສັນທະຈຶ່ງເກີດຂຶ້ນ ຍ້ອນລະຄວາມຮ້ອນຮົນຍ້ອນອຸດທັດຈະ ສັນທະຈຶ່ງເກີດຂຶ້ນ ຯລຯ

ຍ້ອນຈະເລີນປັນຍິນຊີ ສັນທະຈຶ່ງເກີດຂຶ້ນ ດ້ວຍອຳນາດສັນທະ ປາມຸດຊະຈຶ່ງເກີດຂຶ້ນ ດ້ວຍອຳນາດປາມຸດຊະ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດປາມຸດຊະ ປີຕິຈຶ່ງເກີດຂຶ້ນ ດ້ວຍອຳນາດປີຕິ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດປີຕິ ປັດສັດທິຈຶ່ງເກີດຂຶ້ນ ດ້ວຍອຳນາດປັດສັດທິ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດປັດສັດທິ ສຸກຈຶ່ງເກີດຂຶ້ນ ດ້ວຍອຳນາດສຸກ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດສຸກ ໂອພາດຈຶ່ງເກີດຂຶ້ນ ດ້ວຍອຳນາດໂອພາດ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດໂອພາດ ຄວາມສັງເວດຈຶ່ງເກີດຂຶ້ນ ດ້ວຍອຳນາດຄວາມສັງເວດ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຈິດສັງເວດແລ້ວຍ່ອມຕັ້ງໝັ້ນ ດ້ວຍອຳນາດສະມາທິ ດ້ວຍອຳນາດປັນຍາ ປັນຍິນຊີ ຈຶ່ງມີປະມານຍິ່ງ

ຈິດຕັ້ງໝັ້ນແລ້ວແນວນີ້ຍ່ອມປະຄອງໄວ້ດີ ດ້ວຍອຳນາດການປະຄອງໄວ້ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຈິດທີ່ປະຄອງໄວ້ແລ້ວແນວນັ້ນຍ່ອມວາງເສີຍດີ ດ້ວຍອຳນາດອຸເປກຂາ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ດ້ວຍອຳນາດອຸເປກຂາ ຈິດຈຶ່ງລຸດພົ້ນຈາກກິເລດທີ່ມີສະພາວະຕ່າງ ໆ ດ້ວຍອຳນາດຄວາມລຸດພົ້ນ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຍ້ອນຈິດລຸດພົ້ນແລ້ວ ທຳເຫຼົ່ານັ້ນຈຶ່ງມີຣົດເປັນແນວດຽວກັນ ຍ້ອນມີຄວາມໝາຍວ່າທຳທັງຫຼາຍມີຣົດເປັນແນວດຽວກັນ ດ້ວຍອຳນາດພາວະນາ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຍ້ອນເປັນທຳທີ່ຈະເລີນແລ້ວ ທຳເຫຼົ່ານັ້ນຈຶ່ງຫຼີກອອກຈາກທຳນັ້ນໄປສູ່ທຳທີ່ປະນີດກວ່າ ດ້ວຍອຳນາດຄວາມຫຼີກອອກ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຍ້ອນຫຼີກອອກແລ້ວ ບຸກຄົນຈຶ່ງສະລະ (ກິເລດແລະຂັນ) ໄດ້ ດ້ວຍອຳນາດຄວາມສະລະ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຍ້ອນສະລະແລ້ວ ດັ່ງນັ້ນ ກິເລດແລະຂັນຈຶ່ງດັບ ດ້ວຍອຳນາດຄວາມດັບ ດ້ວຍອຳນາດປັນຍາ ປັນຍິນຊີຈຶ່ງມີປະມານຍິ່ງ

ຄວາມສະລະດ້ວຍອຳນາດຄວາມດັບມີ ໒ ປະການ ຄື

໑. ຄວາມສະລະດ້ວຍການບໍລິຈາກ
໒. ຄວາມສະລະດ້ວຍຄວາມແລ່ນໄປ

ຊື່ວ່າຄວາມສະລະດ້ວຍການບໍລິຈາກ ຍ້ອນສະລະກິເລດແລະຂັນ ຊື່ວ່າຄວາມສະລະດ້ວຍຄວາມແລ່ນໄປ ຍ້ອນຈິດແລ່ນໄປສູ່ນິບພານທາດທີ່ເປັນຄວາມດັບ ຄວາມສະລະດ້ວຍອຳນາດຄວາມດັບມີ ໒ ປະການນີ້

ເພິ່ງເຫັນອິນຊີ ຍ້ອນມີສະພາວະມີປະມານຍິ່ງແນວນີ້

## (໔) ອະທິດຖານັດຖະນິດເທດ

### ສະແດງສະພາວະຕັ້ງໝັ້ນ

[໔໐໔] ເພິ່ງເຫັນອິນຊີຍ້ອນມີສະພາວະຕັ້ງໝັ້ນ ເປັນແນວໃດ?

ຄື ຍ້ອນຈະເລີນສັດທິນຊີ ສັນທະຈິ່ງເກີດຂຶ້ນ ດ້ວຍອຳນາດສັນທະ ດ້ວຍອຳນາດສັດທາ ສັດທິນຊີຈິ່ງຕັ້ງໝັ້ນ ດ້ວຍອຳນາດສັນທະ ປາມຸດຊະຈິ່ງເກີດຂຶ້ນ ດ້ວຍອຳນາດປາມຸດຊະ ດ້ວຍອຳນາດສັດທາ ສັດທິນຊີຍ່ອມຕັ້ງໝັ້ນ ຯລຯ

ເພິ່ງເຫັນອິນຊີ ຍ້ອນມີສະພາວະຕັ້ງໝັ້ນແນວນີ້

## (໕) ປະຣິຍາທານັດຖະນິດເທດ

### ສະແດງສະພາວະເຮັດໃຫ້ສິ້ນໄປ

ເພິ່ງເຫັນອິນຊີຍ້ອນມີສະພາວະເຮັດໃຫ້ສິ້ນໄປ ເປັນແນວໃດ?

ຄື ຍ້ອນມີສະພາວະນ້ອມໃຈເຊື່ອ ສັດທິນຊີຈິ່ງທຳຄວາມບໍ່ມີສັດທາໃຫ້ສິ້ນໄປ ທຳຄວາມຮ້ອນຮົນຍ້ອນຄວາມບໍ່ມີສັດທາໃຫ້ສິ້ນໄປ

ຍ້ອນມີສະພາວະປະຄອງໄວ້ ວິຣິຍິນຊີຈິ່ງທຳຄວາມຂີ້ຄ້ານໃຫ້ສິ້ນໄປ ທຳຄວາມຮ້ອນຮົນຍ້ອນຄວາມຂີ້ຄ້ານໃຫ້ສິ້ນໄປ

ຍ້ອນມີສະພາວະຕັ້ງໝັ້ນ ສະຕິນຊີຈິ່ງທຳຄວາມຜະໝາດໃຫ້ສິ້ນໄປ ທຳຄວາມຮ້ອນຮົນຍ້ອນຄວາມຜະໝາດໃຫ້ສິ້ນໄປ

ຍ້ອນມີສະພາວະບໍ່ຟຸ້ງຊ່ານ ສະມາທິນຊີຈິ່ງເຮັດອຸດທັດຈະໃຫ້ສິ້ນໄປ ທຳຄວາມຮ້ອນຮົນຍ້ອນອຸດທັດຈະໃຫ້ສິ້ນໄປ

ຍ້ອນມີສະພາວະເຫັນ ປັນຍິນຊີຈິ່ງທຳອະວິດຊາໃຫ້ສິ້ນໄປ ທຳຄວາມຮ້ອນຮົນ

ຍ້ອນອະວິດຊາໃຫ້ສິ້ນໄປ

ອິນຊີ ໕ ໃນເນກຂຳມະ ເຮັດກາມສັນທະໃຫ້ສິ້ນໄປ

ອິນຊີ ໕ ໃນອະພະຍາບາດ ເຮັດພະຍາບາດໃຫ້ສິ້ນໄປ

ອິນຊີ ໕ ໃນອາໂລກະສັນຍາ ເຮັດຖີນະມິດທະໃຫ້ສິ້ນໄປ

ອິນຊີ ໕ ໃນອະວິກເຂປະ ເຮັດອຸດທັດຈະໃຫ້ສິ້ນໄປ

ຯລຯ

ອິນຊີ ໕ ໃນອະຣະຫັດຕະມັກ ເຮັດກິເລດທັງປວງໃຫ້ສິ້ນໄປ

ເພິ່ງເຫັນອິນຊີ ໕ ຍ້ອນມີສະພາວະເຮັດໃຫ້ສິ້ນໄປແນວນີ້

## (໖) ປະຣິຍາຖານັດຖະນິດເທດ

### ສະແດງສະພາວະໃຫ້ຕັ້ງຢູ່

[໔໐໓] ເພິ່ງເຫັນອິນຊີ ຍ້ອນມີສະພາວະໃຫ້ຕັ້ງຢູ່ ເປັນແນວໃດ?

ຄື ຜູ້ມີສັດທາໃຫ້ສັດທິນຊີຕັ້ງຢູ່ໃນຄວາມນ້ອມໃຈເຊື່ອ ສັດທິນຊີຂອງຜູ້ມີສັດທາໃຫ້ຜູ້ມີສັດທາຕັ້ງຢູ່ໃນຄວາມນ້ອມໃຈເຊື່ອ

ຜູ້ມີຄວາມພຽນໃຫ້ວິຣິຍິນຊີຕັ້ງຢູ່ໃນການປະຄອງໄວ້ ວິຣິຍິນຊີຂອງຜູ້ມີຄວາມພຽນໃຫ້ຜູ້ມີຄວາມພຽນຕັ້ງຢູ່ໃນການປະຄອງໄວ້

ຜູ້ມີສະຕິໃຫ້ສະຕິນຊີຕັ້ງຢູ່ໃນຄວາມຕັ້ງໝັ້ນ ສະຕິນຊີຂອງຜູ້ມີສະຕິໃຫ້ຜູ້ມີສະຕິຕັ້ງຢູ່ໃນຄວາມຕັ້ງໝັ້ນ

ຜູ້ມີຈິດຕັ້ງໝັ້ນໃຫ້ສະມາທິນຊີຕັ້ງຢູ່ໃນອະວິກເຂປະ ສະມາທິນຊີຂອງຜູ້ມີຈິດຕັ້ງໝັ້ນໃຫ້ຜູ້ມີຈິດຕັ້ງໝັ້ນຕັ້ງຢູ່ໃນອະວິກເຂປະ

ຜູ້ມີປັນຍາໃຫ້ປັນຍິນຊີຕັ້ງຢູ່ໃນຄວາມເຫັນ ປັນຍິນຊີຂອງຜູ້ມີປັນຍາໃຫ້ຜູ້ມີປັນຍາຕັ້ງຢູ່ໃນຄວາມເຫັນ

ພຣະໂຍຄາວະຈອນໃຫ້ອິນຊີ ໕ ຕັ້ງຢູ່ໃນເນກຂຳມະ ອິນຊີ ໕ ຂອງພຣະໂຍຄາວະຈອນໃຫ້ພຣະໂຍຄາວະຈອນຕັ້ງຢູ່ໃນເນກຂຳມະ

ພຣະໂຍຄາວະຈອນໃຫ້ອິນຊີ ໕ ຕັ້ງຢູ່ໃນອະພະຍາບາດ ອິນຊີ ໕ ຂອງພຣະໂຍຄາວະຈອນໃຫ້ພຣະໂຍຄາວະຈອນຕັ້ງຢູ່ໃນອະພະຍາບາດ

ພຣະໂຍຄາວະຈອນໃຫ້ອິນຊີ ໕ ຕັ້ງຢູ່ໃນອາໂລກະສັນຍາ ອິນຊີ ໕ ຂອງພຣະໂຍຄາວະຈອນ ໃຫ້ພຣະໂຍຄາວະຈອນຕັ້ງຢູ່ໃນອາໂລກະສັນຍາ

ພຣະໂຍຄາວະຈອນໃຫ້ອິນຊີ ໕ ຕັ້ງຢູ່ໃນອະວິກເຂປະ ອິນຊີ ໕ ຂອງພຣະໂຍຄາວະຈອນໃຫ້ພຣະໂຍຄາວະຈອນຕັ້ງຢູ່ໃນອະວິກເຂປະ ຯລຯ

ພຣະໂຍຄາວະຈອນໃຫ້ອິນຊີ ໕ ຕັ້ງຢູ່ໃນອະຣະຫັດຕະມັກ ອິນຊີ ໕ ຂອງພຣະໂຍຄາວະຈອນ ໃຫ້ພຣະໂຍຄາວະຈອນຕັ້ງຢູ່ໃນອະຣະຫັດຕະມັກ

ເພິ່ງເຫັນອິນຊີ ຍ້ອນມີສະພາວະໃຫ້ຕັ້ງຢູ່ແນວນີ້

**ສູດຕັນຕະນິດເທດທີ ໔ ຈົບ**

## ໕. ອິນທະຣິຍະສະໂມທານ

### ວ່າດ້ວຍການປະຊຸມອິນຊີ

[໔໐໔] ປຸຖຸຊົນເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ ພຣະເສຂະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ ທ່ານຜູ້

ປາສະຈາກຣາຄະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ?

ຄື ປຸຖຸຊົນເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໗ ຢ່າງ ພຣະເສຂະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໘ ຢ່າງ ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ຢ່າງ ປຸຖຸຊົນເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໗ ຢ່າງ ມີອັນໃດແດ່

ຄື ຍ້ອນນ້ອມນຶກເຖິງແລ້ວ ປຸຖຸຊົນ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອາລົມ
໒. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສະມະຖະນິມິດ
໓. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ປັກຄະຫະນິມິດ
໔. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອະວິກເຂປະ
໕. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ໂອພາດ
໖. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສຳປະຫັງສະນະ
໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອຸເປກຂາ

ປຸຖຸຊົນເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໗ ແນວນີ້

ພຣະເສຂະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໘ ຢ່າງ ມີອັນໃດແດ່

ຄື ຍ້ອນນ້ອມນຶກເຖິງແລ້ວ ພຣະເສຂະ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອາລົມ
໒. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສະມະຖະນິມິດ
໓. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ປັກຄະຫະນິມິດ
໔. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອະວິກເຂປະ
໕. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ໂອພາດ
໖. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສຳປະຫັງສະນະ
໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອຸເປກຂາ
໘. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສະພາວະຍານ

ພຣະເສຂະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໘ ແນວນີ້

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ຢ່າງ ມີອັນໃດແດ່

ຄື ຍ້ອນນ້ອມນຶກເຖິງແລ້ວ ທ່ານຜູ້ປາສະຈາກຣາຄະ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ອາລົມ

ຯລຯ

໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ສະພາວະດຽວ

໙. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ຍານ

໑໐. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງ ຈິດ

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນສະມາທິ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ແນວນີ້

[໔໐໕] ປຸຖຸຊົນເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການເທົ່າໃດ?

ພຣະເສຂະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການເທົ່າໃດ?

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການເທົ່າໃດ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການເທົ່າໃດ?

ຄື ປຸຖຸຊົນເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໙ ຢ່າງ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໙ ຢ່າງ

ພຣະເສຂະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ຢ່າງ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໐ ຢ່າງ

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໔ ຢ່າງ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໔ ຢ່າງ

ປຸຖຸຊົນເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໙ ຢ່າງມີອັນໃດແດ່ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໙ ຢ່າງ ມີອັນໃດແດ່

ຄື ປຸຖຸຊົນເມື່ອຈະເລີນວິປັດສະນາ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ບໍ່ທ່ຽງ

໒. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ທ່ຽງ

໓. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ເປັນທຸກ

໔. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ເປັນສຸກ

໕. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ເປັນອະນັດຕາ

໖. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ເປັນອັດຕາ

໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ສິ້ນໄປ
໘. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ເປັນກ້ອນ
໙. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ເສື່ອມໄປ
໑໐. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ປະມວນມາ
໑໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ຜັນປ່ຽນ
໑໒. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມ ຍັ່ງຍືນ
໑໓. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍ ອະນິມິດ
໑໔. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍ ນິມິດ
໑໕. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມ ບໍ່ມີປະນິຫິຕະ (ບ່ອນຕັ້ງ)
໑໖. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍ ປະນິຫິ
໑໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍ ສູນຍະຕະ (ຄວາມວ່າງ)
໑໘. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍ ອະພິນິເວສະ (ຄວາມຍຶດໝັ້ນ)

ປຸຖຸຊົນເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໙ ແນວນີ້ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໙ ແນວນີ້

[໒໐໖] ພຣະເສຂະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ຢ່າງ ມີອັນໃດແດ່ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໐ ຢ່າງ ມີອັນໃດແດ່

ຄື ພຣະເສຂະເມື່ອຈະເລີນວິປັດສະນາ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມບໍ່ທ່ຽງ
໒. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມທ່ຽງ
ຯລຯ
໑໗. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍສູນຍະຕະ
໑໘. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍອະພິນິເວສະ
໑໙. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຍານ
໒໐. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ເຊິ່ງສິ່ງທີ່ບໍ່ແມ່ນຍານ

ພຣະເສຂະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໐ ແນວນີ້ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໐ ແນວນີ້

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໒ ຢ່າງ ມີອັນໃດແດ່ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໒ ຢ່າງ ມີອັນໃດແດ່

ຄື ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນວິປັດສະນາ

໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມບໍ່ທ່ຽງ
໒. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມທ່ຽງ
ຯລຯ
໑໙. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຍານ
໒໐. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ເຊິ່ງສິ່ງທີ່ບໍ່ແມ່ນຍານ
໒໑. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມບໍ່ກ່ຽວຂ້ອງ
໒໒. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມກ່ຽວຂ້ອງ
໒໓. ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມດັບ
໒໔. ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໃນສັງຂານ

ທ່ານຜູ້ປາສະຈາກຣາຄະເມື່ອຈະເລີນວິປັດສະນາ ເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ດ້ວຍອາການ ໑໒ ແບບນີ້ ເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ດ້ວຍອາການ ໑໒ ແບບນີ້

ຍ້ອນນ້ອມນຶກເຖິງແລ້ວ ພິກຂຸໃຫ້ອິນຊີທັງຫຼາຍປະຊຸມລົງ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງອາລົມ ຮູ້ຊັດແຈ້ງໂຄຈອນ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ ຯລຯ ໃຫ້ທຳທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ

ຄຳວ່າ ໃຫ້ອິນຊີທັງຫຼາຍປະຊຸມລົງ ອະທິບາຍວ່າ ໃຫ້ອິນຊີທັງຫຼາຍ
ປະຊຸມລົງເປັນແນວໃດ?

ຄື ໃຫ້ສັດທິນຊີປະຊຸມລົງ ຍ້ອນມີສະພາວະນ້ອມໃຈເຊື່ອ ຯລຯ ໃຫ້ອິນຊີທັງຫຼາຍ ປະຊຸມລົງ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງສະມະຖະນິມິດ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງປັກຄະຫະນິມິດ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງອະວິກເຂປະ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງສຳປະທັງສະນະ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງອຸເປກຂາ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງສະພາວະດຽວ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຍານ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຈິດ

(ໃຫ້ອິນຊີທັງຫຼາຍປະຊຸມລົງ) ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມບໍ່ທ່ຽງ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມທ່ຽງ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມເປັນທຸກ ຯລຯ ດ້ວຍອຳນາດ

ຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມເປັນສຸກ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດ ໃນຄວາມຕັ້ງໄວ້ໂດຍຄວາມເປັນອະນັດຕາ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ ໂດຍຄວາມເປັນອັດຕາ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມສິ້ນໄປ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມເປັນກ້ອນ ຯລຯ ດ້ວຍ ອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມເສື່ອມໄປ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມປະມວນມາ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມຜັນປ່ຽນ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍຄວາມຍັ່ງຍືນ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍອະນິມິດ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍນິມິດ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍຄວາມບໍ່ມີປະນິຫິຕະ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍປະນິຫິ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ໂດຍສູນຍະຕະ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ໂດຍອະພິນິເວສະ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຍານ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ເຊິ່ງສິ່ງທີ່ບໍ່ແມ່ນຍານ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຄວາມບໍ່ກ່ຽວຂ້ອງ ຯລຯ ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ເຊິ່ງຄວາມກ່ຽວຂ້ອງ ຯລຯ

(ໃຫ້ອິນຊີທັງຫຼາຍປະຊຸມລົງ) ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມຕັ້ງໄວ້ເຊິ່ງຄວາມດັບ ພິກຂຸຍ່ອມໃຫ້ອິນຊີທັງຫຼາຍປະຊຸມລົງ ຮູ້ຊັດແຈ້ງໂຄຈອນ ແລະຮູ້ແຈ້ງທຳອັນມີຄວາມສະງົບເປັນປະໂຫຍດ (ດ້ວຍອຳນາດຄວາມເປັນຜູ້ສະຫຼາດໃນຄວາມບໍ່ຕັ້ງໄວ້ເຊິ່ງສັງຂານ)

[໒໐໗] ປັນຍາທີ່ມີຄວາມຊຳນານໃນອິນຊີ ໓ ປະການ ໂດຍອາການ ໖໔ ຊື່ວ່າອາສະວັກຂະຍະຍານ

ອິນຊີ ໓ ປະການ ມີອັນໃດແດ່ ຄື

໑. ອະນັນຍາຕັນຍັດສາມີຕິນຊີ
໒. ອັນຍິນຊີ
໓. ອັນຍາຕາວິນຊີ

ອະນັນຍາຕັນຍັດສາມີຕິນຊີ ຍ່ອມເຖິງຖານະເທົ່າໃດ ອັນຍິນຊີ ຍ່ອມເຖິງຖານະ ເທົ່າໃດ ອັນຍາຕາວິນຊີ ຍ່ອມເຖິງຖານະເທົ່າໃດ?

ຄື ອະນັນຍາຕັນຍັດສາມີຕິນຊີ ຍ່ອມເຖິງຖານະ ໑ ຄື ໂສດາປັດຕິມັກ

ອັນຍິນຊີ ຍ່ອມເຖິງຖານະ ໖ ຄື ໂສດາປັດຕິຜົນ ສະກະທາຄາມິມັກ ສະກະທາຄາມິຜົນ ອະນາຄາມິມັກ ອະນາຄາມິຜົນ ອະຣະຫັດຕະມັກ

ອັນຍາຕາວິນຊີ ຍ່ອມເຖິງຖານະ ໑ ຄື ອະຣະຫັດຕະຜົນ

ໃນຂະນະແຫ່ງໂສດາປັດຕິມັກ ອະນັນຍາຕັນຍັດສາມີຕິນຊີມີສັດທິນຊີເຊິ່ງມີຄວາມນ້ອມໃຈເຊື່ອເປັນບໍລິວານ ມີວິຣິຍິນຊີເຊິ່ງມີການປະຄອງໄວ້ເປັນບໍລິວານ ມີສະຕິນຊີເຊິ່ງມີຄວາມຕັ້ງໝັ້ນເປັນບໍລິວານ ມີສະມາທິນຊີເຊິ່ງມີຄວາມບໍ່ຟຸ້ງຊ່ານເປັນບໍລິວານ ມີປັນຍິນຊີເຊິ່ງມີຄວາມເຫັນເປັນບໍລິວານ ມີມະນິນຊີເຊິ່ງມີຄວາມຮູ້ແຈ້ງເປັນບໍລິວານ ມີໂສມະນັດສິນຊີເຊິ່ງມີຄວາມຍິນດີເປັນບໍລິວານ ມີຊີວິຕິນຊີເຊິ່ງມີຄວາມເປັນໃຫຍ່ໃນຄວາມສືບຕໍ່ທີ່ກຳລັງເປັນໄປ ເປັນບໍລິວານ

ທຳທັງຫຼາຍທີ່ເກີດໃນຂະນະແຫ່ງໂສດາປັດຕິມັກ ຍົກເວັ້ນຮູບທີ່ມີຈິດເປັນສະມຸດຖານ ທັງໝົດເປັນກຸສົນ ທັງໝົດບໍ່ມີອາສະວະ ທັງໝົດເປັນທຳເຄື່ອງນຳອອກ ທັງໝົດເປັນເຄື່ອງໃຫ້ເຖິງຄວາມບໍ່ສັ່ງສົມ ທັງໝົດເປັນໂລກຸດຕະຣະ ທັງໝົດມີນິບພານເປັນອາລົມ

ໃນຂະນະແຫ່ງໂສດາປັດຕິມັກ ອະນັນຍາຕັນຍັດສາມີຕິນຊີມີອິນຊີ ໘ ປະການນີ້ ເຊິ່ງມີສະຫະຊາຕະທຳເປັນບໍລິວານ ມີທຳທີ່ອາໄສກັນ ແລະກັນເປັນບໍລິວານ ມີທຳທີ່ອາໄສກັນເປັນບໍລິວານ ມີທຳທີ່ປະກອບຮ່ວມກັນເປັນບໍລິວານ ໄປຮ່ວມກັນ ເກີດຮ່ວມກັນ ກ່ຽວຂ້ອງກັນປະກອບຮ່ວມກັນ ທຳເຫຼົ່ານັ້ນເປັນອາການ ແລະເປັນບໍລິວານຂອງອະນັນຍາຕັນຍັດສາມີຕິນຊີນັ້ນ ໃນຂະນະແຫ່ງໂສດາປັດຕິຜົນ ຯລຯ

ໃນຂະນະແຫ່ງອະຣະຫັດຕະຜົນ ອັນຍາຕາວິນຊີມີສັດທິນຊີເຊິ່ງມີຄວາມນ້ອມໃຈເຊື່ອເປັນບໍລິວານ ຯລຯ ມີຊີວິຕິນຊີເຊິ່ງມີຄວາມເປັນໃຫຍ່ໃນຄວາມສືບຕໍ່ທີ່ກຳລັງເປັນໄປເປັນບໍລິວານ

ທຳທັງຫຼາຍທີ່ເກີດໃນຂະນະແຫ່ງອະຣະຫັດຕະຜົນ ຍົກເວັ້ນຮູບທີ່ມີຈິດເປັນສະມຸດຖານ ທັງໝົດເປັນອັບພະຍາກະຕະ ທັງໝົດບໍ່ມີອາສະວະ ທັງໝົດເປັນໂລກຸດຕະຣະ ທັງໝົດມີນິບພານ ເປັນອາລົມ

ໃນຂະນະແຫ່ງອະຣະຫັດຕະຜົນ ອັນຍາຕາວິນຊີມີອິນຊີ ໘ ປະການນີ້ ເຊິ່ງມີສະຫະຊາຕະທຳເປັນບໍລິວານ ທຳເຫຼົ່ານີ້ເປັນອາການ ແລະເປັນບໍລິວານຂອງອັນຍາຕາວິນຊີນັ້ນ ອິນຊີ ໘ ລວມ ໘ ໝວດນີ້ ຈຶ່ງເປັນອາການ ໖໔ ດ້ວຍປະການແນວນີ້

ຄຳວ່າ ອາສະວະ ອະທິບາຍວ່າ ອາສະວະເຫຼົ່ານັ້ນ ມີອັນໃດແດ່

ຄື ກາມາສະວະ ພະວາສະວະ ທິດຖາສະວະ ອະວິດຊາສະວະ

ອາສະວະເຫຼົ່ານັ້ນຍ່ອມສິ້ນໄປ ໃນບ່ອນໃດ?

ຄື ທິດຖາສະວະທັງໝົດຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ກາມາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ພະວາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ອະວິດຊາສະວະເຊິ່ງເປັນເຫດໃຫ້ສັດໄປສູ່ອະບາຍ ຍ່ອມສິ້ນໄປດ້ວຍໂສດາປັດຕິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງ ໂສດາປັດຕິມັກນີ້

ກາມາສະວະສ່ວນຫຍາບຍ່ອມສິ້ນໄປດ້ວຍສະກະທາຄາມິມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍສະກະທາຄາມິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງສະກະທາຄາມິມັກນີ້

ກາມາສະວະທັງໝົດຍ່ອມສິ້ນໄປດ້ວຍອະນາຄາມິມັກ ພະວາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ອະວິດຊາສະວະເຊິ່ງຕັ້ງຢູ່ຮ່ວມກັບກາມາສະວະນັ້ນ ຍ່ອມສິ້ນໄປດ້ວຍອະນາຄາມິມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງອະນາຄາມິມັກນີ້

ພະວາສະວະທັງໝົດ ອະວິດຊາສະວະທັງໝົດຍ່ອມສິ້ນໄປດ້ວຍອະຣະຫັດຕະມັກ ອາສະວະເຫຼົ່ານີ້ຍ່ອມສິ້ນໄປໃນຂະນະແຫ່ງອະຣະຫັດຕະມັກນີ້

[໔໐໗] ສິ່ງໃດ ໆ ໃນໄຕຣໂລກກະທາດນີ້
ພຣະປັນຍາຈັກຂຸຂອງພຣະຕະຖາຄົດເຈົ້ານັ້ນບໍ່ຊົງເຫັນ ບໍ່ມີເລີຍ
ອັນໜຶ່ງ ທຳມະຊາດອັນໃດ ໆ ທີ່ຄວນຮູ້
ພຣະພຸດທະຍານບໍ່ຮູ້ແຈ້ງບໍ່ມີ
ທຳມະຊາດທີ່ຄວນແນະນຳໃດມີຢູ່
ພຣະຕະຖາຄົດເຈົ້າໄດ້ຊົງຮູ້ທຳມະຊາດທີ່ຄວນແນະນຳນັ້ນທັງໝົດ
ຍ້ອນເຫດນັ້ນ ພຣະຕະຖາຄົດເຈົ້າຈຶ່ງຊື່ວ່າ ມີພຣະສະມັນຕະຈັກຂຸ

ຄຳວ່າ ສະມັນຕະຈັກຂຸ ອະທິບາຍວ່າ ຊື່ວ່າສະມັນຕະຈັກຂຸ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ພຣະພຸດທະຍານ ໑໔ ປະການ ໄດ້ແກ່

໑. ຍານໃນທຸກ ຊື່ວ່າ ພຸດທະຍານ
໔. ຍານໃນທຸກຂະສະມຸໄທ ຊື່ວ່າ ພຸດທະຍານ
ฯລฯ
໑໓. ສັບພັນຍຸຕະຍານ ຊື່ວ່າ ພຸດທະຍານ
໑໔. ອະນາວະຣະນະຍານ ຊື່ວ່າ ພຸດທະຍານ

ພຣະພຸດທະຍານ ໑໔ ປະການນີ້ແລ ບັນດາພຸດທະຍານ ໑໔ ປະການນີ້ ຍານ ໘ ປະການເບື້ອງຕົ້ນເປັນຍານທີ່ທົ່ວໄປແກ່ສາວົກ ສ່ວນຍານອີກ ໖ ປະການເບື້ອງປາຍເປັນຍານທີ່ມີບໍ່ທົ່ວໄປແກ່ສາວົກ

ສະພາວະທີ່ທົນໄດ້ຍາກແຫ່ງທຸກພຣະຕະຖາຄົດເຈົ້າຊົງຮູ້ແລ້ວຕະຫຼອດທັງໝົດ ທີ່ບໍ່ຊົງຮູ້ບໍ່ມີ ຍ້ອນເຫດນັ້ນ ພຣະຕະຖາຄົດເຈົ້າຈຶ່ງຊື່ວ່າມີພຣະສະມັນຕຈັກຂຸ ສະມັນຕະຈັກຂຸເປັນປັນຍິນຊີເປັນສັດທິນຊີຍ້ອນມີສະພາວະນ້ອມໃຈເຊື່ອ ເປັນວິຣິຍິນຊີຍ້ອນມີສະພາວະປະຄອງໄວ້ ເປັນ

ສະຕິນຊີຍ້ອນມີສະພາວະຕັ້ງໝັ້ນ ເປັນສະມາທິນຊີ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ດ້ວຍອຳນາດແຫ່ງປັນຍິນຊີ ສະພາວະທີ່ທົນໄດ້ຍາກແຫ່ງທຸກພຣະຕະຖາຄົດເຈົ້າຊົງເຫັນແລ້ວ ຊົງຮູ້ແລ້ວ ຊົງເຮັດໃຫ້ແຈ້ງແລ້ວ ຊົງຖືກຕ້ອງແລ້ວດ້ວຍພຣະປັນຍາຕະຫຼອດທັງໝົດ ທີ່ບໍ່ຊົງຖືກຕ້ອງແລ້ວດ້ວຍພຣະປັນຍາບໍ່ມີ ຍ້ອນເຫດນັ້ນ ພຣະຕະຖາຄົດເຈົ້າຈຶ່ງ ຊື່ວ່າມີພຣະສະມັນຕະຈັກຂຸ ສະມັນຕະຈັກຂຸເປັນປັນຍິນຊີ ເປັນສັດທິນຊີຍ້ອນມີສະພາວະນ້ອມໃຈເຊື່ອ ເປັນວິຣິຍິນຊີຍ້ອນມີສະພາວະປະຄອງໄວ້ ເປັນສະຕິນຊີຍ້ອນມີສະພາວະຕັ້ງໝັ້ນ ເປັນສະມາທິນຊີຍ້ອນມີສະພາວະບໍ່ຟຸ້ງຊ່ານ ດ້ວຍອຳນາດແຫ່ງປັນຍິນຊີ

| | |
|---|---|
| ສະພາວະທີ່ເປັນເຫດແຫ່ງສະມຸໄທ | ໗ລ໗ |
| ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ | ໗ລ໗ |
| ສະພາວະທີ່ເປັນທາງແຫ່ງມັກ | ໗ລ໗ |
| ສະພາວະແຫ່ງປັນຍາທີ່ແຕກສານດີໃນອັດຖະແຫ່ງອັດຖະປະຕິສຳພິທາ | ໗ລ໗ |
| ສະພາວະແຫ່ງປັນຍາທີ່ແຕກສານດີໃນທຳແຫ່ງທຳມະປະຕິສຳພິທາ | ໗ລ໗ |
| ສະພາວະແຫ່ງປັນຍາທີ່ແຕກສານດີໃນນິຣຸດຕິແຫ່ງນິຣຸດຕິປະຕິສຳພິທາ | ໗ລ໗ |
| ສະພາວະແຫ່ງປັນຍາທີ່ແຕກສານດີໃນປະຕິພານແຫ່ງປະຕິພານະປະຕິສຳພິທາ | ໗ລ໗ |
| ຍານໃນຄວາມຍິ່ງແລະຄວາມຍ່ອນແຫ່ງອິນຊີທັງຫຼາຍ | ໗ລ໗ |
| ຍານໃນອາສະຍະແລະອະນຸໄສຂອງສັດທັງຫຼາຍ | ໗ລ໗ |
| ຍານໃນຍະມະກະປາຕິຫານ | ໗ລ໗ |
| ຍານໃນພຣະມະຫາກະຣຸນາສະມາບັດ | ໗ລ໗ |

ຮູບທີ່ໄດ້ເຫັນ ສຽງທີ່ໄດ້ຟັງ ອາລົມທີ່ໄດ້ຮູ້ ທຳມາຣົມທີ່ຮູ້ແຈ້ງ ທີ່ເຖິງ ທີ່ສະແຫວງຫາ ທີ່ຕອງຕາມດ້ວຍໃຈ ແຫ່ງໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະ ພາມ ເທວະດາແລະມະນຸດທັງຫຼາຍ ພຣະຕະຖາຄົດເຈົ້າຊົງຮູ້ແລ້ວ ຊົງຮູ້ແລ້ວ ຊົງເຮັດໃຫ້ແຈ້ງແລ້ວ ຊົງຖືກຕ້ອງແລ້ວດ້ວຍພຣະປັນຍາຕະຫຼອດທັງໝົດ ທີ່ບໍ່ຊົງຖືກຕ້ອງແລ້ວດ້ວຍພຣະປັນຍາບໍ່ມີ ຍ້ອນເຫດນັ້ນ ພຣະຕະຖາຄົດເຈົ້າຈຶ່ງຊື່ວ່າມີພຣະສະມັນຕະຈັກຂຸ ສະມັນຕະຈັກຂຸເປັນປັນຍິນຊີ ເປັນສັດທິນຊີຍ້ອນມີສະພາວະນ້ອມໃຈເຊື່ອ ເປັນວິຣິຍິນຊີຍ້ອນມີສະພາວະປະຄອງໄວ້ ເປັນສະຕິນຊີຍ້ອນມີສະພາວະຕັ້ງໝັ້ນ ເປັນສະມາທິນຊີຍ້ອນມີສະພາວະບໍ່ຟຸ້ງຊ່ານ ດ້ວຍອຳນາດແຫ່ງປັນຍິນຊີ

ບຸກຄົນເມື່ອເຊື່ອ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າເຊື່ອ

ບຸກຄົນເມື່ອປະຄອງໄວ້ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າປະຄອງໄວ້

ບຸກຄົນເມື່ອຕັ້ງສະຕິໝັ້ນ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າຕັ້ງສະຕິໝັ້ນ

ບຸກຄົນເມື່ອຕັ້ງໃຈໝັ້ນ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າຕັ້ງໃຈໝັ້ນ

ບຸກຄົນເມື່ອຮູ້ຊັດແຈ້ງ ຊື່ວ່າເຊື່ອ ເມື່ອເຊື່ອ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າປະຄອງໄວ້ ເມື່ອປະຄອງໄວ້ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າຕັ້ງສະຕິໝັ້ນ ເມື່ອຕັ້ງສະຕິໝັ້ນ ຊື່ວ່າຮູ້ຊັດແຈ້ງ ເມື່ອຮູ້ຊັດແຈ້ງ ຊື່ວ່າຕັ້ງໃຈໝັ້ນ ເມື່ອຕັ້ງໃຈໝັ້ນ ຊື່ວ່າຮູ້ຊັດແຈ້ງ

ຍ້ອນຄວາມເປັນຜູ້ເຊື່ອຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງເຊື່ອ

ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງປະຄອງໄວ້

ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຕັ້ງສະຕິໝັ້ນ

ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງຕັ້ງໃຈໝັ້ນ

ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງເຊື່ອ ຍ້ອນຄວາມເປັນຜູ້ເຊື່ອຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງປະຄອງໄວ້ ຍ້ອນຄວາມເປັນຜູ້ປະຄອງໄວ້ຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້

ຊັດແຈ້ງຈຶ່ງຕັ້ງສະຕິໝັ້ນ ຍ້ອນຄວາມເປັນຜູ້ຕັ້ງສະຕິໝັ້ນຈຶ່ງຮູ້ຊັດແຈ້ງ ຍ້ອນຄວາມເປັນຜູ້ຮູ້ຊັດແຈ້ງຈຶ່ງຕັ້ງໃຈໝັ້ນ ຍ້ອນຄວາມເປັນຜູ້ຕັ້ງໃຈໝັ້ນຈຶ່ງຮູ້ຊັດແຈ້ງ

ພຸດທະຈັກຂຸຊື່ວ່າພຸດທະຍານ ພຸດທະຍານຊື່ວ່າພຸດທະຈັກຂຸ ເປັນເຄື່ອງໃຫ້ພຣະຕະຖາຄົດເຈົ້າຊົງເຫັນໝູ່ສັດຜູ້ມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ບາງພວກມັກເຫັນປະຣະໂລກ ແລະໂທດໂດຍຄວາມເປັນໄພ ບາງພວກມັກບໍ່ເຫັນປະຣະໂລກ ແລະໂທດໂດຍຄວາມເປັນໄພ

ຄຳວ່າ ມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ອະທິບາຍວ່າ ບຸກຄົນຜູ້ມີສັດທາ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ບຸກຄົນຜູ້ບໍ່ມີສັດທາ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ບຸກຄົນຜູ້ມີຄວາມພຽນ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ບຸກຄົນຜູ້ມີຄວາມຂີ້ຄ້ານ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ບຸກຄົນຜູ້ມີສະຕິຕັ້ງໝັ້ນ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ບຸກຄົນຜູ້ມີສະຕິຫຼົງລືມ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ບຸກຄົນຜູ້ມີຈິດຕັ້ງໝັ້ນ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ບຸກຄົນຜູ້ມີຈິດບໍ່ຕັ້ງໝັ້ນ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ ບຸກຄົນຜູ້ມີປັນຍາດີ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸໜ້ອຍ ບຸກຄົນຜູ້ມີປັນຍາຊາມ ຊື່ວ່າມີກິເລດເໝືອນທຸລີໃນປັນຍາຈັກຂຸຫຼາຍ

ຄຳວ່າ ມີອິນຊີແກ່ກ້າ ມີອິນຊີອ່ອນ ອະທິບາຍວ່າ ບຸກຄົນຜູ້ມີສັດທາ ເປັນຜູ້ມີອິນຊີແກ່ກ້າ ບຸກຄົນຜູ້ບໍ່ມີສັດທາ ເປັນຜູ້ມີອິນຊີອ່ອນ ຯລຯ ບຸກຄົນຜູ້ມີປັນຍາດີເປັນຜູ້ມີອິນຊີແກ່ກ້າ ບຸກຄົນຜູ້ມີປັນຍາຊາມ ເປັນຜູ້ມີອິນຊີອ່ອນ

ຄຳວ່າ ມີອາການດີ ມີອາການຊາມ ອະທິບາຍວ່າ ບຸກຄົນຜູ້ມີສັດທາ ເປັນຜູ້ມີອາການດີ ບຸກຄົນຜູ້ບໍ່ມີສັດທາ ເປັນຜູ້ມີອາການຊາມ ຯລຯ ບຸກຄົນຜູ້ມີປັນຍາດີ ເປັນຜູ້ມີອາການດີ ບຸກຄົນຜູ້ມີປັນຍາຊາມ ເປັນຜູ້ມີອາການຊາມ

ຄຳວ່າ ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ອະທິບາຍວ່າ ບຸກຄົນຜູ້ມີສັດທາ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ບຸກຄົນຜູ້ບໍ່ມີສັດທາ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ບຸກຄົນຜູ້ມີຄວາມພຽນ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ບຸກຄົນຜູ້ຂີ້ຄ້ານ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ບຸກຄົນຜູ້ມີສະຕິຕັ້ງໝັ້ນ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ບຸກຄົນຜູ້ມີສະຕິຫຼົງລືມ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ບຸກຄົນຜູ້ມີຈິດຕັ້ງໝັ້ນ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ບຸກຄົນຜູ້ມີຈິດບໍ່ຕັ້ງໝັ້ນ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ບຸກຄົນຜູ້ມີປັນຍາດີ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ບຸກຄົນຜູ້ມີປັນຍາຊາມ ເປັນຜູ້ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ

ຄໍາວ່າ ບາງພວກມັກເຫັນປະຣະໂລກແລະໂທດໂດຍຄວາມເປັນໄພ ບາງພວກມັກບໍ່ເຫັນປະຣະໂລກ ແລະໂທດໂດຍຄວາມເປັນໄພ ອະທິບາຍວ່າ ບຸກຄົນຜູ້ມີສັດທາເປັນຜູ້ມັກເຫັນປະຣະໂລກ ແລະໂທດໂດຍຄວາມເປັນໄພ ບຸກຄົນຜູ້ບໍ່ມີສັດທາເປັນຜູ້ມັກບໍ່ເຫັນປະຣະໂລກແລະໂທດໂດຍຄວາມເປັນໄພ ຯລຯ ບຸກຄົນຜູ້ມີປັນຍາດີເປັນຜູ້ມັກເຫັນປະຣະໂລກ ແລະໂທດໂດຍຄວາມເປັນໄພ ບຸກຄົນຜູ້ມີປັນຍາຊາມເປັນຜູ້ມັກບໍ່ເຫັນປະຣະໂລກແລະໂທດໂດຍຄວາມເປັນໄພ

ຄໍາວ່າ ໂລກ ອະທິບາຍວ່າ ຂັນທະໂລກ ທາດໂລກ ອາຍະຕະນະໂລກ ວິປັດຕິພະວະໂລກ ວິປັດຕິ ສໍາພະວະໂລກ ສໍາປັດຕິພະວະໂລກ ສໍາປັດຕິສໍາພະວະໂລກ

ໂລກ ໑ ຄື ສັດໂລກທັງປວງດໍາຣົງຢູ່ໄດ້ຍ້ອນອາຫານ
ໂລກ ໒ ຄື ນາມ ໑ ຣູບ ໑
ໂລກ ໓ ຄື ເວທະນາ ໓
ໂລກ ໔ ຄື ອາຫານ ໔
ໂລກ ໕ ຄື ອຸປາທານຂັນ ໕
ໂລກ ໖ ຄື ອາຍະຕະນະພາຍໃນ ໖
ໂລກ ໗ ຄື ວິນຍານັດຖິຕິ ໗
ໂລກ ໘ ຄື ໂລກະທໍາ ໘
ໂລກ ໙ ຄື ສັດຕາວາດ ໙
ໂລກ ໑໐ ຄື ອາຍະຕະນະ ໑໐
ໂລກ ໑໒ ຄື ອາຍະຕະນະ ໑໒
ໂລກ ໑໘ ຄື ທາດ ໑໘

ຄໍາວ່າ ໂທດ ອະທິບາຍວ່າ ກິເລດທັງປວງເປັນໂທດ ທຸດຈະຣິດທັງປວງເປັນໂທດ ອະພິສັງຂານທັງປວງເປັນໂທດ ກໍາທີ່ເປັນເຫດໃຫ້ສັດໄປສູ່ພົບທັງປວງເປັນໂທດ ສັນຍາໃນໂລກນີ້ ແລະໃນໂທດນີ້ວ່າເປັນໄພອັນແຮງກ້າ ຜາກົດແລ້ວດ້ວຍປະການແນວນີ້ ເໝືອນສັນຍາໃນສັດຕູຜູ້ເງື້ອດາບເຂົ້າມາຈະຂ້າ ຜາກົດແລ້ວ ດັ່ງນັ້ນ ພຣະຕະຖາຄົດເຈົ້າຊົງຮູ້ ຊົງເຫັນ ຊົງຮູ້ ຊົງຮູ້ແຈ້ງອິນຊີ ໕ ປະການນີ້ ດ້ວຍອາການ ໕໐ ແນວນີ້

**ຕະຕິຍະພານະວານ ຈົບ**

**ອິນທະຣິຍະກະຖາ ຈົບ**

# ໕. ວິໂມກຂະກະຖາ

## ວ່າດ້ວຍວິໂມກ

### ອຸດເທດ

[໒໐໗] ເຫດເກີດຂຶ້ນເໝືອນໃນສູດຂ້າງຕົ້ນ
ພິກຂຸທັງຫຼາຍ ວິໂມກ ໓ ປະການນີ້
ວິໂມກ ໓ ປະການ ມີອັນໃດແດ່ ຄື

໑. ສູນຍະຕະວິໂມກ
໒. ອະນິມິດຕະວິໂມກ
໓. ອັບປະນິຫິຕະວິໂມກ

ພິກຂຸທັງຫຼາຍ ວິໂມກ ໓ ປະການນີ້ແລ
ອີກປະການໜຶ່ງ ວິໂມກ ໖໘ ປະການ ຄື

໑. ສູນຍະຕະວິໂມກ
໒. ອະນິມິດຕະວິໂມກ
໓. ອັບປະນິຫິຕະວິໂມກ
໔. ອັດຊັດຕະວຸດຖານະວິໂມກ (ວິໂມກມີການອອກຈາກອາລົມພາຍໃນ)
໕. ພະຫິດທາວຸດຖານະວິໂມກ
໖. ທຸພະໂຕວຸດຖານະວິໂມກ (ວິໂມກມີການອອກຈາກການອອກຈາກອາລົມທັງສອງ ອາລົມພາຍນອກ)
໗-໑໐. ວິໂມກ ໔ ຈາກອັດຊັດຕະວຸດຖານະວິໂມກ
໑໑-໑໔. ວິໂມກ ໔ ຈາກພະຫິດທາວຸດຖານະວິໂມກ
໑໕-໑໘. ວິໂມກ ໔ ຈາກທຸພະໂຕວຸດຖານະວິໂມກ
໑໙-໒໒. ວິໂມກ ໔ ອະນຸໂລມຕາມອັດຊັດຕະວຸດຖານະວິໂມກ
໒໓-໒໖. ວິໂມກ ໔ ອະນຸໂລມຕາມພະຫິດທາວຸດຖານະວິໂມກ
໒໗-໓໐. ວິໂມກ ໔ ອະນຸໂລມຕາມທຸພະໂຕວຸດຖານະວິໂມກ
໓໑-໓໔. ວິໂມກ ໔ ຣະງັບຈາກອັດຊັດຕະວຸດຖານະວິໂມກ
໓໕-໓໘. ວິໂມກ ໔ ຣະງັບຈາກພະຫິດທາວຸດຖານະວິໂມກ
໓໙-໔໒. ວິໂມກ ໔ ຣະງັບຈາກທຸພະໂຕວຸດຖານະວິໂມກ

໔໓. ຊື່ວ່າວິໂມກ ຍ້ອນພິກຂຸຜູ້ໄດ້ຮູບຊານຍ່ອມເຫັນຮູບທັງຫຼາຍ

໔໔. ຊື່ວ່າວິໂມກ ຍ້ອນພິກຂຸຜູ້ບໍ່ໝາຍຮູ້ວ່າຮູບພາຍໃນເຫັນຮູບພາຍນອກ

໔໕. ຊື່ວ່າວິໂມກ ຍ້ອນພິກຂຸເປັນຜູ້ນ້ອມໄປໃນອາລົມວ່າງາມເທົ່ານັ້ນ

໔໖. ອາກາສານັນຈາຍະຕະນະສະມາບັດວິໂມກ

໔໗. ວິນຍານັນຈາຍະຕະນະສະມາບັດວິໂມກ

໔໘. ອາກິນຈັນຍາຍະຕະນະສະມາບັດວິໂມກ

໔໙. ເນວະສັນຍານາສັນຍາຍະຕະນະສະມາບັດວິໂມກ

໕໐. ສັນຍາເວທະຍິດນິໂຣທະສະມາບັດວິໂມກ

໕໑. ສະມະຍະວິໂມກ

໕໒. ອະສະມະຍະວິໂມກ

໕໓. ສາມະຍິກະວິໂມກ

໕໔. ອະສາມະຍິກະວິໂມກ

໕໕. ກຸບປະວິໂມກ

໕໖. ອະກຸບປະວິໂມກ

໕໗. ໂລກິຍະວິໂມກ

໕໘. ໂລກຸດຕະຣະວິໂມກ

໕໙. ສາສະວະວິໂມກ

໖໐. ອະນາສະວະວິໂມກ

໖໑. ສາມິສະວິໂມກ

໖໒. ນິຣາມິສະວິໂມກ

໖໓. ນິຣາມິສານິຣາມິສະຕະຣະວິໂມກ

໖໔. ປະນິຫິຕະວິໂມກ

໖໕. ອັບປະນິຫິຕະວິໂມກ

໖໖. ປະນິຫິຕັບປະຕິປັດສັດທິວິໂມກ

໖໗. ສັນຍຸດຕະວິໂມກ

໖໘. ວິສັນຍຸດຕະວິໂມກ

໖໙. ເອກັດຕະວິໂມກ

໗໐. ນານັດຕະວິໂມກ

໗໑. ສັນຍາວິໂມກ

໗໒. ຍານະວິໂມກ

໗໓. ສີຕິສິຍາວິໂມກ

໗໔. ຊານະວິໂມກ

໗໕. ອະນຸປາທາຈິດຕະວິໂມກ

## ນິດເທດ

[໔໑໐] ສູນຍະຕະວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາດັ່ງນີ້ວ່າ ນາມຮູບນີ້ວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ທ່ານບໍ່ກະທຳອະພິນິເວສະ (ຄວາມຍຶດໝັ້ນ) ໃນນາມຮູບນັ້ນ ຍ້ອນເຫດນັ້ນ ວິໂມກຂອງພິກຂຸນັ້ນຈຶ່ງເປັນວິໂມກທີ່ເປັນ ສູນຍະຕະ ນີ້ຊື່ວ່າສູນຍະຕະວິໂມກ

ອະນິມິດຕະວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາດັ່ງນີ້ວ່າ ນາມຮູບນີ້ວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ທ່ານບໍ່ກະທຳນິມິດໃນນາມຮູບນັ້ນ ຍ້ອນເຫດນັ້ນ ວິໂມກຂອງພິກຂຸນັ້ນຈຶ່ງເປັນວິໂມກທີ່ບໍ່ມີນິມິດ ນີ້ຊື່ວ່າ ອະນິມິດຕະວິໂມກ

ອັບປະນິຫິຕະວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ໄປສູ່ປ່າກໍດີ ໄປສູ່ເຫງົ້າໄມ້ກໍດີ ໄປສູ່ເຮືອນວ່າງກໍດີ ພິຈາລະນາດັ່ງນີ້ວ່າ ນາມຮູບນີ້ວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ທ່ານບໍ່ເຮັດປະນິຫິ (ຄວາມຕັ້ງໝັ້ນ) ໃນນາມຮູບນັ້ນ ຍ້ອນເຫດນັ້ນ ວິໂມກຂອງພິກຂຸນັ້ນຈຶ່ງເປັນວິໂມກທີ່ບໍ່ມີປະນິຫິຕະ ນີ້ຊື່ວ່າອັບປະນິຫິຕະວິໂມກ

ອັດຊັດຕະວຸດຖານະວິໂມກ ເປັນແນວໃດ?

ຄື ຊານ ໔ ນີ້ຊື່ວ່າ ອັດຊັດຕະວຸດຖານະວິໂມກ

ພະຫິດທາວຸດຖານະວິໂມກ ເປັນແນວໃດ?

ຄື ອະຣູບສະມາບັດ ໔ ນີ້ຊື່ວ່າພະຫິດທາວຸດຖານະວິໂມກ

ທຸພະໂຕວຸດຖານະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ນີ້ຊື່ວ່າທຸພະໂຕວຸດຖານະວິໂມກ

ວິໂມກ ໔ ຈາກອັດຊັດຕະວຸດຖານະວິໂມກ ເປັນແນວໃດ?

ຄື ປະຖົມຊານອອກຈາກນິວອນ ທຸຕິຍະຊານອອກຈາກວິຕົກ ວິຈານຕະຕິຍະຊານອອກຈາກ ປີຕິ ຈະຕຸດຖະຊານອອກຈາກສຸກແລະທຸກ ນີ້ຊື່ວ່າວິໂມກ ໔ ຈາກອັດຊັດຕະວຸດຖານະວິໂມກ (໔)

ວິໂມກ ໔ ຈາກພະຫິດທາວຸດຖານະວິໂມກ ເປັນແນວໃດ?

ຄື ອາກາສານັນຈາຍະຕະນະສະມາບັດອອກຈາກຮູບສັນຍາ ປະຕິຄະສັນຍາວິນຍານັນຈາຍະຕະນະສະມາບັດອອກຈາກອາກາສານັນຈາຍະຕະນະສັນຍາ ອາກິນຈັນຍາຍະຕະນະສະມາບັດອອກຈາກວິນຍານັນຈາຍະຕະນະສັນຍາ ເນວະສັນຍານາສັນຍາຍະຕະນະສະມາບັດອອກຈາກອາກິນຈັນຍາຍະຕະນະສັນຍາ ນີ້ຊື່ວ່າວິໂມກ ໔ ຈາກພະຫິດທາວຸດຖານະວິໂມກ (໔-໗)

ວິໂມກ ໔ ຈາກທຸພະໂຕວຸດຖານະວິໂມກ ເປັນແນວໃດ?

ຄື ໂສດາປັດຕິມັກອອກຈາກສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດຈາກທິດຖານຸໄສ ວິຈິກິດສານຸໄສອອກຈາກເຫຼົ່າກິເລດທີ່ເປັນໄປຕາມສັກກາຍະທິດຖິເປັນ ຕົ້ນນັ້ນຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ

ສະກະທາຄາມີມັກອອກຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນຫຍາບ ໆ ຈາກກາມຣາຄານຸໄສ ປະຕິຄານຸໄສ ສ່ວນຫຍາບ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມກາມຣາຄະສັງໂຍດເປັນຕົ້ນນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ

ອະນາຄາມີມັກອອກຈາກກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນລະອຽດ ໆ ຈາກກາມຣາຄານຸໄສ ປະຕິຄານຸໄສ ສ່ວນລະອຽດ ໆ ອອກຈາກເຫຼົ່າກິເລດທີ່ເປັນໄປຕາມກາມຣາຄະສັງໂຍດເປັນຕົ້ນນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ

ອະຣະຫັດຕະມັກອອກຈາກຣູບຣາຄະ ອະຣູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ (ແລະ) ອະວິດຊານຸໄສອອກຈາກເຫຼົ່າກິເລດທີ່ເປັນໄປຕາມຣູບຣາຄະເປັນຕົ້ນນັ້ນ ຈາກຂັນທັງຫຼາຍ ແລະອອກຈາກສັບພະນິມິດພາຍນອກ ນີ້ຊື່ວ່າວິໂມກ ໔ ຈາກທຸພະໂຕວຸດຖານະວິໂມກ (໔-໑໘)

[໔໑໑] ວິໂມກ ໔ ອະນຸໂລມຕາມອັດຊັດຕະວຸດຖານະວິໂມກ ເປັນແນວໃດ?

ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ (ຈິດທີ່ມີອາລົມດຽວ) ເພື່ອປະໂຫຍດແກ່ການໄດ້ປະຖົມຊານ ຯລຯ ເພື່ອປະໂຫຍດແກ່ການໄດ້ທຸຕິຍະຊານ ຯລຯ ເພື່ອປະໂຫຍດແກ່ການໄດ້ຕະຕິຍະຊານ ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ ເພື່ອປະໂຫຍດແກ່ການໄດ້ຈະຕຸດຖະຊານ ນີ້ຊື່ວ່າວິໂມກ ໔ ອະນຸໂລມຕາມອັດຊັດຕະວຸດຖານະວິໂມກ (໔-໑໙)

ວິໂມກ ໔ ອະນຸໂລມຕາມພະຫິດທາວຸດຖານະວິໂມກ ເປັນແນວໃດ?

ຄື ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ ເພື່ອປະໂຫຍດແກ່ການໄດ້ອາກາສານັນຈາຍະຕະນະສະມາບັດ ຯລຯ ເພື່ອປະໂຫຍດແກ່ການໄດ້ວິນຍານັນຈາຍະຕະນະສະມາບັດ ຯລຯ ເພື່ອປະໂຫຍດແກ່ການໄດ້ອາກິນຈັນຍາຍະຕະນະສະມາບັດ ວິຕົກ ວິຈານ ປີຕິ ສຸກ ແລະເອກັກຄະຕາຈິດ ເພື່ອປະໂຫຍດແກ່ການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າວິໂມກ ໔ ອະນຸໂລມຕາມພະຫິດທາວຸດຖານະວິໂມກ (໔ ໔໐)

ວິໂມກ ໔ ອະນຸໂລມຕາມທຸພະໂຕວຸດຖານະວິໂມກ ເປັນແນວໃດ?

ຄື ອະນິດຈານຸປັດສະນາ ທຸກຂານຸປັດສະນາ ອະນັດຕານຸປັດສະນາ ເພື່ອປະໂຫຍດແກ່ການໄດ້ໂສດາປັດຕິມັກ ຯລຯ ເພື່ອປະໂຫຍດແກ່ການໄດ້ສະກະທາຄາມີມັກ ຯລຯ ເພື່ອປະໂຫຍດແກ່ການໄດ້ອະນາຄາມີມັກ ອະນິດຈານຸປັດສະນາ ທຸກຂານຸປັດສະນາ ອະນັດຕານຸປັດສະນາ ເພື່ອປະໂຫຍດແກ່ການໄດ້ອະຣະຫັດຕະມັກ ນີ້ຊື່ວ່າວິໂມກ ໔ ອະນຸໂລມຕາມທຸພະໂຕວຸດຖານະວິໂມກ (໔ ໔໔)

ວິໂມກ ໔ ຣະງັບຈາກອັດຊັດຕະວຸດຖານະວິໂມກ ເປັນແນວໃດ?

ຄື ການໄດ້ປະຖົມຊານ ຫຼື ວິບາກແຫ່ງປະຖົມຊານ ການໄດ້ທຸຕິຍະຊານ ຫຼື ວິບາກແຫ່ງ

ທຸຕິຍະຊານ ການໄດ້ຕະຕິຍະຊານ ຫຼື ວິບາກແຫ່ງຕະຕິຍະຊານ ການໄດ້ຈະຕຸດຖະຊານ ຫຼືວິບາກແຫ່ງຈະຕຸດຖະຊານ ນີ້ຊື່ວ່າວິໂມກ ໔ ຣະງັບຈາກອັດຊັດຕະອຸດຖານະວິໂມກ (໔-໘໗)

ວິໂມກ ໔ ຣະງັບຈາກພະຫິດທາອຸດຖານະວິໂມກ ເປັນແນວໃດ?

ຄື ການໄດ້ອາກາສານັນຈາຍະຕະນະສະມາບັດ ຫຼື ວິບາກແຫ່ງອາກາສານັນຈາຍະຕະນະສະມາບັດ ຯລຯ ການໄດ້ວິນຍານັນຈາຍະຕະນະສະມາບັດ ຯລຯ ການໄດ້ອາກິນຈັນຍາຍະຕະນະສະມາບັດ ຯລຯ ການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ຫຼື ວິບາກແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າວິໂມກ ໔ ຣະງັບຈາກພະຫິດທາອຸດຖານະວິໂມກ (໔-໓໘)

ວິໂມກ ໔ ຣະງັບຈາກທຸພະໂຕອຸດຖານະວິໂມກ ເປັນແນວໃດ?

ຄື ໂສດາປັດຕິຜົນແຫ່ງໂສດາປັດຕິມັກ ສະກະທາຄາມິຜົນແຫ່ງສະກະທາຄາມິມັກ ອະນາຄາມິຜົນແຫ່ງອະນາຄາມິມັກ ອະຣະຫັດຕະຜົນແຫ່ງອະຣະຫັດຕະມັກ ນີ້ຊື່ວ່າວິໂມກ ໔ ຣະງັບຈາກທຸພະໂຕອຸດຖານະວິໂມກ (໔ ໓໖)

[໒໑໘] ຊື່ວ່າວິໂມກ ຍ້ອນພິກຂຸຜູ້ໄດ້ຮູບຊານຍ່ອມເຫັນຮູບທັງຫຼາຍ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ມະນະສິການເຖິງນິມິດສີຂຽວໃນພາຍໃນ ຍ່ອມໄດ້ນີລະສັນຍາ ທ່ານກະທຳນິມິດນັ້ນໃຫ້ເປັນອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເມື່ອແລ້ວນ້ອມຈິດໄປໃນນິມິດສີຂຽວພາຍນອກ ຍ່ອມໄດ້ນີລະສັນຍາ ທ່ານທຳນິມິດນັ້ນໃຫ້ເປັນອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເມື່ອແລ້ວປະຕິບັດ ຈະເລີນເຮັດໃຫ້ຫຼາຍ ທ່ານມີຄວາມຄິດແນວນີ້ວ່າ ນິມິດສີຂຽວທັງສອງທັງພາຍໃນແລະພາຍນອກນີ້ເປັນຮູບທ່ານມີຄວາມໝາຍຮູ້ວ່າເປັນຮູບ

ພິກຂຸບາງອົງໃນທຳວິໄນນີ້ມະນະສິການເຖິງນິມິດສີເຫຼືອງ ຯລຯ ນິມິດສີແດງ ຯລຯ ນິມິດສີຂາວໃນພາຍໃນ ຍ່ອມໄດ້ໂອທາຕະສັນຍາ ທ່ານທຳນິມິດນັ້ນໃຫ້ເປັນອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເມື່ອແລ້ວນ້ອມຈິດໄປໃນນິມິດສີຂາວໃນພາຍນອກ ຍ່ອມໄດ້ໂອທາຕະສັນຍາ ທ່ານກະທຳນິມິດນັ້ນໃຫ້ເປັນອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ເມື່ອແລ້ວປະຕິບັດຈະເລີນ ເຮັດໃຫ້ຫຼາຍ ທ່ານມີຄວາມຄິດແນວນີ້ວ່າ ນິມິດສີຂາວທັງສອງທັງພາຍໃນແລະພາຍນອກນີ້ເປັນຮູບ ທ່ານມີຄວາມໝາຍຮູ້ວ່າເປັນຮູບ ຊື່ວ່າວິໂມກ ຍ້ອນພິກຂຸຜູ້ໄດ້ຮູບຊານຍ່ອມເຫັນຮູບທັງຫຼາຍແນວນີ້ (໓໗)

ຊື່ວ່າວິໂມກ ຍ້ອນພິກຂຸຜູ້ບໍ່ມີຄວາມໝາຍຮູ້ວ່າຮູບພາຍໃນເຫັນຮູບພາຍນອກ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ບໍ່ມະນະສິການເຖິງນິມິດສີຂຽວໃນພາຍໃນ ຈຶ່ງບໍ່ໄດ້ນີລະສັນຍາ ນ້ອມຈິດໄປໃນນິມິດສີຂຽວພາຍນອກ ຍ່ອມໄດ້ນີລະສັນຍາ ທ່ານເຮັດນິມິດນັ້ນໃຫ້ເປັນ

ອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເມື່ອແລ້ວປະຕິບັດ ຈະເລີນ ເຮັດໃຫ້ຫຼາຍ ທ່ານມີຄວາມຄິດແນວນີ້ວ່າ ເຮົາບໍ່ມີຄວາມໝາຍຮູ້ວ່າເປັນຮູບໃນພາຍໃນ ນິມິດສີຂຽວພາຍນອກນີ້ເປັນຮູບ ທ່ານມີຄວາມໝາຍຮູ້ວ່າເປັນຮູບ

ພິກຂຸບາງອົງໃນທຳວິໄນນີ້ບໍ່ມະນະສິການເຖິງນິມິດສີເຫຼືອງ ຯລຯ ນິມິດສີແດງ ຯລຯ ນິມິດສີຂາວໃນພາຍໃນ ຍ່ອມບໍ່ໄດ້ໂອທາຕະສັນຍາ ນ້ອມຈິດໄປໃນນິມິດສີຂາວໃນພາຍນອກ ຍ່ອມໄດ້ໂອທາຕະສັນຍາ ທ່ານທຳນິມິດນັ້ນໃຫ້ເປັນອັນຖືໄວ້ດີແລ້ວ ຊົງຈຳໄວ້ດີແລ້ວ ກຳນົດໄວ້ດີແລ້ວ ເມື່ອແລ້ວປະຕິບັດ ຈະເລີນ ເຮັດໃຫ້ຫຼາຍ ທ່ານມີຄວາມຄິດແນວນີ້ວ່າ ບໍ່ມີຮູບໃນພາຍໃນ ນິມິດສີຂາວໃນພາຍນອກນີ້ເປັນຮູບ ທ່ານມີຄວາມໝາຍຮູ້ວ່າເປັນຮູບ ຊື່ວ່າວິໂມກ ຍ້ອນພິກຂຸຜູ້ບໍ່ມີຄວາມໝາຍຮູ້ວ່າຮູບພາຍໃນເຫັນຮູບພາຍນອກແນວນີ້ (໓໗)

ຊື່ວ່າວິໂມກ ຍ້ອນພິກຂຸເປັນຜູ້ນ້ອມໄປໃນອາລົມວ່າງາມເທົ່ານັ້ນ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ມີເມດຕາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ທິດທີ ໒ ຯລຯ ທິດທີ ໓ ຯລຯ ທິດທີ ໔ ຯລຯ ທິດເບື້ອງເທິງ ທິດເບື້ອງລຸ່ມ ທິດສຽງ ແຜ່ໄປຕະຫຼອດໂລກ ທົ່ວທຸກໝູ່ເຫຼົ່າໃນທີ່ທຸກສະຖານ ດ້ວຍເມດຕາຈິດອັນໄພບູນ ເປັນມະຫັກຄະຕະ ບໍ່ມີຂອບເຂດ ບໍ່ມີເວນ ບໍ່ມີຄວາມບຽດບຽນຢູ່ ຍ້ອນເປັນຜູ້ຈະເລີນເມດຕາ ສັດທັງຫຼາຍບໍ່ເປັນທີ່ກຽດຊັງ

ມີກະລຸນາຈິດ ຯລຯ ຍ້ອນເປັນຜູ້ຈະເລີນກະລຸນາ ສັດທັງຫຼາຍບໍ່ເປັນທີ່ກຽດຊັງ

ມີມຸທິຕາຈິດ ຯລຯ ຍ້ອນເປັນຜູ້ຈະເລີນມຸທິຕາ ສັດທັງຫຼາຍບໍ່ເປັນທີ່ກຽດຊັງ

ມີອຸເປກຂາຈິດແຜ່ໄປຕະຫຼອດທິດທີ ໑ ຯລຯ ຍ້ອນເປັນຜູ້ຈະເລີນອຸເປກຂາ ສັດທັງຫຼາຍບໍ່ເປັນທີ່ກຽດຊັງ

ຊື່ວ່າວິໂມກ ຍ້ອນພິກຂຸເປັນຜູ້ນ້ອມໄປໃນອາລົມວ່າງາມເທົ່ານັ້ນແນວນີ້ (໓໙)

[໔໑໓] ອາກາສານັນຈາຍະຕະນະສະມາບັດວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງຮູບສັນຍາ ຍ້ອນດັບປະຕິຄະສັນຍາ ຍ້ອນບໍ່ມະນະສິການເຖິງນານັດຕະສັນຍາໂດຍປະການທັງປວງ ບັນລຸອາກາສານັນຈາຍະຕະນະສະມາບັດ ດ້ວຍມະນະສິການວ່າ ອາກາດບໍ່ມີບ່ອນສຸດ ນີ້ຊື່ວ່າອາກາສານັນຈາຍະຕະນະສະມາບັດວິໂມກ (໔໐)

ວິນຍານັນຈາຍະຕະນະສະມາບັດວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງອາກາສານັນຈາຍະຕະນະສະມາບັດໂດຍປະການທັງປວງ ບັນລຸວິນຍານັນຈາຍະຕະນະສະມາບັດ ດ້ວຍມະນະສິການວ່າ ວິນຍານບໍ່ມີບ່ອນສຸດ ນີ້ຊື່ວ່າວິນຍານັນຈາຍະຕະນະສະມາບັດວິໂມກ (໔໑)

ອາກິນຈັນຍາຍະຕະນະສະມາບັດວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງວິນຍານັນຈາຍະຕະນະສະມາບັດໄດ້ໂດຍປະການທັງ

ປວງ ບັນລຸອາກິນຈັນຍາຍະຕະນະສະມາບັດ ດ້ວຍມະນະສິການວ່າ ອັນໃດໜ້ອຍໜຶ່ງຍ່ອມບໍ່ມີ ນີ້ຊື່ວ່າ ອາກິນຈັນຍາຍະຕະນະສະມາບັດວິໂມກ (໔໔)

ເນວະສັນຍານາສັນຍາຍະຕະນະສະມາບັດວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງອາກິນຈັນຍາຍະຕະນະສະມາບັດໂດຍປະການທັງປວງ ບັນລຸເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າ ເນວະສັນຍານາສັນຍາຍະຕະນະສະມາບັດວິໂມກ (໔໓)

ສັນຍາເວທະຍິຕະນິໂຣທະສະມາບັດວິໂມກ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ ຍ້ອນລ່ວງເນວະສັນຍານາສັນຍາຍະຕະນະສະມາບັດໂດຍປະການທັງປວງ ບັນລຸສັນຍາເວທະຍິຕະນິໂຣທະສະມາບັດ ນີ້ຊື່ວ່າສັນຍາເວທະຍິຕະນິໂຣທະສະມາບັດວິໂມກ (໔໔)

ສະມະຍະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າສະມະຍະວິໂມກ (໔໕)

ອະສະມະຍະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າອະສະມະຍະວິໂມກ (໔໖)

ສະມະຍິກະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າສະມະຍິກະວິໂມກ (໔໗)

ອະສະມະຍິກະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າອະສະມະຍິກະວິໂມກ (໔໘)

ກຸບປະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າກຸບປະວິໂມກ (໔໙)

ອະກຸບປະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າອະກຸບປະວິໂມກ (໕໐)

ໂລກິຍະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າໂລກິຍະວິໂມກ (໕໑)

ໂລກຸດຕະຣະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າໂລກຸດຕະຣະວິໂມກ (໕໒)

ສາສະວະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າສາສະວະວິໂມກ (໕໓)

ອະນາສະວະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າອະນາສະວະວິໂມກ (໕໔)

ສາມິດຕະວິໂມກ ເປັນແນວໃດ?

ຄື ວິໂມກອັນປະກອບດ້ວຍຮູບ ນີ້ຊື່ວ່າສາມິດຕະວິໂມກ (໕໕)

ນິຣາມິດຕະວິໂມກ ເປັນແນວໃດ?

ຄື ວິໂມກທີ່ບໍ່ປະກອບດ້ວຍຮູບ ນີ້ຊື່ວ່ານິຣາມິດຕະວິໂມກ (໕໖)

ນິຣາມິສານິຣາມິສະຕະຣະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່ານິຣາມິສານິຣາມິສະຕະຣະວິໂມກ (໕໗)

ປະນິຫິຕະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າປະນິຫິຕະວິໂມກ

ອັບປະນິຫິຕະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າອັບປະນິຫິຕະວິໂມກ(໕໘)

ປະນິຫິຕັບປະຕິປັດສັດທິວິໂມກ ເປັນແນວໃດ?

ຄື ການໄດ້ປະຖົມຊານຫຼືວິບາກແຫ່ງປະຖົມຊານ ໆລໆ ການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ຫຼື ວິບາກແຫ່ງເນວະສັນຍານາສັນຍາຍະຕະນະສະມາບັດ ນີ້ຊື່ວ່າປະນິຫິຕັບປະຕິປັດສັດທິວິໂມກ (໕໙)

ສັນຍຸດຕະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່າສັນຍຸດຕະວິໂມກ (໖໐)

ວິສັນຍຸດຕະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າວິສັນຍຸດຕະວິໂມກ (໖໑)

ເອກັດຕະວິໂມກ ເປັນແນວໃດ?

ຄື ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະນິບພານ ນີ້ຊື່ວ່າເອກັດຕະວິໂມກ (໖໒)

ນານັດຕະວິໂມກ ເປັນແນວໃດ?

ຄື ຊານ ໔ ແລະອະຣູບສະມາບັດ ໔ ນີ້ຊື່ວ່ານາບັດຕະວິໂມກ (໓໓)

[໔໑໔] ສັນຍາວິໂມກ ເປັນແນວໃດ?

ຄື ສັນຍາວິໂມກ ໑ ເປັນສັນຍາວິໂມກ ໑໐ ສັນຍາວິໂມກ ໑໐ ເປັນສັນຍາວິໂມກ ໑ ດ້ວຍອຳນາດວັດຖຸ[7] (ແລະ) ດ້ວຍປະຣິຍາຍ[8] ເພິ່ງເປັນແນວໃດ?

ຄື ອະນິດຈານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມບໍ່ທ່ຽງ) ພົ້ນຈາກນິດຈະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ທຸກຂານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມເປັນທຸກ) ພົ້ນຈາກສຸຂະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ອະນັດຕານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມເປັນອະນັດຕາ) ພົ້ນຈາກອັດຕະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ນິບພິທານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມເບື່ອໜ່າຍ) ພົ້ນຈາກນັນທິສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ວິຣາຄານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມຄາຍກຳໜັດ) ພົ້ນຈາກຣາຄະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ນິໂຣທານຸປັດສະນາຍານ (ຍານ ຄືການພິຈາລະນາເຫັນຄວາມດັບ) ພົ້ນຈາກສະມຸທະຍະສັນຍາ ຯລຯ ປະຕິນິດສັກຄານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມສະລະຄືນ) ພົ້ນຈາກອາທານະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ອະນິມິດຕານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມບໍ່ມີນິມິດ) ພົ້ນຈາກນິມິດຕະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ອັບປະນິຫິຕານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມບໍ່ມີບ່ອນຕັ້ງ) ພົ້ນຈາກປະນິທິສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ສູນຍະຕານຸປັດສະນາຍານ (ຍານຄືການພິຈາລະນາເຫັນຄວາມວ່າງ) ພົ້ນຈາກອະພິນິເວສະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ສັນຍາ ວິໂມກ ໑ ເປັນສັນຍາວິໂມກ ໑໐ ສັນຍາວິໂມກ ໑໐ ເປັນສັນຍາວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍານໃນຣູບ ພົ້ນຈາກນິດຈະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ຯລຯ ສູນຍະຕານຸປັດສະນາຍານໃນຣູບ ພົ້ນຈາກອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ສັນຍາວິໂມກ ໑ ເປັນສັນຍາວິໂມກ ໑໐ ສັນຍາວິໂມກ ໑໐ ເປັນສັນຍາວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍານໃນເວທະນາ ພົ້ນຈາກນິດຈະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ຯລຯ ອະນິດຈານຸປັດສະນາຍານໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາຍານໃນຊະຣາ ແລະມໍລະນະ ພົ້ນຈາກ ນິດຈະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ ຯລຯ ສູນຍະຕານຸປັດສະນາຍານໃນຊະຣາແລະມໍລະນະ ພົ້ນຈາກອະພິນິເວສະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັນຍາວິໂມກ

ສັນຍາວິໂມກ ໑ ເປັນສັນຍາວິໂມກ ໑໐ ສັນຍາວິໂມກ ໑໐ ເປັນສັນຍາວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້ ນີ້ຊື່ວ່າສັນຍາວິໂມກ (໖໔)

[໔໑໕] ຍານວິໂມກ ເປັນແນວໃດ?

ຄື ຍານວິໂມກ ໑ ເປັນຍານວິໂມກ ໑໐ ຍານວິໂມກ ໑໐ ເປັນຍານວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ເພິ່ງເປັນແນວໃດ?

ຄື ອະນິດຈານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມບໍ່ທ່ຽງ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ທຸກຂານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມເປັນທຸກ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ອະນັດຕານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມເປັນອະນັດຕາ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ນິບພິທານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມເບື່ອໜ່າຍ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່ານັນທິ (ຄວາມຍິນດີ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ວິຣາຄານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມຄາຍ ກຳໜັດ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າຣາຄະ (ຄວາມກຳໜັດ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານ ວິໂມກ ນິໂຣທານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມດັບ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າສະມຸໄທ (ເຫດເກີດ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ປະຕິນິດສັກຄານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມສະລະຄືນ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າອະພິນິເວສະ (ຄວາມຍຶດໝັ້ນ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກອະນິມິດຕານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມບໍ່ມີນິມິດ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່ານິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ອັບປະນິຫິຕານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມບໍ່ມີບ່ອນຕັ້ງ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າປະນິທິ (ຄວາມຕັ້ງໝັ້ນ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ສູນຍະຕານຸປັດສະນາຍະຖາພູຕະຍານ (ຍະຖາພູຕະຍານຄືການພິຈາລະນາເຫັນຄວາມວ່າງ) ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າອາທານະ (ຄວາມຍຶດຖື) ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ຍານວິໂມກ ໑ ເປັນຍານວິໂມກ ໑໐ ຍານວິໂມກ ໑໐ ເປັນຍານວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້ ອະນິດຈານຸປັດສະນາຍະຖາພູຕະຍານໃນຮູບ ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ฯລฯ ສູນຍະຕານຸປັດສະນາຍະຖາພູຕະຍານໃນຮູບ ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ຍານວິໂມກ ໑ ເປັນຍານວິໂມກ

໑໐ ຍານວິໂມກ ໑໐ ເປັນຍານວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍະຖາພູຕະຍານໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາຍະຖາພູຕະຍານໃນຊະຣາແລະມໍລະນະ ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ຯລຯ ສູນຍະຕານຸປັດສະນາຍະຖາພູຕະຍານໃນຊະຣາແລະມໍລະນະ ພົ້ນຈາກຄວາມບໍ່ຮູ້ຄືຄວາມຫຼົງວ່າອາທານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຍານວິໂມກ ຍານວິໂມກ ໑ ເປັນຍານວິໂມກ ໑໐ ຍານວິໂມກ ໑໐ ເປັນຍານວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້ ນີ້ຊື່ວ່າຍານວິໂມກ (໗໘)

[໔໑໗] ສີຕິສິຍາວິໂມກ ເປັນແນວໃດ?

ຄື ສີຕິສິຍາວິໂມກ ໑ ເປັນສີຕິສິຍາວິໂມກ ໑໐ ສີຕິສິຍາວິໂມກ ໑໐ ເປັນສີຕິ ສິຍາວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວໃດ?

ຄື ອະນິດຈານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ທຸກຂານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ອະນັດຕານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ນິບພິທານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນນັນທິ ວິຣາຄານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ນິໂຣທານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນສະມຸໄທ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ປະຕິນິດສັກຄານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ອະນິມິດຕານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍ ຍ້ອນນິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ອັບປະນິຫິຕານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນປະນິທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສີຕິສິຍາວິໂມກ ສູນຍະຕານຸປັດສະນາເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກ

ຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນອາຫານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສິຕິສີຍາວິໂມກ

ສິຕິສີຍາວິໂມກ ໑ ເປັນສິຕິສີຍາວິໂມກ ໑໐ ສິຕິສີຍາວິໂມກ ໑໐ ເປັນສິຕິສີຍາ ວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາໃນຮູບ ເປັນຍານມີຄວາມເຢັນໃຈຢ່າງປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນທ່ຽງ ຍ້ອນເຫດນັ້ນ

ຈຶ່ງຊື່ວ່າສິຕິສີຍາວິໂມກ ຯລຯ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາໃນຊະຣາແລະມໍລະນະ ເປັນຍານມີຄວາມເຢັນໃຈຢ່າງ ປະເສີດ ພົ້ນຈາກຄວາມເດືອດຮ້ອນ ຄວາມຮ້ອນຮົນ ແລະຄວາມກະວົນກະວາຍຍ້ອນທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສິຕິສີຍາວິໂມກ ຯລຯ

ສິຕິສີຍາວິໂມກ ໑ ເປັນສິຕິສີຍາວິໂມກ ໑໐ ສິຕິສີຍາວິໂມກ ໑໐ ເປັນສິຕິສີຍາ ວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້ ນີ້ຊື່ວ່າສິຕິສີຍາວິໂມກ (໖໖)

[໔໑໗] ຊານະວິໂມກ ເປັນແນວໃດ?

ຄື ເນກຂຳມະຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ເນກຂຳມະຍ່ອມເຜົາ ກາມສັນທະໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ບຸກຄົນເມື່ອເຜົາ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ເມື່ອເຜົາໃຫ້ໄໝ້ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ກິເລດທັງຫຼາຍຍ່ອມໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທຳ ພຣະອະຣະຫັນຍ່ອມເຜົາກິເລດໃຫ້ໄໝ້ ຄື ຮູ້ຈັກກິເລດທີ່ຖືກເຜົາແລ້ວ ແລະກິເລດທີ່ກຳລັງຖືກເຜົາໃຫ້ໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ຊານະວິໂມກ

ອະພະຍາບາດຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ອະພະຍາບາດຍ່ອມເຜົາພະຍາບາດໃຫ້ ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ບຸກຄົນເມື່ອເຜົາ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ເມື່ອເຜົາໃຫ້ໄໝ້ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ກິ ເລດທັງຫຼາຍ ຍ່ອມໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທຳ ພຣະອະຣະຫັນຍ່ອມເຜົາກິເລດທັງຫຼາຍ ຄືຮູ້ຈັກກິເລດທີ່ຖືກເຜົາແລ້ວແລະກິເລດທີ່ກຳລັງຖືກເຜົາໃຫ້ໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ອາໂລກະສັນຍາຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ອາໂລກະສັນຍາຍ່ອມເຜົາຖີນະມິດທະໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ຯລຯ ອະວິກເຂປະຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ອະວິກເຂປະຍ່ອມເຜົາອຸດທັດຈະໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ທຳມະວະວັດຖານຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ທຳມະວະວັດຖານຍ່ອມເຜົາວິຈິກິດສາໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະຍານຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ຍານຍ່ອມເຜົາອະວິດຊາໃຫ້ໄໝ້

ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ປາມຸດຊະຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ປາມຸດຊະຍ່ອມເຜົາອະຣະຕິໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ປະຖົມຊານຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ປະຖົມຊານຍ່ອມເຜົານິວອນໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ ວ່າຊານະ ຯລຯ ອະຣະຫັດຕະມັກຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະ ອະຣະຫັດຕະມັກ ຍ່ອມເຜົາກິເລດທັງປວງໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ພຣະອະຣະຫັນເມື່ອເຜົາ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ເມື່ອເຜົາໃຫ້ໄໝ້ ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ກິເລດທັງຫຼາຍຍ່ອມໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ທຳ ພຣະອະຣະຫັນຍ່ອມເຜົາກິເລດໃຫ້ໄໝ້ ຄື ຮູ້ຈັກກິເລດທີ່ຖືກເຜົາແລ້ວແລະກິເລດທີ່ກຳລັງຖືກເຜົາໃຫ້ໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານະວິໂມກ ນີ້ຊື່ວ່າຊານວິໂມກ ຯ (ຜາ)

[໔໑໗] ອະນຸປາທາຈິດວິໂມກ ເປັນແນວໃດ?

ຄື ອະນຸປາທາຈິດວິໂມກ ໑ ເປັນອະນຸປາທາຈິດວິໂມກ ໑໐ ອະນຸປາທາຈິດວິໂມກ ໑໐ ເປັນອະນຸປາທາຈິດວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວໃດ?

ຄື ອະນິດຈານຸປັດສະນາຍານ ພົ້ນຈາກອຸປາທານວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນຸປາທາຈິດວິໂມກ ທຸກຂານຸປັດສະນາຍານ ພົ້ນຈາກອຸປາທານວ່າສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ອະນັດຕານຸປັດສະນາຍານ ພົ້ນຈາກອຸປາທານວ່າອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ນິບພິທານຸປັດສະນາຍານ ພົ້ນຈາກອຸປາທານວ່ານັນທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ວິຣາຄານຸປັດສະນາຍານ ພົ້ນຈາກອຸປາທານວ່າຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ນິໂຣທານຸປັດສະນາຍານ ພົ້ນຈາກອຸປາທານວ່າສະມຸໄທ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ປະຕິນິດສັກຄານຸປັດສະນາຍານ ພົ້ນຈາກອຸປາທານວ່າອາທານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນຸປາທາຈິດວິໂມກ ອະນິມິດຕານຸປັດສະນາຍານ ພົ້ນຈາກອຸປາທານວ່ານິມິດ ຍ່ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ອັບປະນິຫິຕານຸປັດສະນາຍານ ພົ້ນຈາກອຸປາທານ ວ່າປະນິຫິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ສູນຍະຕານຸປັດສະນາຍານພົ້ນຈາກອຸປາທານວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ

ອະນຸປາທາຈິດວິໂມກ ໑ ເປັນອະນຸປາທາຈິດວິໂມກ ໑໐ ອະນຸປາທາຈິດວິໂມກ ໑໐ ເປັນອະນຸປາທາຈິດວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍານໃນຮູບ ພົ້ນຈາກອຸປາທານວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ ຯລຯ ສູນຍະຕານຸປັດສະນາຍານໃນຮູບ ພົ້ນຈາກອຸປາທານວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນຸປາທາຈິດວິໂມກ

ອະນຸປາທາຈິດວິໂມກ ໑ ເປັນອະນຸປາທາຈິດວິໂມກ ໑໐ ອະນຸປາທາຈິດວິໂມກ ໑໐ ເປັນອະນຸປາທາຈິດວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍານໃນເວທະນາ ໆລໆ ໃນສັນຍາ ໆລໆ ໃນສັງຂານ ໆລໆ ໃນວິນຍານ ໆລໆ ໃນຈັກຂຸ ໆລໆ ອະນິດຈານຸປັດສະນາຍານໃນຊະຣາແລະມໍລະນະ ພົ້ນຈາກອຸປາທານວ່າທັ່ງງ ຍ້ອນເຫດນັ້ນ ຈິ່ງຊື່ວ່າອະນຸປາທາຈິດວິໂມກ ໆລໆ ສູນຍະຕານຸປັດສະນາຍານໃນຊະຣາແລະມໍລະນະ ພົ້ນຈາກອຸປາທານວ່າອະພິນິເວສະ ຍ້ອນເຫດນັ້ນ ຈິ່ງຊື່ວ່າ ອະນຸປາທາຈິດວິໂມກ

ອະນຸປາທາຈິດວິໂມກ ໑ ເປັນອະນຸປາທາຈິດວິໂມກ ໑໐ ອະນຸປາທາຈິດວິໂມກ ໑໐ ເປັນອະນຸປາທາຈິດວິໂມກ ໑ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງເປັນແນວນີ້

ອະນິດຈານຸປັດສະນາຍານພົ້ນຈາກອຸປາທານເທົ່າໃດ ທຸກຂານຸປັດສະນາຍານພົ້ນຈາກອຸປາທານເທົ່າໃດ ອະນັດຕານຸປັດສະນາຍານພົ້ນຈາກອຸປາທານເທົ່າໃດ ນິບພິທານຸປັດສະນາຍານ ໆລໆ ວິຣາຄານຸປັດສະນາຍານ ໆລໆ ນິໂຣທານຸປັດສະນາຍານ ໆລໆ ປະຕິນິດສັກຄານຸປັດສະນາຍານ ໆລໆ ອະນິມິດຕານຸປັດສະນາຍານ ໆລໆ ອັບປະນິຫິຕານຸປັດສະນາຍານໆລໆ ສູນຍະຕານຸປັດສະນາຍານພົ້ນຈາກ ອຸປາທານເທົ່າໃດ

ຄື ອະນິດຈານຸປັດສະນາຍານພົ້ນຈາກອຸປາທານ ๓ ທຸກຂານຸປັດສະນາຍານພົ້ນຈາກອຸປາທານ ໑ ອະນັດຕານຸປັດສະນາຍານພົ້ນຈາກອຸປາທານ ๓ ນິບພິທານຸປັດສະນາຍານພົ້ນຈາກອຸປາທານ ໑ ວິຣາຄານຸປັດສະນາຍານພົ້ນຈາກອຸປາທານ ໑ ນິໂຣທານຸປັດສະນາຍານພົ້ນຈາກອຸປາທານ ໔ ປະຕິນິດສັກຄານຸປັດສະນາຍານພົ້ນຈາກອຸປາທານ ໔ ອະນິມິດຕານຸປັດສະນາຍານພົ້ນຈາກອຸປາທານ ๓ ອັບປະນິຫິຕານຸປັດສະນາຍານພົ້ນຈາກອຸປາທານ ໑ ສູນຍະຕານຸປັດສະນາຍານພົ້ນຈາກອຸປາທານ ๓

ອະນິດຈານຸປັດສະນາຍານພົ້ນຈາກອຸປາທານ ๓ ມີອັນໃດແດ່ ຄື

໑. ທິດຖຸປາທານ
໒. ສີລັບພະຕຸປາທານ
๓. ອັດຕະວາທຸປາທານ

ອະນິດຈານຸປັດສະນາຍານພົ້ນຈາກອຸປາທານ ๓ ນີ້
ທຸກຂານຸປັດສະນາຍານພົ້ນຈາກອຸປາທານ ໑ ອັນໃດ
ຄື ກາມຸປາທານ
ທຸກຂານຸປັດສະນາຍານພົ້ນຈາກອຸປາທານ ໑ ນີ້
ອະນັດຕານຸປັດສະນາຍານພົ້ນຈາກອຸປາທານ ๓ ມີອັນໃດແດ່ ຄື

໑. ທິດຖຸປາທານ
໒. ສີລັບພະຕຸປາທານ

໓. ອັດຕະວາທຸປາທານ

ອະນັດຕານຸປັດສະນາຍານພົ້ນຈາກອຸປາທານ ໓ ນີ້
ນິບພິທານຸປັດສະນາຍານພົ້ນຈາກອຸປາທານ ໑ ອັນໃດ
ຄື ກາມຸປາທານ
ນິບພິທານຸປັດສະນາຍານພົ້ນຈາກອຸປາທານ ໑ ນີ້
ວິຣາຄານຸປັດສະນາຍານພົ້ນຈາກອຸປາທານ ໑ ອັນໃດ
ຄື ກາມຸປາທານ
ວິຣາຄານຸປັດສະນາຍານພົ້ນຈາກອຸປາທານ ໑ ນີ້
ນິໂຣທານຸປັດສະນາຍານພົ້ນຈາກອຸປາທານ ໔ ມີອັນໃດແດ່ ຄື

໑. ກາມຸປາທານ
໒. ທິດຖຸປາທານ
໓. ສີລັບພະຕຸປາທານ
໔. ອັດຕະວາທຸປາທານ

ນິໂຣທານຸປັດສະນາຍານພົ້ນຈາກອຸປາທານ ໔ ນີ້
ປະຕິນິດສັກຄານຸປັດສະນາຍານພົ້ນຈາກອຸປາທານ ໔ ມີອັນໃດແດ່ ຄື

໑. ກາມຸປາທານ
໒. ທິດຖຸປາທານ
໓. ສີລັບພະຕຸປາທານ
໔. ອັດຕະວາທຸປາທານ

ປະຕິນິດສັກຄານຸປັດສະນາຍານພົ້ນຈາກອຸປາທານ ໔ ນີ້
ອະນິມິດຕານຸປັດສະນາຍານພົ້ນຈາກອຸປາທານ ໓ ມີອັນໃດແດ່ ຄື

໑. ທິດຖຸປາທານ
໒. ສີລັບພະຕຸປາທານ
໓. ອັດຕະວາທຸປາທານ

ອະນິມິດຕານຸປັດສະນາຍານພົ້ນຈາກອຸປາທານ ໓ ນີ້
ອັບປະນິຫິຕານຸປັດສະນາຍານພົ້ນຈາກອຸປາທານ ໑ ອັນໃດ?
ຄື ກາມຸປາທານ

ອັບປະນິທິຕານຸປັດສະນາຍານພົ້ນຈາກອຸປາທານ ໑ ນີ້
ສູນຍະຕານຸປັດສະນາຍານພົ້ນຈາກອຸປາທານ ໓ ມີອັນໃດແດ່ ຄື

໑. ທິດຖຸປາທານ
໒. ສີລັບພະຕຸປາທານ
໓. ອັດຕະວາທຸປາທານ

ສູນຍະຕານຸປັດສະນາຍານພົ້ນຈາກອຸປາທານ ໓ ນີ້
ຍານ ໔ ນີ້ ຄື

໑. ອະນິດຈານຸປັດສະນາຍານ
໒. ອະນັດຕານຸປັດສະນາຍານ
໓. ອະນິມິດຕານຸປັດສະນາຍານ
໔. ສູນຍະຕານຸປັດສະນາຍານ

ພົ້ນຈາກອຸປາທານ ໓ ຄື

໑. ທິດຖຸປາທານ
໒. ສີລັບພະຕຸປາທານ
໓. ອັດຕະວາທຸປາທານ

ຍານ ໔ ນີ້ ຄື

໑. ທຸກຂານຸປັດສະນາຍານ
໒. ນິບພິທານຸປັດສະນາຍານ
໓. ວິຣາຄານຸປັດສະນາຍານ
໔. ອັບປະນິທິຕານຸປັດສະນາຍານ

ພົ້ນຈາກອຸປາທານ ໑
ຄື ກາມຸປາທານ
ຍານ ໒ ນີ້ ຄື

໑. ນິໂຣທານຸປັດສະນາຍານ
໒. ປະຕິນິດສັກຄານຸປັດສະນາຍານ

ພົ້ນຈາກອຸປາທານ ໔ ຄື

໑. ກາມຸປາທານ
໒. ທິດຖຸປາທານ
໓. ສີລັບພະຕຸປາທານ
໔. ອັດຕະວາທຸປາທານ

ນີ້ຊື່ວ່າອະນຸປາທາຈິດວິໂມກ (໖໙)

**ປະຖົມພານະວານແຫ່ງວິໂມກຂະກະຖາ ຈົບ**

[໔໑໗] ປະຕູສູ່ວິໂມກ ໓ ປະການນີ້ ຍ່ອມເປັນໄປເພື່ອການນຳອອກຈາກໂລກ ຄື

໑. ການອອກຈາກໂລກມີໄດ້ ຍ້ອນພິຈາລະນາເຫັນສັງຂານທັງປວງ ທັງໂດຍສ່ວນເບື້ອງຕົ້ນແລະສ່ວນເບື້ອງປາຍ ແລະຍ້ອນຈິດດຳເນີນໄປໃນອະນິມິດຕະທາດ
໒. ການອອກຈາກໂລກມີໄດ້ ເຮັດໃຈໃຫ້ອາດຫານໃນສັງຂານທັງປວງ ແລະຍ້ອນຈິດດຳເນີນໄປໃນອັບປະນິຫິຕະທາດ
໓. ການອອກຈາກໂລກມີໄດ້ ຍ້ອນພິຈາລະນາເຫັນທຳທັງປວງໂດຍຄວາມເປັນຝ່າຍອື່ນ ແລະຍ້ອນຈິດດຳເນີນໄປໃນສູນຍະຕະທາດ

ປະຕູສູ່ວິໂມກ ໓ ປະການນີ້ ຍ່ອມເປັນໄປເພື່ອການນຳອອກຈາກໂລກ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັງຂານຜາກົດເປັນແນວໃດ? ເມື່ອມະນະສິການໂດຍຄວາມເປັນທຸກ ສັງຂານຜາກົດເປັນແນວໃດ? ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສັງຂານຜາກົດເປັນແນວໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັງຂານຜາກົດໂດຍຄວາມສິ້ນໄປ ເມື່ອມະນະສິການໂດຍຄວາມເປັນທຸກ ສັງຂານຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສັງຂານຜາກົດໂດຍສູນຍະຕະ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດສົມບູນດ້ວຍທຳອັນໃດ ເມື່ອມະນະສິການໂດຍຄວາມເປັນທຸກ ຈິດສົມບູນດ້ວຍທຳອັນໃດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຈິດສົມບູນດ້ວຍທຳອັນໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດສົມບູນດ້ວຍຄວາມນ້ອມໃຈເຊື່ອ ເມື່ອມະນະສິການໂດຍຄວາມເປັນທຸກ ຈິດສົມບູນດ້ວຍຄວາມສະງົບ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຈິດສົມບູນດ້ວຍຄວາມຮູ້

ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ຍ່ອມໄດ້ອິນຊີອັນໃດ ຜູ້ມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະຫງົບ ຍ່ອມໄດ້ອິນຊີອັນໃດຜູ້ມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ຍ່ອມໄດ້ອິນຊີອັນໃດ?

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ຍ່ອມໄດ້ສັດທິນຊີ ຜູ້ມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະຫງົບ ຍ່ອມໄດ້ສະມາທິນຊີ ຜູ້ມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ຍ່ອມໄດ້ປັນຍິນຊີເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ

ອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຜູ້ໃດຍ່ອມຈະເລີນ

ເມື່ອມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະຫງົບ ອິນຊີອັນໃດເປັນໃຫຍ່ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າ ພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຜູ້ໃດຍ່ອມຈະເລີນ

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ໃຜຍ່ອມຈະເລີນ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ສັດທິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມສັດທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນອິນຊີຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

ເມື່ອມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະຫງົບ ສະມາທິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມສະມາທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນອິນຊີ ຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ປັນຍິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມປັນຍິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນຢ່າງດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນອິນຊີ ຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

[໔໔໐] ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ອິນຊີ ອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈໃນເວລາຮູ້ແຈ້ງອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມອິນຊີນັ້ນມີ ເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນເວລາຮູ້ແຈ້ງອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນຢ່າງດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີ ຄວາມໝາຍວ່າເປັນແນວໃດ?

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ

ໃນເວລາຮູ້ແຈ້ງອິນຊີອັນໃດເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມອິນຊີນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າ ເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ສັດທິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມສັດທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນເວລາຮູ້ແຈ້ງປັນ

ຍິນຊີເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມປັນຍິນຊີ ນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເຫັນ ດ້ວຍອາການແນວນີ້ ແມ່ນບຸກຄົນຜູ້ຮູ້ແຈ້ງກໍຊື່ວ່າຍ່ອມຈະເລີນ ແມ່ນຜູ້ຈະເລີນກໍຊື່ວ່າຍ່ອມຮູ້ແຈ້ງ

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ສະມາທິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມສະມາທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນເວລາຮູ້ແຈ້ງປັນຍິນຊີເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມປັນຍິນຊີ ນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເຫັນ ດ້ວຍອາການແນວນີ້ ແມ່ນບຸກຄົນຜູ້ຮູ້ແຈ້ງກໍຊື່ວ່າຍ່ອມຈະເລີນ ແມ່ນຜູ້ຈະເລີນກໍຊື່ວ່າຍ່ອມຮູ້ແຈ້ງ

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ປັນຍິນຊີເປັນໃຫຍ່ ອິນຊີແຫ່ງພາວະນາທີ່ເປັນໄປຕາມປັນຍິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນເວລາຮູ້ແຈ້ງປັນຍິນຊີເປັນໃຫຍ່ ອິນຊີແຫ່ງການຮູ້ແຈ້ງທີ່ເປັນໄປຕາມປັນຍິນຊີ ນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ເປັນທຳມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເຫັນ ດ້ວຍອາການແນວນີ້ ແມ່ນບຸກຄົນຜູ້ຮູ້ແຈ້ງກໍຊື່ວ່າຍ່ອມຈະເລີນ ແມ່ນຜູ້ຈະເລີນກໍຊື່ວ່າຍ່ອມຮູ້ແຈ້ງ

[໔໔໑] ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ອິນຊີອັນໃດມີປະມານຍິ່ງ ຍ້ອນອິນຊີອັນໃດມີປະມານຍິ່ງບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກ ອິນຊີອັນໃດມີປະມານຍິ່ງ ຍ້ອນອິນຊີອັນໃດມີປະມານຍິ່ງບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ອິນຊີອັນໃດມີປະມານຍິ່ງ ຍ້ອນອິນຊີອັນໃດມີປະມານຍິ່ງບຸກຄົນຈຶ່ງເປັນທິດຖິປັດຕະ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິ

ປັດຕະ ບຸກຄົນຜູ້ນ້ອມໃຈເຊື່ອ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ສັດທາທິມຸດ ບຸກຄົນຊື່ວ່າເຮັດໃຫ້ແຈ້ງ ຍ້ອນເປັນຜູ້ຖືກຕ້ອງທຳ ຍ້ອນເຫດນັ້ນ ຈຶ່ງຊື່ວ່າກາຍະສັກຂີ ບຸກຄົນຊື່ວ່າບັນລຸແລ້ວຍ້ອນເປັນຜູ້ເຫັນທຳ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ທິດຖິປັດຕະ ບຸກຄົນຜູ້ນ້ອມໃຈເຊື່ອ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັດທາທິມຸດ ບຸກຄົນຖືກຕ້ອງຊານກ່ອນ ພາຍຫຼັງຈຶ່ງເຮັດໃຫ້ແຈ້ງນິບພານເຊິ່ງເປັນຄວາມດັບ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ກາຍະສັກຂີ ຍານວ່າ ສັງຂານເປັນທຸກ ນິໂຣດເປັນສຸກ ເປັນຍານອັນບຸກຄົນເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທິດຖິປັດຕະ ບຸກຄົນ ๓ ຈຳພວກນີ້ ຄື ສັດທາທິມຸດ ๑ ກາຍະສັກຂີ ๑ ທິດຖິປັດຕະ ๑ ເພິ່ງເປັນສັດທາທິມຸດກໍໄດ້ ເປັນກາຍະສັກຂີກໍໄດ້ ເປັນທິດຖິປັດຕະກໍໄດ້ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ

ຄຳວ່າ ເພິ່ງເປັນ ອະທິບາຍວ່າ ເພິ່ງເປັນແນວໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງບຸກຄົນ ຈຶ່ງເປັນສັດທາທິມຸດ ບຸກຄົນ ๓ ຈຳພວກນີ້ເປັນສັດທາທິມຸດດ້ວຍອຳນາດສັດທິນຊີແນວນີ້

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີເມື່ອມະນະສິການໂດຍຄວາມບໍ່ທ່ຽງ ສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ບຸກຄົນ ๓ ຈຳພວກນີ້ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີແນວນີ້

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ ເມື່ອມະນະສິການໂດຍຄວາມບໍ່ທ່ຽງ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ ເມື່ອມະນະສິການໂດຍຄວາມເປັນທຸກ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ ບຸກຄົນ ๓ ຈຳພວກນີ້ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີແນວນີ້

ບຸກຄົນ ๓ ຈຳພວກນີ້ ຄື ສັດທາທິມຸດ ๑ ກາຍກະສັກຂີ ๑ ທິດຖິປັດຕະ ๑ ເພິ່ງເປັນສັດທາທິມຸດກໍໄດ້ ເປັນກາຍະສັກຂີກໍໄດ້ ເປັນທິດຖິປັດຕະກໍໄດ້ດ້ວຍອຳນາດວັດຖຸ (ແລະ)ດ້ວຍປະຣິຍາຍແນວນີ້

ບຸກຄົນ ๓ ຈຳພວກນີ້ ຄື ສັດທາທິມຸດ ๑ ກາຍະສັກຂີ ๑ ທິດຖິປັດຕະ ๑ ໆລໆ ເພິ່ງເປັນສັດທາທິມຸດແນວໜຶ່ງ ເປັນກາຍະສັກຂີແນວໜຶ່ງ ເປັນທິດຖິປັດຕະແນວໜຶ່ງ ດ້ວຍປະການແນວນີ້

ຖາມວ່າ ເພິ່ງເປັນແນວໃດ?

ຕອບວ່າ ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກ ສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ ບຸກຄົນ ໓ ຈຳພວກນີ້ ຄື ສັດທາທິມຸດ ໑ ກາຍະສັກຂີ ໑ ທິດຖິປັດຕະ ໑ ເພິ່ງເປັນສັດທາທິມຸດແນວໜຶ່ງ ເປັນກາຍະສັກຂີແນວໜຶ່ງ ເປັນທິດຖິປັດຕະແນວໜຶ່ງ ດ້ວຍປະການແນວນີ້

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີ ມີປະມານຍິ່ງ ບຸກຄົນຈຶ່ງໄດ້ໂສດາປັດຕິມັກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າເປັນສັດທານຸສາຣີ ອິນຊີທີ່ເປັນໄປຕາມສັດທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ການຈະເລີນອິນຊີ ໔ ຍ່ອມມີດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງໄດ້ໂສດາປັດຕິມັກດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່ານັ້ນແມ່ນທັງໝົດເປັນສັດທານຸສາຣີ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີ ມີປະມານຍິ່ງ ບຸກຄົນຈຶ່ງເຮັດໃຫ້ແຈ້ງໂສດາປັດຕິຜົນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນສັດທາທິມຸດ ອິນຊີທີ່ເປັນໄປຕາມອິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ອິນຊີ ໔ ເປັນອັນບຸກຄົນຈະເລີນແລ້ວຈະເລີນດີແລ້ວດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັດທິນຊີມີປະມານຍິ່ງ ຍ້ອນສັດທິນຊີມີປະມານຍິ່ງ ບຸກຄົນຈຶ່ງໄດ້ສະກະທາຄາມິມັກ ຯລຯ ເຮັດໃຫ້ແຈ້ງສະກະທາຄາມິຜົນ ໄດ້ອະນາຄາມິມັກ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນ ຯລຯ ໄດ້ອະຣະຫັດຕະມັກ ຯລຯ ເຮັດໃຫ້ແຈ້ງອະຣະຫັດຕະຜົນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນສັດທາທິມຸດ ອິນຊີທີ່ເປັນໄປຕາມສັດທິນຊີນັ້ນມີ ໔ ປະການ ຯລຯ ເປັນສຳປະຍຸດຕະປັດໄຈ ອິນຊີ ໔ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວ ດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຮັດໃຫ້ແຈ້ງອະຣະຫັດຕະຜົນດ້ວຍອຳນາດສັດທິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດ

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງໄດ້ໂສດາປັດຕິມັກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນກາຍະສັກຂີ

ອິນຊີທີ່ເປັນໄປຕາມສະມາທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ການຈະເລີນອິນຊີ ໔ ຍ່ອມມີດ້ວຍອຳນາດສະມາທິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງໄດ້ໂສດາປັດຕິມັກ ດ້ວຍອຳນາດສະມາທິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນກາຍະສັກຂີ

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສະມາທິນຊີມີປະມານຍິ່ງ ຍ້ອນສະມາທິນຊີມີປະມານຍິ່ງ ບຸກຄົນຈຶ່ງເຮັດໃຫ້ແຈ້ງໂສດາປັດຕິຜົນ ຯລຯ ໄດ້ສະກະທາຄາມິມັກ ຯລຯ ເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ໄດ້ອະນາຄາມິມັກ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນ ຯລຯ ໄດ້ອະຣະຫັດຕະມັກ ຯລຯ ເຮັດໃຫ້ແຈ້ງອະຣະຫັດຕະຜົນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນກາຍະສັກຂີ ອິນຊີທີ່ເປັນໄປຕາມສະມາທິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນ ນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ອິນຊີ ໔ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວດ້ວຍອຳນາດສະມາທິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຮັດໃຫ້ແຈ້ງອະຣະຫັດຕະຜົນດ້ວຍອຳນາດສະມາທິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນກາຍະສັກຂີ

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງໄດ້ໂສດາປັດຕິມັກ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນທຳມານຸສາຣີ[໑] ອິນຊີທີ່ເປັນໄປຕາມປັນຍິນຊີນັ້ນມີ ໔ ປະການ ຯລຯ ເປັນສຳປະຍຸດຕະປັດໄຈ ການຈະເລີນອິນຊີ ໔ ຍ່ອມມີໄດ້ດ້ວຍອຳນາດປັນຍິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ໄດ້ໂສດາປັດຕິມັກດ້ວຍອຳນາດປັນຍິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນທຳມານຸສາຣີ

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງເຮັດໃຫ້ແຈ້ງໂສດາປັດຕິຜົນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນທິດຖິປັດຕະ ອິນຊີທີ່ເປັນໄປຕາມປັນຍິນຊີນັ້ນມີ ໔ ປະການ ຯລຯ ເປັນສຳປະຍຸດຕະປັດໄຈ ອິນຊີ ໔ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວດ້ວຍອຳນາດປັນຍິນຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຮັດໃຫ້ແຈ້ງໂສດາປັດຕິຜົນດ້ວຍອຳນາດປັນຍິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນທິດຖິປັດຕະ

ເມື່ອບຸກຄົນມະນະສິການໂດຍຄວາມເປັນອະນັດຕາ ປັນຍິນຊີມີປະມານຍິ່ງ ຍ້ອນປັນຍິນຊີມີປະມານຍິ່ງ ບຸກຄົນຈຶ່ງໄດ້ສະກະທາຄາມິມັກ ຯລຯ ເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ໄດ້ອະນາຄາມິມັກ ຯລຯ ເຮັດໃຫ້ແຈ້ງອະນາຄາມິຜົນ ຯລຯ ໄດ້ອະຣະຫັດຕະມັກ ຯລຯ ເຮັດໃຫ້ແຈ້ງອະຣະຫັດຕະຜົນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ເປັນທິດຖິປັດຕະ ອິນຊີທີ່ເປັນໄປຕາມປັນຍິນຊີນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ອິນຊີ ໔ ເປັນອັນບຸກຄົນຈະເລີນແລ້ວ ຈະເລີນດີແລ້ວດ້ວຍອຳ

นาดปันยินຊີ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງເຮັດໃຫ້ແຈ້ງອະຣະຫັດຕະຜົນດ້ວຍອຳນາດປັນຍິນຊີ ບຸກຄົນເຫຼົ່ານັ້ນທັງໝົດເປັນທິດຖິປັດຕະ

[໔໔໔] ບຸກຄົນເຫຼົ່າໃດເຫຼົ່າໜຶ່ງຈະເລີນແລ້ວ ກຳລັງຈະເລີນ ຫຼື ຈັກຈະເລີນເຊິ່ງເນກຂຳມະ ບັນລຸແລ້ວ ກຳລັງບັນລຸ ຫຼື ຈັກບັນລຸ ເຖິງແລ້ວ ກຳລັງເຖິງ ຫຼື ຈັກເຖິງ ໄດ້ແລ້ວ ກຳລັງໄດ້ ຫຼື ຈັກໄດ້ ຮູ້ແຈ້ງແລ້ວ ກຳລັງຮູ້ແຈ້ງ ຫຼື ຈັກຮູ້ແຈ້ງ ເຮັດໃຫ້ແຈ້ງແລ້ວ ກຳລັງເຮັດໃຫ້ແຈ້ງ ຫຼື ຈັກເຮັດໃຫ້ແຈ້ງ ຖືກຕ້ອງແລ້ວ ກຳລັງຖືກຕ້ອງ ຫຼື ຈັກຖືກຕ້ອງ ເຖິງຄວາມຊຳນານແລ້ວ ກຳລັງເຖິງຄວາມຊຳນານ ຫຼື ຈັກເຖິງຄວາມຊຳນານ ເຖິງຄວາມສຳເລັດແລ້ວ ກຳລັງເຖິງຄວາມສຳເລັດ ຫຼື ຈັກເຖິງຄວາມສຳເລັດ ເຖິງຄວາມແກ່ກ້າແລ້ວ ກຳລັງເຖິງຄວາມແກ່ກ້າ ຫຼືຈັກເຖິງຄວາມແກ່ກ້າ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດ ດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງຈະເລີນແລ້ວ ກຳລັງຈະເລີນ ຫຼື ຈັກຈະເລີນເຊິ່ງອະພະຍາບາດ ຯລຯ ອາໂລກະສັນຍາ ຯລຯ ອະວິກເຂປະ ຯລຯ ທຳມະວະວັດຖານ ຯລຯ ຍານ ຯລຯ ປາມຸດຊະ ຯລຯ ປະຖົມຊານ ຯລຯ ທຸຕິຍະຊານ ຯລຯ ຕະຕິຍະຊານ ຯລຯ ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະສະມາບັດ ຯລຯ ວິນຍານັນຈາຍະຕະນະສະມາບັດ ຯລຯ ອາກິນຈັນຍາຍະຕະນະສະມາບັດ ຯລຯ ເນວະສັນຍານາສັນຍາຍະຕະນະສະມາບັດ ຯລຯ ອະນິດຈານຸປັດສະນາ ຯລຯ ທຸກຂານຸປັດສະນາ ຯລຯ ອະນັດຕານຸປັດສະນາ ຯລຯ ນິບພິທານຸປັດສະນາ ຯລຯ ວິຣາຄານຸປັດສະນາ ຯລຯ ນິໂຣທານຸປັດສະນາ ຯລຯ ປະຕິນິດສັກຄານຸປັດສະນາ ຯລຯ ຂະຍານຸປັດສະນາ ຯລຯ ວະຍານຸປັດສະນາ ຯລຯ ວິປະຣິນາມານຸປັດສະນາ ຯລຯ ອະນິມິດຕານຸປັດສະນາ ຯລຯ ອັບປະນິຫິຕານຸປັດສະນາ ຯລຯ ສູນຍະຕານຸປັດສະນາ ຯລຯ ອະທິປັນຍາ ທຳມະວິປັດສະນາ ຯລຯ ຍະຖາພູຕະຍານະທັດສະນະ ຯລຯ ອາທີນະວານຸປັດສະນາ ຯລຯ ປະຕິສັງຂານຸປັດສະນາ ຯລຯ ວິວັດຕະນານຸປັດສະນາ ຯລຯ ໂສດາປັດຕິມັກ ຯລຯ ສະກະທາຄາມິມັກ ຯລຯ ອະນາຄາມິມັກ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງຈະເລີນແລ້ວ ກຳລັງຈະເລີນ ຫຼື ຈັກຈະເລີນເຊິ່ງອະຣະຫັດຕະມັກ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງຈະເລີນແລ້ວ ກຳລັງຈະເລີນ ຫຼືຈັກຈະເລີນ ເຊິ່ງສະຕິປັດຖານ ໔ ຯລຯ ສຳມັບປະທານ ໔ ຯລຯ ອິດທິບາດ ໔ ຯລຯ ອິນຊີ ໕ ຯລຯ ພະລະ ໕ ຯລຯ ໂພດຊົງ ໗ ຯລຯ ອະຣິຍະມັກມີອົງ ໘ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງຈະເລີນແລ້ວ ກຳລັງຈະເລີນ ຫຼື ຈັກຈະເລີນ ເຊິ່ງວິໂມກ ໘ ບັນລຸແລ້ວ ກຳລັງບັນລຸ ຫຼືຈັກບັນລຸ ເຖິງແລ້ວ ກຳລັງເຖິງ ຫຼືຈັກເຖິງ ໄດ້ແລ້ວ ກຳລັງໄດ້ ຫຼື ຈັກໄດ້ ຮູ້ແຈ້ງແລ້ວ ກຳລັງຮູ້ແຈ້ງ ຫຼືຈັກຮູ້ແຈ້ງ ເຮັດໃຫ້ແຈ້ງແລ້ວ ກຳລັງເຮັດໃຫ້ແຈ້ງ ຫຼື ຈັກເຮັດໃຫ້ແຈ້ງ ຖືກຕ້ອງແລ້ວ ກຳລັງຖືກຕ້ອງ ຫຼື ຈັກຖືກຕ້ອງ ເຖິງຄວາມຊຳນານແລ້ວ ກຳລັງເຖິງຄວາມຊຳນານ ຫຼື ຈັກເຖິງຄວາມຊຳນານ ເຖິງຄວາມສຳເລັດແລ້ວ ກຳ

ລັງເຖິງຄວາມສຳເລັດ ຫຼື ຈັກເຖິງຄວາມສຳເລັດ ເຖິງຄວາມແກ່ກ້າແລ້ວ ກຳລັງເຖິງຄວາມແກ່ກ້າ ຫຼື ຈັກເຖິງຄວາມແກ່ກ້າ ບຸກຄົນເຫຼົ່ານັ້ນທັງໝົດ ເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ບັນລຸແລ້ວ ກຳລັງບັນລຸ ຫຼືຈັກບັນລຸເຊິ່ງປະຕິສຳພິທາ ໔ ຯລຯ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ຮູ້ແຈ້ງແລ້ວ ກຳລັງຮູ້ແຈ້ງ ຫຼືຈັກຮູ້ແຈ້ງເຊິ່ງວິດຊາ ໓ ຯລຯ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ສຶກສາແລ້ວ ກຳລັງສຶກສາ ຫຼືຈັກສຶກສາເຊິ່ງສິກຂາ ໓ ເຮັດໃຫ້ແຈ້ງແລ້ວ ກຳລັງເຮັດໃຫ້ແຈ້ງ ຫຼືຈັກເຮັດໃຫ້ແຈ້ງ ຖືກຕ້ອງແລ້ວ ກຳລັງຖືກຕ້ອງ ຫຼື ຈັກຖືກຕ້ອງ ເຖິງຄວາມຊຳນານແລ້ວ ກຳລັງເຖິງຄວາມຊຳນານ ຫຼືຈັກເຖິງຄວາມຊຳນານ ເຖິງຄວາມສຳເລັດແລ້ວ ກຳລັງເຖິງຄວາມສຳເລັດ ຫຼືຈັກເຖິງຄວາມສຳເລັດ ເຖິງຄວາມແກ່ກ້າແລ້ວ ກຳລັງເຖິງຄວາມແກ່ກ້າ ຫຼື ຈັກເຖິງຄວາມແກ່ກ້າ ບຸກຄົນເຫຼົ່ານັ້ນທັງໝົດ ເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການເທົ່າໃດ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການເທົ່າໃດ?

ຄື ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໔ ຢ່າງ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການ ໔ ຢ່າງໄດ້ແກ່

| | |
|---|---|
| ໑. ຮູ້ແຈ້ງທຸກຂະສັດວ່າ | ເປັນທຳທີ່ຄວນຮູ້ແຈ້ງດ້ວຍການກຳນົດຮູ້ |
| ໒. ຮູ້ແຈ້ງສະມຸທະຍະສັດວ່າ | ເປັນທຳທີ່ຄວນຮູ້ແຈ້ງດ້ວຍການລະ |
| ໓. ຮູ້ແຈ້ງນິໂຣທະສັດວ່າ | ເປັນທຳທີ່ຄວນຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງ |
| ໔. ຮູ້ແຈ້ງມັກຄະສັດວ່າ | ເປັນທຳທີ່ຄວນຮູ້ແຈ້ງດ້ວຍການຈະເລີນ |

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໔ ແບບນີ້ ບຸກຄົນເມື່ອຮູ້ແຈ້ງສັດຈະດ້ວຍອາການ ໔ ແບບນີ້ ເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການເທົ່າໃດ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການເທົ່າໃດ?

ຄື ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໙ ຢ່າງ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການ ໙ ຢ່າງໄດ້ແກ່

໑. ຮູ້ແຈ້ງທຸກຂະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການກຳນົດຮູ້
໒. ຮູ້ແຈ້ງສະມຸທະຍະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການລະ
໓. ຮູ້ແຈ້ງນິໂຣທະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງ
໔. ຮູ້ແຈ້ງມັກຄະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການຈະເລີນ
໕. ຮູ້ແຈ້ງທຳທັງປວງດ້ວຍຄວາມຮູ້ຍິ່ງ
໖. ຮູ້ແຈ້ງສັງຂານທັງປວງດ້ວຍການກຳນົດຮູ້
໗. ຮູ້ແຈ້ງອະກຸສົນທຳທັງປວງດ້ວຍການລະ
໘. ຮູ້ແຈ້ງມັກ ໔ ດ້ວຍການຈະເລີນ
໙. ຮູ້ແຈ້ງນິໂຣດດ້ວຍການເຮັດໃຫ້ແຈ້ງ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໙ ແນວນີ້ ບຸກຄົນເມື່ອຮູ້ແຈ້ງສັດຈະດ້ວຍອາການ ໙ ແນວນີ້ ເປັນສັດທາທິມຸດດ້ວຍອຳນາດສັດທິນຊີ ເປັນກາຍະສັກຂີດ້ວຍອຳນາດສະມາທິນຊີ ເປັນທິດຖິປັດຕະດ້ວຍອຳນາດປັນຍິນຊີ

**ທຸຕິຍະພານະວານ ຈົບ**

[໔໔໓] ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັງຂານຜາກົດເປັນແນວໃດ? ເມື່ອມະນະສິການໂດຍຄວາມເປັນທຸກ ສັງຂານຜາກົດເປັນແນວໃດ? ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສັງຂານຜາກົດເປັນແນວໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສັງຂານຜາກົດໂດຍຄວາມສິ້ນໄປ ເມື່ອມະນະສິການໂດຍຄວາມເປັນທຸກ ສັງຂານຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສັງຂານຜາກົດໂດຍສູນຍະຕະ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດສົມບູນດ້ວຍອັນໃດ ເມື່ອມະນະສິການໂດຍຄວາມເປັນທຸກ ຈິດສົມບູນດ້ວຍອັນໃດ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຈິດສົມບູນດ້ວຍອັນໃດ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດສົມບູນດ້ວຍຄວາມນ້ອມໃຈເຊື່ອ ເມື່ອມະນະສິການໂດຍຄວາມເປັນທຸກ ຈິດສົມບູນດ້ວຍຄວາມສະງົບ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຈິດສົມບູນດ້ວຍຄວາມຮູ້

ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ຍ່ອມໄດ້ວິໂມກອັນໃດ ຜູ້ມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ຍ່ອມໄດ້ວິໂມກອັນໃດ ຜູ້ມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ຍ່ອມໄດ້ວິໂມກ ອັນໃດ

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ຍ່ອມໄດ້ອະນິມິດຕະວິໂມກ ຜູ້ມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ຍ່ອມໄດ້ອັບປະນິຫິຕະວິໂມກ ຜູ້ມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ຍ່ອມໄດ້ສູນຍະຕະວິໂມກ

[໔໔໔] ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ໃຜຈະເລີນ

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ໃຜຈະເລີນ

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ວິໂມກອັນໃດເປັນໃຫຍ່ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ໃຜຍ່ອມຈະເລີນ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ອະນິມິດຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມອະນິມິດຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ຯລຯ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດໂດຍຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນວິໂມກ ຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

ເມື່ອມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ອັບປະນິຫິຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມອັບປະນິຫິຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດໂດຍຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນວິໂມກຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ສູນຍະຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມສູນຍະຕະວິໂມກນັ້ນມີ ໘ ປະການ[໑] ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ຜູ້ໃດປະຕິບັດໂດຍຊອບ ຜູ້ນັ້ນຍ່ອມຈະເລີນ ການຈະເລີນວິໂມກຍ່ອມບໍ່ມີແກ່ຜູ້ປະຕິບັດຜິດ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ໃນເວລາຮູ້ແຈ້ງ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າ ເປັນແນວໃດ?

ເມື່ອບຸກຄົນມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ໃນເວລາຮູ້ແຈ້ງວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າມີຣົດເປັນແນວດຽວກັນ ໃນເວລາຮູ້ແຈ້ງ ວິໂມກອັນໃດເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມວິໂມກນັ້ນມີເທົ່າໃດ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າເປັນແນວໃດ? ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມໝາຍວ່າ ເປັນແນວໃດ?

[໘໘໕] ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ສົມບູນດ້ວຍຄວາມນ້ອມໃຈເຊື່ອ ອະນິມິດຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມອະນິມິດຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ແມ່ນໃນເວລາຮູ້ແຈ້ງ ອະນິມິດຕະວິໂມກກໍເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມອະນິມິດຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ຊື່ວ່າການຮູ້ແຈ້ງ ຍ້ອນມີຄວາມ ໝາຍວ່າເຫັນ ແມ່ນບຸກຄົນຜູ້ຮູ້ແຈ້ງແນວນີ້ ກໍຊື່ວ່າຈະເລີນ ແມ່ນຜູ້ຈະເລີນກໍຊື່ວ່າຮູ້ແຈ້ງ

ເມື່ອມະນະສິການໂດຍຄວາມເປັນທຸກ ສົມບູນດ້ວຍຄວາມສະງົບ ອັບປະນິຫິຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມອັບປະນິຫິຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ແມ່ນໃນເວລາຮູ້ແຈ້ງ ອັບປະນິຫິຕະວິໂມກກໍເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມອັບປະນິຫິຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ແມ່ນຜູ້ຈະເລີນກໍຊື່ວ່າຮູ້ແຈ້ງ

ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສົມບູນດ້ວຍຄວາມຮູ້ ສູນຍະຕະວິໂມກເປັນໃຫຍ່ ວິໂມກແຫ່ງພາວະນາທີ່ເປັນໄປຕາມສູນຍະຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ມີຣົດເປັນແນວດຽວກັນ ແມ່ນໃນເວລາຮູ້ແຈ້ງ ສູນຍະຕະວິໂມກກໍເປັນໃຫຍ່ ວິໂມກແຫ່ງການຮູ້ແຈ້ງທີ່ເປັນໄປຕາມສູນຍະຕະວິໂມກນັ້ນມີ ໔ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ແມ່ນຜູ້ຈະເລີນກໍຊື່ວ່າຮູ້ແຈ້ງ

[໘໘໖] ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ວິໂມກອັນໃດມີປະມານຍິ່ງ ຍ້ອນວິໂມກອັນໃດມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກ ວິໂມກອັນໃດມີປະມານຍິ່ງ ຍ້ອນວິໂມກອັນໃດມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ວິໂມກອັນໃດມີປະມານຍິ່ງ ຍ້ອນວິໂມກອັນໃດມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ອະນິມິດຕະວິໂມກມີປະມານຍິ່ງ ຍ້ອນອະນິມິດຕະວິໂມກມີປະມານຍິ່ງ ບຸກຄົນຈຶ່ງເປັນສັດທາທິມຸດ ເມື່ອມະນະສິການໂດຍຄວາມເປັນທຸກ ອັບປະນິຫິຕະວິໂມກມີປະມານຍິ່ງ ຍ້ອນອັບປະນິຫິຕະວິໂມກມີປະມານຍິ່ງ ບຸກຄົນຈຶ່ງເປັນກາຍະສັກຂີ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສູນຍະຕະວິໂມກມີປະມານຍິ່ງ ຍ້ອນສູນຍະຕະວິໂມກມີປະມານຍິ່ງ ບຸກຄົນຈຶ່ງເປັນທິດຖິປັດຕະ

ບຸກຄົນຜູ້ນ້ອມໃຈເຊື່ອ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັດທາທິມຸດ ບຸກຄົນຊື່ວ່າເຮັດໃຫ້ແຈ້ງ ຍ້ອນເປັນຜູ້ຖືກຕ້ອງທຳ ຍ້ອນເຫດນັ້ນ ຈຶ່ງຊື່ວ່າກາຍະສັກຂີ ບຸກຄົນຊື່ວ່າບັນລຸແລ້ວ ຍ້ອນເປັນຜູ້ເຫັນທຳ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທິດຖິປັດຕະ ບຸກຄົນຜູ້ນ້ອມໃຈເຊື່ອ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສັດທາທິມຸດ ບຸກຄົນຖືກຕ້ອງຊານກ່ອນ ພາຍຫຼັງຈຶ່ງເຮັດໃຫ້ແຈ້ງນິບພານເຊິ່ງເປັນຄວາມດັບ ຍ້ອນເຫດນັ້ນ ຈຶ່ງຊື່ວ່າກາຍະສັກຂີ ຍານວ່າ ສັງຂານເປັນທຸກ ນິໂຣດເປັນສຸກ ເປັນຍານອັນບຸກຄົນເຫັນແລ້ວ ຮູ້ແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວ ດ້ວຍປັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທິດຖິປັດຕະ ຯລຯ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ຈະເລີນແລ້ວ ກຳລັງຈະເລີນ ຫຼືຈັກຈະເລີນເຊິ່ງເນກຂຳມະ ຯລຯ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດດ້ວຍອຳນາດອະນິມິດຕະວິໂມກ ເປັນກາຍະສັກຂີດ້ວຍອຳນາດອັບປະນິຫິຕະວິໂມກ ເປັນທິດຖິປັດຕະດ້ວຍອຳນາດສູນຍະຕະວິໂມກ

ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ຈະເລີນແລ້ວ ກຳລັງຈະເລີນ ຫຼື ຈັກຈະເລີນເຊິ່ງອະພະຍາບາດ ຯລຯ ອາໂລກະສັນຍາ ຯລຯ ອະວິກເຂປະ ຯລຯ ບຸກຄົນເຫຼົ່າໃດເຫຼົ່າໜຶ່ງ ກຳນົດຮູ້ທຸກ ລະສະມຸໄທ ເຮັດໃຫ້ແຈ້ງນິໂຣດ ຈະເລີນມັກ ບຸກຄົນເຫຼົ່ານັ້ນທັງໝົດເປັນສັດທາທິມຸດດ້ວຍອຳນາດອະນິມິດຕະວິໂມກ ເປັນກາຍະສັກຂີດ້ວຍອຳນາດອັບປະນິຫິຕະວິໂມກ ເປັນທິດຖິປັດຕະ ດ້ວຍອຳນາດສູນຍະຕະວິໂມກ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການເທົ່າໃດ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການເທົ່າໃດ?

ຄື ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໔ ຢ່າງ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ຮູ້ແຈ້ງທຸກຂະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການກຳນົດຮູ້
໒. ຮູ້ແຈ້ງສະມຸທະຍະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການລະ
໓. ຮູ້ແຈ້ງນິໂຣທະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງ
໔. ຮູ້ແຈ້ງມັກຄະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການຈະເລີນ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໔ ແນວນີ້ ບຸກຄົນເມື່ອຮູ້ແຈ້ງສັດຈະດ້ວຍອາການ ໔ ແນວນີ້ ເປັນສັດທາທິມຸດດ້ວຍອຳນາດອະນິມິດຕະວິໂມກ ເປັນກາຍະສັກຂີດ້ວຍອຳນາດອັບປະນິຫິຕະວິໂມກ ເປັນທິດຖິປັດຕະດ້ວຍອຳນາດສູນຍະຕະວິໂມກ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການເທົ່າໃດ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການເທົ່າໃດ?

ຄື ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໗ ຢ່າງ ບຸກຄົນຮູ້ແຈ້ງສັດຈະດ້ວຍອາການ ໗ ຢ່າງ ໄດ້ແກ່

໑. ຮູ້ແຈ້ງທຸກຂະສັດວ່າ ເປັນທຳທີ່ຄວນຮູ້ແຈ້ງດ້ວຍການກຳນົດຮູ້ ຯລຯ

໗. ຮູ້ແຈ້ງນິໂຣດດ້ວຍການເຮັດໃຫ້ແຈ້ງ

ການຮູ້ແຈ້ງສັດຈະມີໄດ້ດ້ວຍອາການ ໗ ແນວນີ້ ບຸກຄົນເມື່ອຮູ້ແຈ້ງສັດຈະດ້ວຍອາການ ໗ ແນວນີ້ ເປັນສັດທາທິມຸດດ້ວຍອຳນາດອະນິມິດຕະວິໂມກ ເປັນກາຍະສັກຂີດ້ວຍອຳນາດ ອັບປະນິຫິຕະວິໂມກ ເປັນທິດຖິປັດຕະດ້ວຍອຳນາດສູນຍະຕະວິໂມກ

[໔໘໗] ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງຈະຮູ້ເຫັນທຳເຫຼົ່າໃດຕາມຄວາມເປັນຈິງ ສຳມາທັດສະນະ (ຄວາມເຫັນຊອບ) ເປັນແນວໃດ? ສັງຂານທັງປວງຊື່ວ່າບຸກຄົນເຫັນດີແລ້ວ ໂດຍຄວາມບໍ່ທ່ຽງດ້ວຍການອະນຸມານຕາມສຳມາທັດສະນະນັ້ນເປັນແນວໃດ? ບຸກຄົນ ລະຄວາມສົງໄສໄດ້ຢູ່ໃສ

ບຸກຄົນຜູ້ມະນະສິການໂດຍຄວາມເປັນທຸກຈະຮູ້ເຫັນທຳເຫຼົ່າໃດຕາມຄວາມເປັນຈິງ ສຳມາທັດສະນະເປັນແນວໃດ? ສັງຂານທັງປວງຊື່ວ່າບຸກຄົນເຫັນດີແລ້ວໂດຍຄວາມເປັນທຸກ ດ້ວຍການອະນຸມານຕາມສຳມາທັດສະນະນັ້ນເປັນແນວໃດ? ບຸກຄົນລະຄວາມສົງໄສໄດ້ຢູ່ໃສ

ບຸກຄົນຜູ້ມະນະສິການໂດຍຄວາມເປັນອະນັດຕາຈະຮູ້ເຫັນທຳເຫຼົ່າໃດຕາມຄວາມເປັນຈິງ ສຳມາທັດສະນະເປັນແນວໃດ? ທຳທັງປວງຊື່ວ່າບຸກຄົນເຫັນດີແລ້ວໂດຍຄວາມເປັນອະນັດຕາ ດ້ວຍການອະນຸມານຕາມສຳມາທັດສະນະນັ້ນເປັນແນວໃດ? ບຸກຄົນລະຄວາມສົງໄສໄດ້ຢູ່ໃສ

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງຈະຮູ້ເຫັນນິມິດຕາມຄວາມເປັນຈິງ ຍ້ອນຮູ້ເຫັນນິມິດຕາມຄວາມເປັນຈິງນັ້ນ ທ່ານຈຶ່ງກ່າວວ່າສຳມາທັດສະນະ ສັງຂານທັງປວງຊື່ວ່າບຸກຄົນເຫັນດີແລ້ວໂດຍຄວາມບໍ່ທ່ຽງດ້ວຍການອະນຸມານຕາມສຳມາທັດສະນະນັ້ນແນວນີ້ ບຸກຄົນລະຄວາມສົງໄສໄດ້ທີ່ສຳມາທັດສະນະນີ້

ບຸກຄົນຜູ້ມະນະສິການໂດຍຄວາມເປັນທຸກຈະຮູ້ເຫັນຄວາມເປັນໄປຕາມຄວາມເປັນຈິງ ຍ້ອນຮູ້ເຫັນຄວາມເປັນໄປຕາມຄວາມເປັນຈິງນັ້ນ ທ່ານຈຶ່ງກ່າວວ່າສຳມາທັດສະນະ ສັງຂານ ທັງປວງຊື່ວ່າບຸກຄົນເຫັນດີແລ້ວໂດຍຄວາມເປັນທຸກດ້ວຍການອະນຸມານຕາມສຳມາທັດສະນະນັ້ນແນວນີ້ ບຸກຄົນລະຄວາມສົງໄສໄດ້ທີ່ສຳມາທັດສະນະນີ້

ບຸກຄົນຜູ້ມະນະສິການໂດຍຄວາມເປັນອະນັດຕາ ຈະຮູ້ເຫັນນິມິດແລະຄວາມເປັນໄປຕາມຄວາມເປັນຈິງ ຍ້ອນຮູ້ເຫັນນິມິດແລະຄວາມເປັນໄປຕາມຄວາມເປັນຈິງນັ້ນ ທ່ານຈຶ່ງກ່າວວ່າ ສຳມາທັດສະນະ ທຳທັງປວງຊື່ວ່າບຸກຄົນເຫັນດີແລ້ວໂດຍຄວາມເປັນອະນັດຕາດ້ວຍການອະນຸມານຕາມສຳມາທັດສະນະນັ້ນແນວນີ້ ບຸກຄົນລະຄວາມສົງໄສໄດ້ທີ່ສຳມາທັດສະນະນີ້

ທຳເຫຼົ່ານີ້ ຄື ຍະຖາພູຕະຍານ ສຳມາທັດສະນະ ແລະກັງຂາວິຕະຣະນະມີອັດຖະ ຕ່າງກັນແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ຍະຖາພູຕະຍານ ສຳມາທັດສະນະ ແລະກັງຂາວິຕະຣະນະມີອັດຖະແນວດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ອັນໃດຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນທຸກ ອັນໃດຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ອັນໃດຜາກົດໂດຍຄວາມເປັນໄພ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ນິມິດຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນທຸກ ຄວາມເປັນໄປຜາກົດໂດຍຄວາມເປັນໄພ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ນິມິດແລະຄວາມເປັນໄປຜາກົດໂດຍຄວາມເປັນໄພ

ທຳເຫຼົ່ານີ້ ຄື ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພ ອາທີນະວະຍານ ແລະນິບພິທາມີອັດຖະຕ່າງກັນ ແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ປັນຍາໃນການ (ເຫັນສັງຂານ) ຜາກົດໂດຍຄວາມເປັນໄພ ອາທີນະວະຍານ ແລະນິບພິທາມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ອະນັດຕານຸປັດສະນາ ແລະສູນຍະຕານຸປັດສະນາມີອັດຖະຕ່າງກັນແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ອະນັດຕານຸປັດສະນາ ແລະສູນຍະຕານຸປັດສະນາມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຍານຄືການພິຈາລະນາອັນໃດຍ່ອມເກີດຂຶ້ນ ເມື່ອມະນະສິການໂດຍຄວາມເປັນທຸກ ຍານຄືການພິຈາລະນາອັນໃດຍ່ອມເກີດຂຶ້ນ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຍານຄືການພິຈາລະນາອັນໃດຍ່ອມເກີດຂຶ້ນ

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຍານຄືການພິຈາລະນານິມິດຍ່ອມເກີດຂຶ້ນ ເມື່ອມະນະສິການໂດຍຄວາມເປັນທຸກ ຍານຄືການພິຈາລະນາຄວາມເປັນໄປຍ່ອມເກີດຂຶ້ນ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຍານຄືການພິຈາລະນານິມິດແລະຄວາມເປັນໄປຍ່ອມເກີດຂຶ້ນ

ທຳເຫຼົ່ານີ້ ຄື ມຸນຈິຕຸກຳຍະຕາຍານ ປະຕິສັງຂານຸປັດສະນາຍານ ແລະ ສັງຂາຣຸເປກຂາຍານມີອັດຖະຕ່າງກັນແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ມຸນຈິຕຸກຳຍະຕາຍານ ປະຕິສັງຂານຸປັດສະນາຍານ ແລະສັງຂາຣຸເປກຂາຍານມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດອອກຈາກອັນໃດ ແລ່ນໄປສູ່ອັນໃດ?

ເມື່ອມະນະສິການໂດຍຄວາມເປັນທຸກ ຈິດອອກຈາກອັນໃດ ແລ່ນໄປສູ່ອັນໃດ ເມື່ອມະນະສິການ ໂດຍຄວາມເປັນອະນັດຕາ ຈິດອອກຈາກອັນໃດ ແລ່ນໄປສູ່ອັນໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ຈິດອອກຈາກນິມິດ ແລ່ນໄປສູ່ນິບພານເຊິ່ງບໍ່ມີນິມິດ ເມື່ອມະນະສິການໂດຍຄວາມເປັນທຸກ ຈິດອອກຈາກຄວາມເປັນໄປ ແລ່ນໄປສູ່ນິບພານເຊິ່ງບໍ່ມີຄວາມເປັນໄປ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ຈິດອອກຈາກນິມິດ ແລະຄວາມເປັນໄປ ແລ່ນໄປສູ່ນິບພານທາດເຊິ່ງເປັນຄວາມດັບ ເຊິ່ງບໍ່ມີນິມິດແລະຄວາມເປັນໄປ

ທຳເຫຼົ່ານີ້ ຄື ປັນຍາໃນການອອກແລະຫຼີກໄປຈາກນິມິດພາຍນອກ ແລະໂຄຕະຣະພູ ທຳມີອັດຖະຕ່າງກັນ ແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ປັນຍາໃນການອອກ ແລະຫຼີກໄປຈາກນິມິດພາຍນອກ ແລະໂຄຕະຣະພູທຳ ມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງຍ່ອມລຸດພົ້ນດ້ວຍວິໂມກອັນໃດ ຜູ້ມະນະສິການໂດຍຄວາມເປັນທຸກຍ່ອມລຸດພົ້ນດ້ວຍວິໂມກອັນໃດ ຜູ້ມະນະສິການໂດຍຄວາມເປັນອະນັດຕາຍ່ອມລຸດພົ້ນດ້ວຍວິໂມກອັນໃດ

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ຍ່ອມລຸດພົ້ນດ້ວຍອະນິມິດຕະວິໂມກ ຜູ້ມະນະສິການໂດຍຄວາມເປັນທຸກ ຍ່ອມລຸດພົ້ນດ້ວຍອັບປະນິຫິຕະວິໂມກ ຜູ້ມະນະສິການໂດຍຄວາມເປັນອະນັດຕາຍ່ອມລຸດພົ້ນດ້ວຍສູນຍະຕະວິໂມກ

ທຳເຫຼົ່ານີ້ ຄື ປັນຍາໃນການອອກ ແລະຫຼີກໄປຈາກກິເລດຂັນ ແລະຈາກນິມິດ ພາຍນອກ ແລະມັກຄະຍານມີອັດຖະຕ່າງກັນ ແລະມີພະຍັນຊະນະຕ່າງກັນ ຫຼືມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

ທຳເຫຼົ່ານີ້ ຄື ປັນຍາໃນການອອກແລະຫຼີກໄປຈາກກິເລດຂັນ ແລະຈາກນິມິດພາຍນອກ ແລະມັກຄະຍານມີອັດຖະຢ່າງດຽວກັນ ຕ່າງກັນແຕ່ພະຍັນຊະນະເທົ່ານັ້ນ

[໔໔໗] ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍອາການເທົ່າໃດ ຍ່ອມມີໃນຂະນະດຽວກັນດ້ວຍອາການເທົ່າໃດ

ຄື ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍອາການ ໔ ຢ່າງ ຍ່ອມມີໃນຂະນະດຽວກັນດ້ວຍອາການ ໗ ຢ່າງ

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍອາການ ໔ ຢ່າງ ມີອັນໃດແດ່ ຄື

໑. ດ້ວຍສະພາວະເປັນໃຫຍ່
໒. ດ້ວຍສະພາວະນ້ອມຈິດໄປ
໓. ດ້ວຍສະພາວະຕັ້ງໝັ້ນ
໔. ດ້ວຍສະພາວະນຳອອກໄປ

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະເປັນໃຫຍ່ ເປັນແນວໃດ?

ຄື ເມື່ອບຸກຄົນມະນະສິການໂດຍຄວາມບໍ່ທ່ຽງ ອະນິມິດຕະວິໂມກເປັນໃຫຍ່ ເມື່ອມະນະສິການ ໂດຍຄວາມເປັນທຸກ ອັບປະນິຫິຕະວິໂມກເປັນໃຫຍ່ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ສູນຍະຕະວິໂມກເປັນໃຫຍ່ ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະເປັນໃຫຍ່ແນວນີ້

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະຕັ້ງໝັ້ນ ເປັນແນວໃດ?

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງຍ່ອມຕັ້ງຈິດໄວ້ໝັ້ນດ້ວຍອຳນາດແຫ່ງອະນິມິດຕະວິໂມກ ຜູ້ມະນະສິການໂດຍຄວາມເປັນທຸກຍ່ອມຕັ້ງຈິດໄວ້ໝັ້ນດ້ວຍອຳນາດແຫ່ງອັບປະນິຫິຕະວິໂມກ ຜູ້ມະນະສິການໂດຍຄວາມເປັນອະນັດຕາຍ່ອມຕັ້ງຈິດໄວ້ໝັ້ນດ້ວຍອຳນາດແຫ່ງສູນຍະຕະວິໂມກ ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະຕັ້ງໝັ້ນແນວນີ້

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະນ້ອມຈິດໄປ ເປັນແນວໃດ?

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ຍ່ອມນ້ອມຈິດໄປດ້ວຍອຳນາດແຫ່ງອະນິມິດຕະວິໂມກ ຜູ້ມະນະສິການໂດຍຄວາມເປັນທຸກຍ່ອມນ້ອມຈິດໄປດ້ວຍອຳນາດແຫ່ງອັບປະນິຫິຕະວິໂມກ ຜູ້ມະນະສິການໂດຍຄວາມເປັນອະນັດຕາຍ່ອມນ້ອມຈິດໄປດ້ວຍອຳນາດແຫ່ງສູນຍະຕະວິໂມກ ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະນ້ອມຈິດໄປແນວນີ້

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະນຳອອກໄປ ເປັນແນວໃດ?

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງ ຍ່ອມນຳຈິດອອກໄປສູ່ນິບພານເຊິ່ງເປັນຄວາມດັບດ້ວຍອຳນາດແຫ່ງອະນິມິດຕະວິໂມກ ຜູ້ມະນະສິການໂດຍຄວາມເປັນທຸກຍ່ອມນຳຈິດອອກໄປສູ່ນິບພານ ເຊິ່ງເປັນຄວາມດັບດ້ວຍອຳນາດແຫ່ງອັບປະນິຫິຕະວິໂມກ ຜູ້ມະນະສິການໂດຍຄວາມເປັນອະນັດຕາ ຍ່ອມນຳຈິດອອກໄປສູ່ນິບພານເຊິ່ງເປັນຄວາມດັບດ້ວຍອຳນາດແຫ່ງສູນຍະຕະວິໂມກ ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍສະພາວະນຳອອກໄປແນວນີ້

ວິໂມກ ໓ ຍ່ອມມີໃນຂະນະຕ່າງກັນດ້ວຍອາການ ໔ ແນວນີ້

ວິໂມກ ໓ ຍ່ອມມີໃນຂະນະດຽວກັນດ້ວຍອາການ ໗ ຢ່າງ ມີອັນໃດແດ່ ຄື

໑. ດ້ວຍສະພາວະປະຊຸມລົງ
໒. ດ້ວຍສະພາວະໄດ້
໓. ດ້ວຍສະພາວະເຮັດໃຫ້ແຈ້ງ
໗. ດ້ວຍສະພາວະຕັດສະຮູ້
໔. ດ້ວຍສະພາວະບັນລຸ
໕. ດ້ວຍສະພາວະຮູ້ແຈ້ງ
໖. ດ້ວຍສະພາວະຖືກຕ້ອງ

ວິໂມກ ๓ ຍ່ອມມີໃນຂະນະດຽວກັນດ້ວຍສະພາວະປະຊຸມລົງ ດ້ວຍສະພາວະ ບັນລຸ ດ້ວຍສະພາວະໄດ້ ດ້ວຍສະພາວະຮູ້ແຈ້ງ ດ້ວຍສະພາວະເຮັດໃຫ້ແຈ້ງ ດ້ວຍສະພາວະຖືກຕ້ອງ ດ້ວຍສະພາວະຕັດສະຣູ້ ເປັນແນວໃດ?

ຄື ບຸກຄົນຜູ້ມະນະສິການໂດຍຄວາມບໍ່ທ່ຽງຍ່ອມພົ້ນຈາກນິມິດ ຍ້ອນເຫດນັ້ນວິໂມກນັ້ນຈຶ່ງເປັນອະນິມິດຕະວິໂມກ ບຸກຄົນພົ້ນຈາກອາລົມໃດຍ່ອມບໍ່ຕັ້ງຢູ່ໃນອາລົມນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອັບປະນິຫິຕະວິໂມກ ບຸກຄົນບໍ່ຕັ້ງຢູ່ໃນອາລົມໃດ ເປັນຜູ້ວ່າງຈາກອາລົມນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນສູນຍະຕະວິໂມກ ບຸກຄົນວ່າງຈາກນິມິດໃດ ເປັນຜູ້ບໍ່ມີນິມິດຍ້ອນນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອະນິມິດຕະວິໂມກ ວິໂມກ ๓ ຍ່ອມມີໃນຂະນະດຽວກັນດ້ວຍສະພາວະປະຊຸມລົງ ດ້ວຍສະພາວະບັນລຸ ດ້ວຍສະພາວະໄດ້ ດ້ວຍສະພາວະຮູ້ແຈ້ງ ດ້ວຍສະພາວະເຮັດໃຫ້ແຈ້ງ ດ້ວຍສະພາວະຖືກຕ້ອງ ດ້ວຍສະພາວະຕັດສະຣູ້ແນວນີ້

ບຸກຄົນຜູ້ມະນະສິການໂດຍຄວາມເປັນທຸກຍ່ອມພົ້ນຈາກປະນິທິ (ຄວາມຕັ້ງໝັ້ນ) ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອັບປະນິຫິຕະວິໂມກ ບຸກຄົນບໍ່ຕັ້ງຢູ່ໃນທຸກໃດ ເປັນຜູ້ວ່າງຈາກທຸກນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນສູນຍະຕະວິໂມກ ບຸກຄົນວ່າງຈາກນິມິດໃດ ເປັນຜູ້ບໍ່ມີນິມິດຍ້ອນນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອະນິມິດຕະວິໂມກ ບຸກຄົນບໍ່ມີນິມິດ ຍ້ອນນິມິດໃດ ບໍ່ຕັ້ງຢູ່ໃນນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອັບປະນິຫິຕະວິໂມກ ວິໂມກ ๓ ຍ່ອມມີໃນຂະນະດຽວກັນດ້ວຍສະພາວະປະຊຸມລົງ ດ້ວຍສະພາວະບັນລຸ ດ້ວຍສະພາວະໄດ້ ດ້ວຍສະພາວະຮູ້ແຈ້ງ ດ້ວຍສະພາວະເຮັດໃຫ້ແຈ້ງ ດ້ວຍສະພາວະຖືກຕ້ອງ ດ້ວຍສະພາວະຕັດສະຣູ້ແນວນີ້

ບຸກຄົນຜູ້ມະນະສິການໂດຍຄວາມເປັນອະນັດຕາຍ່ອມພົ້ນຈາກອະພິນິເວສະ (ຄວາມຍຶດໝັ້ນ) ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນສູນຍະຕະວິໂມກ ບຸກຄົນວ່າງຈາກນິມິດໃດ ເປັນຜູ້ບໍ່ມີນິມິດຍ້ອນນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອະນິມິດຕະວິໂມກ ບຸກຄົນບໍ່ມີນິມິດ ຍ້ອນນິມິດໃດບໍ່ຕັ້ງຢູ່ໃນນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນອັບປະນິຫິຕະວິໂມກ ບຸກຄົນບໍ່ຕັ້ງຢູ່ໃນນິມິດໃດ ເປັນຜູ້ວ່າງຈາກນິມິດນັ້ນ ຍ້ອນເຫດນັ້ນ ວິໂມກນັ້ນຈຶ່ງເປັນສູນຍະຕະວິໂມກ ວິໂມກ ๓ ຍ່ອມມີໃນຂະນະດຽວກັນດ້ວຍສະພາວະປະຊຸມລົງ ດ້ວຍສະພາວະບັນລຸ ດ້ວຍສະພາວະໄດ້ ດ້ວຍສະພາວະຮູ້ແຈ້ງ ດ້ວຍສະພາວະເຮັດໃຫ້ແຈ້ງ ດ້ວຍສະພາວະຖືກຕ້ອງ ດ້ວຍສະພາວະຕັດສະຣູ້ ວິໂມກ ๓ ຍ່ອມມີໃນຂະນະດຽວກັນດ້ວຍອາການ ໗ ແນວນີ້

[໔໔໗] ວິໂມກມີຢູ່ ທຳທີ່ເປັນປະທານມີຢູ່ ທຳທີ່ເປັນປະທານແຫ່ງວິໂມກມີຢູ່ ທຳທີ່ເປັນຂ້າເສິກຕໍ່ວິໂມກມີຢູ່ ທຳທີ່ອະນຸໂລມຕາມວິໂມກມີຢູ່ ວິໂມກຂະວິວັດມີຢູ່ ການຈະເລີນວິໂມກມີຢູ່ ຄວາມສະງົບຣະງັບແຫ່ງວິໂມກມີຢູ່

ວິໂມກ ມີອັນໃດແດ່ ຄື

໑. ສູນຍະຕະວິໂມກ
໘. ອະນິມິດຕະວິໂມກ
໓. ອັບປະນິຫິຕະວິໂມກ

ສູນຍະຕະວິໂມກ ເປັນແນວໃດ?

ຄື ອະນິດຈານຸປັດສະນາຍານພົ້ນຈາກອະພິນິເວສະວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ທຸກຂານຸປັດສະນາຍານພົ້ນຈາກອະພິນິເວສະວ່າສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ອະນັດຕານຸປັດສະນາຍານພົ້ນຈາກອະພິນິເວສະວ່າອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ນິບພິທານຸປັດສະນາຍານພົ້ນຈາກອະພິນິເວສະວ່ານັນທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ວິຣາຄານຸປັດສະນາຍານພົ້ນຈາກອະພິນິເວສະວ່າຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ນິໂຣທານຸປັດສະນາຍານພົ້ນຈາກອະພິນິເວດະວະສະມຸໄທ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ປະຕິນິດສັກຄານຸປັດສະນາຍານພົ້ນຈາກອະພິນິເວສະວ່າອາທານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ອະນິມິດຕານຸປັດສະນາຍານພົ້ນຈາກອະພິນິເວສະວ່ານິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ອັບປະນິຫິຕານຸປັດສະນາຍານພົ້ນຈາກອະພິນິເວສະວ່າປະນິທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ສູນຍະຕານຸປັດສະນາຍານ ພົ້ນຈາກອະພິນິເວສະທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ

ອະນິດຈານຸປັດສະນາຍານໃນຮູບພົ້ນຈາກອະພິນິເວສະວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ຯລຯ ສູນຍະຕານຸປັດສະນາຍານໃນຮູບພົ້ນຈາກອະພິນິເວສະທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ອະນິດຈານຸປັດສະນາຍານໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາ ຍານໃນຊະຣາແລະມໍຣະນະພົ້ນຈາກອະພິນິເວສະວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ຯລຯ ສູນຍະຕານຸປັດສະນາຍານໃນຊະຣາແລະມໍຣະນະພົ້ນຈາກອະພິນິເວສະທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າສູນຍະຕະວິໂມກ ນີ້ເປັນສູນຍະຕະວິໂມກ

ອະນິມິດຕະວິໂມກ ເປັນແນວໃດ?

ຄື ອະນິດຈານຸປັດສະນາຍານພົ້ນຈາກນິມິດວ່າ ທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ທຸກຂານຸປັດສະນາຍານພົ້ນຈາກນິມິດວ່າສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນິມິດຕະວິໂມກ ອະນັດຕານຸປັດສະນາຍານພົ້ນຈາກນິມິດວ່າ ອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນິມິດຕະວິໂມກ ນິບພິທານຸປັດສະນາຍານພົ້ນຈາກນິມິດວ່າ ນັນທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນິມິດຕະວິໂມກ ວິຣາຄານຸປັດສະນາຍານພົ້ນຈາກນິມິດວ່າ ຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນິມິດຕະວິໂມກ ນິໂຣທານຸປັດສະນາຍານພົ້ນຈາກນິມິດວ່າ ສະມຸໄທ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ປະຕິນິດສັກຄານຸປັດສະນາຍານພົ້ນຈາກນິມິດວ່າ ອາທານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະ

ວິໂມກ ອະນິມິດຕານຸປັດສະນາຍານພົ້ນຈາກສັບພະນິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ອັບປະນິຫິຕານຸປັດສະນາຍານພົ້ນຈາກນິມິດວ່າປະນິທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ສູນຍະຕານຸປັດສະນາຍານພົ້ນຈາກນິມິດວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອະນິມິດຕະວິໂມກ ອະນິດຈານຸປັດສະນາຍານໃນຮູບພົ້ນຈາກນິມິດວ່າ ທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ຯລຯ

ອະນິມິດຕານຸປັດສະນາຍານໃນຮູບພົ້ນຈາກສັບພະນິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ອັບປະນິຫິຕານຸປັດສະນາຍານໃນຮູບພົ້ນຈາກນິມິດວ່າປະນິທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ສູນຍະຕານຸປັດສະນາຍານໃນຮູບພົ້ນຈາກນິມິດວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ອະນິດຈານຸປັດສະນາຍານໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ

ອະນິດຈານຸປັດສະນາ ຍານໃນຊະຣາແລະມໍຣະນະພົ້ນຈາກນິມິດວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ຯລຯ ອະນິມິດຕານຸປັດສະນາຍານໃນຊະຣາແລະມໍຣະນະພົ້ນຈາກສັບພະນິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ອັບປະນິຫິຕານຸປັດສະນາຍານໃນຊະຣາແລະມໍຣະນະພົ້ນຈາກນິມິດວ່າປະນິທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ສູນຍະຕານຸປັດສະນາຍານໃນຊະຣາແລະມໍຣະນະພົ້ນຈາກນິມິດວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອະນິມິດຕະວິໂມກ ນີ້ເປັນອະນິມິດຕະວິໂມກ

ອັບປະນິຫິຕະວິໂມກ ເປັນແນວໃດ?

ຄື ອະນິດຈານຸປັດສະນາຍານພົ້ນຈາກປະນິທິວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ທຸກຂານຸປັດສະນາຍານພົ້ນຈາກປະນິທິວ່າສຸກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອັບປະນິຫິຕະວິໂມກ ອະນັດຕານຸປັດສະນາຍານພົ້ນຈາກປະນິທິວ່າອັດຕາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ນິບພິທານຸປັດສະນາຍານພົ້ນຈາກປະນິທິວ່ານັນທິ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ວິຣາຄານຸປັດສະນາຍານພົ້ນຈາກປນິທິວ່າຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ນິໂຣທານຸປັດສະນາຍານພົ້ນຈາກປະນິທິວ່າສະມຸໄທ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ປະຕິນິດສັກຄານຸປັດສະນາຍານພົ້ນຈາກປະນິທິວ່າອາທານະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ອະນິມິດຕານຸປັດສະນາຍານພົ້ນຈາກປະນິທິວ່ານິມິດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ອັບປະນິຫິຕານຸປັດສະນາຍານພົ້ນຈາກປະນິທິທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ ສູນຍະຕານຸປັດສະນາຍານພົ້ນຈາກປະນິທິວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິຫິຕະວິໂມກ

ອະນິດຈານຸປັດສະນາຍານໃນຮູບພົ້ນຈາກປະນິທິວ່າທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິທິຕະວິໂມກ ฯລฯ ອັບປະນິທິຕານຸປັດສະນາຍານໃນຮູບພົ້ນຈາກປະນິທິທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິທິຕະວິໂມກ ສູນຍະຕານຸປັດສະນາຍານໃນຮູບພົ້ນຈາກປະນິທິວ່າອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິທິຕະວິໂມກ ອະນິດຈານຸປັດສະນາຍານໃນເວທະນາ ฯລฯ ໃນສັນຍາ ฯລฯ ໃນສັງຂານ ฯລฯ ໃນວິນຍານฯລฯ ໃນຈັກຂຸ ฯລฯ ອະນິດຈານຸປັດສະນາຍານໃນຊະຣາ ແລະມໍຣະນະພົ້ນຈາກປະນິທິວ່າ ທ່ຽງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອັບປະນິທິຕະວິໂມກ ฯລฯ ອັບປະນິທິຕານຸປັດສະນາຍານໃນຊະຣາ ແລະມໍຣະນະພົ້ນຈາກປະນິທິທຸກຢ່າງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິທິຕະວິໂມກ ສູນຍະຕານຸປັດສະນາຍານໃນຊະຣາ ແລະມໍຣະນະພົ້ນຈາກປະນິທິວ່າ ອະພິນິເວສະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອັບປະນິທິຕະວິໂມກ ນີ້ເປັນອັບປະນິທິຕະວິໂມກ ນີ້ເປັນວິໂມກ (໑)

[໔໓໐] ທຳທີ່ເປັນປະທານ ເປັນແນວໃດ?

ຄື ທຳທີ່ເປັນຝ່າຍແຫ່ງການຕັດສະຣູ້ ເປັນກຸສົນ ບໍ່ມີໂທດ ເກີດໃນພາວະນານັ້ນ ນີ້ເປັນທຳທີ່ເປັນປະທານ (໔)

ທຳທີ່ເປັນປະທານແຫ່ງວິໂມກ ເປັນແນວໃດ?

ຄື ນິບພານເຊິ່ງເປັນຄວາມດັບ ເປັນອາລົມຂອງທຳເຫຼົ່ານັ້ນ ນີ້ເປັນທຳທີ່ເປັນປະທານແຫ່ງວິໂມກ (໓)

ທຳທີ່ເປັນຂ້າເສິກຕໍ່ວິໂມກ ເປັນແນວໃດ?

ຄື ອະກຸສົນມູນ ໓ ທຸດຈະຣິດ ໓ ອະກຸສົນທຳແມ່ນທຸກຢ່າງເປັນຂ້າເສິກຕໍ່ວິໂມກ ນີ້ເປັນທຳທີ່ເປັນຂ້າເສິກຕໍ່ວິໂມກ (໔)

ທຳທີ່ອະນຸໂລມຕາມວິໂມກ ເປັນແນວໃດ?

ຄື ກຸສົນມູນ ໓ ສຸດຈະຣິດ ໓ ກຸສົນທຳແມ່ນທຸກຢ່າງເປັນທຳທີ່ອະນຸໂລມຕາມວິໂມກ ນີ້ເປັນທຳທີ່ອະນຸໂລມຕາມວິໂມກ (໕)

ວິໂມກຂະວິວັດ ເປັນແນວໃດ?

ຄື ສັນຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ວິໂມກຂະວິວັດ ສັດຈະວິວັດ ພຣະໂຍຄາວະຈອນ ເມື່ອໝາຍຮູ້ຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າສັນຍາວິວັດ ເມື່ອຄິດຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າເຈໂຕວິວັດ ເມື່ອຮູ້ແຈ້ງຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າຈິດຕະວິວັດ ເມື່ອກະທຳຍານຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າຍານະວິວັດ ເມື່ອສະລະຍ່ອມຫຼີກໄປ ຍ້ອນແນວນັ້ນ ຈຶ່ງຊື່ວ່າວິໂມກຂະວິວັດ ຍ່ອມຫຼີກໄປໃນສະພາວະແທ້ ຍ້ອນແນວນັ້ນ ຈຶ່ງຊື່ວ່າສັດຈະວິວັດ

ໃນຂະນະແຫ່ງມັກໃດມີສັມຍາວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີເຈໂຕວິວັດ ໃນຂະນະແຫ່ງມັກໃດມີເຈໂຕວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັມຍາວິວັດ ໃນຂະນະແຫ່ງມັກໃດ ມີສັມຍາວິວັດ ເຈໂຕວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີຈິດຕະວິວັດ ໃນຂະນະແຫ່ງມັກໃດມີຈິດຕະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັມຍາວິວັດ ເຈໂຕວິວັດ ໃນຂະນະແຫ່ງມັກໃດມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີຍານະວິວັດ ໃນຂະນະແຫ່ງມັກໃດມີຍານະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ໃນຂະນະແຫ່ງມັກໃດມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີວິໂມກຂະວິວັດ ໃນຂະນະແຫ່ງມັກໃດມີວິໂມກຂະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ໃນຂະນະແຫ່ງມັກໃດມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ໂມກຂະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັດຈະວິວັດ ໃນຂະນະແຫ່ງມັກໃດມີສັດຈະວິວັດ ໃນຂະນະແຫ່ງມັກນັ້ນຍ່ອມມີສັມຍາວິວັດ ເຈໂຕວິວັດ ຈິດຕະວິວັດ ຍານະວິວັດ ວິໂມກຂະວິວັດ ນີ້ເປັນວິໂມກຂະວິວັດ (໖)

ການຈະເລີນວິໂມກ ເປັນແນວໃດ?

ຄື ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງປະຖົມຊານ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງທຸຕິຍະຊານ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງຕະຕິຍະຊານ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງຈະຕຸດຖະຊານ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງອາກາສານັນຈາຍະຕະນະສະມາບັດ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງວິນຍານັນຈາຍະຕະນະສະມາບັດ ຯລຯ ເຊິ່ງອາກິນຈັນຍາຍະຕະນະສະມາບັດ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງເນວະສັນຍານາສັນຍາຍະຕະນະສະມາບັດ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງໂສດາປັດຕິມັກ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງສະກະທາຄາມິມັກ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງອະນາຄາມິມັກ ການປະຕິບັດ ການຈະເລີນ ການເຮັດໃຫ້ຫຼາຍເຊິ່ງອະຣະຫັດຕະມັກ ນີ້ເປັນການຈະເລີນວິໂມກ (໗)

ຄວາມສະງົບຣະງັບແຫ່ງວິໂມກ ເປັນແນວໃດ?

ຄື ການໄດ້ປະຖົມຊານຫຼືວິບາກແຫ່ງປະຖົມຊານ ການໄດ້ທຸຕິຍະຊານຫຼືວິບາກແຫ່ງທຸຕິຍະຊານ ການໄດ້ຕະຕິຍະຊານຫຼືວິບາກແຫ່ງຕະຕິຍະຊານ ຯລຯ ການໄດ້ຈະຕຸດຖະຊານ ຯລຯ ອາກາສານັນຈາຍະຕະນະສະມາບັດ ຯລຯ ວິນຍານັນຈາຍະຕະນະສະມາບັດ ຯລຯ ອາກິນຈັນຍາຍະຕະນະສະມາບັດ ຯລຯ ການໄດ້ເນວະສັນຍານາສັນຍາຍະຕະນະສະມາບັດ ຫຼືວິບາກແຫ່ງເນວະສັນຍານາ ສັນຍາຍະຕະນະສະມາບັດ ຯລຯ ໂສດາປັດຕິຜົນແຫ່ງໂສດາປັດຕິມັກ ຯລຯ

ສະກະທາຄາມີຜົນແຫ່ງສະກະທາຄາມີມັກ ໆລໆ ອະນາຄາມີຜົນແຫ່ງອະນາຄາມີມັກ ໆລໆ ອະຣະຫັດຕະຜົນແຫ່ງ ອະຣະຫັດຕະມັກ ນີ້ເປັນຄວາມສະງົບຣະງັບແຫ່ງວິໂມກ (໗)

**ວິໂມກຂະກະຖາ ຈົບ**

**ຕະຕິຍະພານະວານ ຈົບ**

# ໖. ຄະຕິກະຖາ

## ວ່າດ້ວຍຄະຕິ

[໔໓໑] ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ (ຕິເຫຕຸກະປະຕິສົນທິຂະນະ) ຄວາມເກີດຂຶ້ນ ແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດເທົ່າໃດ ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດເທົ່າໃດ ຄວາມເກີດຂຶ້ນແຫ່ງເທບຊັ້ນຣູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດເທົ່າໃດ ຄວາມເກີດຂຶ້ນແຫ່ງເທບຊັ້ນອະຣູບປາວະຈອນມີໄດ້ຍ້ອນປັດໄຈ ແຫ່ງເຫດເທົ່າໃດ?

ຄື ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໘ ປະການ ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ ຄວາມເກີດຂຶ້ນ ແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໘ ປະການ ຄວາມເກີດຂຶ້ນແຫ່ງເທບຊັ້ນຣູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໘ ປະການ ຄວາມເກີດຂຶ້ນແຫ່ງເທບຊັ້ນອະຣູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໘ ປະການ

[໔໓໔] ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ (ຕິເຫຕຸກະປະຕິສົນທິຂະນະ) ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໘ ປະການ ເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໓ ປະການ ຝ່າຍກຸສົນເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນຂະນະຕິດໃຈ ເຫດ ໔ ປະການຝ່າຍອະກຸສົນເປັນສະຫະຊາດ ປັດໄຈແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນປະຕິສົນທິຂະນະ ເຫດ ໓ ປະການ ຝ່າຍອັບພະຍາກະຕະເປັນສະ

ຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ ແມ່ນຍ້ອນວິນຍານເປັນປັດໄຈ ນາມຮູບ ຈຶ່ງມີ

ໃນປະຕິສົນທິຂະນະ ປັນຈະຂັນເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ມະຫາພູຕະຮູບ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ໃນປະຕິສົນທິຂະນະ ອົງປະກອບແຫ່ງຊີວິດ ໓ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະຮູບເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນ ສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ອະຮູບຂັນ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະ ປັດໄຈ ເປັນສຳປະຍຸດຕະ ປັດໄຈ ໃນປະຕິສົນທິຂະນະ ອິນຊີ ໕ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ເຫດ ໓ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະວິນຍານເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໘໙ ປະການນີ້ເປັນສະຫະຊາດປັດໄຈເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະທີ່ເປັນຍານສຳປະຍຸດ ຄວາມເກີດຂຶ້ນ ແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໙ ປະການນີ້ (໑)

ໃນປະຕິສົນທິຂະນະ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໙ ປະການເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໓ ປະການ ຝ່າຍກຸສົນເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນຂະນະຕິດໃຈ ເຫດ ໘ ປະການ ຝ່າຍອະກຸສົນເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນຕິເຫຕຸກະປະຕິສົນທິຂະນະ ເຫດ ໓ ປະການ ຝ່າຍອັບພະຍາກະຕະເປັນສະຫະຊາດປັດໄຈແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າແມ່ນຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ ແມ່ນຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ໃນປະຕິສົນທິຂະນະ ປັນຈະຂັນເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ມະຫາພູຕະຮູບ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ໃນປະຕິສົນທິຂະນະ ອົງປະກອບແຫ່ງຊີວິດ ໓ ປະການ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະຮູບເປັນສະຫະຊາດປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ

ໃນປະຕິສົນທິຂະນະ ອະຮູບຂັນ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ອິນຊີ ໕ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ເຫດ ໓ ປະການເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະວິນຍານເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໔໗ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນຕິເຫຕຸກະປະຕິສົນທິຂະນະ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈ ແຫ່ງເຫດ ໗ ປະການນີ້ (໔)

ຄວາມເກີດຂຶ້ນແຫ່ງເທບຊັ້ນຮູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໗ ປະການເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໓ ປະການ ຝ່າຍກຸສົນ ໗ລ໗ ຄວາມເກີດຂຶ້ນແຫ່ງເທບຊັ້ນຮູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໗ ປະການນີ້ (໓)

ຄວາມເກີດຂຶ້ນແຫ່ງເທບຊັ້ນອະຮູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໗ ປະການເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໓ ປະການ ຝ່າຍກຸສົນ ເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນກຸສົນມູນເປັນ ປັດໄຈ ສັງຂານຈຶ່ງມີ ໃນຂະນະຕິດໃຈ ເຫດ ໔ ປະການ ຝ່າຍອະກຸສົນ ເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນປະຕິສົນທິຂະນະ ເຫດ ໓ ປະການ ຝ່າຍອັບພະຍາກະຕະເປັນສະຫະຊາດ ປັດໄຈແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນນາມຮູບ ເປັນປັດໄຈ ວິນຍານຈຶ່ງມີ ແມ່ນຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ໃນປະຕິສົນທິຂະນະ ອະຮູບຂັນ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ອິນຊີ ໕ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ເຫດ ໓ ປະການເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະວິນຍານເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ຄວາມເກີດຂຶ້ນແຫ່ງເທບຊັ້ນອະຮູບປາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໗ ປະການນີ້ (໔)

[໔໓໓] ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ (ທຸເຫຕຸກະປະຕິສົນທິຂະນະ) ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດເທົ່າໃດ ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດເທົ່າໃດ

ຄື ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໖ ປະການ ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນ ແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໖ ປະການ

ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໖ ປະການ ເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໔ ປະການ ຝ່າຍກຸສົນ ເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນຂະນະຕິດໃຈ ເຫດ ໔ ປະການ ຝ່າຍອະກຸສົນ ເປັນສະຫະຊາດປັດໄຈ ແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນອະກຸສົນມູນເປັນປັດໄຈ ສັງຂານຈຶ່ງມີ ໃນປະຕິສົນທິຂະນະ ເຫດ ໔ ປະການ ຝ່າຍອັບພະຍາກະຕະ ເປັນສະຫະຊາດປັດໄຈແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນນາມຮູບເປັນປັດໄຈ ວິນຍານຈຶ່ງມີ ແມ່ນຍ້ອນວິນຍານເປັນປັດໄຈ ນາມຮູບຈຶ່ງມີ

ໃນປະຕິສົນທິຂະນະ ປັນຈະຂັນເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ມະຫາພູຕະຮູບ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ໃນປະຕິສົນທິຂະນະ ອົງປະກອບແຫ່ງຊີວິດ ໓ ປະການເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ

ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະຮູບເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດ ປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ອະຮູບຂັນ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ອິນຊີ ໔ ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ເຫດ ໔ ປະການ ເປັນສະຫະຊາດ ປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ນາມແລະວິນຍານເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໑໔ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນສຳປະຍຸດຕະປັດໄຈ ໃນປະຕິສົນທິຂະນະ ທຳ ໔໓ ປະການນີ້ເປັນສະຫະຊາດປັດໄຈ ເປັນອັນຍະມັນຍະປັດໄຈ ເປັນນິດສະຍະປັດໄຈ ເປັນວິບປະຍຸດຕະປັດໄຈ ໃນທະວິເຫຕຸກະປະຕິສົນທິຂະນະ ຄວາມເກີດຂຶ້ນແຫ່ງຄະຕິສົມບັດມີໄດ້ຍ້ອນປັດໄຈແຫ່ງເຫດ ໓ ປະການນີ້ (໑)

ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໓ ປະການ ເປັນແນວໃດ?

ຄື ໃນຊະວະນະຂະນະແຫ່ງກຸສົນກຳ ເຫດ ໔ ປະການຝ່າຍກຸສົນເປັນສະຫະຊາດປັດໄຈແກ່ເຈຕະນາທີ່ເກີດຂຶ້ນໃນຂະນະນັ້ນ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ແມ່ນຍ້ອນກຸສົນມູນເປັນ ປັດໄຈ ສັງຂານຈຶ່ງມີ ໗ລ໗ ໃນປະຕິສົນທິຂະນະທີ່ເປັນຍານວິບປະຍຸດ ຄວາມເກີດຂຶ້ນແຫ່ງຂັດຕິຍະມະຫາສານ ພາມມະນະມະຫາສານ ຄະຫະບໍດີມະຫາສານ ເທບຊັ້ນກາມາວະຈອນມີໄດ້ຍ້ອນປັດໄຈແຫ່ງເຫດ ໓ ປະການນີ້ (໔)

**ຄະຕິກະຖາ ຈົບ**

# ກ. ກຳມະກະຖາ
## ວ່າດ້ວຍກຳ

[໔໕໔] ກຳໄດ້ມີແລ້ວ ວິບາກແຫ່ງກຳກໍໄດ້ມີແລ້ວ ກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງກຳບໍ່ໄດ້ມີແລ້ວ ກຳໄດ້ມີແລ້ວ ວິບາກແຫ່ງກຳກໍມີຢູ່ ກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງກຳບໍ່ມີຢູ່ ກຳໄດ້ມີແລ້ວ ວິບາກແຫ່ງກຳກໍຈັກມີ ກຳໄດ້ມີແລ້ວ (ແຕ່) ວິບາກ ແຫ່ງກຳຈັກບໍ່ມີ (ອະດີດກຳ) (໓)

ກຳມີຢູ່ ວິບາກແຫ່ງກຳກໍມີຢູ່ ກຳມີຢູ່ (ແຕ່) ວິບາກແຫ່ງກຳບໍ່ມີຢູ່ ກຳມີຢູ່ ວິບາກແຫ່ງກຳກໍຈັກມີ ກຳມີຢູ່ (ແຕ່) ວິບາກແຫ່ງກຳຈັກບໍ່ມີ (ປັດຈຸບັນກຳ) (໔-໑໐)

ກຳຈັກມີ ວິບາກແຫ່ງກຳກໍຈັກມີ ກຳຈັກມີ (ແຕ່) ວິບາກແຫ່ງກຳຈັກບໍ່ມີ (ອະນາຄົດກຳ) (໔-໑໔)

[໔໑໕] ກຸສົນກຳໄດ້ມີແລ້ວ ວິບາກແຫ່ງກຸສົນກຳກໍໄດ້ມີແລ້ວ ກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງກຸສົນກຳບໍ່ໄດ້ມີແລ້ວ ກຸສົນກຳໄດ້ມີແລ້ວ ວິບາກແຫ່ງກຸສົນກຳກໍມີຢູ່ ກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງກຸສົນກຳບໍ່ມີຢູ່ ກຸສົນກຳໄດ້ມີແລ້ວ ວິບາກແຫ່ງກຸສົນກຳກໍຈັກມີ ກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງກຸສົນກຳຈັກບໍ່ມີ

ກຸສົນກຳມີຢູ່ ວິບາກແຫ່ງກຸສົນກຳກໍມີຢູ່ ກຸສົນກຳມີຢູ່ (ແຕ່) ວິບາກແຫ່ງກຸສົນກຳບໍ່ມີຢູ່ ກຸສົນກຳມີຢູ່ ວິບາກແຫ່ງກຸສົນກຳກໍຈັກມີ ກຸສົນກຳມີຢູ່ (ແຕ່) ວິບາກແຫ່ງກຸສົນກຳຈັກບໍ່ມີ

ກຸສົນກຳຈັກມີ ວິບາກແຫ່ງກຸສົນກຳກໍຈັກມີ ກຸສົນກຳຈັກມີ (ແຕ່) ວິບາກແຫ່ງກຸສົນກຳຈັກບໍ່ມີ

ອະກຸສົນກຳໄດ້ມີແລ້ວ ວິບາກແຫ່ງອະກຸສົນກຳກໍໄດ້ມີແລ້ວ ອະກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງອະກຸສົນກຳບໍ່ໄດ້ມີແລ້ວ ອະກຸສົນກຳໄດ້ມີແລ້ວ ວິບາກແຫ່ງອະກຸສົນກຳກໍມີຢູ່ ອະກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງອະກຸສົນກຳບໍ່ມີຢູ່ ອະກຸສົນກຳໄດ້ມີແລ້ວ ວິບາກແຫ່ງອະກຸສົນກຳກໍຈັກມີ ອະກຸສົນກຳໄດ້ມີແລ້ວ (ແຕ່) ວິບາກແຫ່ງອະກຸສົນກຳຈັກບໍ່ມີ

ອະກຸສົນກຳມີຢູ່ ວິບາກແຫ່ງອະກຸສົນກຳກໍມີຢູ່ ອະກຸສົນກຳມີຢູ່ (ແຕ່) ວິບາກ ແຫ່ງອະກຸສົນກຳບໍ່ມີຢູ່ ອະກຸສົນກຳມີຢູ່ ວິບາກແຫ່ງອະກຸສົນກຳກໍຈັກມີ ອະກຸສົນກຳມີຢູ່ (ແຕ່) ວິບາກແຫ່ງອະກຸສົນກຳຈັກບໍ່ມີ

ອະກຸສົນກຳຈັກມີ ວິບາກແຫ່ງອະກຸສົນກຳກໍຈັກມີ ອະກຸສົນກຳຈັກມີ (ແຕ່) ວິບາກແຫ່ງອະກຸສົນກຳຈັກບໍ່ມີ

ກຳມີໂທດໄດ້ມີແລ້ວ ຯລຯ ກຳບໍ່ມີໂທດໄດ້ມີແລ້ວ ຯລຯ ກຳດຳໄດ້ມີແລ້ວ ຯລຯ ກຳຂາວໄດ້ມີແລ້ວ ຯລຯ ກຳມີສຸກເປັນກຳໄລໄດ້ມີແລ້ວ ຯລຯ ກຳມີທຸກເປັນ ກຳໄລໄດ້ມີແລ້ວ ຯລຯ ກຳມີສຸກເປັນວິບາກໄດ້ມີແລ້ວ ຯລຯ ກຳມີທຸກເປັນວິບາກໄດ້ມີແລ້ວ ວິບາກແຫ່ງກຳທີ່ມີທຸກເປັນວິບາກກໍໄດ້ມີແລ້ວ ກຳມີທຸກເປັນວິບາກໄດ້ມີແລ້ວ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກບໍ່ໄດ້ມີແລ້ວ ກຳມີທຸກເປັນວິບາກໄດ້ມີແລ້ວ ວິບາກແຫ່ງກຳທີ່ມີທຸກເປັນວິບາກກໍມີຢູ່ ກຳທີ່ມີທຸກເປັນວິບາກໄດ້ມີແລ້ວ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກບໍ່ມີຢູ່ ກຳທີ່ມີທຸກເປັນວິບາກໄດ້ມີແລ້ວ ວິບາກແຫ່ງກຳທີ່ມີທຸກເປັນວິບາກກໍຈັກມີ ກຳທີ່ມີທຸກເປັນວິບາກໄດ້ມີແລ້ວ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກຈັກບໍ່ມີ

ກຳທີ່ມີທຸກເປັນວິບາກມີຢູ່ ວິບາກແຫ່ງກຳທີ່ມີທຸກເປັນວິບາກກໍມີຢູ່ ກຳທີ່ມີທຸກເປັນວິບາກມີຢູ່ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກບໍ່ມີຢູ່ ກຳທີ່ມີທຸກເປັນວິບາກມີຢູ່ ວິບາກແຫ່ງກຳທີ່ມີທຸກເປັນວິບາກກໍຈັກມີ ກຳທີ່ມີທຸກເປັນວິບາກມີຢູ່ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກຈັກບໍ່ມີ

ກຳທີ່ມີທຸກເປັນວິບາກຈັກມີ ວິບາກແຫ່ງກຳທີ່ມີທຸກເປັນວິບາກກຳຈັກມີ ກຳທີ່ມີທຸກເປັນວິບາກຈັກມີ (ແຕ່) ວິບາກແຫ່ງກຳທີ່ມີທຸກເປັນວິບາກຈັກບໍ່ມີ

**ກຳມະກະຖາທີ ໗ ຈົບ**

## ໙. ວິປັນລາສະກະຖາ
## ວ່າດ້ວຍວິປັນລາດ

[໔໓໖] ເຫດເກີດຂຶ້ນເໝືອນໃນສູດຂ້າງຕົ້ນ ພິກຂຸທັງຫຼາຍ ສັນຍາວິປັນລາດ (ຄວາມໝາຍຮູ້ຜິດພ້ຽນ) ຈິດວິປັນລາດ (ຄວາມຄິດຜິດພ້ຽນ) ທິດຖິວິປັນລາດ (ຄວາມເຫັນຜິດພ້ຽນ) ໔ ປະການນີ້

ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໔ ປະການ ມີອັນໃດແດ່ ຄື

໑. ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໃນສິ່ງທີ່ບໍ່ທ່ຽງວ່າທ່ຽງ
໒. ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໃນສິ່ງທີ່ເປັນທຸກວ່າເປັນສຸກ
໓. ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໃນສິ່ງທີ່ບໍ່ແມ່ນອັດຕາວ່າອັດຕາ
໔. ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໃນສິ່ງທີ່ບໍ່ງາມວ່າງາມ

ພິກຂຸທັງຫຼາຍ ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໔ ປະການນີ້ແລ

ນະສັນຍາວິປັນລາດ (ຄວາມໝາຍຮູ້ບໍ່ຜິດ) ນະຈິດຕະວິປັນລາດ (ຄວາມຄິດບໍ່ຜິດ) ນະທິດຖິວິປັນລາດ (ຄວາມເຫັນບໍ່ຜິດ) ໔ ປະການນີ້

ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໔ ປະການ ມີອັນໃດແດ່

໑. ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໃນສິ່ງທີ່ບໍ່ທ່ຽງວ່າບໍ່ທ່ຽງ
໒. ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໃນສິ່ງທີ່ເປັນທຸກວ່າເປັນທຸກ
໓. ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໃນສິ່ງທີ່ບໍ່ແມ່ນອັດຕາວ່າບໍ່ແມ່ນອັດຕາ
໔. ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໃນສິ່ງທີ່ບໍ່ງາມວ່າບໍ່ງາມ

ພິກຂຸທັງຫຼາຍ ນະສັນຍາວິປັນລາດ ນະຈິດຕະວິປັນລາດ ນະທິດຖິວິປັນລາດ ໔ ປະການນີ້ແລ

ເຫຼົ່າສັດຜູ້ຖືກມິດສາທິດຖິທຳລາຍ
ມີຈິດຟຸ້ງຊ່ານ ມີສັນຍາຜິດ
ມີສັນຍາໃນສິ່ງທີ່ບໍ່ທ່ຽງວ່າທ່ຽງ
ມີສັນຍາໃນສິ່ງທີ່ເປັນທຸກວ່າເປັນສຸກ
ມີສັນຍາໃນສິ່ງທີ່ບໍ່ງາມວ່າງາມ
ສັດເຫຼົ່ານັ້ນຊື່ວ່າຕິດຢູ່ໃນເຄື່ອງປະກອບຂອງມານ
ບໍ່ກະເສມຈາກໂຍຄະ ປະສົບກັບຄວາມເກີດແລະຄວາມຕາຍ
ທ່ອງທ່ຽວໄປສູ່ສັງສາຣະວັດ

ກໍໃນການໃດ ພຣະພຸດທະເຈົ້າຜູ້ຈຸດປະກາຍໃຫ້ແສງສະຫວ່າງ
ສະເດັດອຸບັດຂຶ້ນໃນໂລກ
ໃນການນັ້ນ ພຣະອົງຍ່ອມປະກາດທຳນີ້
ໃຫ້ສັດເຖິງຄວາມດັບທຸກ
ສັດເຫຼົ່ານັ້ນຜູ້ມີປັນຍາ
ຟັງທຳຂອງພຣະພຸດທະເຈົ້າເຫຼົ່ານັ້ນ
ກັບໄດ້ຄວາມຄິດເປັນຂອງຕົນເອງ
ໄດ້ເຫັນສິ່ງທີ່ບໍ່ທ່ຽງໂດຍຄວາມບໍ່ທ່ຽງ
ໄດ້ເຫັນສິ່ງທີ່ເປັນທຸກໂດຍຄວາມເປັນທຸກ
ໄດ້ເຫັນສິ່ງທີ່ບໍ່ງາມໂດຍຄວາມບໍ່ງາມ
ຍຶດຖືສຳມາທິດຖິພົ້ນທຸກທັງໝົດໄດ້

ວິປັນລາດ ໔ ປະການນີ້ ບຸກຄົນຜູ້ເຖິງພ້ອມດ້ວຍທິດຖິລະໄດ້ແລ້ວກໍມີ ຍັງລະບໍ່ໄດ້ກໍມີ ບາງປະການລະໄດ້ແລ້ວ ບາງປະການຍັງລະບໍ່ໄດ້ ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດ ໃນສິ່ງທີ່ບໍ່ທ່ຽງວ່າທ່ຽງລະໄດ້ແລ້ວ ສັນຍາໃນສິ່ງທີ່ເປັນທຸກວ່າ ເປັນສຸກຍັງເກີດຂຶ້ນ ຈິດໃນສິ່ງທີ່ເປັນທຸກວ່າເປັນສຸກກໍຍັງເກີດຂຶ້ນ ທິດຖິວິປັນລາດະລະໄດ້ແລ້ວ ສັນຍາວິປັນລາດ ຈິດວິປັນລາດ ທິດຖິວິປັນລາດໃນສິ່ງທີ່ບໍ່ແມ່ນອັດຕາວ່າອັດຕາລະໄດ້ແລ້ວ ສັນຍາໃນສິ່ງທີ່ບໍ່ງາມວ່າງາມຍັງເກີດຂຶ້ນ ຈິດໃນສິ່ງທີ່ບໍ່ງາມວ່າງາມກໍຍັງເກີດຂຶ້ນ ທິດຖິວິປັນລາດ (ໃນສິ່ງທີ່ບໍ່ງາມວ່າງາມ) ລະໄດ້ແລ້ວ ວິປັນລາດ ໖ ໃນວັດຖຸ ໒ ລະໄດ້ແລ້ວ ວິປັນລາດ ໒ ໃນ ວັດຖຸ ໒ ລະໄດ້ແລ້ວ ວິປັນລາດ ໔ ຍັງລະບໍ່ໄດ້[໑] ວິປັນລາດ ໘ ໃນວັດຖຸ ໔ ລະໄດ້ແລ້ວ[໒] ວິປັນລາດ ໔ ຍັງລະບໍ່ໄດ້

**ວິປັນລາດກະຖາ ຈົບ**

# ໘. ມັຄຄະກະຖາ

## ວ່າດ້ວຍມັຄ

[໔໙໗] ຄຳວ່າ ມັຄ ອະທິບາຍວ່າ ຊື່ວ່າມັຄ ຍ້ອນມີສະພາວະວ່າເປັນແນວໃດ?

ຄື ໃນຂະນະແຫ່ງໂສດາປັດຕິມັຄ ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ເປັນມັຄແລະເປັນເຫດ ເພື່ອລະມິດສາທິດຖິ ເພື່ອອຸປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມບໍລິສຸດແຫ່ງຈິດໃນເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຮູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ເປັນມັຄແລະເປັນເຫດ ເພື່ອລະມິດສາສັງກັບປະ ເພື່ອອຸປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມບໍລິສຸດຈິດໃນເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຮູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດ ເປັນມັຄແລະເປັນເຫດ ເພື່ອລະມິດສາວາຈາ ເພື່ອອຸປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມບໍລິສຸດຈິດໃນເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຮູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ເປັນມັຄແລະເປັນເຫດ ເພື່ອລະມິດສາກຳມັນຕະ ເພື່ອອຸປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມບໍລິສຸດຈິດໃນເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຮູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ເປັນມັຄແລະເປັນເຫດ ເພື່ອລະມິດສາອາຊີວະ ຯລຯ ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ເປັນມັຄແລະ ເປັນເຫດເພື່ອລະມິດສາວາຍາມະ ຯລຯ ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ເປັນມັຄແລະເປັນເຫດເພື່ອລະມິດສາສະຕິ ຯລຯ

ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເປັນມັຄແລະເປັນເຫດ ເພື່ອລະມິດສາສະມາທິ ເພື່ອອຸປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມບໍລິສຸດຈິດ ໃນ

ເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຣູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ໃນຂະນະແຫ່ງສະກະທາຄາມິມັກ ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ໆລໆ ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເປັນມັກແລະເປັນເຫດ ເພື່ອລະກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນຫຍາບ ໆ ກາມຣາຄານຸໄສ ປະຕິຄານຸໄສ ສ່ວນຫຍາບ ໆ ເພື່ອອຸບປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມມົດຈົດໃນເບື້ອງຕົ້ນ ແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຣູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ໃນຂະນະແຫ່ງອະນາຄາມິມັກ ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ໆລໆ ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເປັນມັກແລະເປັນເຫດ ເພື່ອລະກາມຣາຄະສັງໂຍດ ປະຕິຄະສັງໂຍດ ສ່ວນລະອຽດ ໆ ກາມຣາຄານຸໄສ ປະຕິຄານຸໄສ ສ່ວນລະອຽດ ໆ ເພື່ອອຸບປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມມົດຈົດໃນເບື້ອງຕົ້ນ ແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຣູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ໃນຂະນະແຫ່ງອະຣະຫັດຕະມັກ ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ໆລໆ ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ເປັນມັກແລະເປັນເຫດ ເພື່ອລະຣູບຣາຄະ ອະຣູບຣາຄະ ມານະ ອຸດທັດຈະ ອະວິດຊາ ມານານຸໄສ ພະວະຣາຄານຸໄສ ອະວິດຊານຸໄສ ເພື່ອອຸບປະຖຳສະຫະຊາຕະທຳ ເພື່ອຄອບງຳກິເລດທັງຫຼາຍ ເພື່ອຄວາມມົດຈົດໃນເບື້ອງຕົ້ນແຫ່ງປະຕິເວດ ເພື່ອຄວາມຕັ້ງໝັ້ນແຫ່ງຈິດ ເພື່ອຄວາມຜ່ອງແຜ້ວແຫ່ງຈິດ ເພື່ອບັນລຸທຳວິເສດ ເພື່ອຮູ້ແຈ້ງທຳອັນຍິ່ງ ເພື່ອຕັດສະຣູ້ສັດຈະ ເພື່ອໃຫ້ຈິດຕັ້ງໝັ້ນຢູ່ໃນນິໂຣດ

ມັກຄືຄວາມເຫັນ ຊື່ວ່າສຳມາທິດຖິ ມັກຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ມັກຄືການກຳນົດ ຊື່ວ່າສຳມາວາຈາ ມັກຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ມັກຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ມັກຄືການປະຄອງໄວ້ ຊື່ວ່າສຳມາວາຍາມະ ມັກຄືຄວາມຕັ້ງໝັ້ນ ຊື່ວ່າສຳມາສະຕິ ມັກຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ

ມັກຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ມັກຄືການເລືອກເຟັ້ນ ຊື່ວ່າ ທຳມະວິຈະຍະສຳໂພດຊົງ ມັກຄືການປະຄອງໄວ້ ຊື່ວ່າວິຣິຍະສຳໂພດຊົງ ມັກຄືຄວາມແຜ່ຊ່ານ ຊື່ວ່າປີຕິສຳໂພດຊົງ ມັກຄືຄວາມສະງົບ ຊື່ວ່າປັດສັດທິສຳໂພດຊົງ ມັກຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິສຳໂພດຊົງ ມັກຄືການພິຈາລະນາ ຊື່ວ່າ ອຸເປກຂາສຳໂພດຊົງ

ມັກຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ມັກຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ມັກຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ມັກຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າ ສະມາທິພະລະ ມັກຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ

ມັກຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ມັກຄືການປະຄອງໄວ້ ຊື່ວ່າ ວິຣິຍິນຊີ ມັກຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ມັກຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິນຊີ ມັກຄືຄວາມເຫັນ ຊື່ວ່າປັນຍິນຊີ

ມັກທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ມັກທີ່ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ມັກທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກ ມັກທີ່ຊື່ວ່າອົງແຫ່ງມັກ ຍ້ອນມີສະພາວະເປັນເຫດ ມັກທີ່ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ມັກທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະຕັ້ງໄວ້ ມັກທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະໃຫ້ສຳເລັດ ມັກທີ່ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ມັກທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມັກທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ມັກທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ມັກທີ່ຊື່ວ່າທຳທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນ ມັກທີ່ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມ ມັກທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ມັກທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ມັກທີ່ຊື່ວ່າວິໂມກ ຍ້ອນມີສະພາວະລຸດພົ້ນ ມັກທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ ມັກທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະສະລະ ມັກທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ມັກທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ມັກທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ມັກທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນທີ່ປະຊຸມ ມັກທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ລວມ ມັກທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ມັກທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ມັກທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ມັກທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ມັກທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

## ໑໐. ມັນທະເປັຍຍະກະຖາ

## ວ່າດ້ວຍພົມມະຈັນທີ່ໃສແລະໜ້າດື່ມ

[໔໓໗] ພິກຂຸທັງຫຼາຍ ພົມມະຈັນນີ້ໃສແລະໜ້າດື່ມ ເມື່ອພຣະສາດສະດາຍັງຜາກົດຢູ່ ຄວາມໃສມີ ໓ ປະການ ຄື

໑. ຄວາມໃສຄືເທດສະໜາ

໒. ຄວາມໃສຄືຜູ້ຮັບ

໓. ຄວາມໃສຄືພົມມະຈັນ

ຄວາມໃສຄືເທດສະໜາ ເປັນແນວໃດ?

ຄື ການບອກ ການສະແດງ ການບັນຍັດ ການແຕ່ງຕັ້ງ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງອະຣິຍະສັດ ໔ ຯລຯ ສະຕິປັດຖານ ໔ ຯລຯ ສຳມັບປະທານ ໔ ຯລຯ ອິດທິບາດ ໔ ຯລຯ ອິນຊີ ໕ ຯລຯ ພະລະ ໕ ຯລຯ ໂພດຊົງ ໗ ຯລຯ ການບອກ ການສະແດງ ການບັນຍັດ ການແຕ່ງຕັ້ງ ການເປີດເຜີຍ ການຈຳແນກ ການເຮັດໃຫ້ງ່າຍເຊິ່ງອະຣິຍະມັກມີອົງ ໘ ນີ້ເປັນຄວາມໃສຄືເທດສະໜາ (໑)

ຄວາມໃສຄືຜູ້ຮັບ ເປັນແນວໃດ?

ຄື ພິກຂຸ ພິກຂຸນີ ອຸປາສົກ ອຸປາສິກາ ເທວະດາ ມະນຸດ ຫຼື ທ່ານຜູ້ຮູ້ແຈ້ງພວກໃດພວກໜຶ່ງ ນີ້ເປັນຄວາມໃສຄືຜູ້ຮັບ (໒)

ຄວາມໃສຄືພົມມະຈັນ ເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

ນີ້ເປັນຄວາມໃສຄືພົມມະຈັນ (໓)

[໒໓໙] ຄວາມໃສຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ຄວາມບໍ່ມີສັດທາເປັນກາກ ບຸກຄົນຖິ້ມຄວາມບໍ່ມີສັດທາອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມນ້ອມໃຈເຊື່ອຂອງສັດທິນຊີ ຍ້ອນເຫດນັ້ນສັດທິນຊີຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າວິຣິຍິນຊີ ຄວາມຂີ້ຄ້ານເປັນກາກ ບຸກຄົນຖິ້ມຄວາມຂີ້ຄ້ານອັນເປັນກາກແລ້ວ ດື່ມຄວາມໃສຄືການປະຄອງໄວ້ຂອງວິຣິຍິນຊີ ຍ້ອນເຫດນັ້ນ ວິຣິຍິນຊີຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ຄວາມຜະໝາດເປັນກາກ ບຸກຄົນຖິ້ມຄວາມຜະໝາດອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມຕັ້ງໝັ້ນຂອງສະຕິນຊີ ຍ້ອນເຫດນັ້ນ ສະຕິນຊີຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິນຊີ ອຸດທັດຈະເປັນກາກ ບຸກຄົນຖິ້ມອຸດທັດຈະອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຟຸ້ງຊ່ານຂອງສະມາທິນຊີ ຍ້ອນເຫດນັ້ນ ສະມາທິນຊີຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການເຫັນ ຊື່ວ່າປັນຍິນຊີ ອະວິດຊາເປັນກາກ ບຸກຄົນຖິ້ມອະວິດຊາອັນເປັນກາກແລ້ວດື່ມຄວາມໃສຄືການເຫັນຂອງປັນຍິນຊີ ຍ້ອນເຫດນັ້ນ ປັນຍິນຊີ ຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ຄວາມບໍ່ມີສັດທາເປັນກາກ ບຸກຄົນຖິ້ມຄວາມບໍ່ມີສັດທາອັນເປັນກາກແລ້ວດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາຂອງສັດທາພະລະ ຍ້ອນເຫດນັ້ນສັດທາພະລະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ຄວາມຂີ້ຄ້ານເປັນກາກ ບຸກຄົນຖິ້ມຄວາມຂີ້ຄ້ານອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານຂອງວິຣິຍະພະລະ ຍ້ອນເຫດນັ້ນ ວິຣິຍະພະລະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ຄວາມຜະໝາດເປັນກາກ ບຸກຄົນຖິ້ມຄວາມຜະໝາດອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ຜະໝາດຂອງສະຕິພະລະ ຍ້ອນເຫດນັ້ນ ສະຕິພະລະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າສະມາທິພະລະ ອຸດທັດຈະເປັນກາກບຸກຄົນຖິ້ມອຸດທັດຈະອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະຂອງສະມາທິພະລະ ຍ້ອນເຫດນັ້ນ ສະມາທິພະລະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ ອະວິດຊາເປັນກາກບຸກຄົນຖິ້ມອະວິດຊາອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາຂອງປັນຍາພະລະ ຍ້ອນເຫດນັ້ນ ປັນຍາພະລະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ຄວາມຜະໝາດເປັນກາກ ບຸກຄົນຖິ້ມຄວາມຜະໝາດອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມຕັ້ງໝັ້ນຂອງສະຕິສຳໂພດຊົງ ຍ້ອນເຫດນັ້ນ ສະຕິສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການເລືອກເຟັ້ນ ຊື່ວ່າທຳມະວິຈະຍະສຳໂພດຊົງ ອະວິດຊາເປັນກາກ ບຸກຄົນຖິ້ມອະວິດຊາອັນເປັນກາກແລ້ວດື່ມຄວາມໃສຄືການເລືອກເຟັ້ນຂອງທຳມະວິຈະຍະສຳໂພດຊົງ ຍ້ອນເຫດນັ້ນ ທຳມະວິຈະຍະສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າວິຣິຍະສຳໂພດຊົງ ຄວາມຂີ້ຄ້ານເປັນກາກ ບຸກຄົນຖິ້ມຄວາມຂີ້ຄ້ານອັນເປັນກາກແລ້ວ ດື່ມຄວາມໃສຄືການປະຄອງໄວ້ຂອງວິຣິຍະສຳໂພດຊົງ ຍ້ອນເຫດນັ້ນ ວິຣິຍະສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມແຜ່ຊ່ານ ຊື່ວ່າປີຕິສຳໂພດຊົງ ຄວາມຮ້ອນຮົນເປັນກາກ ບຸກຄົນ ຖິ້ມຄວາມຮ້ອນຮົນອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມແຜ່ຊ່ານຂອງປີຕິສຳໂພດຊົງ ຍ້ອນເຫດນັ້ນ ປີຕິສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມສະງົບ ຊື່ວ່າປັດສັດທິສຳໂພດຊົງ ຄວາມຊົ່ວຫຍາບເປັນກາກບຸກຄົນຖິ້ມຄວາມຊົ່ວຫຍາບອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມສະງົບຂອງປັດສັດທິສຳໂພດຊົງ ຍ້ອນເຫດນັ້ນ ປັດສັດທິສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິສຳໂພດຊົງ ອຸດທັດຈະເປັນກາກ ບຸກຄົນ ຖິ້ມອຸດທັດຈະອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຟຸ້ງຊ່ານຂອງສະມາທິສຳໂພດຊົງ ຍ້ອນເຫດນັ້ນ ສະມາທິສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການພິຈາລະນາ ຊື່ວ່າອຸເປກຂາສຳໂພດຊົງ ການບໍ່ພິຈາລະນາເປັນກາກ ບຸກຄົນຖິ້ມການບໍ່ພິຈາລະນາອັນເປັນກາກແລ້ວ ດື່ມຄວາມໃສຄືການພິຈາລະນາຂອງອຸເປກຂາ ສຳໂພດຊົງ ຍ້ອນເຫດນັ້ນ ອຸເປກຂາສຳໂພດຊົງຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການເຫັນ ຊື່ວ່າສຳມາທິດຖິ ມິດສາທິດຖິເປັນກາກ ບຸກຄົນຖິ້ມມິດສາທິດຖິອັນເປັນກາກແລ້ວດື່ມຄວາມໃສຄືການເຫັນຂອງສຳມາທິດຖິ ຍ້ອນເຫດນັ້ນ ສຳມາທິດຖິຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ມິດສາສັງກັບປະເປັນກາກ ບຸກຄົນຖິ້ມມິດສາສັງກັບປະອັນເປັນກາກແລ້ວດື່ມຄວາມໃສຄືຄວາມນຶກຕອງຂອງສຳມາສັງກັບປະ ຍ້ອນເຫດນັ້ນ ສຳມາສັງກັບປະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການກຳນົດ ຊື່ວ່າສຳມາວາຈາ ມິດສາວາຈາເປັນກາກ ບຸກຄົນຖິ້ມ ມິດສາວາຈາອັນເປັນກາກແລ້ວດື່ມຄວາມໃສຄືການກຳນົດຂອງສຳມາວາຈາ ຍ້ອນເຫດນັ້ນ ສຳມາວາຈາຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ມິດສາກຳມັນຕະເປັນກາກ ບຸກຄົນຖິ້ມມິດສາກຳມັນຕະອັນເປັນກາກແລ້ວດື່ມຄວາມໃສຄືສະມຸດຖານຂອງສຳມາກຳມັນຕະ ຍ້ອນເຫດນັ້ນ ສຳມາກຳມັນຕະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ມິດສາອາຊີວະເປັນກາກ ບຸກຄົນຖິ້ມມິດສາອາຊີວະອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມຜ່ອງແຜ້ວຂອງສຳມາອາຊີວະ ຍ້ອນເຫດນັ້ນ ສຳມາອາຊີວະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າສຳມາວາຍາມະ ມິດສາວາຍາມະເປັນກາກ ບຸກຄົນຖິ້ມມິດສາວາຍາມະອັນເປັນກາກແລ້ວ ດື່ມຄວາມໃສຄືການປະຄອງໄວ້ຂອງສຳມາວາຍາມະ ຍ້ອນເຫດນັ້ນ ສຳມາວາຍາມະຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສຳມາສະຕິ ມິດສາສະຕິເປັນກາກ ບຸກຄົນຖິ້ມມິດສາສະຕິ ອັນເປັນກາກແລ້ວດື່ມຄວາມໃສຄືຄວາມຕັ້ງໝັ້ນຂອງສຳມາສະຕິ ຍ້ອນເຫດນັ້ນ ສຳມາສະຕິຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ ມິດສາສະມາທິເປັນກາກ ບຸກຄົນຖິ້ມມິດສາສະມາທິອັນເປັນກາກແລ້ວ ດື່ມຄວາມໃສຄືຄວາມບໍ່ຟຸ້ງຊ່ານຂອງສຳມາສະມາທິ ຍ້ອນເຫດນັ້ນ ສຳມາສະມາທິຈຶ່ງຊື່ວ່າມີຄວາມໃສແລະໜ້າດື່ມ

[໔໔໐] ຄວາມໃສມີຢູ່ ຄວາມໜ້າດື່ມມີຢູ່ ກາກກໍມີຢູ່ ຄວາມໃສຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ຄວາມບໍ່ມີສັດທາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດ ໃນສັດທິນຊີນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າວິຣິຍິນຊີ ຄວາມຂີ້ຄ້ານເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນວິຣິຍິນຊີນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ຄວາມຜະໝາດເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສະຕິນຊີນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິນຊີ ອຸດທັດຈະເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສະມາທິນຊີນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມເຫັນ ຊື່ວ່າປັນຍິນຊີ ອະວິດຊາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນປັນຍິນຊີນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ຄວາມບໍ່ມີ ສັດທາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສັດທາພະລະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ຄວາມຂີ້ຄ້ານເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນວິຣິຍະພະລະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ຄວາມຜະໝາດເປັນກາກອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສະຕິພະລະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າສະມາທິພະລະ ອຸດທັດຈະເປັນກາກອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສະມາທິພະລະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ ອະວິດຊາເປັນກາກອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນປັນຍາພະລະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ຄວາມຜະໝາດເປັນກາກ ອັດຖະຣົດທຳມະຣົດ ວິມຸດຕິຣົດໃນສະຕິສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການເລືອກເຟັ້ນ ຊື່ວ່າທຳມະວິຈະຍະສຳໂພດຊົງ ອະວິດຊາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນທຳມະວິຈະຍະສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າວິຣິຍະສຳໂພດຊົງ ຄວາມຂີ້ຄ້ານເປັນກາກ ອັດຖະຣົດທຳມະຣົດ ວິມຸດຕິຣົດໃນວິຣິຍະສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມແຜ່ຊ່ານ ຊື່ວ່າປິຕິສຳໂພດຊົງ ຄວາມຮ້ອນຮົນເປັນກາກ ອັດຖະຣົດທຳມະຣົດ ວິມຸດຕິຣົດໃນປິຕິສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມສະງົບ ຊື່ວ່າປັດສັດທິສຳໂພດຊົງ ຄວາມຊົ່ວຫຍາບເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນປັດສັດທິສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິສຳໂພດຊົງ ອຸດທັດຈະເປັນກາກ ອັດຖະຣົດທຳມະຣົດ ວິມຸດຕິຣົດໃນສະມາທິສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການພິຈາລະນາ ຊື່ວ່າອຸເປກຂາສຳໂພດຊົງ ການບໍ່ພິຈາລະນາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນອຸເປກຂາສຳໂພດຊົງນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການເຫັນ ຊື່ວ່າສຳມາທິດຖິ ມິດສາທິດຖິເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາທິດຖິນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ມິດສາສັງກັບປະເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາສັງກັບປະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການກຳນົດ ຊື່ວ່າສຳມາວາຈາ ມິດສາວາຈາເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາວາຈານັ້ນເປັນຄວາມໜ້າດື່ມ

ຄວາມໃສຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ມິດສາກຳມັນຕະເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາກຳມັນຕະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ມິດສາອາຊີວະເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາອາຊີວະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການປະຄອງໄວ້ ຊື່ວ່າສຳມາວາຍາມະ ມິດສາວາຍາມະເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາວາຍາມະນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການຕັ້ງໝັ້ນ ຊື່ວ່າສຳມາສະຕິ ມິດສາສະຕິເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາສະຕິນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ ມິດສາສະມາທິເປັນກາກ ອັດຖະຣົດ ທຳມະຣົດ ວິມຸດຕິຣົດໃນສຳມາສະມາທິນັ້ນເປັນຄວາມໜ້າດື່ມ

ຄວາມໃສຄືການເຫັນ ຊື່ວ່າສຳມາທິດຖິ ຄວາມໃສຄືຄວາມນຶກຕອງ ຊື່ວ່າ ສຳມາສັງກັບປະ ຄວາມໃສຄືການກຳນົດ ຊື່ວ່າສຳມາວາຈາ ຄວາມໃສຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ຄວາມໃສຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ຄວາມໃສຄືການປະຄອງໄວ້ ຊື່ວ່າສຳມາວາຍາມະ ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສຳມາສະຕິ ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ

ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ຄວາມໃສຄືການເລືອກເຟັ້ນ ຊື່ວ່າ ທຳມະວິຈະຍະສຳໂພດຊົງ ຄວາມໃສຄືການປະຄອງໄວ້ ຊື່ວ່າວິຣິຍະສຳໂພດຊົງ ຄວາມໃສຄືຄວາມແຜ່ຊ່ານ ຊື່ວ່າປີຕິສຳໂພດຊົງ ຄວາມໃສຄືຄວາມສະງົບ ຊື່ວ່າປັດສັດທິສຳໂພດຊົງ ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິສຳໂພດຊົງ ຄວາມໃສຄືການພິຈາລະນາ ຊື່ວ່າ ອຸເປກຂາສຳໂພດຊົງ

ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ຄວາມໃສ ຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າສະມາທິພະລະ ຄວາມໃສຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ

ຄວາມໃສຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ຄວາມໃສຄືການປະຄອງໄວ້ ຊື່ວ່າ ວິຣິຍິນຊີ ຄວາມໃສຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ຄວາມໃສຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າ ສະມາທິນຊີ ຄວາມໃສຄືການເຫັນ ຊື່ວ່າປັນຍິນຊີ

ຄວາມໃສທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ຄວາມໃສທີ່ຊື່ວ່າ ພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ຄວາມໃສທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນໍາອອກ ຄວາມໃສທີ່ຊື່ວ່າມັກ ຍ້ອນມີສະພາວະເປັນເຫດ ຄວາມໃສທີ່ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ຄວາມໃສທີ່ຊື່ວ່າສໍາມັບປະທານ ຍ້ອນມີສະພາວະເລີ່ມຕັ້ງໄວ້ ຄວາມໃສທີ່ຊື່ວ່າອິດທິບາດຍ້ອນມີສະພາວະໃຫ້ສໍາເລັດ ຄວາມໃສທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຄວາມໃສທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ຄວາມໃສທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ຄວາມໃສທີ່ຊື່ວ່າທໍາທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນ ຄວາມໃສທີ່ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມ ຄວາມໃສທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຄວາມໃສທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ຄວາມໃສທີ່ຊື່ວ່າວິໂມກ ຍ້ອນມີສະພາວະລຸດພົ້ນ ຄວາມໃສທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ ຄວາມໃສທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະປ່ອຍ ຄວາມໃສທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ຄວາມໃສທີ່ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະສະງົບ ຄວາມໃສທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ຄວາມໃສທີ່ຊື່ວ່າ ມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ຄວາມໃສທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນທີ່ປະຊຸມ ຄວາມໃສທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ລວມ ຄວາມໃສທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ຄວາມໃສທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ຄວາມໃສທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທໍາທີ່ຍິ່ງກວ່າທໍານັ້ນ ຄວາມໃສທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ຄວາມໃສທີ່ຊື່ວ່າທໍາທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ ແນວນີ້ແລ

**ມັນທະເປັຍຍະກະຖາ ຈົບ**

**ຈະຕຸດຖະພານະວານ ຈົບ**

**ມະຫາວັກທີ ໑ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຍານະກະຖາ | ໒. ທິດຖິກະຖາ |
| ໓. ອານາປານັດສະຕິກະຖາ | ໔. ອິນທະຣິຍະກະຖາ |
| ໕. ວິໂມກຂະກະຖາ | ໖. ຄະຕິກະຖາ |
| ໗. ກໍາມະກະຖາ | ໘. ວິປັນລາດກະຖາ |
| ໙. ມັກຄະກະຖາ | ໑໐. ມັນທະເປັຍຍະກະຖາ |

ວັກທີ ໑ ນີ້ເປັນວັກອັນປະເສີດ ບໍ່ມີວັກອື່ນສະເໝີ ທ່ານຜູ້ຊົງນິກາຍຕັ້ງໄວ້ແລ້ວແນວນີ້ແລ

# ៨. ຍຸຄະນັດທະວັກ

## ໝວດວ່າດ້ວຍການຈະເລີນທຳທີ່ເປັນຄູ່

## ໑. ຍຸຄະນັດທະກະຖາ

## ວ່າດ້ວຍການຈະເລີນທຳທີ່ເປັນຄູ່

[໑] ຂ້າພະເຈົ້າໄດ້ສະດັບມາແບບນີ້

ສະໄໝໜຶ່ງ ທ່ານພຣະອານົນຢູ່ ໃນໂຄສິຕາຣາມ ເຂດເມືອງໂກສຳພີ ໃນບ່ອນນັ້ນ ທ່ານພຣະອານົນຮຽກພິກຂຸທັງຫຼາຍມາກ່າວວ່າ ຜູ້ມີອາຍຸທັງຫຼາຍ ພິກຂຸເຫຼົ່ານັ້ນ ຮັບຄຳແລ້ວ ທ່ານພຣະອານົນຈຶ່ງໄດ້ກ່າວເລື້ອງນີ້ວ່າ

ຜູ້ມີອາຍຸທັງຫຼາຍ ຜູ້ໃດກໍຕາມບໍ່ວ່າຈະເປັນພິກຂຸຫຼືພິກຂຸນີ ຍ່ອມເຮັດໃຫ້ແຈ້ງອະຣະຫັດໃນສຳນັກຂອງເຮົາ ດ້ວຍມັກຄົບທັງ ៤ ປະການ ຫຼື ມັກໃດມັກໜຶ່ງບັນດາມັກ ៤ ປະການນີ້

ມັກ ៤ ປະການ ມີອັນໃດແດ່ ຄື

໑. ພິກຂຸໃນທຳວິໄນນີ້ຈະເລີນວິປັດສະນາມີສະມະຖະນຳໜ້າ ເມື່ອທ່ານຈະເລີນວິປັດສະນາມີສະມະຖະນຳໜ້າ ມັກຍ່ອມເກີດ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມສິ້ນໄປ

២. ພິກຂຸຈະເລີນສະມະຖະມີວິປັດສະນານຳໜ້າ ເມື່ອທ່ານຈະເລີນສະມະຖະມີວິປັດສະນານຳໜ້າ ມັກຍ່ອມເກີດ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມສິ້ນໄປ

៣. ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປ ເມື່ອທ່ານຈະເລີນສະມະຖະແລະວິປັດສະນາຄູ່ກັນໄປ ມັກຍ່ອມເກີດ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມສິ້ນໄປ

៤. ພິກຂຸມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ໃນເວລາທີ່ຈິດຕັ້ງໝັ້ນສະຫງົບຢູ່ພາຍໃນມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຕັ້ງໝັ້ນຢູ່ ມັກກໍເກີດແກ່ທ່ານ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ເມື່ອທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ຍ່ອມລະສັງໂຍດໄດ້ ອະນຸໄສຍ່ອມສິ້ນໄປ

ຜູ້ໃດຜູ້ໜຶ່ງກໍຕາມບໍ່ວ່າຈະເປັນພິກຂຸຫຼືພິກຂຸນີ ຍ່ອມເຮັດໃຫ້ແຈ້ງອະຣະຫັດໃນສຳນັກຂອງເຮົາດ້ວຍມັກຄົບທັງ ໔ ປະການ ຫຼືມັກໃດມັກໜຶ່ງໃນບັນດາມັກ ໔ ປະການນີ້

## ໑. ສູດຕັນຕະນິດເທດ

### ສະແດງພຣະສູດ

[໔] ພິກຂຸຈະເລີນວິປັດສະນາມີສະມະຖະນຳໜ້າ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງເນກຂຳມະ ເປັນສະມາທິ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນທຳທີ່ເກີດໃນສະມາທິນັ້ນ ໂດຍຄວາມບໍ່ທ່ຽງ ໂດຍຄວາມເປັນທຸກ ໂດຍຄວາມເປັນອະນັດຕາ ດ້ວຍປະການດັ່ງນີ້ ສະມະຖະຈຶ່ງມີກ່ອນວິປັດສະນາມີພາຍຫຼັງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນວິປັດສະນາ ມີສະມະຖະນຳໜ້າ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ
໒. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ?

ຄື ມັກຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຍ່ອມເກີດ ມັກຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຍ່ອມເກີດ ມັກຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດ ຍ່ອມເກີດ ມັກຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຍ່ອມເກີດ ມັກຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຍ່ອມເກີດ ມັກຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຍ່ອມເກີດ ມັກຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຍ່ອມເກີດ ມັກຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມເກີດ ມັກຍ່ອມເກີດແນວນີ້

ຄຳວ່າ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ອະທິບາຍວ່າ ພິກຂຸປະຕິບັດເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າປະຕິບັດ ເມື່ອຮູ້ ຊື່ວ່າປະຕິບັດ ເມື່ອເຫັນ ຊື່ວ່າປະຕິບັດ ເມື່ອພິຈາລະນາ ຊື່ວ່າປະຕິບັດ ເມື່ອອະທິຖານຈິດ ຊື່ວ່າປະຕິບັດ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າປະຕິບັດ ເມື່ອປະຄອງຄວາມພຽນໄວ້ ຊື່ວ່າປະຕິບັດ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າປະຕິບັດ

ເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າປະຕິບັດ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າປະຕິບັດ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ຊື່ວ່າປະຕິບັດ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າປະຕິບັດ ເມື່ອລະທຳທີ່ຄວນລະ ຊື່ວ່າປະຕິບັດ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າປະຕິບັດ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າປະຕິບັດ ພິກຂຸປະຕິບັດແນວນີ້

ຄຳວ່າ ຈະເລີນ ອະທິບາຍວ່າ ພິກຂຸຈະເລີນເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າຈະເລີນ ເມື່ອຮູ້ ຊື່ວ່າຈະເລີນ ເມື່ອເຫັນ ຊື່ວ່າຈະເລີນ ເມື່ອພິຈາລະນາ ຊື່ວ່າຈະເລີນ ເມື່ອອະທິຖານຈິດ ຊື່ວ່າຈະເລີນ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າຈະເລີນ ເມື່ອປະຄອງຄວາມພຽນໄວ້ ຊື່ວ່າຈະເລີນ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າຈະເລີນ ເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າຈະເລີນ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າຈະເລີນ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ຊື່ວ່າຈະເລີນ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າຈະເລີນ ເມື່ອລະທຳທີ່ຄວນລະ ຊື່ວ່າຈະເລີນ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າຈະເລີນ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າຈະເລີນ ພິກຂຸຈະເລີນແນວນີ້

ຄຳວ່າ ເຮັດໃຫ້ຫຼາຍ ອະທິບາຍວ່າ ພິກຂຸເຮັດໃຫ້ຫຼາຍເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຮູ້ ຊື່ວ່າເຮັດໃຫ້ຫຼາຍ ເມື່ອເຫັນ ຊື່ວ່າເຮັດໃຫ້ຫຼາຍ ເມື່ອພິຈາລະນາ ຊື່ວ່າເຮັດໃຫ້ຫຼາຍ ເມື່ອອະທິຖານຈິດ ຊື່ວ່າເຮັດໃຫ້ຫຼາຍ ເມື່ອນ້ອມໃຈເຊື່ອດ້ວຍສັດທາ ຊື່ວ່າເຮັດໃຫ້ຫຼາຍ ເມື່ອປະຄອງຄວາມພຽນໄວ້ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຕັ້ງສະຕິໄວ້ໝັ້ນ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຕັ້ງຈິດໄວ້ໝັ້ນ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຮູ້ຊັດແຈ້ງດ້ວຍປັນຍາ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຮູ້ຍິ່ງທຳທີ່ຄວນຮູ້ຍິ່ງ ຊື່ວ່າເຮັດໃຫ້ຫຼາຍ ເມື່ອກຳນົດຮູ້ທຳທີ່ຄວນກຳນົດຮູ້ ຊື່ວ່າເຮັດໃຫ້ຫຼາຍ ເມື່ອລະທຳທີ່ຄວນລະ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຈະເລີນທຳທີ່ຄວນຈະເລີນ ຊື່ວ່າເຮັດໃຫ້ຫຼາຍ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເຮັດໃຫ້ຫຼາຍ ພິກຂຸເຮັດໃຫ້ຫຼາຍແນວນີ້

ຄຳວ່າ ເມື່ອທ່ານປະຕິບັດມັກນັ້ນ ໆລໆ ອະນຸໄສຍ່ອມສິ້ນໄປ ອະທິບາຍວ່າ ພິກຂຸຍ່ອມລະສັງໂຍດໄດ້ເປັນແນວໃດ? ອະນຸໄສຍ່ອມສິ້ນໄປເປັນແນວໃດ?

ຄື ຍ່ອມລະສັງໂຍດ ໓ ນີ້ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ ອະນຸໄສ ໒ ນີ້ ຄື ທິດຖານຸໄສ ແລະວິຈິກິດສານຸໄສ ຍ່ອມສິ້ນໄປດ້ວຍໂສດາປັດຕິມັກຍ່ອມລະສັງໂຍດ ໒ ນີ້ ຄື ກາມຣາຄະສັງໂຍດແລະປະຕິຄະສັງໂຍດສ່ວນຫຍາບ ໆ ອະນຸໄສ ໒ ນີ້ ຄື ກາມຣາຄານຸໄສແລະປະຕິຄານຸໄສສ່ວນຫຍາບ ໆ ຍ່ອມສິ້ນໄປດ້ວຍ ສະກະທາຄາມິມັກ ຍ່ອມລະສັງໂຍດ ໒ ນີ້ ຄື ກາມຣາຄະສັງໂຍດແລະປະຕິຄະສັງໂຍດ ສ່ວນລະອຽດ ໆ ອະນຸໄສ ໒ ນີ້ ຄື ກາມຣາຄານຸໄສແລະປະຕິຄານຸໄສ ສ່ວນລະອຽດ ໆ ຍ່ອມສິ້ນໄປດ້ວຍ ອະນາຄາມິມັກ ຍ່ອມລະສັງໂຍດ ໕ ນີ້ ຄື ຮູບຣາຄະ ອະຮູບຣາຄະ ມານະ ອຸດທັດຈະ ແລະອະວິດຊາ ອະນຸໄສ ໓

ນີ້ ຄື ມານານຸໄສ ພະວະຣາຄານຸໄສ ແລະອະວິດຊານຸໄສ ຍ່ອມສິ້ນໄປດ້ວຍອະຣະຫັດຕະມັກ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

[໓] ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອະພະຍາບາດ ເປັນສະມາທິ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງອາໂລກະ ສັນຍາເປັນສະມາທິ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານດ້ວຍອຳນາດແຫ່ງ ຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ດ້ວຍອຳນາດແຫ່ງຄວາມເປັນຜູ້ພິຈາລະນາ ເຫັນຄວາມສະລະຄືນທັນໃຈອອກ ເປັນສະມາທິ ຯລຯ ຊື່ວ່າວິປັດສະນາ ຍ້ອນມີຄວາມໝາຍ ວ່າພິຈາລະນາເຫັນທຳທີ່ເກີດໃນສະມາທິນັ້ນ ໂດຍຄວາມບໍ່ທ່ຽງ ໂດຍຄວາມເປັນທຸກ ໂດຍຄວາມເປັນອະນັດຕາ ດ້ວຍປະການດັ່ງນີ້ ສະມະຖະຈຶ່ງມີກ່ອນວິປັດສະນາມີພາຍຫຼັງ ຍ້ອນເຫດນັ້ນທ່ານຈຶ່ງກ່າວວ່າ ຈະເລີນວິປັດສະນາມີສະມະຖະນຳໜ້າ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ
໒. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ?

ຄື ມັກຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຍ່ອມເກີດ ມັກຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຯລຯ ມັກຊື່ວ່າສຳມາສະມາທິ ຍ້ອນມີສະພາວະ ບໍ່ຟຸ້ງຊ່ານ ຍ່ອມເກີດ ມັກຍ່ອມເກີດແນວນີ້

ຄຳວ່າ ທ່ານປະຕິບັດ ຈະເລີນ ເຮັດໃຫ້ຫຼາຍເຊິ່ງມັກນັ້ນ ອະທິບາຍວ່າ ພິກຂຸປະຕິບັດເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າປະຕິບັດ ເມື່ອຮູ້ ຊື່ວ່າປະຕິບັດ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າປະຕິບັດ ພິກຂຸປະຕິບັດແນວນີ້

ຄຳວ່າ ຈະເລີນ ອະທິບາຍວ່າ ພິກຂຸຈະເລີນເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າຈະເລີນ ເມື່ອຮູ້ ຊື່ວ່າຈະເລີນ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າຈະເລີນ ພິກຂຸຈະເລີນແນວນີ້

ຄຳວ່າ ເຮັດໃຫ້ຫຼາຍ ອະທິບາຍວ່າ ພິກຂຸເຮັດໃຫ້ຫຼາຍເປັນແນວໃດ?

ຄື ພິກຂຸນັ້ນເມື່ອນຶກເຖິງ ຊື່ວ່າເຮັດໃຫ້ຫຼາຍ ເມື່ອຮູ້ ຊື່ວ່າເຮັດໃຫ້ຫຼາຍ ຯລຯ ເມື່ອເຮັດໃຫ້ແຈ້ງທຳທີ່ຄວນເຮັດໃຫ້ແຈ້ງ ຊື່ວ່າເຮັດໃຫ້ຫຼາຍ ພິກຂຸເຮັດໃຫ້ຫຼາຍແນວນີ້

ຄຳວ່າ ເມື່ອທ່ານປະຕິບັດມັກນັ້ນ ຯລຯ ອະນຸໄສຍ່ອມສິ້ນໄປ ອະທິບາຍວ່າ ພິກຂຸຍ່ອມລະສັງໂຍດໄດ້ເປັນແນວໃດ? ອະນຸໄສຍ່ອມສິ້ນໄປເປັນແນວໃດ?

ຄື ຍ່ອມລະສັງໂຍດ ໓ ນີ້ ຄື ສັກກາຍະທິດຖິ ວິຈິກິດສາ ແລະສີລັບພະຕະປະຣາມາດ ອະນຸໄສ ໒ ນີ້ ຄື ທິດຖານຸໄສແລະວິຈິກິດສານຸໄສ ຍ່ອມສິ້ນໄປດ້ວຍໂສດາປັດຕິມັກ

ຍ່ອມລະສັງໂຍດ ໒ ນີ້ ຄື ກາມຣາຄະສັງໂຍດ ແລະປະຕິຄະສັງໂຍດ ສ່ວນຫຍາບ ໆ ອະນຸໄສ ໒ ນີ້ ຄື ກາມຣາຄານຸໄສແລະປະຕິຄານຸໄສສ່ວນຫຍາບ ໆ ຍ່ອມສິ້ນໄປດ້ວຍ ສະກະທາຄາມິມັກ

ຍ່ອມລະສັງໂຍດ ໒ ນີ້ ຄື ກາມຣາຄະສັງໂຍດແລະປະຕິຄະສັງໂຍດ ສ່ວນລະອຽດ ໆ ອະນຸໄສ ໒ ນີ້ ຄື ກາມຣາຄານຸໄສແລະປະຕິຄານຸໄສສ່ວນລະອຽດ ໆ ຍ່ອມສິ້ນໄປດ້ວຍ ອະນາຄາມິມັກ

ຍ່ອມລະສັງໂຍດ ໕ ນີ້ ຄື ຣູບຣາຄະ ອະຣູບຣາຄະ ມານະ ອຸດທັດຈະ ແລະອະວິດຊາ ອະນຸໄສ ໓ ນີ້ ຄື ມານານຸໄສ ພະວະຣາຄານຸໄສ ແລະອະວິດຊານຸໄສ ຍ່ອມສິ້ນໄປດ້ວຍອະຣະຫັດຕະມັກ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້ ພິກຂຸຊື່ວ່າຍ່ອມຈະເລີນວິປັດສະນາ ມີສະມະຖະນຳໜ້າແນວນີ້

[໔] ພິກຂຸນັ້ນຈະເລີນສະມະຖະມີວິປັດສະນານຳໜ້າ ເປັນແນວໃດ?

ຄື ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນໂດຍຄວາມເປັນທຸກ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນໂດຍຄວາມເປັນອະນັດຕາ ສະພາວະທີ່ຈິດປ່ອຍທຳທັງຫຼາຍທີ່ເກີດໃນວິປັດສະນານັ້ນເປັນອາລົມ ແລະສະພາວະທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານ ເປັນສະມາທິ ວິປັດສະນາຈຶ່ງມີກ່ອນ ສະມະຖະມີພາຍຫຼັງ ດ້ວຍປະການດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະມີວິປັດສະນານຳໜ້າ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ? ຯລຯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຣູບໂດຍຄວາມບໍ່ທ່ຽງ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຣູບໂດຍຄວາມເປັນທຸກ ຊື່ວ່າວິປັດສະນາ ຍ້ອນມີສະພາວະ

ພິຈາລະນາເຫັນຮູບໂດຍຄວາມເປັນອະນັດຕາ ສະພາວະທີ່ຈິດປ່ອຍທຳທັງຫຼາຍທີ່ເກີດໃນພາວະນານັ້ນເປັນອາລົມ ແລະສະພາວະທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານ ເປັນສະມາທິ ວິປັດສະນາຈຶ່ງມີກ່ອນ ສະມະຖະມີພາຍຫຼັງ ດ້ວຍປະການດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະມີວິປັດສະນານຳໜ້າ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ຯລຯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂຸ ຯລຯ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຊະຣາ ແລະມໍຣະນະໂດຍຄວາມບໍ່ທ່ຽງ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຊະຣາແລະ ມໍຣະນະໂດຍຄວາມເປັນທຸກ ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນຊະຣາແລະມໍລະນະ ໂດຍຄວາມເປັນອະນັດຕາ ສະພາວະທີ່ຈິດປ່ອຍທຳທັງຫຼາຍທີ່ເກີດໃນພາວະນານັ້ນເປັນອາລົມ ແລະສະພາວະທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ເປັນສະມາທິ ວິປັດສະນາຈຶ່ງມີກ່ອນ ສະມະຖະມີພາຍຫຼັງ ດ້ວຍປະການດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະມີວິປັດສະນານຳໜ້າ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ? ຯລຯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້ ພິກຂຸຈະເລີນ ສະມະຖະມີວິປັດສະນານຳໜ້າແນວນີ້

[໔] ພິກຂຸຈະເລີນສະມະຖະແລະວິປັດສະນາຄູ່ກັນໄປ ເປັນແນວໃດ?

ຄື ພິກຂຸຈະເລີນສະມະຖະແລະວິປັດສະນາຄູ່ກັນໄປ ດ້ວຍອາການ ໑໖ ຢ່າງ ໄດ້ແກ່

໑. ດ້ວຍມີສະພາວະເປັນອາລົມ
໒. ດ້ວຍມີສະພາວະເປັນໂຄຈອນ
໓. ດ້ວຍມີສະພາວະລະ
໔. ດ້ວຍມີສະພາວະສະລະ
໕. ດ້ວຍມີສະພາວະອອກ
໖. ດ້ວຍມີສະພາວະຫຼີກອອກ
໗. ດ້ວຍມີສະພາວະເປັນທຳລະອຽດ
໘. ດ້ວຍມີສະພາວະເປັນທຳປະນີດ
໙. ດ້ວຍມີສະພາວະລຸດພົ້ນ
໑໐. ດ້ວຍມີສະພາວະບໍ່ມີອາສະວະ
໑໑. ດ້ວຍມີສະພາວະເປັນເຄື່ອງຂ້າມ
໑໒. ດ້ວຍມີສະພາວະບໍ່ມີນິມິດ

໑໓. ດ້ວຍມີສະພາວະບໍ່ມີປະນິທິຕະ ໑໔. ດ້ວຍມີສະພາວະເປັນສູນຍະຕະ

໑໕. ດ້ວຍມີສະພາວະມີຣົດເປັນແນວດຽວກັນ

໑໖. ດ້ວຍມີສະພາວະເປັນຄູ່ກັນບໍ່ລ່ວງເລີຍກັນ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນອາລົມ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ມີນິໂຣດເປັນອາລົມ ເມື່ອພິກຂຸນັ້ນລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ມີນິໂຣດເປັນອາລົມ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນອາລົມ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນອາລົມ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ? ຯລຯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້ ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນອາລົມແນວນີ້

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນໂຄຈອນ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາຍ້ອນມີສະພາວະພິຈາລະນາເຫັນ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນໂຄຈອນ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນໂຄຈອນ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະລະ ເປັນແນວໃດ?

ຄື ເມື່ອພິກຂຸລະກິເລດທີ່ປະກອບດ້ວຍອຸດທັດຈະແລະຂັນ ຈຶ່ງມີສະມາທິຄືຄວາມທີ່ ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະກິເລດທີ່ປະກອບດ້ວຍ ອະວິດຊາແລະຂັນ ຈຶ່ງມີວິປັດສະນາຍ້ອນມີສະພາວະພິຈາລະນາເຫັນ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະ ແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະລະ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະລະ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະສະລະ ເປັນແນວໃດ?

ຄື ເມື່ອພິກຂຸສະລະກິເລດທີ່ປະກອບດ້ວຍອຸດທັດຈະແລະຂັນ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸສະລະກິເລດທີ່ປະກອບດ້ວຍອະວິດຊາແລະຂັນ ຈຶ່ງມີວິປັດສະນາຍ້ອນມີສະພາວະພິຈາລະນາເຫັນ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະ ແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະສະລະ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະສະລະ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະອອກ ເປັນແນວໃດ?

ຄື ເມື່ອພິກຂຸອອກຈາກກິເລດທີ່ປະກອບດ້ວຍອຸດທັດຈະ ແລະຈາກຂັນ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸອອກຈາກກິເລດທີ່ປະກອບດ້ວຍອະວິດຊາແລະຈາກຂັນ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະອອກ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະອອກ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະຫຼີກອອກເປັນແນວໃດ?

ຄື ເມື່ອພິກຂຸຫຼີກອອກຈາກກິເລດທີ່ປະກອບດ້ວຍອຸດທັດຈະ ແລະຈາກຂັນ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸຫຼີກອອກຈາກກິເລດທີ່ປະກອບດ້ວຍອະວິດຊາແລະຈາກຂັນ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະຫຼີກອອກ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະຫຼີກອອກ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນທຳລະອຽດ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານເປັນທຳລະອຽດ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ເປັນທຳລະອຽດ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະ ແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນທຳລະອຽດ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັສສະນາ ຄູ່ກັນໄປດ້ວຍມີສະພາວະເປັນທຳລະອຽດ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນທຳປະນິດ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານເປັນທຳປະນິດ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ເປັນທຳປະນິດ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນທຳປະນິດ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນທຳປະນິດ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະລຸດພົ້ນ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານລຸດພົ້ນຈາກກາມາສະວະ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ລຸດພົ້ນຈາກອະວິດຊາສະວະ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ຊື່ວ່າເຈໂຕວິມຸດຕິ ຍ້ອນມີສະພາວະປາສະຈາກຣາຄະ ຊື່ວ່າປັນຍາວິມຸດຕິ ຍ້ອນມີສະພາວະ ປາສະຈາກອະວິດຊາ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະລຸດພົ້ນ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະລຸດພົ້ນ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີອາສະວະ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານບໍ່ມີອາສະວະດ້ວຍກາມາສະວະ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາຍ້ອນມີສະພາວະພິຈາລະນາເຫັນ ບໍ່ມີອາສະວະດ້ວຍອະວິດຊາສະວະ ມີນິໂຣດເປັນໂຄຈອນດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນບໍ່ລ່ວງເລີຍກັນ ດ້ວຍມີສະພາວະບໍ່ມີອາສະວະ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີອາສະວະ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນເຄື່ອງຂ້າມ ເປັນແນວໃດ?

ຄື ເມື່ອພິກຂຸຂ້າມຈາກກິເລດທີ່ປະກອບດ້ວຍອຸດທັດຈະ ແລະຈາກຂັນ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ມີນິໂຣດເປັນໂຄຈອນ ເມື່ອພິກຂຸຂ້າມຈາກກິເລດທີ່ປະກອບດ້ວຍອະວິດຊາແລະຈາກຂັນ ຈຶ່ງມີວິປັດສະນາຍ້ອນມີສະພາວະພິຈາລະນາເຫັນ ມີນິ

ໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະ ແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນເຄື່ອງຂ້າມ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນເຄື່ອງຂ້າມ

ພິກຂຸຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີນິມິດ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ບໍ່ມີນິມິດດ້ວຍນິມິດທັງປວງ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ບໍ່ມີນິມິດດ້ວຍນິມິດທັງປວງ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະບໍ່ມີນິມິດ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີນິມິດ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີປະນິຫິຕະເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ບໍ່ມີປະນິທິດ້ວຍປະນິທິທັງປວງ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ບໍ່ມີປະນິທິດ້ວຍປະນິທິທັງປວງ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະບໍ່ມີປະນິຫິຕະ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະບໍ່ມີປະນິຫິຕະ

ພິກຂຸຈະເລີນສະມະຖະ ແລະວິປັດສະນາຄູ່ກັນໄປດ້ວຍມີສະພາວະເປັນສູນຍະຕະ ເປັນແນວໃດ?

ຄື ເມື່ອພິກຂຸລະອຸດທັດຈະ ຈຶ່ງມີສະມາທິຄືຄວາມທີ່ຈິດເປັນເອກັກຄະຕາຣົມ ບໍ່ຟຸ້ງຊ່ານ ວ່າງຈາກອະພິນິເວສະທັງປວງ ມີນິໂຣດເປັນໂຄຈອນ ເມື່ອພິກຂຸລະອະວິດຊາ ຈຶ່ງມີວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ວ່າງຈາກອະພິນິເວສະທັງປວງ ມີນິໂຣດເປັນໂຄຈອນ ດ້ວຍປະການດັ່ງນີ້ ສະມະຖະແລະວິປັດສະນາຈຶ່ງມີຣົດເປັນແນວດຽວກັນ ເປັນຄູ່ກັນ ບໍ່ລ່ວງເລີຍກັນດ້ວຍມີສະພາວະເປັນສູນຍະຕະ ດັ່ງນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ຈະເລີນສະມະຖະແລະວິປັດສະນາຄູ່ກັນໄປ ດ້ວຍມີສະພາວະເປັນສູນຍະຕະ

ຄຳວ່າ ຈະເລີນ ອະທິບາຍວ່າ ພາວະນາ (ການຈະເລີນ) ມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ຄຳວ່າ ມັກຍ່ອມເກີດ ອະທິບາຍວ່າ ມັກຍ່ອມເກີດເປັນແນວໃດ? ฯລฯ ມັກຍ່ອມເກີດແນວນີ້ ฯລฯ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້ ພິກຂຸຈະເລີນ ສະມະຖະແລະວິປັດສະນາຄູ່ກັນໄປ ດ້ວຍມີສະພາວະເປັນສູນຍະຕະແນວນີ້ ພິກຂຸຈະເລີນສະມະຖະ ແລະ ວິປັດສະນາຄູ່ກັນໄປ ດ້ວຍອາການ ໑໖ ແນວນີ້ ພິກຂຸຈະເລີນສະມະຖະແລະວິປັດສະນາຄູ່ກັນໄປ ແນວນີ້

**ສູດຕັນຕະນິດເທດ ຈົບ**

## ໔. ທຳມຸດທັດຈະວາຣະນິດເທດ

### ສະແດງອຸດທັດຈະໃນທຳກັ້ນໄວ້

[໖] (ພິກຂຸ) ມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ເປັນແນວໃດ?

ຄື ເມື່ອພິກຂຸມະນະສິການໂດຍຄວາມບໍ່ທ່ຽງ ໂອພາດຍ່ອມເກີດຂຶ້ນ ພິກຂຸນຶກເຖິງໂອພາດ ວ່າ ໂອພາດເປັນທຳ ຍ້ອນນຶກເຖິງໂອພາດນັ້ນ ຄວາມຟຸ້ງຊ່ານເປັນອຸດທັດຈະ ພິກຂຸມີໃຈຖືກອຸດທັດຈະນັ້ນກັ້ນໄວ້ ຍ່ອມບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມບໍ່ທ່ຽງຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມເປັນທຸກຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມເປັນອະນັດຕາຕາມຄວາມເປັນຈິງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ໃນເວລາທີ່ຈິດຕັ້ງໝັ້ນສະຫງົບຢູ່ພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຕັ້ງໝັ້ນຢູ່ ມັກກໍເກີດແກ່ທ່ານ ມັກຍ່ອມເກີດເປັນແນວໃດ? ฯລฯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

ເມື່ອມະນະສິການໂດຍຄວາມບໍ່ທ່ຽງ ຍານ (ຄວາມຮູ້) ຍ່ອມເກີດຂຶ້ນ ປີຕິ (ຄວາມອິ່ມໃຈ) ຍ່ອມເກີດຂຶ້ນ ປັດສັດທິ (ຄວາມສະຫງົບກາຍສະຫງົບໃຈ) ຍ່ອມເກີດຂຶ້ນ ສຸກ (ຄວາມສຸກ) ຍ່ອມເກີດຂຶ້ນ ອະທິໂມກ (ຄວາມນ້ອມໃຈເຊື່ອ) ຍ່ອມເກີດຂຶ້ນ ປັກຄະຫະ (ຄວາມພຽນທີ່ພໍດີ) ຍ່ອມເກີດຂຶ້ນ ອຸປັດຖານ (ສະຕິແກ່ກ້າ) ຍ່ອມເກີດຂຶ້ນ ອຸເປກຂາ (ຄວາມມີໃຈເປັນກາງ) ຍ່ອມເກີດຂຶ້ນ ນິກັນຕິ (ຄວາມຕິດໃຈ) ຍ່ອມເກີດຂຶ້ນ ພິກຂຸນຶກເຖິງນິກັນຕິວ່າ ນິກັນຕິເປັນທຳ ຍ້ອນນຶກເຖິງ ນິກັນຕິນັ້ນ ຄວາມຟຸ້ງຊ່ານເປັນອຸດທັດຈະ ພິກຂຸມີໃຈຖືກອຸດທັດຈະນັ້ນກັ້ນໄວ້ແນວນີ້ ຍ່ອມບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມບໍ່ທ່ຽງຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍ

ຄວາມເປັນທຸກຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມເປັນອະນັດຕາ ຕາມຄວາມເປັນຈິງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ໃນເວລາທີ່ຈິດຕັ້ງໝັ້ນສະງົບຢູ່ພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຕັ້ງໝັ້ນຢູ່ ມັກກໍເກີດແກ່ທ່ານ ມັກຍ່ອມເກີດເປັນແນວໃດ? ฯລฯ ມັກຍ່ອມເກີດແນວນີ້ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

ເມື່ອມະນະສິການໂດຍຄວາມເປັນທຸກ ฯລฯ ເມື່ອມະນະສິການໂດຍຄວາມເປັນອະນັດຕາ ໂອພາດຍ່ອມເກີດຂຶ້ນ ฯລฯ ຍານຍ່ອມເກີດຂຶ້ນ ປິຕິຍ່ອມເກີດຂຶ້ນ ປັດສັດທິຍ່ອມເກີດຂຶ້ນ ສຸກຍ່ອມເກີດຂຶ້ນ ອະທິໂມກຍ່ອມເກີດຂຶ້ນ ປັກຄະຫະຍ່ອມເກີດຂຶ້ນອຸປັດຖານຍ່ອມເກີດຂຶ້ນ ອຸເປກຂາຍ່ອມເກີດຂຶ້ນ ນິກັນຕິຍ່ອມເກີດຂຶ້ນ ພິກຂຸນຶກເຖິງນິກັນຕິວ່າ ນິກັນຕິເປັນທຳ ຍ້ອນນຶກເຖິງນິກັນຕິນັ້ນ ຄວາມຟຸ້ງຊ່ານເປັນອຸດທັດຈະ ພິກຂຸມີໃຈຖືກອຸດທັດຈະນັ້ນກັ້ນໄວ້ ຍ່ອມບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມເປັນອະນັດຕາຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມບໍ່ທ່ຽງຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຄວາມຜາກົດໂດຍຄວາມເປັນທຸກຕາມຄວາມເປັນຈິງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ฯລฯ ພິກຂຸຍ່ອມລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້

ເມື່ອມະນະສິການຮູບໂດຍຄວາມບໍ່ທ່ຽງ ฯລฯ ເມື່ອມະນະສິການຮູບໂດຍຄວາມເປັນທຸກ ฯລฯ ເມື່ອມະນະສິການຮູບໂດຍຄວາມເປັນອະນັດຕາ ເມື່ອມະນະສິການເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ເມື່ອມະນະສິການຊະຣາ ແລະມໍຣະນະໂດຍຄວາມບໍ່ທ່ຽງ ฯລฯ ເມື່ອມະນະສິການຊະຣາແລະມໍຣະນະໂດຍຄວາມເປັນທຸກ ฯລฯ ເມື່ອມະນະສິການຊະຣາແລະມໍຣະນະໂດຍຄວາມເປັນອະນັດຕາ ໂອພາດຍ່ອມເກີດຂຶ້ນ ຍານຍ່ອມເກີດຂຶ້ນ ປິຕິຍ່ອມເກີດຂຶ້ນ ປັດສັດທິຍ່ອມເກີດຂຶ້ນ ສຸກຍ່ອມເກີດຂຶ້ນ ອະທິໂມກຍ່ອມເກີດຂຶ້ນ ປັກຄະຫະຍ່ອມເກີດຂຶ້ນ ອຸປັດຖານຍ່ອມເກີດຂຶ້ນ ອຸເປກຂາຍ່ອມເກີດຂຶ້ນ ນິກັນຕິຍ່ອມເກີດຂຶ້ນ ພິກຂຸນຶກເຖິງນິກັນຕິວ່າ ນິກັນຕິເປັນທຳ ຍ້ອນນຶກເຖິງນິກັນຕິນັ້ນ ຄວາມຟຸ້ງຊ່ານເປັນອຸດທັດຈະ ພິກຂຸມີໃຈຖືກອຸດທັດຈະນັ້ນກັ້ນໄວ້ ຍ່ອມບໍ່ຮູ້ຊັດແຈ້ງຊະຣາ ແລະມໍຣະນະເຊິ່ງຜາກົດໂດຍຄວາມເປັນອະນັດຕາຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຊະຣາແລະມໍຣະນະເຊິ່ງຜາກົດໂດຍຄວາມບໍ່ທ່ຽງຕາມຄວາມເປັນຈິງ ບໍ່ຮູ້ຊັດແຈ້ງຊະຣາແລະມໍຣະນະເຊິ່ງຜາກົດໂດຍຄວາມເປັນທຸກຕາມຄວາມເປັນຈິງ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ມີໃຈຖືກອຸດທັດຈະໃນທຳກັ້ນໄວ້ ໃນເວລາທີ່ຈິດຕັ້ງໝັ້ນສະງົບຢູ່ພາຍໃນ ມີພາວະທີ່ຈິດເປັນໜຶ່ງຜຸດຂຶ້ນ ຕັ້ງໝັ້ນຢູ່ ໂດຍຄວາມບໍ່ທ່ຽງ ມັກກໍເກີດແກ່ທ່ານ ມັກຍ່ອມເກີດເປັນແນວໃດ? ฯລฯ ມັກຍ່ອມເກີດແນວນີ້ ฯລฯ ພິກຂຸລະສັງໂຍດໄດ້ແນວນີ້ ອະນຸໄສຍ່ອມສິ້ນໄປແນວນີ້ ພິກຂຸມີໃຈຖືກອຸດທັດຈະໃນທຳກັ້ນໄວ້ແນວນີ້

[ກ] ຈິດຍ່ອມກວັດແກວ່ງ ຫວັ່ນໄຫວ

ຍ້ອນໂອພາດ ຍ້ອນຍານ ຍ້ອນປີຕິ
ຍ້ອນປັດສັດທິ ຍ້ອນສຸກ
ຍ້ອນອະທິໂມກ ຍ້ອນປັກຄະຫະ
ຍ້ອນອຸປັດຖານ ຍ້ອນອຸເປກຂາ
ຍ້ອນນ້ອມນຶກເຖິງອຸເປກຂາແລະນິກັນຕິ

ພິກຂຸນັ້ນກຳນົດຖານະ ໑໐ ປະການນີ້
ດ້ວຍປັນຍາແລ້ວ ຍ່ອມເປັນຜູ້ສະຫຼາດ
ໃນອຸດທັດຈະໃນທຳ
ແລະຍ່ອມບໍ່ເຖິງຄວາມຫຼົງໃຫຼ
ຈິດກວັດແກວ່ງ ເສົ້າໝອງ
ຈິດພາວະນາຍ່ອມເຄື່ອນ
ຈິດກວັດແກວ່ງ ບໍ່ເສົ້າໝອງ
ຈິດພາວະນາຍ່ອມເສື່ອມໄປ
ຈິດບໍລິສຸດ ບໍ່ເສົ້າໝອງ
ຈິດພາວະນາຍ່ອມບໍ່ເສື່ອມໄປ
ຈິດບໍ່ຟຸ້ງຊ່ານ ບໍ່ເສົ້າໝອງ
ຈິດພາວະນາຍ່ອມບໍ່ເຄື່ອນ

ດ້ວຍຖານະ ໔ ປະການນີ້ ພິກຂຸຍ່ອມຮູ້ຊັດແຈ້ງຄວາມທີ່ຈິດກວັດແກວ່ງ ຟຸ້ງຊ່ານ ຖືກໂອພາດເປັນຕົ້ນກັ້ນໄວ້ ດ້ວຍຖານະ ໑໐ ປະການນີ້ ແນວນີ້ແລ

**(ທຳມຸດທັດຈະອາຣະນິດເທດ ຈົບ)**

**ຍຸຄະນັດທະກະຖາ ຈົບ**

## ໘. ສັດຈະກະຖາ

### ວ່າດ້ວຍສັດຈະ

[໗] ເຫດເກີດຂຶ້ນເໝືອນໃນສູດຂ້າງຕົ້ນ ພິກຂຸທັງຫຼາຍ ສັດຈະ ໔ ປະການນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ

ສັດຈະ ໔ ປະການ ມີອັນໃດແດ່ ຄື

໑. ສັດຈະວ່າ ນີ້ທຸກ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ
໒. ສັດຈະວ່າ ນີ້ທຸກຂະສະມຸໄທ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ
໓. ສັດຈະວ່າ ນີ້ທຸກຂະນິໂຣທະ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ
໔. ສັດຈະວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ

ພິກຂຸທັງຫຼາຍ ສັດຈະ ໔ ປະການນີ້ແລ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ

## ໑. ປະຖົມສູດຕັນຕະນິດເທດ

### ສະແດງສູດທີ ໑

ທຸກ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສະພາວະທີ່ທົນໄດ້ຍາກແຫ່ງທຸກ ໔ ປະການ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ໄດ້ແກ່

໑. ສະພາວະທີ່ບີບຄັ້ນແຫ່ງທຸກ
໒. ສະພາວະທີ່ປັດໄຈປຸງແຕ່ງແຫ່ງທຸກ
໓. ສະພາວະທີ່ເຮັດໃຫ້ເດືອດຮ້ອນແຫ່ງທຸກ
໔. ສະພາວະທີ່ຜັນປ່ຽນແຫ່ງທຸກ

ສະພາວະທີ່ທົນໄດ້ຍາກແຫ່ງທຸກ ໔ ປະການນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ທຸກ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ແນວນີ້

ສະມຸໄທ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ໔ ປະການ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ໄດ້ແກ່

໑. ສະພາວະທີ່ ປະມວນມາແຫ່ງສະມຸໄທ
໒. ສະພາວະທີ່ ເປັນເຫດເກີດແຫ່ງສະມຸໄທ
໓. ສະພາວະທີ່ ກ່ຽວຂ້ອງແຫ່ງສະມຸໄທ
໔. ສະພາວະທີ່ ພົວພັນແຫ່ງສະມຸໄທ

ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ໔ ປະການນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນສະມຸໄທ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ແນວນີ້

ນິໂຣດ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ໔ ປະການ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ໄດ້ແກ່

໑. ສະພາວະທີ່ເປັນ ເຄື່ອງສະລັດອອກແຫ່ງນິໂຣດ
໒. ສະພາວະທີ່ເປັນ ວິເວກແຫ່ງນິໂຣດ
໓. ສະພາວະທີ່ເປັນ ອະສັງຂະຕະແຫ່ງນິໂຣດ
໔. ສະພາວະທີ່ເປັນ ອະມະຕະແຫ່ງນິໂຣດ

ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ໔ ປະການນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ນິໂຣດ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ແນວນີ້

ມັກ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສະພາວະທີ່ເປັນທາງແຫ່ງມັກ ໔ ປະການ ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ໄດ້ແກ່

໑. ສະພາວະທີ່ ນຳອອກແຫ່ງມັກ
໒. ສະພາວະທີ່ ເປັນເຫດແຫ່ງມັກ
໓. ສະພາວະທີ່ ເຫັນແຫ່ງມັກ
໔. ສະພາວະທີ່ ເປັນໃຫຍ່ແຫ່ງມັກ

ສະພາວະທີ່ເປັນທາງແຫ່ງມັກ ໔ ປະການນີ້ເປັນຂອງແທ້ ບໍ່ຜິດ ບໍ່ເປັນແນວອື່ນ ມັກ ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ແນວນີ້

[໙] ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍອາການເທົ່າໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ດ້ວຍສະພາວະເປັນ ຂອງແທ້
໒. ດ້ວຍສະພາວະເປັນ ອະນັດຕາ
໓. ດ້ວຍສະພາວະເປັນ ຂອງຈິງ
໔. ດ້ວຍສະພາວະຮູ້ແຈ້ງ

ສັດຈະ ໔ ທ່ານສົງເຄາະເຂົ້າກັບອາການ ໔ ແນວນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງແທ້ ດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີສະພາວະເປັນຂອງແທ້
໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ມີສະພາວະເປັນຂອງແທ້
໓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ມີສະພາວະເປັນຂອງແທ້
໔. ສະພາວະທີ່ເປັນທາງແຫ່ງມັກ ມີສະພາວະເປັນຂອງແທ້

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະເປັນຂອງແທ້ ດ້ວຍອາການ ໔ ແນວນີ້ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນອະນັດຕາ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນອະນັດຕາ ດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີສະພາວະເປັນອະນັດຕາ
໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ມີສະພາວະເປັນອະນັດຕາ
໓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ມີສະພາວະເປັນອະນັດຕາ
໔. ສະພາວະທີ່ເປັນທາງແຫ່ງມັກ ມີສະພາວະເປັນອະນັດຕາ

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະເປັນອະນັດຕາ ດ້ວຍອາການ ໔ ແນວນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການ ຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງຈິງ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງຈິງ ດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີສະພາວະເປັນຂອງຈິງ
໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ມີສະພາວະເປັນຂອງຈິງ
໓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ມີສະພາວະເປັນຂອງຈິງ
໔. ສະພາວະທີ່ເປັນທາງແຫ່ງມັກ ມີສະພາວະເປັນຂອງຈິງ

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະເປັນຂອງຈິງ ດ້ວຍອາການ ໔ ຢ່າງນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການ ຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະຮູ້ແຈ້ງ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະຮູ້ແຈ້ງ ດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີສະພາວະຮູ້ແຈ້ງ
໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ມີສະພາວະຮູ້ແຈ້ງ
໓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ມີສະພາວະຮູ້ແຈ້ງ
໔. ສະພາວະທີ່ເປັນທາງແຫ່ງມັກ ມີສະພາວະຮູ້ແຈ້ງ

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະຮູ້ແຈ້ງ ດ້ວຍອາການ ໔ ແນວນີ້

ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

[໑໐] ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ເປັນແນວໃດ? ຄື

ສັດຈະໃດບໍ່ທ່ຽງ ສັດຈະນັ້ນເປັນທຸກ ສັດຈະໃດເປັນທຸກ ສັດຈະນັ້ນບໍ່ທ່ຽງ

ສັດຈະໃດບໍ່ທ່ຽງ ແລະເປັນທຸກ ສັດຈະນັ້ນເປັນອະນັດຕາ

ສັດຈະໃດບໍ່ທ່ຽງ ເປັນທຸກ ແລະເປັນອະນັດຕາ ສັດຈະນັ້ນເປັນຂອງແທ້

ສັດຈະໃດບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ແລະເປັນຂອງແທ້ ສັດຈະນັ້ນເປັນຂອງຈິງ

ສັດຈະໃດບໍ່ທ່ຽງ ເປັນທຸກ ເປັນອະນັດຕາ ເປັນຂອງແທ້ ແລະເປັນຂອງຈິງ ສັດຈະນັ້ນທ່ານສົງເຄາະເຂົ້ານຳກັນ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະໜຶ່ງດ້ວຍຍານດຽວ ຍ້ອນເຫດນັ້ນ

ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍອາການເທົ່າໃດ

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍອາການ ໔ ຢ່າງ ໄດ້ແກ່

໑. ດ້ວຍສະພາວະເປັນຂອງແທ້
໒. ດ້ວຍສະພາວະເປັນອະນັດຕາ
໓. ດ້ວຍສະພາວະເປັນຂອງຈິງ
໔. ດ້ວຍສະພາວະຮູ້ແຈ້ງ

๕. ດ້ວຍສະພາວະເປັນທຳທີ່ ຄວນຮູ້ຍິ່ງ
๖. ດ້ວຍສະພາວະເປັນທຳທີ່ ຄວນກຳນົດຮູ້
๗. ດ້ວຍສະພາວະເປັນທຳທີ່ ຄວນລະ
๘. ດ້ວຍສະພາວະເປັນທຳທີ່ ຄວນຈະເລີນ
๙. ດ້ວຍສະພາວະເປັນທຳທີ່ ຄວນເຮັດໃຫ້ແຈ້ງ

ສັດຈະ ໔ ທ່ານສົງເຄາະເຂົ້າກັບອາການ ๙ ຢ່າງນີ້ ສັດຈະໃດທ່ານ

ສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນຂອງແທ້ ດ້ວຍອາການ ๙ ຢ່າງນີ້ ໄດ້ແກ່

| | |
|---|---|
| ๑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ | ມີສະພາວະເປັນຂອງແທ້ |
| ໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ | ມີສະພາວະເປັນຂອງແທ້ |
| ๓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ | ມີສະພາວະເປັນຂອງແທ້ |
| ໔. ສະພາວະທີ່ເປັນທາງແຫ່ງມັກ | ມີສະພາວະເປັນຂອງແທ້ |
| ๕. ສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາ | ມີສະພາວະເປັນຂອງແທ້ |
| ๖. ສະພາວະທີ່ຄວນກຳນົດຮູ້ແຫ່ງປະຣິນຍາ | ມີສະພາວະເປັນຂອງແທ້ |
| ๗. ສະພາວະທີ່ຄວນລະແຫ່ງປະຫານະ | ມີສະພາວະເປັນຂອງແທ້ |
| ๘. ສະພາວະທີ່ຄວນຈະເລີນແຫ່ງພາວະນາ | ມີສະພາວະເປັນຂອງແທ້ |
| ๙. ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາ | ມີສະພາວະເປັນຂອງແທ້ |

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະເປັນຂອງແທ້ ດ້ວຍອາການ ๙ ຢ່າງນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະເປັນອະນັດຕາ ฯລฯ ພ້ອມດ້ວຍສະພາວະເປັນຂອງຈິງ ฯລฯ ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວພ້ອມດ້ວຍສະພາວະຮູ້ແຈ້ງ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະຮູ້ແຈ້ງ ດ້ວຍອາການ ๙ ຢ່າງ ໄດ້ແກ່

໑. ສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີສະພາວະຮູ້ແຈ້ງ
໒. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ມີສະພາວະຮູ້ແຈ້ງ
໓. ສະພາວະທີ່ເປັນຄວາມດັບແຫ່ງນິໂຣດ ມີສະພາວະຮູ້ແຈ້ງ
໔. ສະພາວະທີ່ເປັນທາງແຫ່ງມັກ ມີສະພາວະຮູ້ແຈ້ງ
໕. ສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາ ມີສະພາວະຮູ້ແຈ້ງ
໖. ສະພາວະທີ່ຄວນກຳນົດຮູ້ແຫ່ງປະຣິນຍາ ມີສະພາວະຮູ້ແຈ້ງ
໗. ສະພາວະທີ່ຄວນລະແຫ່ງປະຫານະ ມີສະພາວະຮູ້ແຈ້ງ
໘. ສະພາວະທີ່ຄວນຈະເລີນແຫ່ງພາວະນາ ມີສະພາວະຮູ້ແຈ້ງ
໙. ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາ ມີສະພາວະຮູ້ແຈ້ງ

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະຮູ້ແຈ້ງ ດ້ວຍອາການ ໙ ຢ່າງນີ້

ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

[໑໑] ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍອາການເທົ່າໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວພ້ອມດ້ວຍອາການ ໑໒ ຢ່າງ ໄດ້ແກ່

໑. ດ້ວຍສະພາວະເປັນຂອງແທ້
໒. ດ້ວຍສະພາວະເປັນອະນັດຕາ
໓. ດ້ວຍສະພາວະເປັນຂອງຈິງ
໔. ດ້ວຍສະພາວະຮູ້ແຈ້ງ
໕. ດ້ວຍສະພາວະເປັນເຄື່ອງຮູ້ຍິ່ງ
໖. ດ້ວຍສະພາວະເປັນເຄື່ອງກຳນົດຮູ້
໗. ດ້ວຍສະພາວະເປັນທຳ
໘. ດ້ວຍສະພາວະເປັນເໝືອນຢ່າງນັ້ນ
໙. ດ້ວຍສະພາວະເປັນທຳທີ່ຮູ້ແລ້ວ
໑໐. ດ້ວຍສະພາວະເປັນທຳທີ່ຄວນເຮັດໃຫ້ແຈ້ງ
໑໑. ດ້ວຍສະພາວະຖືກຕ້ອງ
໑໒. ດ້ວຍສະພາວະຕັດສະຮູ້

ສັດຈະ ໔ ທ່ານສົງເຄາະເຂົ້າກັບອາການ ໑໒ ແນວນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ

ດ້ວຍຍານຄຽງ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານຄຽງສັດຈະ ໔ ມີການຮູ້ແຈ້ງດ້ວຍຍານຄຽງ ພ້ອມດ້ວຍສະພາວະເປັນຂອງແທ້ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານຄຽງ ພ້ອມດ້ວຍສະພາວະເປັນຂອງແທ້ດ້ວຍອາການ ໑໖ ຢ່າງ ໄດ້ແກ່

| | |
|---|---|
| ໑. ສະພາວະທີ່ບີບຄັ້ນແຫ່ງທຸກ | ມີສະພາວະເປັນຂອງແທ້ |
| ໒. ສະພາວະທີ່ຖືກປັດໄຈປຸງແຕ່ງແຫ່ງທຸກ | ມີສະພາວະເປັນຂອງແທ້ |
| ໓. ສະພາວະທີ່ເຮັດໃຫ້ເດືອດຮ້ອນແຫ່ງທຸກ | ມີສະພາວະເປັນຂອງແທ້ |
| ໔. ສະພາວະທີ່ຜັນປ່ຽນແຫ່ງທຸກ | ມີສະພາວະເປັນຂອງແທ້ |
| ໕. ສະພາວະທີ່ປະມວນມາແຫ່ງສະມຸໄທ | ມີສະພາວະເປັນຂອງແທ້ |
| ໖. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ | ມີສະພາວະເປັນຂອງແທ້ |
| ໗. ສະພາວະທີ່ກ່ຽວຂ້ອງແຫ່ງສະມຸໄທ | ມີສະພາວະເປັນຂອງແທ້ |
| ໘. ສະພາວະທີ່ພົວພັນແຫ່ງສະມຸໄທ | ມີສະພາວະເປັນຂອງແທ້ |
| ໙. ສະພາວະທີ່ເປັນເຄື່ອງສະລັດອອກແຫ່ງນິໂຣດ | ມີສະພາວະເປັນຂອງແທ້ |
| ໑໐. ສະພາວະທີ່ເປັນວິເວກແຫ່ງນິໂຣດ | ມີສະພາວະເປັນຂອງແທ້ |
| ໑໑. ສະພາວະທີ່ເປັນອະສັງຂະຕະແຫ່ງນິໂຣດ | ມີສະພາວະເປັນຂອງແທ້ |
| ໑໒. ສະພາວະທີ່ເປັນອະມະຕະແຫ່ງນິໂຣດ | ມີສະພາວະເປັນຂອງແທ້ |
| ໑໓. ສະພາວະທີ່ນຳອອກແຫ່ງມັກ | ມີສະພາວະເປັນຂອງແທ້ |
| ໑໔. ສະພາວະທີ່ເປັນເຫດແຫ່ງມັກ | ມີສະພາວະເປັນຂອງແທ້ |
| ໑໕. ສະພາວະທີ່ເຫັນແຫ່ງມັກ | ມີສະພາວະເປັນຂອງແທ້ |
| ໑໖. ສະພາວະທີ່ເປັນໃຫຍ່ແຫ່ງມັກ | ມີສະພາວະເປັນຂອງແທ້ |

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະເປັນຂອງແທ້ ດ້ວຍອາການ ໑໖ ແນວນີ້ ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະຄຽງ ພຣະໂຍຄາວະຈອນ ຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະຄຽງ ດ້ວຍຍານຄຽງ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານຄຽງ

ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານຄຽງ ພ້ອມດ້ວຍສະພາວະເປັນອະນັດຕາ ໗ລ໗ ພ້ອມດ້ວຍສະພາວະເປັນຂອງຈິງ ພ້ອມດ້ວຍສະພາວະຮູ້ແຈ້ງ ພ້ອມດ້ວຍສະພາວະເປັນເຄື່ອງຮູ້ຍິ່ງ ພ້ອມດ້ວຍສະພາວະເປັນເຄື່ອງກຳນົດຮູ້ ພ້ອມດ້ວຍສະພາວະເປັນທຳ ພ້ອມດ້ວຍສະພາວະເປັນຂອງແທ້ ພ້ອມດ້ວຍສະພາວະເປັນທຳທີ່ຮູ້ແລ້ວ ພ້ອມດ້ວຍສະພາວະເປັນທຳທີ່ຄວນເຮັດໃຫ້ແຈ້ງ ພ້ອມດ້ວຍສະພາວະຖືກຕ້ອງ ດ້ວຍມີສະພາວະຕັດສະຮູ້ ເປັນແນວໃດ?

ຄື ສັດຈະ ໔ ມີການຮູ້ແຈ້ງດ້ວຍຍານດຽວ ພ້ອມດ້ວຍສະພາວະຕັດສະຣູ້ ດ້ວຍອາການ ໑໖ ຢ່າງ ໄດ້ແກ່

| | |
|---|---|
| ໑. ສະພາວະທີ່ບີບຄັ້ນແຫ່ງທຸກ | ມີສະພາວະຕັດສະຣູ້ |
| ໒. ສະພາວະທີ່ປັດໄຈປຸງແຕ່ງແຫ່ງທຸກ | ມີສະພາວະຕັດສະຣູ້ |
| ໓. ສະພາວະທີ່ເຮັດໃຫ້ເດືອດຮ້ອນແຫ່ງທຸກ | ມີສະພາວະຕັດສະຣູ້ |
| ໔. ສະພາວະທີ່ຜັນປ່ຽນແຫ່ງທຸກ | ມີສະພາວະຕັດສະຣູ້ |
| ໕. ສະພາວະທີ່ປະມວນມາແຫ່ງສະມຸໄທ | ມີສະພາວະຕັດສະຣູ້ |
| ໖. ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ | ມີສະພາວະຕັດສະຣູ້ |
| ໗. ສະພາວະທີ່ກ່ຽວຂ້ອງແຫ່ງສະມຸໄທ | ມີສະພາວະຕັດສະຣູ້ |
| ໘. ສະພາວະທີ່ພົວພັນແຫ່ງສະມຸໄທ | ມີສະພາວະຕັດສະຣູ້ |
| ໙. ສະພາວະທີ່ເປັນເຄື່ອງສະລັດອອກແຫ່ງນິໂຣດ | ມີສະພາວະຕັດສະຣູ້ |
| ໑໐. ສະພາວະທີ່ເປັນວິເວກແຫ່ງນິໂຣດ | ມີສະພາວະຕັດສະຣູ້ |
| ໑໑. ສະພາວະທີ່ເປັນອະສັງຂະຕະແຫ່ງນິໂຣດ | ມີສະພາວະຕັດສະຣູ້ |
| ໑໒. ສະພາວະທີ່ເປັນອະມະຕະແຫ່ງນິໂຣດ | ມີສະພາວະຕັດສະຣູ້ |
| ໑໓. ສະພາວະທີ່ນຳອອກແຫ່ງມັກ | ມີສະພາວະຕັດສະຣູ້ |
| ໑໔. ສະພາວະທີ່ເປັນເຫດແຫ່ງມັກ | ມີສະພາວະຕັດສະຣູ້ |
| ໑໕. ສະພາວະທີ່ເຫັນແຫ່ງມັກ | ມີສະພາວະຕັດສະຣູ້ |
| ໑໖. ສະພາວະທີ່ເປັນໃຫຍ່ແຫ່ງມັກ | ມີສະພາວະຕັດສະຣູ້ |

ສັດຈະ ໔ ທ່ານສົງເຄາະເຂົ້າກັບສະພາວະຕັດສະຣູ້ ດ້ວຍອາການ ໑໖ ແນວນີ້

ສັດຈະໃດທ່ານສົງເຄາະເຂົ້ານຳກັນ ສັດຈະນັ້ນເປັນສະພາວະດຽວ ພຣະໂຍຄາວະຈອນ ຍ່ອມຮູ້ແຈ້ງສັດຈະທີ່ເປັນສະພາວະດຽວ ດ້ວຍຍານດຽວ ຍ້ອນເຫດນັ້ນ ສັດຈະ ໔ ຈຶ່ງມີການຮູ້ແຈ້ງດ້ວຍຍານດຽວ

[໑໒] ສັດຈະມີລັກສະນະເທົ່າໃດ ສັດຈະມີລັກສະນະ ໒ ຄື

| | |
|---|---|
| ໑. ສັງຂະຕະລັກສະນະ | (ລັກສະນະແຫ່ງທຳທີ່ມີປັດໄຈປຸງແຕ່ງ) |
| ໒. ອະສັງຂະຕະລັກສະນະ | (ລັກສະນະແຫ່ງທຳທີ່ປັດໄຈບໍ່ປຸງແຕ່ງ) |

ສັດຈະມີລັກສະນະ ໒ ຢ່າງນີ້

ສັດຈະມີລັກສະນະເທົ່າໃດ ສັດຈະມີລັກສະນະ ໖ ຄື

໑. ສັດຈະທີ່ປັດໄຈປຸງແຕ່ງ ມີຄວາມເກີດຜາກົດ

๔. ສັດຈະທີ່ປັດໄຈປຸງແຕ່ງ ມີຄວາມເສື່ອມຜາກົດ
๓. ສັດຈະທີ່ປັດໄຈປຸງແຕ່ງ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນຜາກົດ
๔. ສັດຈະທີ່ປັດໄຈບໍ່ປຸງແຕ່ງ ຄວາມເກີດບໍ່ຜາກົດ
໕. ສັດຈະທີ່ປັດໄຈບໍ່ປຸງແຕ່ງ ຄວາມເສື່ອມບໍ່ຜາກົດ
໖. ສັດຈະທີ່ປັດໄຈບໍ່ປຸງແຕ່ງ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນບໍ່ຜາກົດ

ສັດຈະມີລັກສະນະ ໖ ຢ່າງນີ້
ສັດຈະມີລັກສະນະເທົ່າໃດ ສັດຈະມີລັກສະນະ ໑໒ ຄື

໑. ທຸກຂະສັດ ມີຄວາມເກີດຜາກົດ
໒. ທຸກຂະສັດ ມີຄວາມເສື່ອມຜາກົດ
໓. ທຸກຂະສັດ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນຜາກົດ
໔. ສະມຸທະຍະສັດ ມີຄວາມເກີດຜາກົດ
໕. ສະມຸທະຍະສັດ ມີຄວາມເສື່ອມຜາກົດ
໖. ສະມຸທະຍະສັດ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນຜາກົດ
໗. ມັກຄະສັດ ມີຄວາມເກີດຜາກົດ
໘. ມັກຄະສັດ ມີຄວາມເສື່ອມຜາກົດ
໙. ມັກຄະສັດ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນຜາກົດ
໑໐. ນິໂຣທະສັດ ຄວາມເກີດບໍ່ຜາກົດ
໑໑. ນິໂຣທະສັດ ຄວາມເສື່ອມບໍ່ຜາກົດ
໑໒. ນິໂຣທະສັດ ເມື່ອຍັງຕັ້ງຢູ່ ຄວາມຜັນປ່ຽນບໍ່ຜາກົດ

ສັດຈະມີລັກສະນະ ໑໒ ຢ່າງນີ້

ສັດຈະ ໔ ເປັນກຸສົນເທົ່າໃດ ເປັນອະກຸສົນເທົ່າໃດ ເປັນອັບພະຍາກະຕະເທົ່າໃດ?

ຄື ສະມຸທະຍະສັດເປັນອະກຸສົນ ມັກຄະສັດເປັນກຸສົນ ນິໂຣທະສັດເປັນອັບພະຍາກະຕະ ທຸກຂະສັດເປັນກຸສົນກໍມີ ເປັນອະກຸສົນກໍມີ ເປັນອັບພະຍາກະຕະກໍມີ ສັດຈະ ໓ ນີ້ ທ່ານສົງເຄາະເຂົ້າກັບ ສັດຈະ ໑ ສັດຈະ ໑ ທ່ານສົງເຄາະເຂົ້າກັບສັດຈະ ໓ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ

ຄຳວ່າ ເພິ່ງມີ ອະທິບາຍວ່າ ເພິ່ງມີໄດ້ເປັນແນວໃດ?

ຄື ທຸກຂະສັດເປັນອະກຸສົນ ສະມຸທະຍະສັດເປັນອະກຸສົນ ສັດຈະ ໒ ນີ້ທ່ານສົງເຄາະເຂົ້າກັບສັດຈະ ໑ ສັດຈະ ໑ ທ່ານສົງເຄາະເຂົ້າກັບສັດຈະ ໒ ດ້ວຍຄວາມເປັນອະກຸສົນ ເພິ່ງມີໄດ້ແນວນີ້

ທຸກຂະສັດເປັນກຸສົນ ມັກຄະສັດເປັນກຸສົນ ສັດຈະ ໔ ທ່ານສົງເຄາະເຂົ້າກັບສັດຈະ ໑ ສັດຈະ ໑ ທ່ານສົງເຄາະເຂົ້າກັບສັດຈະ ໔ ດ້ວຍຄວາມເປັນກຸສົນ ເພິ່ງມີໄດ້ແນວນີ້

ທຸກຂະສັດເປັນອັບພະຍາກະຕະ ນິໂຣທະສັດເປັນອັບພະຍາກະຕະ ສັດຈະ ໔ ທ່ານສົງເຄາະເຂົ້າກັບສັດຈະ ໑ ສັດຈະ ໑ ທ່ານສົງເຄາະເຂົ້າກັບສັດຈະ ໔ ດ້ວຍຄວາມເປັນອັບພະຍາກະຕະ ເພິ່ງມີໄດ້ແນວນີ້

ສັດຈະ ໓ ທ່ານສົງເຄາະເຂົ້າກັບສັດຈະ ໑ ສັດຈະ ໑ ທ່ານສົງເຄາະເຂົ້າກັບສັດຈະ ໓ ດ້ວຍອຳນາດວັດຖຸ (ແລະ) ດ້ວຍປະຣິຍາຍ ເພິ່ງມີໄດ້ແນວນີ້

## ໔. ທຸຕິຍະສູດຕັນຕະບາລີ

### ພຣະບາລີແຫ່ງສູດທີ ໔

[໑໓] ພິກຂຸທັງຫຼາຍ ກ່ອນຕັດສະຣູ້ ເມື່ອເຮົາເປັນໂພທິສັດຍັງບໍ່ໄດ້ຕັດສະຣູ້ ໄດ້ມີຄວາມຄິດດັ່ງນີ້ວ່າ ອັນໃດນໍ ເປັນຄຸນແຫ່ງຮູບ ອັນໃດເປັນໂທດແຫ່ງຮູບ ອັນໃດເປັນເຄື່ອງສະລັດອອກຈາກຮູບ ອັນໃດເປັນຄຸນແຫ່ງເວທະນາ ອັນໃດເປັນໂທດແຫ່ງເວທະນາ ອັນໃດເປັນເຄື່ອງສະລັດອອກຈາກເວທະນາ ອັນໃດເປັນຄຸນແຫ່ງສັນຍາ ອັນໃດເປັນໂທດແຫ່ງສັນຍາ ອັນໃດເປັນເຄື່ອງສະລັດອອກຈາກສັນຍາ ອັນໃດເປັນຄຸນແຫ່ງສັງຂານ ອັນໃດເປັນໂທດແຫ່ງສັງຂານ ອັນໃດເປັນເຄື່ອງສະລັດອອກຈາກສັງຂານ ອັນໃດເປັນຄຸນແຫ່ງວິນຍານ ອັນໃດເປັນໂທດແຫ່ງວິນຍານ ອັນໃດເປັນເຄື່ອງສະລັດອອກຈາກວິນຍານ

ເຮົານັ້ນໄດ້ມີຄວາມຄິດແນວນີ້ອີກວ່າ ສຸກໂສມະນັດ ທີ່ອາໄສຮູບເກີດຂຶ້ນ ນີ້ເປັນຄຸນແຫ່ງຮູບ ຮູບບໍ່ທ່ຽງ ເປັນທຸກ ມີຄວາມຜັນປ່ຽນ ເປັນທຳມະດາ ນີ້ເປັນໂທດແຫ່ງຮູບ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຮູບ ນີ້ເປັນເຄື່ອງສະລັດອອກຈາກຮູບ ສຸກໂສມະນັດທີ່ອາໄສເວທະນາ ຯລຯ ທີ່ອາໄສສັນຍາ ຯລຯ ທີ່ອາໄສສັງຂານ ຯລຯ ສຸກໂສມະນັດທີ່ອາໄສວິນຍານເກີດຂຶ້ນ ນີ້ເປັນຄຸນແຫ່ງວິນຍານ ວິນຍານບໍ່ທ່ຽງ ເປັນທຸກ ມີຄວາມຜັນປ່ຽນເປັນທຳມະດາ ນີ້ເປັນໂທດແຫ່ງວິນຍານ ທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານ ນີ້ເປັນເຄື່ອງສະລັດອອກຈາກວິນຍານ

ເຮົາຍັງບໍ່ຮູ້ທົ່ວເຖິງຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະລັດອອກຈາກອຸປາທານຂັນ ໕ ໂດຍຄວາມເປັນເຄື່ອງສະລັດອອກນີ້ ຕາມຄວາມເປັນຈິງ ພຽງໃດ ເຮົາກໍຍັງບໍ່ຢືນຢັນວ່າເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດ ໃນໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດ ພ້ອມທັງສະມະນະພາມ ເທວະດາແລະມະນຸດ ພຽງນັ້ນ ແຕ່ເມື່ອໃດ ເຮົາໄດ້ຮູ້ທົ່ວເຖິງຄຸນໂດຍຄວາມເປັນຄຸນ ໂທດໂດຍຄວາມເປັນໂທດ ແລະເຄື່ອງສະລັດ

ອອກຈາກອຸປາທານຂັນ ៥ ໂດຍຄວາມເປັນເຄື່ອງສະລັດອອກນີ້ ຕາມຄວາມເປັນຈິງ ເມື່ອນັ້ນ ເຮົາຈຶ່ງຈະຮັບຮອງວ່າເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ ອັນໜຶ່ງ ຍານ ທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ເຈໂຕວິມຸດຕິຂອງເຮົາບໍ່ກຳເຣິບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ພົບໃໝ່ບໍ່ມີອີກແລ້ວ

**ທຸຕິຍະສູດຕັນຕະບາລີ ຈົບ**

## ៨. ທຸຕິຍະສູດຕັນຕະນິດເທດ

### ສະແດງສູດທີ ៨

[១៤] ການຮູ້ແຈ້ງດ້ວຍການລະສຸກໂສມະນັດທີ່ອາໄສຣູບເກີດຂຶ້ນວ່າ ນີ້ເປັນຄຸນແຫ່ງຣູບ ເປັນສະມຸທະຍະສັດ ການຮູ້ແຈ້ງດ້ວຍການກຳນົດຮູ້ຣູບທີ່ບໍ່ທ່ຽງເປັນທຸກ ມີຄວາມຜັນປ່ຽນເປັນທຳມະດາວ່າ ນີ້ເປັນໂທດແຫ່ງຣູບ ເປັນທຸກຂະສັດ ການຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນຣູບວ່າ ນີ້ເປັນເຄື່ອງສະລັດອອກຈາກຣູບ ເປັນນິໂຣທະສັດ ການຮູ້ແຈ້ງດ້ວຍການຈະເລີນທິດຖິ ສັງກັບປະ ວາຈາ ກຳມັນຕະ ອາຊີວະ ວາຍາມະ ສະຕິ ສະມາທິ ໃນຖານະທັງ ៣ ນີ້ເປັນມັກຄະສັດ

ການຮູ້ແຈ້ງດ້ວຍການລະສຸກໂສມະນັດທີ່ອາໄສເວທະນາ ฯลฯ ທີ່ອາໄສສັນຍາ ฯลฯ ທີ່ອາໄສສັງຂານ ฯลฯ ການຮູ້ແຈ້ງດ້ວຍການລະສຸກໂສມະນັດທີ່ອາໄສວິນຍານເກີດຂຶ້ນວ່າ ນີ້ເປັນຄຸນແຫ່ງວິນຍານ ເປັນສະມຸທະຍະສັດ ການຮູ້ແຈ້ງດ້ວຍການກຳນົດຮູ້ວິນຍານທີ່ບໍ່ທ່ຽງ ເປັນທຸກ ມີຄວາມຜັນປ່ຽນເປັນທຳມະດາວ່າ ນີ້ເປັນໂທດແຫ່ງວິນຍານ ເປັນທຸກຂະສັດ ການຮູ້ແຈ້ງດ້ວຍການເຮັດໃຫ້ແຈ້ງທຳເປັນທີ່ກຳຈັດສັນທະຣາຄະ ທຳເປັນທີ່ລະສັນທະຣາຄະໃນວິນຍານວ່າ ນີ້ເປັນເຄື່ອງສະລັດອອກຈາກວິນຍານ ເປັນນິໂຣທະສັດ ການຮູ້ແຈ້ງດ້ວຍການຈະເລີນທິດຖິ ສັງກັບປະ ວາຈາ ກຳມັນຕະ ອາຊີວະ ວາຍາມະ ສະຕິ ສະມາທິ ໃນຖານະທັງ ៣ ນີ້ເປັນມັກຄະສັດ

[១៥] ຄຳວ່າ ສັດຈະ ອະທິບາຍວ່າ ຊື່ວ່າສັດຈະດ້ວຍອາການເທົ່າໃດ
ຄື ຊື່ວ່າສັດຈະດ້ວຍອາການ ៣ ຢ່າງ ໄດ້ແກ່

១. ດ້ວຍມີສະພາວະສະແຫວງຫາ
២. ດ້ວຍມີສະພາວະກຳນົດ
៣. ດ້ວຍມີສະພາວະຮູ້ແຈ້ງ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາ ເປັນແນວໃດ?

ຄື ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ຊະຣາແລະມໍຣະນະມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ຊະຣາແລະມໍຣະນະມີຊາດເປັນເຫດ ມີຊາດເປັນເຫດເກີດ ມີຊາດເປັນກຳເນີດ ມີຊາດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງຊະຣາແລະມໍລະນະ ເຫດເກີດແຫ່ງຊະຣາແລະມໍລະນະ ຄວາມດັບແຫ່ງຊະຣາແລະມໍລະນະ ແລະຂໍ້ ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງຊະຣາແລະມໍລະນະ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ຊາດມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ຊາດມີພົບເປັນເຫດ ມີພົບເປັນເຫດເກີດ ມີພົບເປັນກຳເນີດ ມີພົບເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງຊາດ ເຫດເກີດແຫ່ງຊາດ ຄວາມດັບແຫ່ງຊາດ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງຊາດ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ພົບມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ພົບມີອຸປາທານເປັນເຫດ ມີອຸປາທານເປັນເຫດເກີດ ມີອຸປາທານເປັນກຳເນີດ ມີອຸປາທານເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງພົບ ເຫດເກີດແຫ່ງພົບ ຄວາມດັບແຫ່ງພົບ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງພົບ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ອຸປາທານມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ອຸປາທານມີຕັນຫາເປັນເຫດ ມີຕັນຫາເປັນເຫດເກີດ ມີຕັນຫາເປັນກຳເນີດ ມີຕັນຫາເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງອຸປາທານ ເຫດເກີດແຫ່ງອຸປາທານ ຄວາມດັບແຫ່ງອຸປາທານ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງອຸປາທານ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ຕັນຫາມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ຕັນຫາມີເວທະນາເປັນເຫດ ມີເວທະນາເປັນເຫດເກີດ ມີເວທະນາເປັນກຳເນີດ ມີເວທະນາເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງຕັນຫາ ເຫດເກີດແຫ່ງຕັນຫາ ຄວາມດັບແຫ່ງຕັນຫາ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງຕັນຫາ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ເວທະນາມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະ

ກຳນົດ ແນວນີ້ວ່າ ເວທະນາມີຜັດສະເປັນເຫດ ມີຜັດສະເປັນເຫດເກີດ ມີຜັດສະເປັນກຳເນີດ ມີຜັດສະເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງເວທະນາ ເຫດເກີດແຫ່ງເວທະນາ ຄວາມດັບແຫ່ງເວທະນາ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງເວທະນາ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ຜັດສະມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ຜັດສະມີສະລາຍະຕະນະເປັນເຫດ ມີສະລາຍະຕະນະເປັນເຫດເກີດ ມີສະລາຍະຕະນະເປັນກຳເນີດ ມີສະລາຍະຕະນະເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງຜັດສະ ເຫດເກີດແຫ່ງຜັດສະ ຄວາມດັບແຫ່ງຜັດສະ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງຜັດສະ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ສະລາຍະຕະນະມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ສະລາຍະຕະນະມີນາມຮູບເປັນເຫດ ມີນາມຮູບເປັນເຫດເກີດ ມີນາມຮູບເປັນກຳເນີດ ມີນາມຮູບເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງສະລາຍະຕະນະ ເຫດເກີດແຫ່ງສະລາຍະຕະນະ ຄວາມດັບແຫ່ງສະລາຍະຕະນະ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງສະລາຍະຕະນະ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ນາມຮູບມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ນາມຮູບມີວິນຍານເປັນເຫດ ມີວິນຍານເປັນເຫດເກີດ ມີວິນຍານເປັນກຳເນີດ ມີວິນຍານເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງເຊິ່ງ ນາມຮູບ ເຫດເກີດແຫ່ງນາມຮູບ ຄວາມດັບແຫ່ງນາມຮູບ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງນາມຮູບ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ວິນຍານມີອັນໃດເປັນເຫດ ມີອັນໃດເປັນເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດແນວນີ້ວ່າ ວິນຍານມີສັງຂານເປັນເຫດ ມີສັງຂານເປັນເຫດເກີດ ມີສັງຂານເປັນກຳເນີດ ມີສັງຂານເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງ ເຊິ່ງວິນຍານ ເຫດເກີດແຫ່ງວິນຍານ ຄວາມດັບແຫ່ງວິນຍານ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງວິນຍານ

ຊື່ວ່າສັດຈະດ້ວຍມີສະພາວະສະແຫວງຫາແນວນີ້ວ່າ ສັງຂານມີອັນໃດເປັນເຫດ ມີອັນໃດເປັນ ເຫດເກີດ ມີອັນໃດເປັນກຳເນີດ ມີອັນໃດເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະກຳນົດ ແນວນີ້ວ່າ ສັງຂານມີອະວິດຊາເປັນເຫດ ມີອະວິດຊາເປັນເຫດເກີດ ມີອະວິດຊາເປັນກຳ

ເນີດ ມີອະວິດຊາເປັນແດນເກີດ ຊື່ວ່າສັດຈະດ້ວຍມີສະພາວະຮູ້ແຈ້ງແນວນີ້ວ່າ ຍານຮູ້ຊັດແຈ້ງ ເຊິ່ງສັງຂານ ເຫດເກີດແຫ່ງສັງຂານ ຄວາມດັບແຫ່ງສັງຂານ ແລະຂໍ້ປະຕິບັດທີ່ໃຫ້ເຖິງຄວາມດັບແຫ່ງສັງຂານ

[໑໙] ຊະຣາແລະມໍຣະນະເປັນທຸກຂະສັດ ຊາດເປັນສະມຸທະຍະສັດ ການສະລັດຊະຣາມໍຣະນະ ແລະຊາດແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງຊະຣາມໍຣະນະແລະຊາດເປັນມັກຄະສັດ

ຊາດເປັນທຸກຂະສັດ ພົບເປັນສະມຸທະຍະສັດ ການສະລັດອອກຈາກຊາດ ແລະພົບແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງຊາດ ແລະພົບເປັນມັກຄະສັດ

ພົບເປັນທຸກຂະສັດ ອຸປາທານເປັນສະມຸທະຍະສັດ ການສະລັດອອກຈາກພົບ ແລະອຸປາທານແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບພົບແລະອຸປາທານເປັນມັກຄະສັດ

ອຸປາທານເປັນທຸກຂະສັດ ຕັນຫາເປັນສະມຸທະຍະສັດ ການສະລັດອອກຈາກອຸປາທານແລະຕັນຫາແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງອຸປາທານແລະຕັນຫາເປັນມັກຄະສັດ

ຕັນຫາເປັນທຸກຂະສັດ ເວທະນາເປັນສະມຸທະຍະສັດ ການສະລັດອອກຈາກຕັນຫາແລະເວທະນາແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງຕັນຫາແລະເວທະນາເປັນມັກຄະສັດ

ເວທະນາເປັນທຸກຂະສັດ ຜັດສະເປັນສະມຸທະຍະສັດ ການສະລັດອອກຈາກເວທະນາແລະຜັດສະແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງເວທະນາແລະຜັດສະເປັນມັກຄະສັດ

ຜັດສະເປັນທຸກຂະສັດ ສະລາຍະຕະນະເປັນສະມຸທະຍະສັດ ການສະລັດອອກຈາກຜັດສະແລະສະລາຍະຕະນະ ແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງຜັດສະແລະສະລາຍະຕະນະເປັນມັກຄະສັດ

ສະລາຍະຕະນະເປັນທຸກຂະສັດ ນາມຣູບເປັນສະມຸທະຍະສັດ ການສະລັດອອກຈາກສະລາຍະຕະນະແລະນາມຣູບແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງສະລາຍະຕະນະແລະນາມຣູບເປັນມັກຄະສັດ

ນາມຣູບເປັນທຸກຂະສັດ ວິນຍານເປັນສະມຸທະຍະສັດ ການສະລັດອອກຈາກນາມຣູບແລະວິນຍານແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງນາມຣູບແລະວິນຍານເປັນມັກຄະສັດ

ວິນຍານເປັນທຸກຂະສັດ ສັງຂານເປັນສະມຸທະຍະສັດ ການສະລັດອອກຈາກວິນຍານແລະສັງຂານແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງວິນຍານແລະສັງຂານເປັນມັກຄະສັດ

ສັງຂານເປັນທຸກຂະສັດ ອະວິດຊາເປັນສະມຸທະຍະສັດ ການສະລັດອອກຈາກສັງຂານ ແລະອະວິດຊາແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງສັງຂານແລະອະວິດ ຊາເປັນມັກຄະສັດ

ຊະຣາແລະມໍຣະນະເປັນທຸກຂະສັດ ຊາດເປັນທຸກຂະສັດກໍມີ ເປັນສະມຸທະຍະສັດກໍມີ ການສະລັດອອກຈາກຊະຣາມໍຣະນະແລະຊາດແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງ ຄວາມດັບແຫ່ງຊະຣາມໍຣະນະແລະຊາດເປັນມັກຄະສັດ

ຊາດເປັນທຸກຂະສັດກໍມີ ເປັນສະມຸທະຍະສັດກໍມີ ພົບເປັນທຸກຂະສັດກໍມີ ເປັນສະມຸທະ ຍະສັດກໍມີ ການສະລັດອອກຈາກຊາດແລະພົບແມ່ນທັງສອງເປັນນິໂຣທະສັດ ການຮູ້ຊັດແຈ້ງ ຄວາມດັບແຫ່ງຊາດແລະພົບເປັນມັກຄະສັດ ຯລຯ ສັງຂານເປັນທຸກຂະສັດ ອະວິດຊາເປັນທຸກ ຂະສັດກໍມີ ເປັນສະມຸທະຍະສັດກໍມີ ການສະລັດສັງຂານແລະອະວິດຊາແມ່ນທັງສອງເປັນນິໂຣ ທະສັດ ການຮູ້ຊັດແຈ້ງຄວາມດັບແຫ່ງສັງຂານແລະອະວິດຊາເປັນມັກຄະສັດ ແນວນີ້ແລ

**ທຸຕິຍະສູດຕັນຕະນິດເທດ ຈົບ**

**ສັດຈະກະຖາ ຈົບ**

**ພານະວານ ຈົບ**

# ๓. ໂພດຊັງຄະກະຖາ

## ວ່າດ້ວຍໂພດຊົງ

[๑๗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ
ພິກຂຸທັງຫຼາຍ ໂພດຊົງ ๗ ປະການນີ້
ໂພດຊົງ ๗ ປະການ ມີອັນໃດແດ່ ຄື

๑. ສະຕິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມຣະລຶກໄດ້)
๒. ທໍາມະວິຈະຍະສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືການເລືອກເຟັ້ນທໍາ)
๓. ວິຣິຍະສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມພຽນ)
๔. ປີຕິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມອີ່ມໃຈ)
๕. ປັດສັດທິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມສະງົບກາຍສະງົບໃຈ)
๖. ສະມາທິສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມຕັ້ງຈິດໝັ້ນ)
๗. ອຸເປກຂາສໍາໂພດຊົງ (ທໍາເປັນອົງແຫ່ງການຕັດສະຣູ້ຄືຄວາມມີໃຈເປັນກາງ)

ພິກຂຸທັງຫຼາຍ ໂພດຊົງ ໆ ປະການນີ້ແລ

ຄຳວ່າ ໂພດຊົງ ອະທິບາຍວ່າ ຊື່ວ່າໂພດຊົງ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າໂພດຊົງ ຍ້ອນເປັນໄປໃນຄວາມຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ ຊື່ວ່າ ໂພດຊົງ ຍ້ອນຕັດສະຣູ້ຕາມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະເພາະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ພ້ອມ

ຊື່ວ່າໂພດຊົງ ຍ້ອນມີສະພາວະຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະຕັດສະຣູ້ຕາມ ຊື່ວ່າໂພດຊົງ ຍ້ອນມີສະພາວະຕັດສະຣູ້ສະເພາະ ຊື່ວ່າໂພດຊົງ ຍ້ອນມີສະພາວະຕັດສະຣູ້ພ້ອມ (໑)

ຊື່ວ່າໂພດຊົງ ຍ້ອນໃຫ້ຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນໃຫ້ຕັດສະຣູ້ຕາມ ຊື່ວ່າໂພດຊົງ ຍ້ອນໃຫ້ຕັດສະຣູ້ສະເພາະ ຊື່ວ່າໂພດຊົງ ຍ້ອນໃຫ້ຕັດສະຣູ້ພ້ອມ (໒)

ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ຕັດສະຣູ້ຕາມ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ຕັດສະຣູ້ສະເພາະ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ຕັດສະຣູ້ພ້ອມ (໓)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນໄປໃນທຳຝ່າຍຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນໄປໃນທຳຝ່າຍຕັດສະຣູ້ຕາມ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນໄປໃນທຳຝ່າຍຕັດສະຣູ້ສະເພາະ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນໄປໃນທຳຝ່າຍຕັດສະຣູ້ພ້ອມ (໔)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນເຫດໃຫ້ໄດ້ຄວາມຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະປູກຄວາມຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະບຳຣຸງຄວາມຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມຕັດສະຣູ້ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງພ້ອມຄວາມຕັດສະຣູ້ (໕)

## ມູລະມູລະກາທິທະສະກະ

### ວ່າດ້ວຍໝວດ ໑໐ ແຫ່ງທຳທີ່ເປັນມູນມີສະພາວະເປັນມູນເປັນຕົ້ນ

[໑໗] ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະດຳເນີນໄປໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະກຳນົດທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນທຳທີ່ເປັນມູນ ຊື່ວ່າໂພດຊົງ ແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນທຳທີ່ເປັນມູນ (໑)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະດໍາເນີນໄປໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະກໍານົດທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊໍານານໃນຄວາມແຕກສານໃນທໍາທີ່ເປັນເຫດ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊໍານານໃນຄວາມແຕກສານໃນທໍາທີ່ເປັນເຫດ (໘)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະດໍາເນີນໄປໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະກໍານົດທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊໍານານໃນຄວາມແຕກສານໃນທໍາທີ່ເປັນປັດໄຈ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊໍານານໃນຄວາມແຕກສານໃນທໍາທີ່ເປັນປັດໄຈ (໙)

ຊື່ວ່າໂພດຊົງ ຍ້ອນມີສະພາວະມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະດໍາເນີນໄປໃນຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະກໍານົດຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນຄວາມມົດຈົດ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊໍານານໃນຄວາມແຕກສານໃນຄວາມມົດຈົດ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊໍານານໃນຄວາມແຕກສານໃນຄວາມມົດຈົດ (໔)

ຊື່ວ່າໂພດຊົງ ຍ້ອນມີສະພາວະບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະດໍາເນີນໄປໃນຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະກໍານົດຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນຄວາມບໍ່ມີໂທດ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊໍານານໃນຄວາມແຕກສານໃນ

ຄວາມບໍ່ມີໂທດ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນຄວາມບໍ່ມີໂທດ (໕)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະດຳເນີນໄປໃນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະກຳນົດເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນເນກຂຳມະ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນເນກຂຳມະ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນເນກຂຳມະ (໖)

ຊື່ວ່າໂພດຊົງ ຍ້ອນມີສະພາວະລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະດຳເນີນໄປໃນຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະກຳນົດຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນຄວາມລຸດພົ້ນ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນຄວາມລຸດພົ້ນ (໗)

ຊື່ວ່າໂພດຊົງ ຍ້ອນມີສະພາວະບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະດຳເນີນໄປໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະກຳນົດຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊົງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນຄວາມບໍ່ມີອາສະວະ (໘)

ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະດຳເນີນໄປໃນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະກຳນົດວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະເປັນບໍລິວານແຫ່ງວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະເຕັມຮອບໃນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະແກ່ກ້າໃນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະແຕກສານໃນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນວິເວກ ຊື່ວ່າໂພດຊົງ ຍ້ອນມີສະພາວະຈະເລີນ

ຄວາມຊຳນານໃນຄວາມແຕກສານໃນວິເວກ ຊື່ວ່າໂພດຊິງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນວິເວກ (໗)

ຊື່ວ່າໂພດຊິງ ຍ້ອນມີສະພາວະອິດສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະດຳເນີນໄປໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະກຳນົດຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະເປັນບໍລິວານແຫ່ງຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະເຕັມຮອບໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະແກ່ກ້າໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະແຕກສານໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະໃຫ້ເຖິງຄວາມແຕກສານໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນມີສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນຄວາມສະລະ ຊື່ວ່າໂພດຊິງແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນຄວາມສະລະ (໑໐)

[໑໗] ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນມູນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນປັດໄຈ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ມົດຈົດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີໂທດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເນກຂຳມະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ລຸດພົ້ນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີອາສະວະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນວິເວກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ອິດສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນທຳທີ່ເປັນມູນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນທຳທີ່ເປັນເຫດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນທຳທີ່ເປັນປັດໄຈ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນຄວາມມົດຈົດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນຄວາມບໍ່ມີໂທດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນເນກຂຳມະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນຄວາມລຸດພົ້ນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນຄວາມບໍ່ມີອາສະວະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນວິເວກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະດຳເນີນໄປໃນຄວາມສະລະ

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະກຳນົດທຳທີ່ເປັນມູນ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະກຳນົດຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນບໍລິວານແຫ່ງທຳທີ່ເປັນມູນ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນບໍລິວານແຫ່ງຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເຕັມຮອບແຫ່ງທຳທີ່ເປັນມູນ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະເຕັມຮອບໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ແກ່ກ້າໃນທຳທີ່ເປັນມູນ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ແກ່ກ້າໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະຄວາມແຕກສານໃນທຳທີ່ເປັນມູນ ຯລຯ ຊື່ວ່າໂພດຊິງ

ຍ້ອນຕັດສະຣູ້ສະພາວະຄວາມແຕກສານໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ເຖິງຄວາມແຕກສານໃນທຳທີ່ເປັນມູນ ໗໑໗ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ເຖິງຄວາມແຕກສານໃນຄວາມສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະຈະເລີນຄວາມຊຳນານໃນຄວາມແຕກສານໃນທຳທີ່ເປັນມູນ ໗໑໗ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຈະເລີນຄວາມຊຳນານໃນຄວາມແຕກສານໃນຄວາມສະລະ (ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນທຳທີ່ເປັນມູນ ໗໑໗ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະແມ່ນຂອງບຸກຄົນຜູ້ເຖິງຄວາມຊຳນານໃນຄວາມແຕກສານໃນຄວາມສະລະ)

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຄວບກຳນົດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນບໍລິວານ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເຕັມຮອບ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຟຸ້ງຊ່ານ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ປະຄອງໄວ້ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ກະຈັດກະຈາຍໄປ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຂຸ່ນມົວ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຫວັ່ນໄຫວ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງຢູ່ດ້ວຍອຳນາດຄວາມຜາກົດແຫ່ງຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນອາລົມ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນໂຄຈອນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ສະລະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ອອກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຫຼີກໄປ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ລະອຽດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ປະນີດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ລຸດພົ້ນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີອາສະວະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະເຄື່ອງຂ້າມ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີນິມິດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີບ່ອນຕັ້ງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ວ່າງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ມີຣົດເປັນແນວດຽວກັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ລ່ວງເລີຍກັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະແຫ່ງທຳທີ່ເປັນຄູ່ກັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະເຄື່ອງນຳອອກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເຫັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນໃຫຍ່

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສະມະຖະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ພິຈາລະນາເຫັນແຫ່ງວິປັດສະນາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ມີຣົດເປັນແນວດຽວກັນແຫ່ງສະມະຖະແລະວິປັດສະນາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ລ່ວງເລີຍກັນແຫ່ງທຳທີ່ເປັນຄູ່ກັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ສະມາທານແຫ່ງສິກຂາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນໂຄຈອນແຫ່ງອາລົມ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປະຄອງຈິດທີ່ຫຍໍ້ທໍ້ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຂົ່ມຈິດທີ່ຟຸ້ງຊ່ານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຄຸມຈິດອັນບໍລິສຸດຈາກຄວາມຫຍໍ້ທໍ້ ແລະຄວາມຟຸ້ງຊ່ານທັງ ໒ ປະການ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບັນລຸຄຸນວິເສດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ແຈ້ງອະຣິຍະມັກອັນປະເສີດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້ສັດຈະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ຈິດຕັ້ງຢູ່ສະເພາະໃນນິໂຣດ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນ້ອມໃຈເຊື່ອແຫ່ງສັດທິນຊີ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຫັນແຫ່ງປັນຍິນຊີ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຫວັ່ນໄຫວ ຍ້ອນຄວາມບໍ່ມີສັດທາແຫ່ງສັດທາພະລະ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຫວັ່ນໄຫວ ຍ້ອນອະວິດຊາແຫ່ງປັນຍາພະລະ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນແຫ່ງສະຕິສຳໂພດຊົງ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ພິຈາລະນາແຫ່ງອຸເປກຂາສຳໂພດຊົງ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຫັນແຫ່ງສຳມາທິດຖິ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສຳມາສະມາທິ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໃຫຍ່ແຫ່ງອິນຊີ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຫວັ່ນໄຫວແຫ່ງພະລະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຳອອກແຫ່ງໂພດຊົງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດແຫ່ງມັກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນແຫ່ງສະຕິປັດຖານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເລີ່ມຕັ້ງແຫ່ງສຳມັບປະທານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສຳເລັດແຫ່ງອິດທິບາດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນຂອງແທ້ແຫ່ງສັດຈະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະງົບຣະງັບແຫ່ງມັກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ແຈ້ງແຫ່ງຜົນ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຶກຕອງແຫ່ງວິຕົກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ກວດກາແຫ່ງວິຈານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ແຜ່ໄປແຫ່ງປີຕິ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໄຫຼມາແຫ່ງສຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນເອກັກຄະຕາຣົມແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຶກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ແຈ້ງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ຊັດແຈ້ງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຈຳໄດ້ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນທຳເອກຜຸດຂື້ນ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຄວນຣູ້ຍິ່ງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ພິຈາລະນາແຫ່ງປະຣິນຍາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະລະແຫ່ງປະຫາ

ນະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ມີຣົດເປັນແນວດຽວກັນແຫ່ງພາວະນາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຖືກຕ້ອງແຫ່ງສັດສິກິຣິຍາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນກອງແຫ່ງຂັນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຊົງໄວ້ແຫ່ງທາດທັງຫຼາຍ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕໍ່ແຫ່ງອາຍະຕະນະທັງຫຼາຍ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປັດໄຈປຸງແຕ່ງແຫ່ງສັງຂະຕະທຳ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປັດໄຈບໍ່ໄດ້ປຸງແຕ່ງແຫ່ງອະສັງຂະຕະທຳ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ມີລະຫວ່າງຄັ່ນແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອອກແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະຫຼີກໄປແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນປັດໄຈແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນພູມແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນອາລົມແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໂຄຈອນແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ທ່ຽວໄປແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໄປແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຳໄປແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຳອອກແຫ່ງຈິດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະລັດອອກແຫ່ງຈິດ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຶກໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຮູ້ແຈ້ງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຮູ້ຊັດແຈ້ງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຈຳໄດ້ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນທຳເອກຜຸດຂຶ້ນໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະ ທີ່ເນື່ອງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ແລ່ນໄປສູ່ຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຜ່ອງໃສໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ລຸດພົ້ນໃນຈິດທີ່ເປັນເອກັກຄະຕາຣົມ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຫັນວ່າ ນີ້ລະອຽດ ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ເປັນເໝືອນຍານໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ເປັນບ່ອນຕັ້ງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງຂຶ້ນເນືອງ ໆ ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອົບຮົມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດ

ສະຣູ້ສະພາວະທີ່ຜາຣົບສະເໝີດີໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ກຳນົດໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນບໍລິວານໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຕັມຮອບໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປະຊຸມລົງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະທິຖານໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປະຕິບັດໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຈະເລີນໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ຫຼາຍໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ລວມດີໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ລຸດພົ້ນດ້ວຍດີໃນຈິດທີ່ເປັນເອກັກຄະຕາຣົມ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ຕັດສະຣູ້ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ໃຫ້ຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ຕາມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໄປໃນຝ່າຍໃຫ້ຕັດສະຣູ້ສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນໄປໃນຝ່າຍຕັດສະຣູ້ພ້ອມໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະຫວ່າງໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະຫວ່າງຂຶ້ນໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະຫວ່າງເນືອງ ໆ ໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະຫວ່າງສະເພາະໃນຈິດທີ່ເປັນເອກັກຄະຕາຣົມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສະຫວ່າງພ້ອມໃນຈິດທີ່ເປັນເອກັກຄະຕາຣົມ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກໃຫ້ສະຫວ່າງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກໃຫ້ຮຸ່ງເຮືອງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກເຮັດໃຫ້ກິເລດຮ້ອນຮົນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກບໍ່ມີມົນທິນ ຊື່ວ່າ

ໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກປາສະຈາກມົນທິນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກໝົດມົນທິນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຄວາມສະງົບ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ອະຣິຍະມັກເຮັດໃຫ້ກິເລດຣະງັບ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງວິເວກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ດຳເນີນໄປໃນວິເວກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຄວາມຄາຍກຳໜັດ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ດຳເນີນໄປໃນຄວາມຄາຍກຳໜັດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຄວາມດັບ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ດຳເນີນໄປໃນຄວາມດັບ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຄວາມສະລະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ດຳເນີນໄປໃນຄວາມສະລະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຄວາມລຸດພົ້ນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ດຳເນີນໄປໃນຄວາມລຸດພົ້ນ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນມູນແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນບາດແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນປະທານແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສຳເລັດແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນ້ອມໄປແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປະຄອງໄວ້ແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງສັນທະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຫັນແຫ່ງສັນທະ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງວິຣິຍະ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງຈິດ ຯລຯ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນມູນແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນບາດແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເປັນປະທານແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ສຳເລັດແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນ້ອມໄປແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປະຄອງໄວ້ແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຕັ້ງໝັ້ນແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບໍ່ຟຸ້ງຊ່ານແຫ່ງວິມັງສາ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຫັນແຫ່ງວິມັງສາ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງທຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ບີບຄັ້ນແຫ່ງທຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ປັດໄຈປຸງແຕ່ງແຫ່ງທຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ເດືອດຮ້ອນແຫ່ງທຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ຜັນປ່ຽນແຫ່ງທຸກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະແຫ່ງສະມຸໄທ ຊື່ວ່າໂພດຊົງ ຍ້ອນຕັດ

ສະຣູ້ສະພາວະທີ່ປະມວນມາແຫ່ງສະມຸໄທ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດເກີດແຫ່ງສະມຸໄທ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ກ່ຽວຂ້ອງແຫ່ງສະມຸໄທ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ພົວພັນແຫ່ງສະມຸໄທ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະແຫ່ງນິໂຣດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຄື່ອງສະລັດອອກແຫ່ງນິໂຣດ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນວິເວກແຫ່ງນິໂຣດ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນອະສັງຂະຕະແຫ່ງນິໂຣດ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນອະມະຕະແຫ່ງນິໂຣດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະແຫ່ງມັກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ນຳອອກແຫ່ງມັກ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນເຫດແຫ່ງມັກ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເຫັນແຫ່ງມັກ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນໃຫຍ່ແຫ່ງມັກ

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນຂອງແທ້ ຊື່ວ່າໂພດຊິງ ຍ້ແນຕັດສະຣູ້ສະພາວະທີ່ເປັນອະນັດຕາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນຂອງຈິງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ແຈ້ງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ຍິ່ງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ກຳນົດຣູ້ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນທຳ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເປັນທາດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຣູ້ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ເຮັດໃຫ້ແຈ້ງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຖືກຕ້ອງ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະພາວະທີ່ຕັດສະຣູ້

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ເນກຂຳມະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ອະພະຍາບາດ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ອາໂລກະສັນຍາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ອະວິກເຂປະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ທຳມະວະວັດຖານ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ຍານ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ປາມຸດຊະ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ປະຖົມຊານ ຯລຯ ຊື່ວ່າ ໂພດຊິງ ຍ້ອນຕັດສະຣູ້ອະຣະຫັດຕະມັກ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ອະຣະຫັດຕະຜົນສະມາບັດ

ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສັດທິນຊີດ້ວຍສະພາວະນ້ອມໃຈເຊື່ອ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ປັນຍິນຊີດ້ວຍສະພາວະເຫັນ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສັດທາພະລະດ້ວຍສະພາວະບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ປັນຍາພະລະດ້ວຍສະພາວະບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ສະຕິສຳໂພດຊິງດ້ວຍສະພາວະຕັ້ງໝັ້ນ ຯລຯ ຊື່ວ່າໂພດຊິງ ຍ້ອນຕັດສະຣູ້ອຸເປກຂາ ສຳໂພດຊິງດ້ວຍສະພາວະພິຈາລະນາ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສຳມາທິດຖິດ້ວຍສະພາວະເຫັນ ໗ລ໗ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສຳມາສະມາທິດ້ວຍສະພາວະບໍ່ຟຸ້ງຊ່ານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ອິນຊີ ດ້ວຍສະພາວະເປັນໃຫຍ່ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ພະລະດ້ວຍສະພາວະບໍ່ຫວັ່ນໄຫວ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະພາວະທີ່ນຳອອກ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ມັກດ້ວຍສະພາວະເປັນເຫດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະຕິປັດຖານດ້ວຍສະພາວະຕັ້ງໝັ້ນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສຳມັບປະທານດ້ວຍສະພາວະຕັ້ງໄວ້ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ອິດທິບາດດ້ວຍສະພາວະໃຫ້ສຳເລັດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສັດຈະດ້ວຍສະພາວະເປັນຂອງແທ້ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະມະຖະດ້ວຍສະພາວະບໍ່ຟຸ້ງຊ່ານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ວິປັດສະນາດ້ວຍສະພາວະພິຈາລະນາເຫັນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະມະຖະແລະວິປັດສະນາດ້ວຍສະພາວະມີຣົດເປັນແນວດຽວກັນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ທຳທີ່ເປັນຄູ່ກັນດ້ວຍສະພາວະບໍ່ລ່ວງເລີຍກັນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສີລະວິສຸດທິດ້ວຍສະພາວະສັງລວມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ຈິດຕະວິສຸດທິດ້ວຍສະພາວະບໍ່ຟຸ້ງຊ່ານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ທິດຖິວິສຸດທິດ້ວຍສະພາວະເຫັນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ວິໂມກດ້ວຍສະພາວະລຸດພົ້ນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ວິດຊາດ້ວຍສະພາວະຮູ້ແຈ້ງ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ວິມຸດຕິດ້ວຍສະພາວະສະລະ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ຍານໃນຄວາມສິ້ນໄປດ້ວຍສະພາວະຕັດຂາດ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ອະນຸບປາທະຍານດ້ວຍສະພາວະສະງົບຣະງັບ

ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສັນທະດ້ວຍສະພາວະເປັນມູນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ມະນະສິການດ້ວຍສະພາວະເປັນສະມຸດຖານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ຜັດສະດ້ວຍສະພາວະເປັນທີ່ລວມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ເວທະນາດ້ວຍສະພາວະເປັນທີ່ປະຊຸມ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະມາທິດ້ວຍສະພາວະເປັນປະທານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ສະຕິ ດ້ວຍສະພາວະເປັນໃຫຍ່ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ປັນຍາດ້ວຍສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ວິມຸດຕິດ້ວຍສະພາວະເປັນແກ່ນສານ ຊື່ວ່າໂພດຊົງ ຍ້ອນຕັດສະຣູ້ທຳທີ່ຢັ່ງລົງສູ່ອະມະຕະຄືນິບພານດ້ວຍສະພາວະເປັນບ່ອນສຸດ

[໔໐] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ ໃນບ່ອນນັ້ນ ທ່ານພຣະສາຣີບຸດຮຽກພິກຂຸທັງຫຼາຍມາກ່າວວ່າ ທ່ານທັງຫຼາຍ ພິກຂຸເຫຼົ່ານັ້ນຮັບຄຳແລ້ວ ທ່ານພຣະສາຣີບຸດຈຶ່ງໄດ້ກ່າວເລື້ອງນີ້ວ່າ ທ່ານທັງຫຼາຍ ໂພດຊົງ ກ ປະການນີ້ ໂພດຊົງ ກ ປະການມີອັນໃດແດ່ ຄື

໑. ສະຕິສຳໂພດຊົງ ໗ລ໗ ກ. ອຸເປກຂາສຳໂພດຊົງ

ໂພດຊົງ ກ ປະການນີ້ແລ ເຮົານັ້ນປະສົງຈະຢູ່ໃນເວລາເຊົ້າດ້ວຍໂພດຊົງໃດ ໆ ບັນດາໂພດຊົງ ກ ປະການນີ້ ເຮົາກໍຢູ່ໃນເວລາເຊົ້າດ້ວຍໂພດຊົງນັ້ນ ໆ ປະສົງຈະຢູ່ໃນເວລາທ່ຽງ

ຯລຯ ໃນເວລາຄ່ຳດ້ວຍໂພດຊົງໃດ ໆ ເຮົາກໍຢູ່ໃນເວລາຄ່ຳດ້ວຍໂພດຊົງນັ້ນ ໆ ຖ້າສະຕິສຳໂພດຊົງຂອງເຮົາມີຢູ່ດັ່ງນີ້ ສະຕິສຳໂພດຊົງຂອງເຮົາ ກໍຊື່ວ່າຫາປະມານບໍ່ໄດ້ ຊື່ວ່າເຮົາຜາຣົບສະເໝີດີແລ້ວ

ເມື່ອເຮົາກຳລັງທ່ຽວໄປ ຍ່ອມຮູ້ຊັດແຈ້ງ ສະຕິສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າແມ່ນສະຕິສຳໂພດຊົງຂອງເຮົາເຄື່ອນໄປ ກໍຮູ້ຊັດແຈ້ງວ່າ ສະຕິສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ຯລຯ ທ່ານທັງຫຼາຍ ຖ້າອຸເປກຂາສຳໂພດຊົງຂອງເຮົາມີຢູ່ດັ່ງນີ້ ອຸເປກຂາສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ ຊື່ວ່າເຮົາຜາຣົບສະເໝີດີແລ້ວ ເມື່ອເຮົາກຳລັງທ່ຽວໄປຍ່ອມຮູ້ຊັດແຈ້ງອຸເປກຂາສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າແມ່ນອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປ ກໍຮູ້ຊັດແຈ້ງວ່າ ອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້

ທ່ານທັງຫຼາຍ ປຽບເໝືອນຕູ້ເກັບຜ້າຂອງພຣະຣາຊາຫຼືຂອງມະຫາອຳມາດຂອງພຣະຣາຊາ ເຕັມດ້ວຍຜ້າສີຕ່າງ ໆ ພຣະຣາຊາຫຼືມະຫາອຳມາດນັ້ນປະສົງຈະໃຊ້ຜ້າຄູ່ໃດໃນເວລາເຊົ້າ ກໍໃຊ້ຜ້າຄູ່ນັ້ນນັ້ນໃນເວລາເຊົ້າ ປະສົງຈະໃຊ້ຜ້າຄູ່ໃດໃນເວລາທ່ຽງ ຯລຯ ໃນເວລາຄ່ຳ ກໍໃຊ້ຜ້າຄູ່ນັ້ນນັ້ນໃນເວລາຄ່ຳ ສັນໃດ ເຮົາກໍສັນນັ້ນຄືກັນ ປະສົງຈະຢູ່ໃນເວລາເຊົ້າດ້ວຍໂພດຊົງໃດ ໆ ບັນດາໂພດຊົງ ໗ ປະການນີ້ ກໍຢູ່ໃນເວລາເຊົ້າດ້ວຍໂພດຊົງນັ້ນ ໆ ປະສົງຈະຢູ່ໃນເວລາທ່ຽງ ຯລຯ ໃນເວລາຄ່ຳດ້ວຍໂພດຊົງໃດ ໆ ກໍຢູ່ດ້ວຍໂພດຊົງນັ້ນ ໆ ຖ້າສະຕິສຳໂພດຊົງຂອງເຮົາມີຢູ່ດັ່ງນີ້ ສະຕິສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ ຊື່ວ່າເຮົາຜາຣົບສະເໝີດີແລ້ວ ເມື່ອເຮົາກຳລັງທ່ຽວໄປ ຍ່ອມຮູ້ຊັດແຈ້ງສະຕິສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າແມ່ນສະຕິ ສຳໂພດຊົງຂອງເຮົາເຄື່ອນໄປກໍຮູ້ວ່າ ສະຕິສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ຯລຯ ຖ້າອຸເປກຂາສຳໂພດຊົງຂອງເຮົາມີຢູ່ດັ່ງນີ້ ອຸເປກຂາສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ ຊື່ວ່າເຮົາຜາຣົບສະເໝີດີແລ້ວ ເມື່ອເຮົາກຳລັງທ່ຽວໄປຍ່ອມຮູ້ຊັດແຈ້ງອຸເປກຂາ ສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປ ກໍຮູ້ຊັດແຈ້ງ ວ່າ ອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້

## ສູດຕັນຕະນິດເທດ

### ສະແດງພຣະສູດ

[໔໑] ໂພດຊົງ ໃນຂໍ້ວ່າ ຖ້າສະຕິສຳໂພດຊົງຂອງເຮົາມີຢູ່ ດັ່ງນີ້ ມີຢູ່ເປັນແນວໃດ?

ຄື ນິໂຣດຜາກົດພຽງໃດ ໂພດຊົງໃນຂໍ້ວ່າ ຖ້າສະຕິສຳໂພດຊົງຂອງເຮົາມີຢູ່ ດັ່ງນີ້ກໍມີພຽງນັ້ນ ເໝືອນປະທີບນ້ຳມັນກຳລັງສະຫວ່າງຢູ່ ແປວໄຟມີພຽງໃດ ແສງກໍມີພຽງນັ້ນ ແສງມີພຽງ

ໃດ ແປວໄຟກໍມີພຽງນັ້ນ ນິໂຣດມີຢູ່ພຽງໃດ ໂພດຊົງໃນຂໍ້ວ່າ ຖ້າສະຕິສຳໂພດຊົງຂອງເຮົາມີຢູ່ ດັ່ງນີ້ ກໍມີຢູ່ພຽງນັ້ນ

ໂພດຊົງໃນຂໍ້ວ່າ ສະຕິສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ດັ່ງນີ້ມີຢູ່ເປັນແນວໃດ?

ຄື ກິເລດທັງຫຼາຍ ໄດ້ແກ່ ກິເລດທີ່ກຸ້ມຣຸມຈິດທັງປວງເລີຍ ສັງຂານທີ່ໃຫ້ເກີດໃນພົບໃໝ່ ມີປະມານ ນິໂຣດຊື່ວ່າຫາປະມານບໍ່ໄດ້ ຍ້ອນມີສະພາວະບໍ່ຫວັ່ນໄຫວ ຍ້ອນມີສະພາວະເປັນອະສັງຂະຕະທຳ ນິໂຣດຜາກົດພຽງໃດ ໂພດຊົງໃນຂໍ້ວ່າ ສະຕິສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ ດັ່ງນີ້ ກໍມີຢູ່ພຽງນັ້ນ

ໂພດຊົງໃນຂໍ້ວ່າ ສະຕິສຳໂພດຊົງ ຊື່ວ່າເຮົາຜາຣົບສະເໝີດີແລ້ວນັ້ນ ດັ່ງນີ້ ມີຢູ່ເປັນແນວໃດ?

ຄື ກິເລດທັງຫຼາຍ ໄດ້ແກ່ ກິເລດທີ່ກຸ້ມຣຸມຈິດທັງປວງເລີຍ ສັງຂານທີ່ໃຫ້ເກີດໃນພົບໃໝ່ ບໍ່ສະເໝີ ນິໂຣດມີຄວາມສະເໝີເປັນທຳມະດາ ຍ້ອນມີສະພາວະເປັນທຳລະອຽດ ຍ້ອນມີສະພາວະເປັນທຳປະນີດ ນິໂຣດຜາກົດພຽງໃດ ໂພດຊົງໃນຂໍ້ວ່າ ສະຕິສຳໂພດຊົງ ຊື່ວ່າເຮົາຜາຣົບສະເໝີດີແລ້ວ ດັ່ງນີ້ ກໍມີຢູ່ພຽງນັ້ນ

ເມື່ອເຮົາກຳລັງທ່ຽວໄປ ຍ່ອມຮູ້ຊັດແຈ້ງສະຕິສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າສະຕິສຳໂພດຊົງເຄື່ອນໄປ ກໍຮູ້ຊັດແຈ້ງວ່າ ສະຕິສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ເປັນແນວໃດ?

ຄື ສະຕິສຳໂພດຊົງດຳຣົງຢູ່ດ້ວຍອາການເທົ່າໃດ ສະຕິສຳໂພດຊົງເຄື່ອນໄປດ້ວຍອາການເທົ່າໃດ

ສະຕິສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງ ສະຕິສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງ ສະຕິສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ)ທີ່ບໍ່ມີຄວາມເກີດ
໒. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງຄວາມເກີດ
໓. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເປັນໄປ
໔. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງຄວາມເປັນໄປ
໕. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ) ທີ່ບໍ່ມີນິມິດ
໖. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງນິມິດ
໗. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງນິໂຣດ
໘. ສະຕິສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງສັງຂານ

ສະຕິສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງນີ້

ສະຕິສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ສະຕິສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງຄວາມເກີດ
໒. ສະຕິສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເກີດ
໓. ສະຕິສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງຄວາມເປັນໄປ
໔. ສະຕິສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ(ນິບພານ)ທີ່ບໍ່ມີຄວາມເປັນໄປ
໕. ສະຕິສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງນິມິດ
໖. ສະຕິສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ (ນິບພານ) ທີ່ບໍ່ມີນິມິດ
໗. ສະຕິສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງສັງຂານ
໘. ສະຕິສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງນິໂຣດ

ສະຕິສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງນີ້ ເມື່ອເຮົາກຳລັງຫ່ຽວໄປຍ່ອມຮູ້ຊັດແຈ້ງສະຕິສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າສະຕິສຳໂພດຊົງເຄື່ອນໄປກໍຮູ້ຊັດແຈ້ງວ່າ ສະຕິສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ແນວນີ້ແລ ฯລฯ

ໂພດຊົງໃນຂໍ້ວ່າ ຖ້າອຸເປກຂາສຳໂພດຊົງຂອງເຮົາມີຢູ່ ດັ່ງນີ້ ມີຢູ່ເປັນແນວໃດ?

ຄື ນິໂຣດຜາກົດພຽງໃດ ໂພດຊົງໃນຂໍ້ວ່າ ຖ້າອຸເປກຂາສຳໂພດຊົງຂອງເຮົາມີຢູ່ ດັ່ງນີ້ ກໍມີຢູ່ພຽງນັ້ນ ເໝືອນປະທີບນ້ຳມັນກຳລັງສະຫວ່າງຢູ່ ฯລฯ

ໂພດຊົງໃນຂໍ້ວ່າ ອຸເປກຂາສຳໂພດຊົງຂອງເຮົາກໍຊື່ວ່າຫາປະມານບໍ່ໄດ້ ດັ່ງນີ້ ມີຢູ່ເປັນແນວໃດ? ฯລฯ

ໂພດຊົງໃນຂໍ້ວ່າ ອຸເປກຂາສຳໂພດຊົງ ຊື່ວ່າເຮົາຜາຣົບສະເໜີດີແລ້ວ ດັ່ງນີ້ ມີຢູ່ເປັນແນວໃດ? ฯລฯ

ເມື່ອເຮົາກຳລັງຫ່ຽວໄປ ຍ່ອມຮູ້ຊັດແຈ້ງອຸເປກຂາສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າອຸເປກຂາສຳໂພດຊົງເຄື່ອນໄປ ກໍຮູ້ຊັດແຈ້ງວ່າ ອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ເປັນແນວໃດ?

ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍອາການເທົ່າໃດ ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍອາການເທົ່າໃດ

ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງ ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງ

ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເກີດ
໒. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງຄວາມເກີດ

໓. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເປັນໄປ
໔. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງຄວາມເປັນໄປ
໕. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງ (ນິບພານ) ທີ່ບໍ່ມີນິມິດ
໖. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງນິມິດ
໗. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການນຶກເຖິງນິໂຣດ
໘. ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍການບໍ່ນຶກເຖິງສັງຂານ

ອຸເປກຂາສຳໂພດຊົງດຳຣົງຢູ່ດ້ວຍອາການ ໘ ຢ່າງນີ້
ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງ ມີອັນໃດແດ່ ຄື

໑. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງຄວາມເກີດ
໒. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເກີດ
໓. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງຄວາມເປັນໄປ
໔. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ (ນິບພານ) ທີ່ບໍ່ມີຄວາມເປັນໄປ
໕. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງນິມິດ
໖. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງ (ນິບພານ) ທີ່ບໍ່ມີນິມິດ
໗. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການນຶກເຖິງສັງຂານ
໘. ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍການບໍ່ນຶກເຖິງນິໂຣດ

ອຸເປກຂາສຳໂພດຊົງເຄື່ອນໄປດ້ວຍອາການ ໘ ຢ່າງນີ້ ເມື່ອເຮົາກຳລັງທ່ຽວໄປ ຍ່ອມຮູ້ຊັດແຈ້ງອຸເປກຂາສຳໂພດຊົງທີ່ດຳຣົງຢູ່ວ່າ ດຳຣົງຢູ່ ຖ້າອຸເປກຂາສຳໂພດຊົງເຄື່ອນໄປກໍຮູ້ຊັດແຈ້ງວ່າ ອຸເປກຂາສຳໂພດຊົງຂອງເຮົາເຄື່ອນໄປຍ້ອນປັດໄຈນີ້ ແນວນີ້ແລ

**ໂພດຊັງຄະກະຖາ ຈົບ**

# ໔. ເມດຕາກະຖາ

## ວ່າດ້ວຍເມດຕາ

[໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິອັນບຸກຄົນປະຕິບັດແລ້ວ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ເພິ່ງຫວັງໄດ້ອານິສົງ ໑໑ ປະການ

ອານິສົງ ໑໑ ປະການ ມີອັນໃດແດ່ ຄື

໑. ຫຼັບເປັນສຸກ
໒. ຕື່ນເປັນສຸກ
໓. ບໍ່ຝັນຮ້າຍ
໔. ເປັນທີ່ຮັກຂອງມະນຸດທັງຫຼາຍ
໕. ເປັນທີ່ຮັກຂອງອະມະນຸດທັງຫຼາຍ
໖. ເທວະດາທັງຫຼາຍຮັກສາ
໗. ໄຟ ຢາພິດ ຫຼື ອາວຸດເຮັດຫຍັງບໍ່ໄດ້
໘. ຈິດຕັ້ງໝັ້ນໄດ້ໄວ
໙. ສີໜ້າສົດໃສ
໑໐. ບໍ່ຫຼົງລືມສະຕິຕາຍ
໑໑. ເມື່ອຍັງບໍ່ແທງຕະຫຼອດຄຸນວິເສດອັນຍອດຍິ່ງຍ່ອມເຂົ້າເຖິງພົມມະໂລກ

ພິກຂຸທັງຫຼາຍ ເມດຕາເຈໂຕວິມຸດຕິອັນບຸກຄົນປະຕິບັດແລ້ວ ຈະເລີນແລ້ວ ເຮັດໃຫ້ຫຼາຍແລ້ວ ເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣິບສະເໝີດີແລ້ວ ເພິ່ງຫວັງໄດ້ອານິສົງ ໑໑ ປະການນີ້

ເມດຕາເຈໂຕວິມຸດຕິແຜ່ໄປໂດຍບໍ່ເຈາະຈົງກໍມີ ເມດຕາເຈໂຕວິມຸດຕິແຜ່ໄປໂດຍເຈາະຈົງກໍມີ ເມດຕາເຈໂຕວິມຸດຕິແຜ່ໄປສູ່ທິດທັງຫຼາຍກໍມີ ເມດຕາເຈໂຕວິມຸດຕິແຜ່ໄປໂດຍບໍ່ເຈາະຈົງດ້ວຍອາການເທົ່າໃດ ເມດຕາເຈໂຕວິມຸດຕິແຜ່ໄປໂດຍເຈາະຈົງດ້ວຍອາການເທົ່າໃດ ເມດຕາເຈໂຕວິມຸດຕິແຜ່ໄປສູ່ທິດທັງຫຼາຍດ້ວຍອາການເທົ່າໃດ

ຄື ເມດຕາເຈໂຕວິມຸດຕິແຜ່ໄປໂດຍບໍ່ເຈາະຈົງດ້ວຍອາການ ໕ ຢ່າງ ເມດຕາເຈໂຕວິມຸດຕິແຜ່ໄປໂດຍເຈາະຈົງດ້ວຍອາການ ໗ ຢ່າງ ເມດຕາເຈໂຕວິມຸດຕິແຜ່ໄປສູ່ທິດທັງຫຼາຍດ້ວຍອາການ ໑໐ ຢ່າງ ເມດຕາເຈໂຕວິມຸດຕິແຜ່ໄປໂດຍບໍ່ເຈາະຈົງດ້ວຍອາການ ໕ ຢ່າງ ມີອັນໃດແດ່ ຄື

໑. ຂໍສັດທັງຫຼາຍຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເທີ້ນ
໒. ຂໍປານະຊາດ (ສັດທີ່ເກີດຂຶ້ນມາມີລົມຫັນໃຈ) ທັງປວງ ຯລຯ
໓. ຂໍອະພູຕະທັງປວງ (ພືດຊຽວສົດ) ຯລຯ
໔. ຂໍບຸກຄົນທັງປວງ ຯລຯ
໕. ຂໍຜູ້ທີ່ນັບເນື່ອງດ້ວຍອັດຕະພາບທັງປວງ ຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເຖີດ

ເມດຕາເຈໂຕວິມຸດຕິແຜ່ໄປໂດຍບໍ່ເຈາະຈົງດ້ວຍອາການ ໕ ແນວນີ້
ເມດຕາເຈໂຕວິມຸດຕິແຜ່ໄປໂດຍເຈາະຈົງດ້ວຍອາການ ໗ ຢ່າງ ມີອັນໃດແດ່ ຄື

໗. ຂໍສະຕີທັງປວງຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກຮັກສາຕົນຢູ່ເຖີດ
໘. ຂໍບຸຣຸດທັງປວງ ໆລໆ
໙. ຂໍອາຣະຍະຊົນທັງປວງ ໆລໆ
໔. ຂໍອະນາລະຍະຊົນທັງປວງ ໆລໆ
໕. ຂໍເທວະດາທັງປວງ ໆລໆ
໖. ຂໍອະມະນຸດທັງປວງ ໆລໆ
໗. ຂໍວິນິປາຕິກະສັດ (ສັດທີ່ເກີດໃນອະບາຍຍະພູມ) ທັງປວງຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເຖີດ

ເມດຕາເຈໂຕວິມຸດຕິແຜ່ໄປໂດຍເຈາະຈົງດ້ວຍອາການ ໗ ແນວນີ້
ເມດຕາເຈໂຕວິມຸດຕິແຜ່ໄປສູ່ທິດທັງຫຼາຍດ້ວຍອາການ ໑໐ ຢ່າງ ມີອັນໃດແດ່ ຄື

໑. ຂໍສັດທັງປວງໃນທິດບູຣະພາ (ທິດຕາເວັນອອກ) ຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກມີສຸກ ຮັກສາຕົນຢູ່ເຖີດ
໒. ຂໍສັດທັງປວງໃນທິດປັດສິມ (ທິດຕາເວັນຕົກ) ໆລໆ
໓. ຂໍສັດທັງປວງໃນທິດອຸດອນ (ທິດໃຕ້) ໆລໆ
໔. ຂໍສັດທັງປວງໃນທິດທັກຂິນ (ທິດເໜືອ) ໆລໆ
໕. ຂໍສັດທັງປວງໃນທິດອາຄະເນ (ທິດຕາເວັນອອກສຽງໃຕ້) ໆລໆ
໖. ຂໍສັດທັງປວງໃນທິດພາຍັບ (ທິດເວັນຕົກສຽງເໜືອ) ໆລໆ
໗. ຂໍສັດທັງປວງໃນທິດອີສານ (ທິດຕາເວັນອອກສຽງເໜືອ) ໆລໆ
໘. ຂໍສັດທັງປວງໃນທິດຫໍຣະດີ (ທິດຕາເວັນຕົກສຽງໃຕ້) ໆລໆ
໙. ຂໍສັດທັງປວງໃນທິດເບື້ອງລຸ່ມ ໆລໆ
໑໐. ຂໍສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເຖີດ

ຂໍປານະຊາດທັງປວງໃນທິດບູຣະພາ ໆລໆ ພູຕະທັງປວງ ໆລໆ ບຸກຄົນທັງປວງ ໆລໆ ຜູ້ທີ່ນັບເນື່ອງດ້ວຍອັດຕະພາບທັງປວງ ໆລໆ ສະຕີທັງປວງ ໆລໆ ບຸຣຸດທັງປວງ ໆລໆ ອາຣະຍະຊົນທັງປວງ ໆລໆ ອະນາລະຍະຊົນທັງປວງ ໆລໆ ເທວະດາທັງປວງ ໆລໆ ມະນຸດທັງປວງ ໆລໆ

໑. ຂໍວິນິປາຕິກະສັດທັງປວງໃນທິດບູຣະພາ ຈົ່ງເປັນຜູ້ບໍ່ມີເວນບໍ່ບຽດບຽນກັນ ບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເຖີດ
໒. ຂໍວິນິປາຕິກະສັດທັງປວງໃນທິດປັດສິມ ໆລໆ
໓. ຂໍວິນິປາຕິກະສັດທັງປວງໃນທິດອຸດອນ ໆລໆ

໔. ຂໍວິນິປາຕິກະສັດທັງປວງໃນທິດທັກຂິນ ຯລຯ
໕. ຂໍວິນິປາຕິກະສັດທັງປວງໃນທິດອາຄະເນ ຯລຯ
໖. ຂໍວິນິປາຕິກະສັດທັງປວງໃນທິດພາຍັບ ຯລຯ
໗. ຂໍວິນິປາຕິກະສັດທັງປວງໃນທິດອີສານ ຯລຯ
໘. ຂໍວິນິປາຕິກະສັດທັງປວງໃນທິດທໍຣະດີ ຯລຯ
໙. ຂໍວິນິປາຕິກະສັດທັງປວງໃນທິດເບື້ອງລຸ່ມ ຯລຯ
໑໐. ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງ ຈົ່ງເປັນຜູ້ບໍ່ມີເວນ ບໍ່ບຽດບຽນກັນບໍ່ມີທຸກ ມີສຸກ ຮັກສາຕົນຢູ່ເຖີດ

ເມດຕາເຈໂຕວິມຸດຕິແຜ່ໄປສູ່ທິດທັງຫຼາຍດ້ວຍອາການ ໑໐ ຢ່າງນີ້

## ໑. ອິນທະຣິຍະວາຣະ

### ວາຣະວ່າດ້ວຍອິນຊີ

[໔໓] ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ສັດທັງປວງດ້ວຍອາການ ໘ ຢ່າງນີ້ ຄື
໑. ດ້ວຍເວັ້ນຄວາມບີບຄັ້ນ ບໍ່ບີບຄັ້ນສັດທັງປວງ
໔. ດ້ວຍເວັ້ນການຂ້າ ບໍ່ຂ້າສັດທັງປວງ
໓. ດ້ວຍເວັ້ນການເຮັດໃຫ້ເດືອດຮ້ອນ ບໍ່ເຮັດສັດທັງປວງໃຫ້ເດືອດຮ້ອນ
໔. ດ້ວຍເວັ້ນຄວາມຍໍ່າຍີ ບໍ່ຍໍ່າຍີສັດທັງປວງ
໕. ດ້ວຍເວັ້ນການບຽດບຽນ ບໍ່ບຽດບຽນສັດທັງປວງ
໖. ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຢ່າໄດ້ມີເວນກັນ
໗. ຈົ່ງເປັນຜູ້ມີສຸກ ຢ່າມີທຸກ
໘. ຈົ່ງມີຕົນເປັນສຸກ ຢ່າມີຕົນເປັນທຸກ

ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາ ຈິດຄິດເຖິງທຳນັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຈໂຕ ຈິດພົ້ນຈາກພະຍາບາດ ແລະກິເລດທີ່ກຸ້ມຮຸມຈິດທັງປວງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວິມຸດຕິ ເມດຕາດ້ວຍເປັນເຈໂຕວິມຸດຕິດ້ວຍ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາເຈໂຕວິມຸດຕິ

ຜູ້ຈະເລີນເມດຕານ້ອມໃຈເຊື່ອດ້ວຍສັດທາວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທິນຊີ

ຜູ້ຈະເລີນເມດຕາປະຄອງຄວາມພຽນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍວິຣິຍິນຊີ

ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໝັ້ນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ໆລໆ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະຕິນຊີ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໝັ້ນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ໆລໆ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະມາທິນຊີ

ຜູ້ຈະເລີນເມດຕາຮູ້ຊັດແຈ້ງດ້ວຍປັນຍາວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ໆລໆ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປັນຍິນຊີ

ອິນຊີ ໕ ປະການນີ້ເປັນອາເສວະນະ (ການປະຕິບັດ) ຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນພາວະນາ (ການຈະເລີນ) ຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຈະເລີນເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນພະຫຸລີກຳ (ການເຮັດໃຫ້ຫຼາຍ) ຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມເຮັດໃຫ້ຫຼາຍເຊິ່ງເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນອະລັງການ (ເຄື່ອງປະດັບ) ຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະດັບເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນບໍຣິຂານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປຸງແຕ່ງເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນບໍລິວານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຫ້ອມລ້ອມເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້

ອິນຊີ ໕ ປະການນີ້ເປັນອາເສວະນະ ເປັນພາວະນາ ເປັນພະຫຸລີກຳ ເປັນອະລັງການ ເປັນບໍຣິຂານ ເປັນບໍລິວານ ເປັນຄວາມເຕັມຮອບ ເປັນສະຫະຣະຄະຕະ (ໄປຮ່ວມກັນ) ເປັນສະຫະຊາຕະ (ເກີດຮ່ວມກັນ) ເປັນຄວາມກ່ຽວຂ້ອງ ເປັນສຳປະຍຸດຕະ (ປະກອບກັນ) ເປັນຄວາມແລ່ນໄປ ເປັນຄວາມຜ່ອງໃສ ເປັນຄວາມຕັ້ງຢູ່ດີ ເປັນຄວາມພົ້ນວິເສດ ເປັນຄວາມເຫັນວ່າ ແນວນີ້ເປັນຄວາມລະອຽດຂອງເມດຕາເຈໂຕວິມຸດຕິ ເມດຕາເຈໂຕວິມຸດຕິທີ່ບຸກຄົນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ຈະເລີນດີແລ້ວ ອະທິຖານດີແລ້ວ ດຳເນີນໄປດີແລ້ວ ພົ້ນວິເສດແລ້ວ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

**ອິນທະຣີຍະວານ ຈົບ**

# ໘. ພະລະວານ

## ວາຣະວ່າດ້ວຍພະລະ

[໘໔] ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ດ້ວຍມະນະສິການວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທາພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ດ້ວຍມະນະສິການວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍວິຣິຍະພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ດ້ວຍມະນະສິການວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າ ອົບຮົມແລ້ວດ້ວຍສະຕິພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນອຸດທັດຈະ ດ້ວຍມະນະສິການວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າ ອົບຮົມແລ້ວດ້ວຍສະມາທິພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນອະວິດຊາ ດ້ວຍມະນະສິການວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປັນຍາພະລະ

ພະລະ ໕ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນພາວະນາຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຈະເລີນເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນພະຫຸລີກຳຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມເຮັດໃຫ້ຫຼາຍເຊິ່ງເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນອະລັງການຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະດັບເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນບໍຣິຂານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປຸງແຕ່ງ ເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນບໍລິວານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຫ້ອມລ້ອມເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້

ພະລະ ໕ ປະການນີ້ເປັນອາເສວະນະ ເປັນພາວະນາ ເປັນພະຫຸລີກຳ ເປັນອະລັງການ ເປັນບໍຣິຂານ ເປັນບໍລິວານ ເປັນຄວາມເຕັມຮອບ ເປັນສະຫະຣະຄະຕະ ເປັນສະຫະຊາຕະ ເປັນຄວາມກ່ຽວຂ້ອງ ເປັນສຳປະຍຸດຕະ ເປັນຄວາມແລ່ນໄປ ເປັນຄວາມຜ່ອງໃສ ເປັນຄວາມຕັ້ງຢູ່ດ້ວຍດີ ເປັນຄວາມພົ້ນວິເສດ ເປັນຄວາມເຫັນວ່າ ຢ່າງນີ້ເປັນຄວາມລະອຽດຂອງເມດຕາເຈໂຕວິມຸດຕິ ເມດຕາເຈໂຕວິມຸດຕິທີ່ບຸກຄົນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ຈະເລີນດີແລ້ວ ອະທິຖານດີແລ້ວ ດຳເນີນໄປດີແລ້ວ ພົ້ນວິເສດແລ້ວ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

**ພະລະວານ ຈົບ**

## ໖. ໂພດຊັງຄະວາຣະ

### ວາຣະວ່າດ້ວຍໂພດຊົງ

[໔໕] ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໝັ້ນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າ ອົບຣົມແລ້ວດ້ວຍສະຕິສຳໂພດຊົງ

ຜູ້ຈະເລີນເມດຕາເລືອກເຟັ້ນດ້ວຍປັນຍາວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຣົມແລ້ວດ້ວຍທຳມະວິຈະຍະສຳໂພດຊົງ

ຜູ້ຈະເລີນເມດຕາປະຄອງຄວາມພຽນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຣົມແລ້ວດ້ວຍວິຣິຍະສຳໂພດຊົງ

ຜູ້ຈະເລີນເມດຕາຣະງັບຄວາມຮ້ອນຮົນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າ ອົບຣົມແລ້ວດ້ວຍປີຕິສຳໂພດຊົງ

ຜູ້ຈະເລີນເມດຕາຣະງັບຄວາມຄິດຊົ່ວຫຍາບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຣົມແລ້ວດ້ວຍປັດສັດທິສຳໂພດຊົງ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໝັ້ນວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຣົມແລ້ວດ້ວຍສະມາທິສຳໂພດຊົງ

ຜູ້ຈະເລີນເມດຕາເພ່ງເສີຍກິເລດທັງຫຼາຍດ້ວຍຍານວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຣົມແລ້ວດ້ວຍອຸເປກຂາ ສຳໂພດຊົງ

ໂພດຊົງ ໗ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໗ ປະການນີ້

ໂພດຊົງ ໗ ປະການນີ້ເປັນພາວະນາຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຈະເລີນເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໗ ປະການນີ້

ໂພດຊົງ ໆ ປະການນີ້ເປັນພະຫຸລີກຳຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມເຮັດໃຫ້ຫຼາຍເຊິ່ງເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໆ ປະການນີ້

ໂພດຊົງ ໆ ປະການນີ້ເປັນໃຫຍ່ອະລັງການຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະດັບ ເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໆ ປະການນີ້

ໂພດຊົງ ໆ ປະການນີ້ເປັນບໍຣິຂານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປຸງແຕ່ງເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໆ ປະການນີ້ ໂພດຊົງ ໆ ປະການນີ້ເປັນບໍລິວານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຫ້ອມລ້ອມເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໆ ປະການນີ້

ໂພດຊົງ ໆ ປະການນີ້ເປັນອາເສວະນະ ເປັນພາວະນາ ເປັນພະຫຸລີກຳ ເປັນອະລັງການ ເປັນບໍຣິຂານ ເປັນບໍລິວານ ເປັນຄວາມເຕັມຮອບ ເປັນສະຫະຣະຄະຕະ ເປັນສະຫະຊາຕະ ເປັນຄວາມກ່ຽວຂ້ອງ ເປັນສຳປະຍຸດຕະ ເປັນຄວາມແລ່ນໄປ ເປັນຄວາມຜ່ອງໃສ ເປັນຄວາມຕັ້ງຢູ່ດ້ວຍດີ ເປັນຄວາມພົ້ນວິເສດ ເປັນຄວາມເຫັນວ່າ ນີ້ເປັນຄວາມລະອຽດຂອງເມດຕາເຈໂຕວິມຸດຕິ ເມດຕາເຈໂຕວິມຸດຕິທີ່ບຸກຄົນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ຈະເລີນດີແລ້ວ ອະທິຖານດີແລ້ວ ດຳເນີນໄປດີແລ້ວ ພົ້ນວິເສດແລ້ວ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

**ໂພດຊັງຄະວາຣະ ຈົບ**

## ໔. ມັກຄັງຄະວາຣະ

### ວາຣະວ່າດ້ວຍອົງແຫ່ງມັກ

[໔໙] ຜູ້ຈະເລີນເມດຕາເຫັນໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາທິດຖິ

ຜູ້ຈະເລີນເມດຕານຶກຕອງໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສັງກັບປະ

ຜູ້ຈະເລີນເມດຕາກຳນົດໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາວາຈາ

ຜູ້ຈະເລີນເມດຕາຕັ້ງວຽກງານໄວ້ໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາກຳມັນຕະ

ຜູ້ຈະເລີນເມດຕາຊຳຣະອາຊີວະໃຫ້ຜ່ອງແຜ້ວໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາອາຊີວະ

ຜູ້ຈະເລີນເມດຕາປະຄອງຄວາມພຽນໄວ້ໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາວາຍາມະ

ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສະຕິ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໂດຍຊອບວ່າ ຂໍສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສະມາທິ

ອົງມັກ ໘ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນພາວະນາຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຈະເລີນເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນພະຫຸລີກຳຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມເຮັດໃຫ້ຫຼາຍເຊິ່ງເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນອະລັງການຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະດັບເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນບໍຣິຂານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປຸງແຕ່ງ ເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນບໍລິວານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຫ້ອມລ້ອມເມດຕາເຈໂຕວິມຸດຕິດ້ວຍອົງມັກ ໘ ປະການນີ້

ອົງມັກ ໘ ປະການນີ້ເປັນອາເສວະນະ ເປັນພາວະນາ ເປັນພະຫຸລີກຳ ເປັນອະລັງການ ເປັນບໍຣິຂານ ເປັນບໍລິວານ ເປັນຄວາມເຕັມຮອບ ເປັນສະຫະຣະຄະຕະ ເປັນສະຫະຊາຕະ ເປັນຄວາມກ່ຽວຂ້ອງ ເປັນສຳປະຍຸດຕະ ເປັນຄວາມແລ່ນໄປ ເປັນຄວາມຜ່ອງໃສ ເປັນຄວາມຕັ້ງຢູ່ດ້ວຍດີ ເປັນຄວາມພົ້ນວິເສດ ເປັນຄວາມເຫັນວ່າ ນີ້ເປັນຄວາມລະອຽດຂອງເມດຕາເຈໂຕວິມຸດຕິ ເມດຕາເຈໂຕວິມຸດຕິທີ່ບຸກຄົນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາຣົບສະເໝີດີແລ້ວ ຈະເລີນດີແລ້ວ ອະທິຖານດີແລ້ວ ດຳເນີນໄປດີແລ້ວ ພົ້ນວິເສດແລ້ວ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

[໔໗] ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ປານະຊາດທັງປວງ ຯລຯ ສູ່ພູຕະທັງປວງ ຯລຯ ສູ່ບຸກຄົນທັງປວງ ຯລຯ ສູ່ຜູ້ທີ່ນັບເນື່ອງດ້ວຍອັດຕະພາບທັງປວງ ຯລຯ ສູ່ສະຕີທັງປວງ ຯລຯ ສູ່ບຸຣຸດທັງປວງ ຯລຯ ສູ່ອາຣະຍະຊົນທັງປວງ ຯລຯ ສູ່ອະນາລະຍະຊົນທັງປວງ ຯລຯ ສູ່ເທວະດາທັງປວງ ຯລຯ ສູ່ມະນຸດທັງປວງ ຯລຯ

ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ວິນິປາຕິກະສັດທັງປວງດ້ວຍອາການ ໘ ແນວນີ້

໑. ດ້ວຍເວັ້ນຄວາມບີບຄັ້ນ ບໍ່ບີບຄັ້ນວິນິປາຕິກະສັດທັງປວງ
໒. ດ້ວຍເວັ້ນການຂ້າ ບໍ່ຂ້າວິນິປາຕິກະສັດທັງປວງ
໓. ດ້ວຍເວັ້ນການເຮັດໃຫ້ເດືອດຮ້ອນ ບໍ່ເຮັດວິນິປາຕິກະສັດທັງປວງໃຫ້ເດືອດຮ້ອນ
໔. ດ້ວຍເວັ້ນຄວາມຍ່ຳຍີ ບໍ່ຍ່ຳຍີວິນິປາຕິກະສັດທັງປວງ
໕. ດ້ວຍເວັ້ນການບຽດບຽນ ບໍ່ບຽດບຽນວິນິປາຕິກະສັດທັງປວງ
໖. ຂໍວິນິປາຕິກະສັດທັງປວງຈົ່ງເປັນຜູ້ບໍ່ມີເວນ ຢ່າໄດ້ມີເວນກັນ
໗. ຈົ່ງເປັນຜູ້ມີສຸກ ຢ່າມີທຸກ
໘. ຈົ່ງມີຕົນເປັນສຸກ ຢ່າມີຕົນເປັນທຸກ

ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາ ຈິດຄິດເຖິງທຳນັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຈໂຕ ຈິດພົ້ນຈາກພະຍາບາດ ແລະກິເລດທີ່ກຸ້ມຮຸມຈິດທັງປວງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວິມຸດຕິ ເມດຕາດ້ວຍເປັນເຈໂຕວິມຸດຕິດ້ວຍ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາເຈໂຕວິມຸດຕິ

ຜູ້ຈະເລີນເມດຕານ້ອມໃຈເຊື່ອດ້ວຍສັດທາວ່າ ຂໍວິນິປາຕິກະສັດທັງປວງຈົ່ງເປັນຜູ້ບໍ່ມີເວນມີຄວາມປອດໂປ່ງ ມີສຸກເຖີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທິນຊີ ຯລຯ ຍ່ອມໃຫ້ຮຸ່ງເຮືອງ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ສັດທັງປວງໃນທິດບູຣະພາ ຯລຯ ສູ່ສັດທັງປວງໃນທິດປັດສິມ ຯລຯ ສູ່ສັດທັງປວງໃນທິດອຸດອນ ຯລຯ ສູ່ສັດທັງປວງໃນທິດທັກຂິນ ຯລຯ ສູ່ສັດທັງປວງໃນທິດອາຄະເນ ຯລຯ ສູ່ສັດທັງປວງໃນທິດພາຍັບ ຯລຯ ສູ່ສັດທັງປວງໃນທິດອີສານ ຯລຯ ສູ່ສັດທັງປວງໃນທິດທໍຣະດີ ຯລຯ ສູ່ສັດທັງປວງໃນທິດເບື້ອງລຸ່ມ ຯລຯ

ຜູ້ຈະເລີນເມດຕາ ແຜ່ຄວາມຮັກໄປສູ່ສັດທັງປວງໃນທິດເບື້ອງເທິງ ດ້ວຍອາການ ໘ ແນວນີ້ ຄື

໑. ດ້ວຍເວັ້ນຄວາມບີບຄັ້ນ ບໍ່ບີບຄັ້ນສັດທັງປວງໃນທິດເບື້ອງເທິງ
໒. ດ້ວຍເວັ້ນການຂ້າ ບໍ່ຂ້າສັດທັງປວງໃນທິດເບື້ອງເທິງ
໓. ດ້ວຍເວັ້ນການເຮັດໃຫ້ເດືອດຮ້ອນ ບໍ່ເຮັດສັດທັງປວງໃນທິດເບື້ອງເທິງໃຫ້ເດືອດຮ້ອນ
໔. ດ້ວຍເວັ້ນຄວາມຍ່ຳຍີ ບໍ່ຍ່ຳຍີສັດທັງປວງໃນທິດເບື້ອງເທິງ
໕. ດ້ວຍເວັ້ນການບຽດບຽນ ບໍ່ບຽດບຽນສັດທັງປວງໃນທິດເບື້ອງເທິງ
໖. ຂໍສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ຢ່າໄດ້ມີເວນກັນ
໗. ຈົ່ງເປັນຜູ້ມີສຸກ ຢ່າມີທຸກ
໘. ຈົ່ງມີຕົນເປັນສຸກ ຢ່າມີຕົນເປັນທຸກ

ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາ ຈິດຄິດເຖິງທຳນັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຈໂຕ ຈິດພົ້ນຈາກພະຍາບາດ ແລະກິເລດທີ່ກຸ້ມຮຸມຈິດທັງປວງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວິມຸດຕິ ເມດຕາດ້ວຍເປັນເຈໂຕວິມຸດຕິດ້ວຍ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາເຈໂຕວິມຸດຕິ

ຜູ້ຈະເລີນເມດຕານ້ອມໃຈເຊື່ອດ້ວຍສັດທາວ່າ ຂໍວິນິປາຕິກະສັດທັງປວງຈົ່ງເປັນຜູ້ບໍ່ມີເວນມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທິນຊີ ຯລຯ ຍ່ອມໃຫ້ຮຸ່ງເຮືອງ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ປານະຊາດທັງປວງໃນທິດບູຣະພາ ຯລຯ ສູ່ພູຕະທັງປວງ ໃນທິດບູຣະພາ ຯລຯ ສູ່ບຸກຄົນທັງປວງໃນທິດບູຣະພາ ຯລຯ ສູ່ຜູ້ນັບເນື່ອງໃນອັດຕະພາບທັງປວງ ໃນທິດບູຣະພາ ຯລຯ ສູ່ສະຕີທັງປວງໃນທິດບູຣະພາ ຯລຯ ສູ່ບຸຣຸດທັງປວງໃນທິດບູຣະພາ ຯລຯ ສູ່ອາຣະຍະຊົນທັງປວງໃນທິດບູຣະພາ ຯລຯ ສູ່ອະນາລະຍະຊົນທັງປວງໃນທິດບູຣະພາ ຯລຯ ສູ່ເທວະດາທັງປວງໃນທິດບູຣະພາ ຯລຯ ສູ່ມະນຸດທັງປວງໃນທິດບູຣະພາຯລຯ

ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ວິນິປາຕິກະສັດທັງປວງ ໃນທິດບູຣະພາ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດປັດສິມ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດອຸດອນ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດທັກຂິນ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດອາຄະເນ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດພາຍັບ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດອີສານ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດທໍຣະດີ ຯລຯ ສູ່ວິນິປາຕິກະສັດທັງປວງໃນທິດເບື້ອງລຸ່ມ ຯລຯ

ຜູ້ຈະເລີນເມດຕາແຜ່ຄວາມຮັກໄປສູ່ວິນິປາຕິກະສັດທັງປວງ ໃນທິດເບື້ອງເທິງດ້ວຍອາການ ໘ ຢ່າງນີ້ ຄື

໑. ດ້ວຍເວັ້ນຄວາມບີບຄັ້ນ ບໍ່ບີບຄັ້ນວິນິປາຕິກະສັດທັງປວງໃນທິດເບື້ອງເທິງ
໒. ດ້ວຍເວັ້ນການຂ້າ ບໍ່ຂ້າວິນິປາຕິກະສັດທັງປວງໃນທິດເບື້ອງເທິງ
໓. ດ້ວຍເວັ້ນການເຮັດໃຫ້ເດືອດຮ້ອນ ບໍ່ເຮັດວິນິປາຕິກະສັດທັງປວງໃນທິດເບື້ອງເທິງໃຫ້ເດືອດຮ້ອນ
໔. ດ້ວຍເວັ້ນຄວາມຍ່ຳຍີ ບໍ່ຍ່ຳຍີວິນິປາຕິກະສັດທັງປວງໃນທິດເບື້ອງເທິງ
໕. ດ້ວຍເວັ້ນການບຽດບຽນ ບໍ່ບຽດບຽນວິນິປາຕິກະສັດທັງປວງໃນທິດເບື້ອງເທິງ
໖. ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ຢ່າໄດ້ມີເວນກັນ
໗. ຈົ່ງເປັນຜູ້ມີສຸກ ຢ່າມີທຸກ
໘. ຈົ່ງມີຕົນເປັນສຸກ ຢ່າມີຕົນເປັນທຸກ

ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາ ຈິດຄິດເຖິງທຳນັ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຈໂຕ ຈິດພົ້ນ

ຈາກພະຍາບາດແລະກິເລດທີ່ກຸ້ມຮຸມຈິດທັງປວງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າວິມຸດຕິ ເມດຕາດ້ວຍເປັນເຈໂຕວິມຸດຕິດ້ວຍ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເມດຕາເຈໂຕວິມຸດຕິ

ຜູ້ຈະເລີນເມດຕານ້ອມໃຈເຊື່ອດ້ວຍສັດທາວ່າ ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທິນຊີ

ຜູ້ຈະເລີນເມດຕາປະຄອງຄວາມພຽນໄວ້ວ່າ ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍວິຣິຍິນຊີ

ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໝັ້ນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະຕິນຊີ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໝັ້ນ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະມາທິນຊີ

ຜູ້ຈະເລີນເມດຕາຮູ້ຊັດແຈ້ງດ້ວຍປັນຍາ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປັນຍິນຊີ

ອິນຊີ ໕ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍອິນຊີ ໕ ປະການນີ້ ຯລຯ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ດ້ວຍມະນະສິການວ່າ ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສັດທາພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍວິຣິຍະພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະຕິພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະມາທິພະລະ

ຜູ້ຈະເລີນເມດຕາບໍ່ຫວັ່ນໄຫວຍ້ອນອະວິດຊາ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປັນຍາພະລະ

ພະລະ ໕ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍພະລະ ໕ ປະການນີ້ ຯລຯ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງໃຫ້ສະຫວ່າງສະໄຫວ

ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໝັ້ນວ່າ ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະຕິ ສຳໂພດຊົງ

ຜູ້ຈະເລີນເມດຕາເລືອກເຟັ້ນດ້ວຍປັນຍາ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍທຳມະວິຈະຍະສຳໂພດຊົງ

ຜູ້ຈະເລີນເມດຕາປະຄອງຄວາມພຽນ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍວິຣິຍະສຳໂພດຊົງ

ຜູ້ຈະເລີນເມດຕາຣະງັບຄວາມຮ້ອນຮົນ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປີຕິສຳໂພດຊົງ

ຜູ້ຈະເລີນເມດຕາຣະງັບຄວາມຄິດຊົ່ວຫຍາບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍປັດສັດທິສຳໂພດຊົງ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໝັ້ນ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສະມາທິ ສຳໂພດຊົງ

ຜູ້ຈະເລີນເມດຕາເພ່ງເສີຍກິເລດທັງປວງດ້ວຍຍານ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍອຸເປກຂາສຳໂພດຊົງ

ໂພດຊົງ ໗ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍໂພດຊົງ ໗ ປະການນີ້ ฯລฯ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

ຜູ້ຈະເລີນເມດຕາເຫັນໂດຍຊອບວ່າ ຂໍວິນິປາຕິກະສັດທັງປວງໃນທິດເບື້ອງເທິງ ຈົ່ງເປັນຜູ້ບໍ່ມີເວນ ມີຄວາມປອດໂປ່ງ ມີສຸກເທີ້ນ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາທິດຖິ

ຜູ້ຈະເລີນເມດຕານຶກຕອງໂດຍຊອບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສັງກັບປະ

ຜູ້ຈະເລີນເມດຕາກຳນົດໂດຍຊອບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາວາຈາ

ຜູ້ຈະເລີນເມດຕາຕັ້ງວຽກງານໄວ້ໂດຍຊອບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາກຳມັນຕະ

ຜູ້ຈະເລີນເມດຕາຊຳຣະອາຊີວະໃຫ້ຜ່ອງແຜ້ວໂດຍຊອບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາອາຊີວະ

ຜູ້ຈະເລີນເມດຕາປະຄອງຄວາມພຽນໄວ້ໂດຍຊອບ ฯລฯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາວາຍາມະ

ຜູ້ຈະເລີນເມດຕາຕັ້ງສະຕິໄວ້ໂດຍຊອບ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສະຕິ

ຜູ້ຈະເລີນເມດຕາຕັ້ງຈິດໄວ້ໂດຍຊອບ ຯລຯ ເມດຕາເຈໂຕວິມຸດຕິຊື່ວ່າອົບຮົມແລ້ວດ້ວຍສຳມາສະມາທິ

ອົງມັກ ໗ ປະການນີ້ເປັນອາເສວະນະຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມປະຕິບັດເມດຕາເຈໂຕວິມຸດຕິດ້ວຍອົງມັກ ໗ ປະການນີ້ ຯລຯ

ອົງມັກ ໗ ປະການນີ້ເປັນບໍລິວານຂອງເມດຕາເຈໂຕວິມຸດຕິ ບຸກຄົນຍ່ອມຫ້ອມລ້ອມເມດຕາເຈໂຕວິມຸດຕິດ້ວຍອົງມັກ ໗ ປະການນີ້

ອົງມັກ ໗ ປະການນີ້ເປັນອາເສວະນະ ເປັນພາວະນາ ເປັນພະຫຸລີກຳ ເປັນອະລັງການ ເປັນບໍຣິຂານ ເປັນບໍລິວານ ເປັນຄວາມເຕັມຮອບ ເປັນສະຫະຣະຄະຕະ ເປັນສະຫະຊາຕະ ເປັນຄວາມກ່ຽວຂ້ອງ ເປັນສຳປະຍຸດຕະ ເປັນຄວາມແລ່ນໄປ ເປັນຄວາມຜ່ອງໃສ ເປັນຄວາມດຳຣົງໝັ້ນ ເປັນຄວາມພົ້ນວິເສດ ເປັນຄວາມເຫັນວ່າ ນີ້ເປັນຄວາມລະອຽດຂອງເມດຕາເຈໂຕວິມຸດຕິ ເມດຕາເຈໂຕວິມຸດຕິທີ່ບຸກຄົນເຮັດໃຫ້ເປັນເໝືອນຍານ ເຮັດໃຫ້ເປັນບ່ອນຕັ້ງ ຕັ້ງໄວ້ເນືອງ ໆ ສັ່ງສົມແລ້ວ ຜາອົບສະເໝີດີແລ້ວ ຈະເລີນດີແລ້ວ ອະທິຖານດີແລ້ວ ດຳເນີນໄປດີແລ້ວ ພົ້ນວິເສດແລ້ວ ຍ່ອມຍັງເມດຕານັ້ນໃຫ້ເກີດ ໃຫ້ໂຊດຊ່ວງ ໃຫ້ສະຫວ່າງສະໄຫວ

**ມັກຄັງຄະວາຣະ ຈົບ**

**ເມດຕາກະຖາ ຈົບ**

# ໕. ວິຣາຄະກະຖາ

## ວ່າດ້ວຍວິຣາຄະ

[໔໗] ວິຣາຄະຊື່ວ່າມັກ ວິມຸດຕິຊື່ວ່າຜົນ

ວິຣາຄະຊື່ວ່າມັກ ເປັນແນວໃດ?

ຄື ໃນຂະນະແຫ່ງໂສດາປັດຕິມັກ ວິຣາຄະທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນຍ່ອມຄາຍຈາກມິດສາທິດຖິ ຄາຍຈາກກິເລດອັນເປັນໄປຕາມມິດສາທິດຖິນັ້ນ ຈາກຂັນ ແລະຄາຍຈາກສັບພະນິມິດພາຍນອກ ວິຣາຄະມີວິຣາຄະເປັນອາລົມ ມີວິຣາຄະເປັນໂຄຈອນ ລວມລົງໃນວິຣາຄະ ຕັ້ງຢູ່ໃນວິຣາຄະ ປະດິດສະຖານຢູ່ໃນວິຣາຄະ

ຄຳວ່າ ວິຣາຄະ ອະທິບາຍວ່າ ວິຣາຄະມີ ໔ ຢ່າງ ຄື

໑. ນິບພານເປັນວິຣາຄະ

໔. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິຣາຄະ

ຍ້ອນແນວນັ້ນ ມັກຈຶ່ງເປັນວິຣາຄະ ອົງມັກ ໆ ທີ່ເປັນສະຫະຊາຕະຍ່ອມເຖິງຄວາມເປັນວິຣາຄະ ຍ້ອນແນວນັ້ນ ວິຣາຄະຈຶ່ງເປັນມັກ ພຣະພຸດທະເຈົ້າ ແລະສາວົກຍ່ອມເຖິງນິບພານເຊິ່ງເປັນທິດທີ່ ບໍ່ເຄີຍໄປດ້ວຍມັກນີ້ ຍ້ອນແນວນັ້ນ ຈຶ່ງຊື່ວ່າມັກມີອົງ ໘ ອະຣິຍະມັກມີອົງ ໘ ນີ້ເທົ່ານັ້ນລ້ຳເລີດ ເປັນປະທານ ສູງສຸດ ແລະປະເສີດກວ່າມັກຂອງສະມະນະພາມເປັນຈຳນວນຫຼາຍຜູ້ຖືລັດທິອື່ນ ຍ້ອນແນວນັ້ນ ມັກມີອົງ ໘ ຈຶ່ງປະເສີດກວ່າມັກທັງຫຼາຍ ວິຣາຄະທີ່ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຍ່ອມຄາຍຈາກມິດສາສັງກັບປະ ຯລຯ ວິຣາຄະທີ່ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດ ຍ່ອມຄາຍຈາກມິດສາວາຈາ ວິຣາຄະທີ່ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຍ່ອມຄາຍຈາກມິດສາກຳມັນຕະ ວິຣາຄະທີ່ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຍ່ອມຄາຍຈາກ ມິດສາອາຊີວະ ວິຣາຄະທີ່ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຍ່ອມຄາຍຈາກມິດສາວາຍາມະ ວິຣາຄະທີ່ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຍ່ອມຄາຍຈາກມິດສາສະຕິ ວິຣາຄະທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມຄາຍຈາກມິດສາສະມາທິ ຄາຍຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະຄາຍຈາກສັບພະນິມິດພາຍນອກ ວິຣາຄະຈຶ່ງມີວິຣາຄະເປັນອາລົມ ມີວິຣາຄະເປັນໂຄຈອນ ລວມລົງໃນວິຣາຄະ ຕັ້ງຢູ່ໃນວິຣາຄະ ປະດິດສະຖານຢູ່ໃນວິຣາຄະ

ຄຳວ່າ ວິຣາຄະ ອະທິບາຍວ່າ ວິຣາຄະມີ ໔ ຢ່າງ ຄື

໑. ນິບພານເປັນວິຣາຄະ

໔. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິຣາຄະ

ຍ້ອນແນວນັ້ນ ມັກຈຶ່ງເປັນວິຣາຄະ ອົງມັກ ໆ ທີ່ເປັນສະຫະຊາຕະ ຍ່ອມເຖິງຄວາມເປັນວິຣາຄະ ຍ້ອນແນວນັ້ນ ວິຣາຄະຈຶ່ງເປັນມັກ ພຣະພຸດທະເຈົ້າ ແລະສາວົກ ຍ່ອມເຖິງນິບພານເຊິ່ງເປັນທິດທີ່ບໍ່ເຄີຍໄປດ້ວຍມັກນີ້ ຍ້ອນແນວນັ້ນ ຈຶ່ງຊື່ວ່າມັກມີອົງ ໘ ອະຣິຍະມັກມີອົງ ໘ ນີ້ເທົ່ານັ້ນລ້ຳເລີດ ເປັນປະທານ ສູງສຸດ ແລະປະເສີດກວ່າມັກຂອງສະມະນະພາມເປັນຈຳນວນຫຼາຍຜູ້ຖືລັດທິອື່ນ ຍ້ອນແນວນັ້ນ ມັກມີອົງ ໘ ຈຶ່ງປະເສີດກວ່າມັກທັງຫຼາຍໃນຂະນະແຫ່ງສະກະທາຄາມິມັກ ວິຣາຄະທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິຣາຄະທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມຄາຍຈາກກາມຣາຄະສັງໂຍດ ຈາກປະຕິຄະສັງໂຍດສ່ວນທີ່ຫຍາບ ໆ ຈາກກາມຣາຄານຸໄສ ຈາກປະຕິຄານຸໄສ ສ່ວນທີ່ຫຍາບ ໆ ຄາຍຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະຄາຍຈາກສັບພະນິມິດພາຍນອກ ວິຣາຄະຈຶ່ງມີວິຣາຄະເປັນອາລົມ ມີວິຣາຄະເປັນໂຄຈອນ ລວມລົງໃນວິຣາຄະ ຕັ້ງຢູ່ໃນວິຣາຄະ ປະດິດສະຖານຢູ່ໃນວິຣາຄະ

ຄຳວ່າ ວິຣາຄະ ອະທິບາຍວ່າ ວິຣາຄະມີ ໔ ຢ່າງ ຄື

໑. ນິບພານເປັນວິຣາຄະ

໔. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິຣາຄະ

ຯລຯ ຍ້ອນແນວນັ້ນ ມັກມີອົງ ໘ ຈຶ່ງປະເສີດກວ່າມັກທັງຫຼາຍ

ໃນຂະນະແຫ່ງອະນາຄາມີມັກ ວິຣາຄະທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິຣາຄະທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມຄາຍຈາກກາມຣາຄະ ສັງໂຍດ ຈາກປະຕິຄະສັງໂຍດ ສ່ວນທີ່ລະອຽດ ໆ ຈາກກາມຣາຄານຸໄສ ຈາກປະຕິຄານຸໄສ ສ່ວນທີ່ລະອຽດ ໆ ຄາຍຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະຄາຍຈາກສັບພະນິມິດພາຍນອກ ວິຣາຄະຈຶ່ງມີວິຣາຄະເປັນອາລົມ ຯລຯ ຍ້ອນແນວນັ້ນ ມັກ ມີອົງ ໘ ຈຶ່ງປະເສີດກວ່າມັກທັງຫຼາຍ

ໃນຂະນະແຫ່ງອະຣະຫັດຕະມັກ ວິຣາຄະທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິຣາຄະທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມຄາຍຈາກຣູບຣາຄະ ຈາກອະຣູບຣາຄະ ຈາກອຸດທັດຈະ ຈາກອະວິດຊາ ຈາກມານານຸໄສ ຈາກພະວະຣາຄານຸໄສ ຈາກອະວິດຊານຸໄສ ຄາຍຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະຄາຍຈາກສັບພະນິມິດພາຍນອກ ວິຣາຄະຈຶ່ງມີວິຣາຄະເປັນອາລົມ ມີວິຣາຄະເປັນໂຄຈອນ ລວມລົງໃນວິຣາຄະ ຕັ້ງຢູ່ໃນວິຣາຄະ ປະດິດສະຖານຢູ່ໃນວິຣາຄະ

ຄຳວ່າ ວິຣາຄະ ອະທິບາຍວ່າ ວິຣາຄະມີ ໔ ຢ່າງ ຄື

໑. ນິບພານເປັນວິຣາຄະ

໔. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິຣາຄະ

ຍ້ອນແນວນັ້ນ ມັກຈຶ່ງເປັນວິຣາຄະ ອົງມັກ ໆ ທີ່ເປັນສະຫະຊາຕະຍ່ອມເຖິງຄວາມ ເປັນວິຣາຄະ ຍ້ອນແນວນັ້ນ ວິຣາຄະຈຶ່ງເປັນມັກ ພຣະພຸດທະເຈົ້າ ແລະສາວົກຍ່ອມເຖິງນິບພານເຊິ່ງເປັນທິດທີ່ ບໍ່ເຄີຍໄປດ້ວຍມັກນີ້ ຍ້ອນແນວນັ້ນ ຈຶ່ງຊື່ວ່າມັກມີອົງ ໘ ອະຣິຍະມັກມີອົງ ໘ ນີ້ເທົ່ານັ້ນລ້ຳເລີດ ເປັນປະທານ ສູງສຸດ ແລະປະເສີດກວ່າມັກຂອງສະມະນະພາມເປັນຈຳນວນຫຼາຍຜູ້ຖືລັດທິອື່ນ ຍ້ອນແນວນັ້ນ ມັກມີອົງ ໘ ຈຶ່ງປະເສີດກວ່າມັກທັງຫຼາຍ

ວິຣາຄະຄືຄວາມເຫັນ ຊື່ວ່າສຳມາທິດຖິ ວິຣາຄະຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ວິຣາຄະຄືຄວາມກຳນົດ ຊື່ວ່າສຳມາວາຈາ ວິຣາຄະຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ວິຣາຄະຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ວິຣາຄະຄືການປະຄອງໄວ້ ຊື່ວ່າສຳມາວາຍາມະ ວິຣາ

ຄະຄືຄວາມຕັ້ງໝັ້ນ ຊື່ວ່າສຳມາສະຕິ ວິຣາຄະຄື ຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ ວິຣາຄະຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ວິຣາຄະຄືການເລືອກເຟັ້ນ ຊື່ວ່າທຳມະວິຈະຍະສຳໂພດຊົງ ວິຣາຄະຄືການປະຄອງໄວ້ ຊື່ວ່າວິຣິຍະສຳໂພດຊົງ ວິຣາຄະຄື ຄວາມແຜ່ໄປ ຊື່ວ່າປິຕິສຳໂພດຊົງ ວິຣາຄະຄືຄວາມສະງົບຣະງັບ ຊື່ວ່າປັດສັດທິສຳໂພດຊົງ ວິຣາຄະຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິສຳໂພດຊົງ ວິຣາຄະຄືການພິຈາລະນາ ຊື່ວ່າອຸເປກຂາສຳໂພດຊົງ

ວິຣາຄະຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ວິຣາຄະຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ວິຣາຄະຄືຄວາມບໍ່ຫວັ່ນໄຫວ ຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ວິຣາຄະຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າ ສະມາທິພະລະ ວິຣາຄະຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ

ວິຣາຄະຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ວິຣາຄະຄືການປະຄອງໄວ້ ຊື່ວ່າວິຣິຍິນຊີ ວິຣາຄະຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ວິຣາຄະຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິນຊີ ວິຣາຄະຄືຄວາມເຫັນ ຊື່ວ່າປັນຍິນຊີ

ວິຣາຄະທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ວິຣາຄະທີ່ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ວິຣາຄະທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກ ວິຣາຄະທີ່ຊື່ວ່າມັກ ຍ້ອນມີສະພາວະເປັນເຫດ ວິຣາຄະທີ່ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ວິຣາຄະ ທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະເລີ່ມຕັ້ງໄວ້ ວິຣາຄະທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະ ໃຫ້ສຳເລັດ ວິຣາຄະທີ່ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ວິຣາຄະທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ວິຣາຄະທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ວິຣາຄະທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ວິຣາຄະທີ່ຊື່ວ່າທຳທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນ

ວິຣາຄະທີ່ຊື່ວ່າສີລະວິສຸດທິ[໑] ຍ້ອນມີສະພາວະສັງລວມ ວິຣາຄະທີ່ຊື່ວ່າຈິດຕະວິສຸດທິ[໒] ຍ້ອນມີສະພາວະບໍ່ຟຸ້ງຊ່ານ ວິຣາຄະທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ວິຣາຄະທີ່ຊື່ວ່າວິໂມກ ຍ້ອນມີສະພາວະພົ້ນວິເສດ ວິຣາຄະທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ

ວິຣາຄະທີ່ຊື່ວ່າວິມຸດຕິ[໓] ຍ້ອນມີສະພາວະສະລະ ວິຣາຄະທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ວິຣາຄະທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ວິຣາຄະທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ວິຣາຄະທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນທີ່ລວມ

ວິຣາຄະທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ປະຊຸມ ວິຣາຄະທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ວິຣາຄະທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ວິຣາຄະທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ໆ ວິຣາຄະທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ມັກທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ມັກຄືຄວາມເຫັນ ຊື່ວ່າສຳມາທິດຖິ ມັກຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ຯລຯ ມັກທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ວິຣາຄະຊື່ວ່າ ມັກເປັນແບວນີ້

[໔໙] ວິມຸດຕິຊື່ວ່າຜົນ ເປັນແບວໃດ?

ຄື ໃນຂະນະແຫ່ງໂສດາປັດຕິຜົນ ວິມຸດຕິທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຍ່ອມພົ້ນຈາກມິດສາທິດຖິ ພົ້ນຈາກກິເລດທີ່ເປັນໄປຕາມມິດສາທິດຖິນັ້ນ ຈາກຂັນ ແລະພົ້ນຈາກສັບພະນິມິດພາຍນອກ ວິມຸດຕິຈຶ່ງມີວິມຸດຕິເປັນອາລົມ ມີວິມຸດຕິເປັນໂຄຈອນ ລວມລົງໃນວິມຸດຕິ ຕັ້ງຢູ່ໃນວິມຸດຕິ ປະດິດສະຖານຢູ່ໃນວິມຸດຕິ

ຄຳວ່າ ວິມຸດຕິ ອະທິບາຍວ່າ ວິມຸດຕິມີ ໒ ຢ່າງ ຄື

໑. ນິບພານເປັນວິມຸດຕິ
໒. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິມຸດຕິ

ຍ້ອນແບວນັ້ນ ວິມຸດຕິຈຶ່ງຊື່ວ່າເປັນຜົນ

ວິມຸດຕິທີ່ຊື່ວ່າສຳມາສັງກັບປະ ຍ້ອນມີສະພາວະນຶກຕອງ ຍ່ອມພົ້ນຈາກມິດສາສັງກັບປະ ຯລຯ ວິມຸດຕິທີ່ຊື່ວ່າສຳມາວາຈາ ຍ້ອນມີສະພາວະກຳນົດ ຍ່ອມພົ້ນຈາກມິດສາວາຈາ ຯລຯ ວິມຸດຕິທີ່ຊື່ວ່າສຳມາກຳມັນຕະ ຍ້ອນມີສະພາວະເປັນສະມຸດຖານ ຍ່ອມພົ້ນຈາກມິດສາກຳມັນຕະ ຯລຯ ວິມຸດຕິທີ່ຊື່ວ່າສຳມາອາຊີວະ ຍ້ອນມີສະພາວະຜ່ອງແຜ້ວ ຍ່ອມພົ້ນຈາກມິດສາອາຊີວະ ຯລຯ ວິມຸດຕິທີ່ຊື່ວ່າສຳມາວາຍາມະ ຍ້ອນມີສະພາວະປະຄອງໄວ້ ຍ່ອມພົ້ນຈາກມິດສາວາຍາມະ ຯລຯ ວິມຸດຕິທີ່ຊື່ວ່າສຳມາສະຕິ ຍ້ອນມີສະພາວະຕັ້ງໝັ້ນ ຍ່ອມພົ້ນຈາກມິດສາສະຕິ ຯລຯ ວິມຸດຕິທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມພົ້ນຈາກມິດສາສະມາທິ ພົ້ນຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະພົ້ນຈາກສັບພະນິມິດພາຍນອກ ວິມຸດຕິຈຶ່ງມີວິມຸດຕິເປັນອາລົມມີວິມຸດຕິເປັນໂຄຈອນ ລວມລົງໃນວິມຸດຕິ ຕັ້ງຢູ່ໃນວິມຸດຕິ ປະດິດສະຖານຢູ່ໃນວິມຸດຕິ

ຄຳວ່າ ວິມຸດຕິ ອະທິບາຍວ່າ ວິມຸດຕິມີ ໒ ຢ່າງ ຄື

໑. ນິບພານເປັນວິມຸດຕິ
໒. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິມຸດຕິ

ຍ້ອນແບວນັ້ນ ວິມຸດຕິຈຶ່ງຊື່ວ່າເປັນຜົນ

ໃນຂະນະແຫ່ງສະກະທາຄາມີຜົນ ວິມຸດຕິທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິມຸດຕິທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມພົ້ນຈາກການຣາຄະສັງໂຍດ ຈາກປະຕິຄະສັງໂຍດ ສ່ວນທີ່ຫຍາບ ໆ ຈາກກາມຣາຄານຸໄສ ຈາກປະຕິຄານຸໄສ ສ່ວນທີ່ຫຍາບ ໆ ພົ້ນຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະພົ້ນຈາກສັບພະນິມິດ ພາຍນອກ ຯລຯ ຍ້ອນແນວນັ້ນ ວິມຸດຕິຈຶ່ງຊື່ວ່າເປັນຜົນໃນຂະນະແຫ່ງອະນາຄາມີຜົນ ວິມຸດຕິທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິມຸດຕິທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມພົ້ນຈາກການຣາຄະສັງໂຍດ ຈາກປະຕິຄະສັງໂຍດ ສ່ວນທີ່ລະອຽດ ໆ ຈາກການຣາຄານຸໄສ ຈາກປະຕິຄານຸໄສ ສ່ວນທີ່ລະອຽດ ໆ ພົ້ນຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະພົ້ນຈາກສັບພະນິມິດພາຍນອກ ຯລຯ ຍ້ອນແນວນັ້ນ ວິມຸດຕິຈຶ່ງຊື່ວ່າເປັນຜົນ

ໃນຂະນະແຫ່ງອະຣະຫັດຕະຜົນ ວິມຸດຕິທີ່ຊື່ວ່າສຳມາທິດຖິ ຍ້ອນມີສະພາວະເຫັນ ຯລຯ ວິມຸດຕິທີ່ຊື່ວ່າສຳມາສະມາທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ຍ່ອມພົ້ນຈາກຮູບຣາຄະ ຈາກອະຮູບຣາຄະ ຈາກມານະ ຈາກອຸດທັດຈະ ຈາກອະວິດຊາ ຈາກມານານຸໄສ ຈາກພະວະຣາຄານຸໄສ ຈາກອະວິດຊານຸໄສ ພົ້ນຈາກກິເລດທີ່ເປັນໄປຕາມມິດສາສະມາທິນັ້ນ ຈາກຂັນ ແລະພົ້ນ ຈາກສັບພະນິມິດພາຍນອກ ວິມຸດຕິຈຶ່ງມີວິມຸດຕິເປັນອາລົມ ມີວິມຸດຕິເປັນໂຄຈອນ ລວມລົງໃນວິມຸດຕິ ຕັ້ງຢູ່ໃນວິມຸດຕິ ປະດິດສະຖານຢູ່ໃນວິມຸດຕິ

ຄຳວ່າ ວິມຸດຕິ ອະທິບາຍວ່າ ວິມຸດຕິມີ ໒ ຢ່າງ ຄື

໑. ນິບພານເປັນວິມຸດຕິ
໒. ທຳທັງປວງທີ່ເກີດຍ້ອນມີນິບພານເປັນອາລົມເປັນວິມຸດຕິ

ຍ້ອນແນວນັ້ນ ວິມຸດຕິຈຶ່ງຊື່ວ່າເປັນຜົນ

ວິມຸດຕິຄືຄວາມເຫັນ ຊື່ວ່າສຳມາທິດຖິ ຯລຯ ວິມຸດຕິຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ

ວິມຸດຕິຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ຯລຯ ວິມຸດຕິຄືການພິຈາລະນາຊື່ວ່າອຸເປກຂາສຳໂພດຊົງ

ວິມຸດຕິຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ຯລຯ ວິມຸດຕິຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ

ວິມຸດຕິຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ຯລຯ ວິມຸດຕິຄືຄວາມເຫັນ ຊື່ວ່າ ປັນຍິນຊີ

ວິມຸດຕິທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ວິມຸດຕິທີ່ຊື່ວ່າພະລະ ຍ້ອນມີ ສະພາວະບໍ່ຫວັ່ນໄຫວ ວິມຸດຕິທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກ ວິມຸດຕິທີ່ຊື່ວ່າມັກ ຍ້ອນມີສະພາ

ວະເປັນເຫດ ວິມຸດຕິທີ່ຊື່ວ່າສະຕິປັດຖານ ຍ້ອນມີສະພາວະຕັ້ງໝັ້ນ ວິມຸດຕິທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະເລີ່ມຕັ້ງໄວ້ ວິມຸດຕິທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະໃຫ້ສຳເລັດ ວິມຸດຕິທີ່ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ ວິມຸດຕິທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານວິມຸດຕິທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ວິມຸດຕິທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ວິມຸດຕິທີ່ຊື່ວ່າທຳທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນ

ວິມຸດຕິທີ່ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມ ວິມຸດຕິທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ວິມຸດຕິທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນ ວິມຸດຕິທີ່ຊື່ວ່າວິໂມກ ຍ້ອນມີສະພາວະພົ້ນວິເສດ ວິມຸດຕິທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ ວິມຸດຕິທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະສະລະ ວິມຸດຕິທີ່ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະສະງົບຣະງັບ ວິມຸດຕິທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ວິມຸດຕິທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ວິມຸດຕິທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນທີ່ລວມ ວິມຸດຕິທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ປະຊຸມ ວິມຸດຕິທີ່ຊື່ວ່າສມາທິ ຍ້ອນມີສະພາວະເປັນປະທານ ວິມຸດຕິທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ວິມຸດຕິທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ວິມຸດຕິທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ວິມຸດຕິທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ວິມຸດຕິຊື່ວ່າຜົນແນວນີ້ ວິຣາຄະຊື່ວ່າມັກ ວິມຸດຕິຊື່ວ່າຜົນ ດ້ວຍປະການແນວນີ້

**ວິຣາຄະກະຖາ ຈົບ**

# ໖. ປະຕິສຳພິທາກະຖາ

## ວ່າດ້ວຍປະຕິສຳພິທາ

## ໑. ທຳມະຈັກກັບປະວັດຕະນະວາຣະ

### ວາຣະວ່າດ້ວຍການປະກາດທຳມະຈັກ

[໓໐] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກປະທັບຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ໃນບ່ອນນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດແກ່ພິກຂຸປັນຈະວັກຄີວ່າ

ພິກຂຸທັງຫຼາຍ ສ່ວນສຸດ ໒ ປະການນີ້ ບັນພະຊິດບໍ່ຄວນເສບ

ສ່ວນສຸດ ໒ ປະການ ມີອັນໃດແດ່ ຄື

໑. ການສຸຂັນລິການຸໂຍກ (ການມົກມຸ່ນຢູ່ດ້ວຍກາມສຸກໃນກາມທັງຫຼາຍ) ເປັນທຳອັນຊົ່ວຊາມ ເປັນຂອງຊາວບ້ານ ເປັນຂອງປຸຖຸຊົນ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະ ໂຫຍດ

໒. ອັດຕະກິລະມະຖານຸໂຍກ (ການປະກອບຄວາມລຳບາກເດືອດຮ້ອນແກ່ຕົນ) ເປັນທຸກ ບໍ່ແມ່ນຂອງພຣະອະຣິຍະ ບໍ່ປະກອບດ້ວຍປະໂຫຍດ

ພິກກກຂຸທັງຫຼາຍ ມັດຊິມາປະຕິປະທາບໍ່ອຽງເຂົ້າໃກ້ສ່ວນສຸດ ໒ ປະການນີ້ນັ້ນ ຕະຖາຄົດຕັດສະຣູ້ແລ້ວ ເຮັດໃຫ້ເຫັນປະຈັກ ເຮັດໃຫ້ຮູ້ຊັດແຈ້ງ ຍ່ອມເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ

ມັດຊິມາປະຕິປະທາທີ່ຕະຖາຄົດຕັດສະຣູ້ແລ້ວ ເຮັດໃຫ້ເຫັນປະຈັກ ເຮັດໃຫ້ຮູ້ຊັດແຈ້ງ ຍ່ອມເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານນັ້ນ ເປັນເປັນແນວໃດ?

ຄື ອະຣິຍະມັກມີອົງ ໘ ນີ້ ໄດ້ແກ່

| | |
|---|---|
| ໑. ສຳມາທິດຖິ | ໒. ສຳມາສັງກັບປະ |
| ໓. ສຳມາວາຈາ | ໔. ສຳມາກຳມັນຕະ |
| ໕. ສຳມາອາຊີວະ | ໖. ສຳມາວາຍາມະ |
| ໗. ສຳມາສະຕິ | ໘. ສຳມາສະມາທິ |

ພິກຂຸທັງຫຼາຍ ມັດຊິມາປະຕິປະທານີ້ນັ້ນ ຕະຖາຄົດຕັດສະຣູ້ແລ້ວ ເຮັດໃຫ້ເຫັນປະຈັກ ເຮັດໃຫ້ຮູ້ຊັດແຈ້ງ ຍ່ອມເປັນໄປເພື່ອຄວາມສະງົບ ເພື່ອຄວາມຮູ້ຍິ່ງ ເພື່ອຄວາມຕັດສະຣູ້ ເພື່ອນິບພານ

ພິກຂຸທັງຫຼາຍ ທຸກຂະອະຣິຍະສັດນີ້ ຄື ຊາດເປັນທຸກ ຊະຣາເປັນທຸກ ພະຍາທິເປັນທຸກ ມໍຣະນະເປັນທຸກ ຄວາມປະສົບກັບອາລົມອັນບໍ່ເປັນທີ່ຮັກກໍເປັນທຸກ ຄວາມພັດພາກຈາກອາລົມອັນເປັນທີ່ຮັກກໍເປັນທຸກ ການບໍ່ໄດ້ອາລົມທີ່ປາຖະໜາກໍເປັນທຸກ ໂດຍຫຍໍ້ອຸປາທານຂັນ ໕ ເປັນທຸກ

ພິກຂຸທັງຫຼາຍ ທຸກຂະສະມຸທະຍະອະຣິຍະສັດນີ້ ຄື ຕັນຫາອັນເຮັດໃຫ້ເກີດອີກປະກອບດ້ວຍຄວາມເພີດເພີນ ແລະຄວາມກຳໜັດ ມີປົກກະຕິໃຫ້ເພີດເພີນໃນອາລົມນັ້ນ ໆ ຄື ການຕັນຫາ ພະວະຕັນຫາ ວິພະວະຕັນຫາ

ພິກຂຸທັງຫຼາຍ ທຸກຂະນິໂຣທະອະຣິຍະສັດນີ້ ຄືຄວາມດັບຕັນຫານັ້ນນັ້ນແລໂດຍບໍ່ເຫຼືອດ້ວຍວິຣາຄະ ຄວາມສະລະ ຄວາມສະລະຄືນ ຄວາມພົ້ນ ຄວາມບໍ່ອາໄລໃນຕັນຫາ

ພິກຂຸທັງຫຼາຍ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ ຄື ອະຣິຍະມັກມີອົງ ໘ ຄື

໑. ສໍາມາທິດຖິ ໗ລ໗ ໘. ສໍາມາສະມາທິ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ຄວນກໍານົດຮູ້

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ເຮົາກໍານົດຮູ້ແລ້ວ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະ ອະຣິຍະສັດນີ້ຄວນລະ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ເຮົາລະໄດ້ແລ້ວ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ຄວນເຮັດໃຫ້ແຈ້ງ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະອະຣິຍະສັດນີ້ເຮົາເຮັດໃຫ້ແຈ້ງແລ້ວ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ຄວນຈະເລີນ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດນີ້ເຮົາໄດ້ຈະເລີນແລ້ວ

ພິກຂຸທັງຫຼາຍ ຍະຖາພູຕະຍານທັດສະນະຂອງເຮົາໃນອະຣິຍະສັດ ໔ ນີ້ ໓ ຮອບ ມີອາການ ໑໒ ແນວນີ້ ຍັງບໍ່ມົດຈົດດີຕາບໃດ ເຮົາກໍຍັງບໍ່ຢືນຢັນວ່າ ເປັນຜູ້ຕັດສະຣູ້ສຳມາ ສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຕາບນັ້ນ

ພິກຂຸທັງຫຼາຍ ເມື່ອໃດ ຍະຖາພູຕະຍານທັດສະນະຂອງເຮົາໃນອະຣິຍະສັດ ໔ ນີ້ ໓ ຮອບ ມີອາການ ໑໒ ແນວນີ້ ມົດຈົດດີແລ້ວ ເມື່ອນັ້ນ ເຮົາຈຶ່ງຢືນຢັນໄດ້ວ່າ ເປັນຜູ້ຕັດສະຣູ້ສຳມາສຳໂພທິຍານອັນປະເສີດໃນໂລກ ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໃນໝູ່ສັດພ້ອມທັງສະມະນະພາມ ເທວະດາແລະມະນຸດ

ອັນໜຶ່ງ ຍານທັດສະນະເກີດຂຶ້ນແລ້ວແກ່ເຮົາວ່າ ຄວາມລຸດພົ້ນຂອງເຮົາບໍ່ກຳເຣີບ ຊາດນີ້ເປັນຊາດສຸດທ້າຍ ບັດນີ້ ພົບໃໝ່ບໍ່ມີອີກ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດໄວຍາກອນນີ້ຈົບລົງແລ້ວ ພິກຂຸປັນຈະວັກຄີຊື່ນຊົມ ຍິນດີພຣະພາສິດຂອງພຣະຜູ້ມີພຣະພາກເຈົ້າ

ເມື່ອພຣະຜູ້ມີພຣະພາກເຈົ້າກຳລັງຕັດໄວຍາກອນນີ້ຢູ່ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນ ໄດ້ເກີດແກ່ທ່ານພຣະໂກນທັນຍະວ່າ ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນ ເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ

ເມື່ອພຣະຜູ້ມີພຣະພາກເຈົ້າຊົງປະກາດທຳມະຈັກໃຫ້ເປັນໄປແລ້ວ ເທບຊັ້ນພຸມມະໄດ້ກະຈາຍຂ່າວໄປວ່າ ນັ້ນທຳມະຈັກອັນປະເສີດ ພຣະຜູ້ມີພຣະພາກເຈົ້າຊົງເຮັດໃຫ້ເປັນໄປແລ້ວໃນປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກໃຫ້ໝຸນກັບບໍ່ໄດ້

ເທບຊັ້ນຈາຕຸມະຫາຣາດໄດ້ສະດັບສຽງປະກາດຂອງເທບຊັ້ນພຸມມະແລ້ວ ໄດ້ກະຈາຍຂ່າວຕໍ່ ໆ ກັນໄປ ຯລຯ

ເທບຊັ້ນຕາວະຕິງສາໄດ້ສະດັບສຽງປະກາດຂອງເທບຊັ້ນຈາຕຸມະຫາຣາດແລ້ວ ໄດ້ກະຈາຍຂ່າວຕໍ່ ໆ ກັນ ໄປ ຯລຯ

ເທບຊັ້ນຍາມາ ຯລຯ

ເທບຊັ້ນດຸສິດ ໗ລ໗

ເທບຊັ້ນນິມມານະຣະດີ ໗ລ໗

ເທບຊັ້ນປະຣະນິມມິຕະວະສະວັດດີ ໗ລ໗

ເທບຜູ້ນັບເນື່ອງໃນໝູ່ພົມສະດັບສຽງຂອງເຫຼົ່າເທບ ຊັ້ນປະຣະນິມມິຕະວະສະວັດດີແລ້ວກໍກະຈາຍຂ່າວໄປວ່າ ນັ້ນທຳມະຈັກອັນປະເສີດ ພຣະຜູ້ມີພຣະພາກເຈົ້າຊົງໃຫ້ເປັນໄປແລ້ວ ໃນປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ອັນສະມະນະ ພາມ ເທວະດາ ມານພົມ ຫຼືໃຜ ໆ ໃນໂລກໃຫ້ໝຸນກັບບໍ່ໄດ້

ໂດຍໃນຂະນະບຶດໜຶ່ງເທົ່ານັ້ນ ສຽງປ່າວປະກາດໄດ້ກະຈາຍຂຶ້ນໄປເຖິງພົມມະໂລກດ້ວຍປະການແນວນີ້

ທັງໝື່ນໂລກກະທາດນີ້ກໍສັ່ນສະເທືອນເລື່ອນລັ່ນ ທັງແສງສະຫວ່າງອັນເຈີດຈ້າຫາປະມານບໍ່ໄດ້ ຍິ່ງກວ່າເທວານຸພາບຂອງເທວະດາທັງຫຼາຍ ກໍຜາກົດໃນໂລກ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງເປ່ງພຣະອຸທານວ່າ ຜູ້ຈະເລີນທັງຫຼາຍ ໂກນທັນຍະ ໄດ້ຮູ້ແລ້ວນໍ ຜູ້ຈະເລີນທັງຫຼາຍ ໂກນທັນຍະໄດ້ຮູ້ແລ້ວນໍ ດັ່ງນັ້ນ ຄຳວ່າ ອັນຍາໂກນທັນຍະນີ້ ຈຶ່ງໄດ້ເປັນຊື່ຂອງທ່ານໂກນທັນຍະນັ້ນແລ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ຍານເປັນທຳ ປັນຍາເປັນທຳ ວິດຊາເປັນທຳ ແສງສະຫວ່າງ ເປັນທຳ ທຳ ໕ ປະການນີ້ເປັນອາລົມ ແລະເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນອາລົມຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນອາລົມຂອງທຳມະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນທຳທັງຫຼາຍວ່າທຳມະປະຕິສຳພິທາ

ສະພາວະທີ່ເຫັນເປັນອັດຖະ ສະພາວະທີ່ຮູ້ເປັນອັດຖະ ສະພາວະທີ່ຮູ້ຊັດແຈ້ງເປັນອັດຖະ ສະພາວະທີ່ຮູ້ແຈ້ງເປັນອັດຖະ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ອັດຖະ ໕ ປະການນີ້ ເປັນອາລົມແລະ ເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນອາລົມຂອງອັດຖະປະຕິສຳພິທາ ອັດຖະ ເຫຼົ່ານັ້ນເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່ານັ້ນເປັນອາລົມຂອງອັດຖະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນອັດຖະທັງຫຼາຍວ່າ ອັດຖະປະຕິສຳພິທາ

ນິຣຸດຕິ ໑໐ ປະການນີ້ ຄື ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງທຳ ໕ ປະການ ການຣະບຸພະຍັນຊະນະ ແລະນິຣຸດຕິເພື່ອສະແດງອັດຖະ ໕ ປະການ ເປັນອາລົມ ແລະເປັນໂຄຈອນຂອງນິຣຸດຕິປະຕິສຳພິທາທຳ ແລະອັດຖະເຫຼົ່າໃດເປັນອາລົມຂອງນິຣຸດຕິ ປະຕິສຳພິທາທຳ ແລະອັດຖະເຫຼົ່ານັ້ນເປັນໂຄຈອນຂອງນິຣຸດຕິປະຕິສຳພິທາທຳ ແລະອັດຖະເຫຼົ່າໃດເປັນໂຄຈອນຂອງນິຣຸດຕິປະຕິສຳພິທາທຳ ແລະອັດຖະເຫຼົ່ານັ້ນເປັນອາລົມຂອງນິຣຸດຕິປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນນິຣຸດຕິທັງຫຼາຍວ່າ ນິຣຸດຕິປະຕິສຳພິທາ

ຍານ ໔໐ ປະການນີ້ ຄື ຍານໃນທຳ ໕ ປະການ ຍານໃນອັດຖະ ໕ ປະການ ຍານໃນນິຣຸດຕິ ໑໐ ປະການ ເປັນອາລົມ ແລະເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່າໃດເປັນອາລົມຂອງປະຕິພານະປະຕິສຳພິທາຍານໃນທຳເຫຼົ່ານັ້ນ ເປັນໂຄຈອນຂອງປະຕິພານະປະຕິສຳພິທາຍານໃນທຳເຫຼົ່າໃດເປັນໂຄຈອນຂອງປະຕິພານະປະຕິສຳພິທາຍານໃນທຳເຫຼົ່ານັ້ນເປັນອາລົມຂອງປະຕິພານະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນປະຕິພານທັງຫຼາຍວ່າ ປະຕິພານະປະຕິສຳພິທາ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ນັ້ນແລຄວນກຳນົດຮູ້ ໆລໆ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ນັ້ນເຮົາກຳນົດຮູ້ແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ຍານເປັນທຳ ປັນຍາເປັນທຳ ວິດຊາເປັນທຳ ແສງສະຫວ່າງ ເປັນທຳ ທຳ ໕ ປະການນີ້ເປັນອາລົມແລະເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນອາລົມຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນອາລົມຂອງທຳມະ ປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນທຳທັງຫຼາຍວ່າ ທຳມະປະຕິສຳພິທາ

ສະພາວະທີ່ເຫັນເປັນອັດຖະ ສະພາວະທີ່ຮູ້ເປັນອັດຖະ ສະພາວະທີ່ຮູ້ຊັດແຈ້ງເປັນອັດຖະ ສະພາວະທີ່ຮູ້ແຈ້ງເປັນອັດຖະ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ອັດຖະ ໕ ປະການນີ້ເປັນອາລົມແລະ ເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນອາລົມຂອງອັດຖະປະຕິສຳພິທາ ອັດຖະເຫຼົ່ານັ້ນເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່ານັ້ນເປັນອາລົມຂອງອັດຖະປະຕິສຳພິທາ ຍ້ອນເຫດນັ້ນທ່ານຈຶ່ງຮຽກຍານໃນອັດຖະທັງຫຼາຍວ່າ ອັດຖະປະຕິສຳພິທາ

ນິຣຸດຕິ ໑໐ ປະການນີ້ ຄື ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງທຳ ໕ ປະການ ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງອັດຖະ ໕ ປະການເປັນອາລົມແລະ ເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່າໃດເປັນອາລົມຂອງນິຣຸດຕິ ປະຕິສຳພິທາ ທຳແລະອັດຖະເຫຼົ່ານັ້ນເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະ ເຫຼົ່າໃດເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່ານັ້ນເປັນອາລົມຂອງນິຣຸດຕິ ປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນນິຣຸດຕິທັງຫຼາຍວ່າ ນິຣຸດຕິປະຕິສຳພິທາ

ຍານ ໒໐ ປະການນີ້ ຄື ຍານໃນທຳ ໕ ປະການ ຍານໃນອັດຖະ ໕ ປະການ ຍານໃນນິຣຸດຕິ ໑໐ ປະການ ເປັນອາລົມແລະເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່າໃດເປັນອາລົມຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່ານັ້ນເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່າໃດເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່ານັ້ນເປັນອາລົມຂອງປະຕິພານະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນປະຕິພານທັງຫຼາຍວ່າ ປະຕິພານະປະຕິສຳພິທາ

ໃນທຸກຂະອະຣິຍະສັດ ມີທຳ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວ ແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະສະມຸທະຍະອະຣິຍະສັດນີ້ນັ້ນຄວນລະ ຯລຯ ແສງສະຫວ່າງ ເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະສະມຸທະຍະອະຣິຍະສັດນີ້ນັ້ນເຮົາລະໄດ້ແລ້ວ ຯລຯ

ໃນທຸກຂະສະມຸທະຍະອະຣິຍະສັດ ມີທຳ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະອະຣິຍະສັດ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະນິໂຣທະອະຣິຍະສັດນີ້ນັ້ນ ຄວນເຮັດໃຫ້ແຈ້ງ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະນິໂຣທະອະຣິຍະສັດນີ້ນັ້ນເຮົາເຮັດໃຫ້ແຈ້ງແລ້ວ ຯລຯ

ໃນທຸກຂະນິໂຣທະອະຣິຍະສັດ ມີທຳ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດນີ້ນັ້ນ ຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດນີ້ນັ້ນເຮົາຈະເລີນແລ້ວ ຯລຯ

ໃນທຸກຂະນິໂຣທະຄາມີນີປະຕິປະທາອະຣິຍະສັດ ມີທຳ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີ ຍານ ໖໐

ໃນອະຣິຍະສັດ ໔ ມີທຳ ໖໐ ມີອັດຖະ ໖໐ ມີນິຣຸດຕິ ໑໒໐ ມີຍານ ໒໔໐

## ໔. ສະຕິປັດຖານະວາຣະ

### ວາຣະວ່າດ້ວຍສະຕິປັດຖານ

[໓໑] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນກາຍໃນກາຍ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍ ໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນເຮົາຈະເລີນແລ້ວ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນຈິດໃນຈິດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນທຳໃນທຳທັງຫຼາຍ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ນັ້ນເຮົາຈະເລີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນກາຍໃນກາຍ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນເຮົາຈະເລີນແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາ ເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະ ສະຫວ່າງສະໄຫວ

ຈັກຂຸເປັນທຳ ຍານເປັນທຳ ປັນຍາເປັນທຳ ວິດຊາເປັນທຳ ແສງສະຫວ່າງ ເປັນທຳ ທຳ ໕ ປະການນີ້ເປັນອາລົມແລະເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນອາລົມຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນອາລົມຂອງທຳມະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນທຳທັງຫຼາຍວ່າ ທຳມະປະຕິສຳພິທາ

ສະພາວະທີ່ເຫັນເປັນອັດຖະ ສະພາວະທີ່ຮູ້ເປັນອັດຖະ ສະພາວະທີ່ຮູ້ຊັດແຈ້ງເປັນອັດຖະ ສະພາວະທີ່ຮູ້ແຈ້ງເປັນອັດຖະ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ອັດຖະ ໕ ປະການນີ້

ເປັນອາລົມແລະເປັນໂຄຈອນຂອງອັດຖະປະຕິສໍາພິທາ ອັດຖະເຫຼົ່າໃດເປັນອາລົມຂອງອັດຖະປະຕິສໍາພິທາ ອັດຖະເຫຼົ່ານັ້ນເປັນໂຄຈອນຂອງອັດຖະປະຕິສໍາພິທາ ອັດຖະເຫຼົ່າໃດເປັນໂຄຈອນຂອງອັດຖະປະຕິສໍາພິທາ ອັດຖະເຫຼົ່ານັ້ນເປັນອາລົມຂອງອັດຖະປະຕິສໍາພິທາ ຍ້ອນເຫດນັ້ນທ່ານຈຶ່ງຮຽກຍານໃນອັດຖະທັງຫຼາຍວ່າ ອັດຖະປະຕິສໍາພິທາ

ນິຣຸດຕິ ໑໐ ປະການນີ້ ຄື ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງທໍາ ໕ ປະການ ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງອັດຖະ ໕ ປະການເປັນອາລົມແລະເປັນໂຄຈອນຂອງນິຣຸດຕິປະຕິສໍາພິທາ ທໍາແລະອັດຖະເຫຼົ່າໃດເປັນອາລົມຂອງນິຣຸດຕິປະຕິສໍາພິທາ ທໍາແລະອັດຖະເຫຼົ່ານັ້ນເປັນໂຄຈອນຂອງນິຣຸດຕິປະຕິສໍາພິທາ ທໍາແລະອັດຖະເຫຼົ່າໃດເປັນໂຄຈອນຂອງນິຣຸດຕິປະຕິສໍາພິທາ ທໍາແລະອັດຖະເຫຼົ່ານັ້ນເປັນອາລົມຂອງນິຣຸດຕິປະຕິສໍາພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນນິຣຸດຕິທັງຫຼາຍວ່າ ນິຣຸດຕິປະຕິສໍາພິທາ

ຍານ ໒໐ ປະການນີ້ ຄື ຍານໃນທໍາ ໕ ປະການ ຍານໃນອັດຖະ ໕ ປະການ ຍານໃນນິຣຸດຕິ ໑໐ ປະການເປັນອາລົມແລະເປັນໂຄຈອນຂອງປະຕິພານະປະຕິສໍາພິທາ ຍານໃນທໍາເຫຼົ່າໃດເປັນອາລົມຂອງປະຕິພານະປະຕິສໍາພິທາ ຍານໃນທໍາເຫຼົ່ານັ້ນເປັນໂຄຈອນ ຂອງປະຕິພານະປະຕິສໍາພິທາ ຍານໃນທໍາເຫຼົ່າໃດເປັນໂຄຈອນຂອງປະຕິພານະປະຕິສໍາພິທາ ຍານໃນທໍາເຫຼົ່ານັ້ນເປັນອາລົມຂອງປະຕິພານະປະຕິສໍາພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນປະຕິພານທັງຫຼາຍວ່າ ປະຕິພານະປະຕິສໍາພິທາ ໃນສະຕິປັດຖານຄືການພິຈາລະນາເຫັນກາຍໃນກາຍ ມີທໍາ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນຈິດໃນຈິດ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນທໍາໃນທໍາທັງຫຼາຍ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທໍາໃນທໍາທັງຫຼາຍນີ້ນັ້ນຄວນຈະເຈີນ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທໍາທັງຫຼາຍ ທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທໍາໃນທໍາທັງຫຼາຍນີ້ນັ້ນເຮົາຈະເຈີນແລ້ວ ຯລຯ

ໃນສະຕິປັດຖານຄືການພິຈາລະນາເຫັນທໍາໃນທໍາທັງຫຼາຍ ມີທໍາ ໑໕ ມີ ອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ໃນສະຕິປັດຖານ ໔ ມີທໍາ ໖໐ ມີອັດຖະ ໖໐ ມີນິຣຸດຕິ ໑໒໐ ມີຍານ ໒໔໐

# ៦. ອິດທິປາທະວາຣະ

## ວາຣະວ່າດ້ວຍອິດທິບາດ

[៦໘] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນຄວນຈະເຈີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍ ສັນທະສະມາທິປະທານສັງຂານນີ້ນັ້ນເຮົາຈະເຈີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານ ຯລຯ

ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ນັ້ນຄວນຈະເຈີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ນັ້ນເຮົາຈະເຈີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານ ຯລຯ ແສງສະຫວ່າງ ເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນຄວນຈະເຈີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານ ສັງຂານນີ້ນັ້ນ ເຮົາຈະເຈີນແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາ ເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະ ສະຫວ່າງສະໄຫວ

ຈັກຂຸເປັນທຳ ຍານເປັນທຳ ປັນຍາເປັນທຳ ວິດຊາເປັນທຳ ແສງສະຫວ່າງ ເປັນທຳ ທຳ ໕ ປະການນີ້ເປັນອາລົມແລະເປັນໂຄຈອນຂອງທຳມະປະຕິສຳພິທາ ທຳ ເຫຼົ່າໃດເປັນອາລົມຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່າໃດເປັນໂຄຈອນຂອງທຳມະປະຕິສຳພິທາ ທຳເຫຼົ່ານັ້ນເປັນອາລົມຂອງທຳມະ ປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນທຳທັງຫຼາຍວ່າ ທຳມະປະຕິສຳພິທາ

ສະພາວະທີ່ເຫັນເປັນອັດຖະ ສະພາວະທີ່ຮູ້ເປັນອັດຖະ ສະພາວະທີ່ຮູ້ຊັດແຈ້ງເປັນອັດຖະ ສະພາວະທີ່ຮູ້ແຈ້ງເປັນອັດຖະ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ອັດຖະ ໕ ປະການນີ້ເປັນອາລົມແລະ ເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນອາລົມຂອງອັດຖະປະຕິສຳພິທາ ອັດຖະເຫຼົ່ານັ້ນເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່າໃດເປັນໂຄຈອນຂອງອັດຖະປະຕິສຳພິທາ ອັດຖະເຫຼົ່ານັ້ນເປັນອາລົມຂອງອັດຖະປະຕິສຳພິທາ ຍ້ອນເຫດນັ້ນທ່ານຈຶ່ງຮຽກຍານ ໃນອັດຖະທັງຫຼາຍວ່າ ອັດຖະປະຕິສຳພິທາ

ນິຣຸດຕິ ໑໐ ປະການນີ້ ຄື ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງທຳ ໕ ປະການ ການຣະບຸພະຍັນຊະນະແລະນິຣຸດຕິເພື່ອສະແດງອັດຖະ ໕ ປະການເປັນອາລົມແລະ ເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່າໃດເປັນອາລົມຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່ານັ້ນເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່າໃດເປັນໂຄຈອນຂອງນິຣຸດຕິປະຕິສຳພິທາ ທຳແລະອັດຖະເຫຼົ່ານັ້ນເປັນອາລົມຂອງນິຣຸດຕິປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນນິຣຸດຕິທັງຫຼາຍວ່າ ນິຣຸດຕິປະຕິສຳພິທາ

ຍານ ໒໐ ປະການນີ້ ຄື ຍານໃນທຳ ໕ ປະການ ຍານໃນອັດຖະ ໕ ປະການ ຍານໃນນິຣຸດຕິ ໑໐ ປະການເປັນອາລົມແລະເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່າໃດເປັນອາລົມຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່ານັ້ນເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່າໃດເປັນໂຄຈອນຂອງປະຕິພານະປະຕິສຳພິທາ ຍານໃນທຳເຫຼົ່ານັ້ນເປັນອາລົມຂອງປະຕິພານະປະຕິສຳພິທາ ຍ້ອນເຫດນັ້ນ ທ່ານຈຶ່ງຮຽກຍານໃນປະຕິພານທັງຫຼາຍວ່າ ປະຕິພານະປະຕິສຳພິທາ

ໃນອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານ ມີທຳ ໑໕ ມີອັດຖະ ໑໕ ມີນິຣຸດຕິ ໓໐ ມີຍານ ໖໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ

ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍຈິດຕະສະມາທິປະທານສັງຂານ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານ ສັງຂານ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງ ເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ນັ້ນເຮົາຈະເລີນແລ້ວ ຯລຯ

ໃນອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານ ມີທຳ ໑໕ ມີອັດຖະ ໑໕ ມີ ນິຣຸດຕິ ໓໐ ມີຍານ ໖໐ ໃນອິດທິບາດ ໔ ມີທຳ ໖໐ ມີອັດຖະ ໖໐ ມີນິຣຸດຕິ ໑໒໐ ມີຍານ ໒໔໐

## ໔. ສັດຕະໂພທິສັດຕະວາຣະ

### ວາຣະວ່າດ້ວຍພຣະໂພທິສັດ ໗ ພຣະອົງ

[໓໓] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະວິປັດສີໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ສະມຸໄທ ສະມຸໄທ ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະວິປັດສີໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນິໂຣດ ນິໂຣດ ໃນໄວຍາກອນຂອງພຣະວິປັດສີ ໂພທິສັດ ມີທຳ ໑໐ ມີອັດຖະ ໑໐ ມີນິຣຸດຕິ ໒໐ ມີຍານ ໔໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະສິຂີໂພທິສັດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະເວດສະພູໂພທິສັດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະກະກຸສັນທະໂພທິສັດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະໂກນາຄະມະນະໂພທິສັດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະກັດສະປະໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ສະມຸໄທ ສະມຸໄທ ຯລຯ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະກັດສະປະໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນິໂຣດ ນິໂຣດ ຯລຯ ໃນໄວຍາກອນຂອງພຣະກັດສະປະໂພທິສັດມີທຳ ໑໐ ມີອັດຖະ ໑໐ ມີນິຣຸດຕິ ໒໐ ມີຍານ ໔໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະໂຄດົມໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ສະມຸໄທ ສະມຸໄທ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ພຣະໂຄດົມໂພທິສັດໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນິໂຣດ ນິໂຣດ ໃນໄວຍາກອນຂອງພຣະໂຄດົມໂພທິສັດມີທຳ ໑໐ ມີອັດຖະ ໑໐ ມີນິຣຸດຕິ ໔໐ ມີຍານ ໔໐

ໃນໄວຍາກອນ ໗ ຂອງພຣະໂພທິສັດ ໗ ພຣະອົງ ມີທຳ ໗໐ ມີອັດຖະ ໗໐ ມີ ນິຣຸດຕິ ໑໔໐ ມີຍານ ໔໗໐

## ໕. ອະພິນຍາທິວາຣະ

### ວາຣະວ່າດ້ວຍອະພິນຍາເປັນຕົ້ນ

[໓໔] ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາທີ່ຄວນຮູ້ຍິ່ງ ມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຄວນກຳນົດຮູ້ແຫ່ງປະຣິນຍາ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຄວນລະແຫ່ງປະຫານະ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຄວນຈະເລີນແຫ່ງພາວະນາ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາ ມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ໃນສະພາວະທີ່ຄວນຮູ້ຍິ່ງແຫ່ງອະພິນຍາ ໃນສະພາວະທີ່ຄວນກຳນົດຮູ້ແຫ່ງປະຣິນຍາ ໃນສະພາວະທີ່ຄວນລະແຫ່ງປະຫານະ ໃນສະພາວະທີ່ຄວນຈະເລີນແຫ່ງພາວະນາ ໃນສະພາວະທີ່ຄວນເຮັດໃຫ້ແຈ້ງແຫ່ງສັດສິກິຣິຍາ ມີທຳ ໑໔໕ ມີອັດຖະ ໑໔໕ ມີນິຣຸດຕິ ໔໕໐ ມີຍານ ໕໐໐

## ຝ. ຂັນທາທິວາຣະ

### ວາຣະວ່າດ້ວຍຂັນເປັນຕົ້ນ

[໓໕] ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ເປັນກອງແຫ່ງຂັນທັງຫຼາຍ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ເປັນກອງແຫ່ງຂັນທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ເປັນກອງແຫ່ງຂັນທັງຫຼາຍ ມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ຊຶງໄວ້ແຫ່ງທາດທັງຫຼາຍ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ເປັນບໍ່ເກີດແຫ່ງອາຍະຕະນະທັງຫຼາຍ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ປັດໄຈປຸງແຕ່ງແຫ່ງສັງຂະຕະທຳທັງຫຼາຍ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ປັດໄຈບໍ່ປຸງແຕ່ງແຫ່ງອະສັງຂະຕະທຳ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ປັດໄຈບໍ່ປຸງແຕ່ງແຫ່ງອະສັງຂະຕະທຳທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ປັດໄຈບໍ່ປຸງແຕ່ງແຫ່ງອະສັງຂະຕະທຳ ມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ໃນສະພາວະທີ່ເປັນກອງແຫ່ງຂັນທັງຫຼາຍ ໃນສະພາວະທີ່ຊຶງໄວ້ແຫ່ງທາດທັງຫຼາຍ ໃນສະພາວະທີ່ເປັນບໍ່ເກີດແຫ່ງອາຍະຕະນະທັງຫຼາຍ ໃນສະພາວະທີ່ປັດໄຈປຸງແຕ່ງແຫ່ງສັງຂະຕະທຳທັງຫຼາຍ ໃນສະພາວະທີ່ປັດໄຈບໍ່ປຸງແຕ່ງແຫ່ງອະສັງຂະຕະທຳ ມີທຳ ໑໔໕ ມີ ອັດຖະ ໑໔໕ ມີນິຣຸດຕິ ໔໕໐ ມີຍານ ໕໐໐

## ກ. ສັດຈະວາຣະ

### ວາຣະວ່າດ້ວຍສັດຈະ

[໓໖] ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ທົນໄດ້ຍາກແຫ່ງທຸກ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ທົນໄດ້ຍາກແຫ່ງທຸກທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ທົນໄດ້ຍາກແຫ່ງທຸກ ມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ເປັນເຫດເກີດແຫ່ງ ສະມຸໄທ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ເປັນຄວາມດັບແຫ່ງ ນິໂຣດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ເປັນທາງແຫ່ງມັກເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ເປັນທາງແຫ່ງມັກທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ເປັນທາງແຫ່ງມັກ ມີທຳ ໒໕ ມີອັດຖະ ໒໕ ມີນິຣຸດຕິ ໕໐ ມີຍານ ໑໐໐ໃນອະຣິຍະສັດ ໔ ມີທຳ ໑໐໐ ມີອັດຖະ ໑໐໐ ມີນິຣຸດຕິ ໒໐໐ ມີຍານ ໔໐໐

## ໗. ປະຕິສຳພິທາວາຣະ

### ວາຣະວ່າດ້ວຍປະຕິສຳພິທາ

[໓໗] ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ແຕກສານໃນອັດຖະ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ແຕກສານໃນອັດຖະທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ແຕກສານໃນອັດຖະແຫ່ງອັດຖະປະຕິສຳພິທາ ມີທຳ ໒໕ ມີອັດຖະ ໒໕ ມີນິຣຸດຕິ ໕໐ ມີຍານ ໑໐໐

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ແຕກສານໃນທຳແຫ່ງທຳມະປະຕິສຳພິທາ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ແຕກສານໃນນິຣຸດຕິແຫ່ງນິຣຸດຕິປະຕິສຳພິທາ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສະພາວະທີ່ແຕກສານໃນປະຕິພານແຫ່ງປະຕິພານະປະຕິສຳພິທາ ເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ສະພາວະທີ່ແຕກສານໃນປະຕິພານແຫ່ງປະຕິພານະປະຕິສຳພິທາທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ໃນສະພາວະທີ່ແຕກສານໃນປະຕິພານແຫ່ງປະຕິພານະປະຕິສຳພິທາ ມີທຳ ໒໕ ມີອັດຖະ ໒໕ ມີນິຣຸດຕິ ໕໐ ມີຍານ ໑໐໐ ໃນປະຕິສຳພິທາ ໔ ມີທຳ ໑໐໐ ມີອັດຖະ ໑໐໐ ມີນິຣຸດຕິ ໒໐໐ ມີຍານ ໔໐໐

## ໙. ສະພຸດທະທຳມະວາຣະ

### ວາຣະວ່າດ້ວຍພຸດທະທຳ ໖ ປະການ

[໓໘] ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ຍານໃນຄວາມຍິ່ງແລະຄວາມຢ່ອນແຫ່ງອິນຊີຂອງສັດທັງຫຼາຍເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ

ຖືກຕ້ອງແລ້ວດ້ວຍປັນຍາ ຍານໃນຄວາມຍິ່ງແລະຄວາມຍ່ອນແຫ່ງອິນຊີຂອງສັດທັງຫຼາຍທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ຍານໃນຄວາມຍິ່ງແລະຄວາມຍ່ອນແຫ່ງອິນຊີຂອງສັດທັງຫຼາຍ ມີທຳ ໔໕ ມີ ອັດຖະ ໔໕ ມີນິຣຸດຕິ ໔໐ ມີຍານ ໑໐໐

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ຍານໃນອາສະຍະແລະອະນຸໄສຂອງສັດທັງຫຼາຍ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ຍານໃນຍະມະກະປາຕິຫານ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ຍານໃນມະຫາກະຣຸນາສະມາບັດ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ສັບພັນຍຸຕະຍານ ฯລฯ

ຈັກຂຸເກີດຂຶ້ນແລ້ວ ฯລฯ ແສງສະຫວ່າງເກີດຂຶ້ນແລ້ວວ່າ ອະນາວະຣະນະຍານເຮົາຮູ້ແລ້ວ ເຫັນແລ້ວ ຊາບແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ອະນາວະຣະນະຍານທີ່ເຮົາບໍ່ຮູ້ ບໍ່ເຫັນ ບໍ່ຊາບ ບໍ່ເຮັດໃຫ້ແຈ້ງ ບໍ່ຖືກຕ້ອງແລ້ວດ້ວຍປັນຍາບໍ່ມີ ອະນາວະຣະນະຍານມີທຳ ໔໕ ມີອັດຖະ ໔໕ ມີນິຣຸດຕິ ໔໐ ມີຍານ ໑໐໐ ໃນພຸດທະທຳ ໖ ມີທຳ ໑໔໐ ມີອັດຖະ ໑໕໐ ມີນິຣຸດຕິ ໓໐໐ ມີຍານ ໖໐໐ ໃນປະຕິສຳພິທາກະຖານີ້ ມີທຳ ໗໕໐ ມີອັດຖະ ໗໕໐ ມີນິຣຸດຕິ ໑,໗໐໐ ມີຍານ ໓,໔໐໐

**ປະຕິສຳພິທາກະຖາ ຈົບ**

# ໗. ທຳມະຈັກກະຖາ

## ວ່າດ້ວຍທຳມະຈັກ

## ໑. ສັດຈະວາຣະ

### ວາຣະວ່າດ້ວຍສັດຈະ

[໓໙] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກປະທັບຢູ່ທີ່ປ່າອິສິປະຕະນະມະຣິຄະທາຍະວັນ ເຂດເມືອງພາຣານະສີ ฯລฯ ດັ່ງນັ້ນ ຄຳວ່າ ອັນຍາໂກນທັນຍະ ນີ້ ຈຶ່ງໄດ້ເປັນຊື່ຂອງທ່ານໂກນທັນຍະນັ້ນແລ

ຈັກຂຸເກີດຂຶ້ນແລ້ວ ຍານເກີດຂຶ້ນແລ້ວ ປັນຍາເກີດຂຶ້ນແລ້ວ ວິດຊາເກີດຂຶ້ນແລ້ວ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະອະຣິຍະສັດ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາ ເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ຍານເປັນທຳ ສະພາວະທີ່ຮູ້ເປັນອັດຖະ ປັນຍາເປັນທຳ ສະພາວະທີ່ຮູ້ຊັດແຈ້ງເປັນອັດຖະ ວິດຊາເປັນທຳ ສະພາວະທີ່ຮູ້ແຈ້ງເປັນອັດຖະ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ທຳ ໕ ປະການ ອັດຖະ ໕ ປະການ ນີ້ເປັນບ່ອນຕັ້ງແຫ່ງທຸກ ເປັນບ່ອນຕັ້ງແຫ່ງສັດຈະ ມີສັດຈະເປັນອາລົມ ມີສັດຈະເປັນໂຄຈອນ ສົງເຄາະເຂົ້າໃນສັດຈະ ນັບເນື່ອງໃນສັດຈະ ລວມລົງໃນສັດຈະ ຕັ້ງຢູ່ໃນສັດຈະ ປະດິດສະຖານ ຢູ່ໃນສັດຈະ

[໔໐] ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າ ເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳ ແລະຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ

ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ປະຊາຊົນປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ

ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນລຸເຖິງຄວາມຊຳນານໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ປະຊາຊົນບັນລຸເຖິງຄວາມຊຳນານໃນທຳໃຫ້ຈັກເປັນໄປ

ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນລຸເຖິງຄວາມສຳເລັດໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ປະຊາຊົນບັນລຸເຖິງຄວາມສຳເລັດໃນທຳໃຫ້ຈັກເປັນໄປ

ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບັນລຸເຖິງຄວາມແກ່ກ້າໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ປະຊາຊົນບັນລຸເຖິງຄວາມແກ່ກ້າໃນທຳໃຫ້ຈັກເປັນໄປ

ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງສັກກາຣະທຳໃຫ້ຈັກເປັນໄປ ຊື່ວ່າ ທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງເຄົາລົບທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງນັບຖືທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງບູຊາທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງນອບນ້ອມທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງມີທຳ ເປັນທຸງໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງມີທຳເປັນຍອດໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງມີທຳເປັນໃຫຍ່ໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນທຳມະຈັກນັ້ນເອງ ອັນສະມະນະ ພາມ ເທວະດາ ມານ ພົມ ຫຼື ໃຜ ໆ ໃນໂລກເຮັດໃຫ້ໝຸນກັບບໍ່ໄດ້

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສັດທິນຊີເປັນໄປ ໗໒໗ ຊື່ວ່າ

ທຳມະຈັກ ຍ້ອນຊົງໃຫ້ທຳຄືປັນຍິນຊີເປັນໄປ

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສັດທາພະລະເປັນໄປ ຊື່ວ່າທຳມະຈັກຍ້ອນຊົງໃຫ້ທຳຄືວິຣິຍະພະລະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສະຕິພະລະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສະມາທິພະລະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືປັນຍາພະລະເປັນໄປ

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສະຕິສຳໂພດຊົງເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືທຳມະວິຈະຍະສຳໂພດຊົງເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືວິຣິຍະສຳໂພດຊົງເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືປີຕິສຳໂພດຊົງເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສະມາທິສຳໂພດຊົງ ເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືອຸເປກຂາສຳໂພດຊົງເປັນໄປ

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາທິດຖິເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາສັງກັບປະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄື ສຳມາວາຈາເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາກຳມັນຕະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາອາຊີວະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາສະຕິເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳຄືສຳມາສະມາທິເປັນໄປ

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າມັກ ຍ້ອນມີສະພາວະເປັນເຫດເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສະຕິປັດ

ຖານຍ້ອນມີສະພາວະຕັ້ງໝັ້ນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະຕັ້ງໄວ້ເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະໃຫ້ສຳເລັດເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສັດຈະ ຍ້ອນມີສະພາວະເປັນຂອງແທ້ເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ເປັນຄູ່ກັນ ຍ້ອນມີສະພາວະບໍ່ລ່ວງເລີຍກັນເປັນໄປ

ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທິດຖິວິສຸດທິ ຍ້ອນມີສະພາວະເຫັນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າ ວິໂມກ ຍ້ອນມີສະພາວະພົ້ນວິເສດເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະສະລະເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າອະນຸບປາທະຍານ[໑] ຍ້ອນມີສະພາວະສະງົບຣະງັບເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າຜັດສະ ຍ້ອນມີສະພາວະເປັນທີ່ປະຊຸມເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ລວມເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນ ປະທານເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານເປັນໄປ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດນີ້ນັ້ນຄວນກຳນົດຮູ້ ຯລຯ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະອະຣິຍະສັດ ນີ້ນັ້ນເຮົາກຳນົດຮູ້ແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຯລຯ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ฯลฯ ຄຳວ່າ ແສງສະຫວ່າງ ເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ฯลฯ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ທຳ ໕ ປະການ ອັດຖະ ໕ ປະການນີ້ເປັນບ່ອນຕັ້ງແຫ່ງທຸກ ฯลฯ ປະດິດສະຖານຢູ່ໃນສັດຈະ

ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳແລະຈັກເປັນໄປ ຊື່ວ່າ ທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ฯลฯ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

ຈັກຂຸເກີດຂຶ້ນແລ້ວ ฯลฯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ທຸກຂະສະມຸທະຍະອະຣິຍະສັດ ฯลฯ ຈັກຂຸເກີດຂຶ້ນແລ້ວ ฯลฯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ນັ້ນຄວນລະ ฯลฯ ຈັກຂຸເກີດຂຶ້ນແລ້ວ ฯลฯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ທຸກຂະສະມຸທະຍະອະຣິຍະສັດນີ້ນັ້ນເຮົາລະໄດ້ແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ฯลฯ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ฯลฯ ຄຳວ່າ ແສງສະຫວ່າງ ເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ฯลฯ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນ ອັດຖະ ທຳ ໕ ປະການ ອັດຖະ ໕ ປະການນີ້ເປັນບ່ອນຕັ້ງແຫ່ງສະມຸໄທ ເປັນບ່ອນຕັ້ງແຫ່ງສັດຈະ ฯลฯ ເປັນບ່ອນຕັ້ງແຫ່ງນິໂຣດ ເປັນບ່ອນຕັ້ງແຫ່ງສັດຈະ ฯลฯ ເປັນບ່ອນຕັ້ງແຫ່ງມັກ ເປັນບ່ອນຕັ້ງແຫ່ງສັດຈະ ມີສັດຈະເປັນອາລົມ ມີສັດຈະເປັນໂຄຈອນ ສົງເຄາະເຂົ້າໃນສັດຈະ ນັບເນື່ອງໃນສັດຈະ ລວມລົງໃນສັດຈະ ຕັ້ງຢູ່ໃນສັດຈະ ປະດິດສະຖານຢູ່ໃນສັດຈະ

ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳແລະຈັກເປັນໄປ ຊື່ວ່າ ທຳມະ

ຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ຯລຯ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

## ໔. ສະຕິປັດຖານະວາຣະ

### ວາຣະວ່າດ້ວຍສະຕິປັດຖານ

[໔໑] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນກາຍໃນກາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍການພິຈາລະນາເຫັນກາຍໃນກາຍນີ້ນັ້ນຄວນຈະເລີນ ຯລຯ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ກໍການພິຈາລະນາເຫັນກາຍໃນກາຍນີ້ນັ້ນເຮົາຈະເລີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນຈິດໃນຈິດ ຯລຯ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນທຳໃນທຳທັງຫຼາຍ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນທຳໃນທຳທັງຫຼາຍນີ້ນັ້ນເຮົາຈະເລີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ການພິຈາລະນາເຫັນກາຍໃນກາຍ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນຄວນຈະເລີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ການພິຈາລະນາເຫັນກາຍໃນກາຍນີ້ນັ້ນເຮົາຈະເລີນແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຯລຯ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຯລຯ ຄຳວ່າ ແສງສະຫວ່າງ ເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ຯລຯ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ທຳ ໕ ປະການ ອັດຖະ ໕ ປະການນີ້ເປັນບ່ອນຕັ້ງແຫ່ງກາຍເປັນບ່ອນຕັ້ງແຫ່ງສະຕິປັດຖານ ຯລຯ ເປັນບ່ອນຕັ້ງແຫ່ງເວທະນາ ເປັນບ່ອນຕັ້ງແຫ່ງສະຕິປັດຖານ ຯລຯ ເປັນບ່ອນຕັ້ງແຫ່ງຈິດ ເປັນບ່ອນຕັ້ງແຫ່ງສະຕິປັດຖານ ຯລຯ ເປັນບ່ອນຕັ້ງແຫ່ງທຳເປັນບ່ອນຕັ້ງແຫ່ງສະຕິປັດຖານ ມີສະຕິປັດຖານເປັນອາລົມ ມີສະຕິປັດຖານເປັນໂຄຈອນ ສົງເຄາະເຂົ້າໃນສະຕິປັດຖານ ນັບເນື່ອງໃນສະຕິປັດຖານ ລວມລົງໃນສະຕິປັດຖານ ຕັ້ງຢູ່ໃນສະຕິປັດຖານ ປະດິດສະຖານຢູ່ໃນສະຕິປັດຖານ

ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳ ແລະຈັກເປັນໄປ ຊື່ວ່າ ທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກ ແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ຯລຯ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

## ໓. ອິດທິປາທະວາຣະ

### ວາຣະວ່າດ້ວຍອິດທິບາດ

[໔໔] ພິກຂຸທັງຫຼາຍ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນຄວນຈະເຈີນ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນເຮົາຈະເຈີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຯລຯ

ຈັກຂຸເກີດຂຶ້ນແລ້ວ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍຈິດຕະສະມາທິປະທານສັງຂານ ໆລໆ

ຈັກຂຸເກີດຂຶ້ນແລ້ວ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາສະມາທິປະທານສັງຂານນີ້ນັ້ນຄວນຈະເລີນ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິມັງສາ ສະມາທິປະທານສັງຂານນີ້ນັ້ນເຮົາຈະເລີນແລ້ວ

ຈັກຂຸເກີດຂຶ້ນແລ້ວ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນຄວນຈະເລີນ ໆລໆ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍສັນທະສະມາທິປະທານສັງຂານນີ້ນັ້ນເຮົາຈະເລີນແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ຍານເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ? ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ວິດຊາເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຄຳວ່າ ຍານເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ ຄຳວ່າ ປັນຍາເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ຊັດແຈ້ງ ຄຳວ່າ ວິດຊາ ເກີດຂຶ້ນແລ້ວ ຍ້ອນມີສະພາວະຮູ້ແຈ້ງ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະ ສະຫວ່າງສະໄຫວ

ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ໆລໆ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ທຳ ໕ ປະການ ອັດຖະ ໕ ປະການນີ້ເປັນບ່ອນຕັ້ງແຫ່ງສັນທະເປັນບ່ອນຕັ້ງແຫ່ງອິດທິບາດ ມີອິດທິບາດເປັນອາລົມ ໆລໆ ປະດິດສະຖານຢູ່ໃນອິດທິບາດ

ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳແລະຈັກເປັນໄປ ຊື່ວ່າ ທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກ

ເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ຯລຯ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ນີ້ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານນີ້ນັ້ນຄວນຈະເລີນ ຯລຯ ຈັກຂຸເກີດຂຶ້ນແລ້ວ ຯລຯ ແສງສະຫວ່າງເກີດຂຶ້ນແລ້ວແກ່ເຮົາໃນທຳທັງຫຼາຍທີ່ບໍ່ເຄີຍໄດ້ຟັງມາກ່ອນວ່າ ອິດທິບາດອັນປະກອບດ້ວຍວິຣິຍະສະມາທິປະທານສັງຂານນີ້ນັ້ນເຮົາຈະເລີນແລ້ວ

ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ? ຯລຯ ຄຳວ່າ ແສງສະຫວ່າງເກີດຂຶ້ນແລ້ວ ຍ້ອນມີສະພາວະເປັນແນວໃດ?

ຄື ຄຳວ່າ ຈັກຂຸເກີດຂຶ້ນແລ້ວ ຍ້ອນມີສະພາວະເຫັນ ຯລຯ ຄຳວ່າ ແສງສະຫວ່າງ ເກີດຂຶ້ນແລ້ວ ຍ້ອນມີສະພາວະສະຫວ່າງສະໄຫວ

ຈັກຂຸເປັນທຳ ສະພາວະທີ່ເຫັນເປັນອັດຖະ ຯລຯ ແສງສະຫວ່າງເປັນທຳ ສະພາວະທີ່ສະຫວ່າງສະໄຫວເປັນອັດຖະ ທຳ ໕ ປະການ ອັດຖະ ໕ ປະການນີ້ເປັນບ່ອນຕັ້ງແຫ່ງວິຣິຍະເປັນບ່ອນຕັ້ງແຫ່ງອິດທິບາດ ຯລຯ ເປັນບ່ອນຕັ້ງແຫ່ງຈິດ ເປັນບ່ອນຕັ້ງແຫ່ງອິດທິບາດ ຯລຯ ເປັນບ່ອນຕັ້ງແຫ່ງວິມັງສາ ເປັນບ່ອນຕັ້ງແຫ່ງອິດທິບາດ ມີອິດທິບາດເປັນອາລົມ ມີອິດທິບາດເປັນໂຄຈອນ ສົງເຄາະເຂົ້າໃນອິດທິບາດ ນັບເນື່ອງໃນອິດທິບາດ ລວມລົງໃນອິດທິບາດ ຕັ້ງຢູ່ໃນອິດທິບາດ ປະດິດສະຖານຢູ່ໃນອິດທິບາດ

ຄຳວ່າ ທຳມະຈັກ ອະທິບາຍວ່າ ຊື່ວ່າທຳມະຈັກ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ທຳແລະຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກແລະທຳເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປໂດຍທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງໃຫ້ຈັກເປັນໄປດ້ວຍການປະພຶດທຳ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງດຳຣົງຢູ່ໃນທຳໃຫ້ຈັກເປັນໄປ ຊື່ວ່າທຳມະຈັກ ຍ້ອນພຣະຜູ້ມີພຣະພາກເຈົ້າຊົງປະດິດສະຖານຢູ່ໃນທຳໃຫ້ຈັກເປັນໄປ ຯລຯ ຊື່ວ່າທຳມະຈັກ ຍ້ອນຊົງໃຫ້ທຳທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດເປັນໄປ

**ທຳມະຈັກກະຖາ ຈົບ**

# ໗. ໂລກຸດຕະຣະກະຖາ

## ວ່າດ້ວຍໂລກຸດຕະຣະທຳ

[໔໓] ທຳເຫຼົ່າໃດເປັນໂລກຸດຕະຣະ (ຄື) ສະຕິປັດຖານ ໔ ສຳມັບປະທານ ໔ ອິດທິບາດ ໔ ອິນຊີ ໕ ພະລະ ໕ ໂພດຊົງ ໗ ອະຣິຍະມັກມີອົງ ໘ ອະຣິຍະມັກ ໔ ສາມັນຍະຜົນ ໔ ແລະ ນິບພານ ທຳເຫຼົ່ານີ້ເປັນໂລກຸດຕະຣະ

ຄຳວ່າ ໂລກຸດຕະຣະ ອະທິບາຍວ່າ ຊື່ວ່າໂລກຸດຕະຣະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າໂລກຸດຕະຣະ ຍ້ອນຂ້າມພົ້ນໂລກ ຊື່ວ່າໂລກຸດຕະຣະ ຍ້ອນຂ້າມພົ້ນແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນຂ້າມພົ້ນຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນຂ້າມໄປຈາກໂລກ ຊື່ວ່າ ໂລກຸດຕະຣະ ຍ້ອນລ່ວງພົ້ນໂລກ ຊື່ວ່າໂລກຸດຕະຣະ ຍ້ອນລ່ວງພົ້ນໂລກຢູ່ ຊື່ວ່າໂລກຸດຕະຣະ ຍ້ອນເປັນອະດິເຣກໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນຂ້າມບ່ອນສຸດໂລກ

ຊື່ວ່າໂລກຸດຕະຣະ ຍ້ອນສະລັດອອກແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະລັດອອກຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະລັດໄປຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະລັດອອກແລ້ວຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະລັດອອກແລ້ວແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະລັດອອກໄປແລ້ວຈາກໂລກ

ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຕັ້ງຢູ່ໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ດຳຣົງຢູ່ໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຕິດຢູ່ໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ເປື້ອນໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ເປື້ອນແລ້ວໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຖືກໂລກເຮັດໃຫ້ເປື້ອນແລ້ວ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຖືກສາບທາດ້ວຍໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຖືກໂລກສາບແລ້ວ

ຊື່ວ່າໂລກຸດຕະຣະ ຍ້ອນລຸດໄປໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນລຸດໄປຈາກໂລກ ຊື່ວ່າໂລກຸດຕະຣະ ເພາະພົ້ນຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນລຸດພົ້ນໄປແຕ່ໂລກ ຊື່ວ່າ ໂລກຸດຕະຣະ ຍ້ອນລຸດພົ້ນໄປຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ກ່ຽວຂ້ອງໃນໂລກ

ຊື່ວ່າໂລກຸດຕະຣະ ຍ້ອນບໍ່ກ່ຽວຂ້ອງດ້ວຍໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ກ່ຽວຂ້ອງແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນນຳອອກໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນນຳອອກຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນພາກອອກຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນມິດຈິດແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນມິດຈິດຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນມິດຈິດກວ່າໂລກ ຊື່ວ່າໂລກຸດຕະຣະ

ຍ້ອນສະອາດແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະອາດຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນສະອາດກວ່າໂລກ

ຊື່ວ່າໂລກຸດຕະຣະ ຍ້ອນອອກແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນອອກຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນອອກໄປຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນກັບແຕ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນກັບຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນກັບໄປຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຂ້ອງໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ຢຶດໃນໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ພົວພັນໃນໂລກ

ຊື່ວ່າໂລກຸດຕະຣະ ຍ້ອນຕັດໂລກຂາດ ຊື່ວ່າໂລກຸດຕະຣະ ຍ້ອນຕັດໂລກຂາດແລ້ວ ຊື່ວ່າໂລກຸດຕະຣະ ຍ້ອນໃຫ້ໂລກຣະງັບ ຊື່ວ່າໂລກຸດຕະຣະ ຍ້ອນໃຫ້ໂລກຣະງັບແລ້ວ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ກັບມາສູ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ເປັນຄະຕິຂອງໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ເປັນວິໄສຂອງໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ເປັນສາທາລະນະຂອງໂລກ ຊື່ວ່າໂລກຸດຕະຣະ ຍ້ອນປາສະຈາກໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ວຽນມາສູ່ໂລກ ຊື່ວ່າໂລກຸດຕະຣະ ຍ້ອນລະໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ໃຫ້ໂລກເກີດ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ມີເຍື່ອໃຍໂລກ ຊື່ວ່າໂລກຸດຕະຣະ ຍ້ອນນຳໂລກ ຊື່ວ່າໂລກຸດຕະຣະ ຍ້ອນກຳຈັດໂລກ ຊື່ວ່າໂລກຸດຕະຣະ ຍ້ອນບໍ່ອົບໂລກໃຫ້ງາມ ຊື່ວ່າໂລກຸດຕະຣະ ຍ້ອນລ່ວງໂລກ ຄອບງຳໂລກຕັ້ງຢູ່ ແນວນີ້ແລ

**ໂລກຸດຕະຣະກະຖາ ຈົບ**

## ໗. ພະລະກະຖາ

## ວ່າດ້ວຍພະລະ

[໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ
ພິກຂຸທັງຫຼາຍ ພະລະ ໕ ປະການນີ້
ພະລະ ໕ ປະການ ມີອັນໃດແດ່ ຄື

໑. ສັດທາພະລະ (ພະລະຄືສັດທາ)
໒. ວິຣິຍະພະລະ (ພະລະຄືວິຣິຍະ)
໓. ສະຕິພະລະ (ພະລະຄືສະຕິ)
໔. ສະມາທິພະລະ (ພະລະຄືສະມາທິ)
໕. ປັນຍາພະລະ (ພະລະຄືປັນຍາ)

ອີກຢ່າງໜຶ່ງ ພະລະ ໖໘ ປະການ ຄື ສັດທາພະລະ ວິຣິຍະພະລະ ສະຕິພະລະ ສະມາທິພະລະ ປັນຍາພະລະ ຫິຣິພະລະ ໂອດຕັບປະພະລະ ປະຕິສັງຂານພະລະ ພາວະນາພະລະ ອະນະວັດຊະພະລະ ສັງຄະຫະພະລະ ຂັນຕິພະລະ ປັນຍັດຕິພະລະ ນິດຊັດຕິພະລະ ອິດສະຣິ

ຍະພະລະ ອະທິຖານພະລະ ສະມະຖະພະລະ ວິປັດສະນາພະລະ ເສກຂະພະລະ ໑໐ ອະເສກຂະພະລະ ໑໐ ຂີນາສະວະພະລະ ໑໐ ອິດທິພະລະ ໑໐ ຕະຖາຄະຕະພະລະ ໑໐

ສັດທາພະລະ ເປັນແນວໃດ?

ຄື ຊື່ວ່າສັດທາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ຍ້ອນອຸບປະຖຳສະຫະຊາຕະທຳ ຊື່ວ່າສັດທາພະລະ ຍ້ອນມີສະພາວະຄອບງຳກິເລດທັງຫຼາຍ ຊື່ວ່າສັດທາພະລະ ຍ້ອນມີສະພາວະເປັນຄວາມມົດຈິດໃນເບື້ອງຕົ້ນແຫ່ງປະຕິເວດ ຊື່ວ່າ ສັດທາພະລະ ຍ້ອນມີສະພາວະຕັ້ງໝັ້ນແຫ່ງຈິດ ຊື່ວ່າສັດທາພະລະ ຍ້ອນມີສະພາວະເປັນຄວາມຜ່ອງແຜ້ວແຫ່ງຈິດ ຊື່ວ່າສັດທາພະລະ ຍ້ອນມີສະພາວະເປັນເຄື່ອງບັນລຸທຳວິເສດ ຊື່ວ່າສັດທາພະລະ ຍ້ອນມີສະພາວະຮູ້ແຈ້ງທຳທີ່ຍິ່ງ ຊື່ວ່າສັດທາພະລະ ຍ້ອນມີສະພາວະຕັດສະຮູ້ສັດຈະ ຊື່ວ່າສັດທາພະລະ ຍ້ອນມີສະພາວະໃຫ້ກາຣະກະບຸກຄົນ (ບຸກຄົນຜູ້ກະທຳ) ຕັ້ງຢູ່ ສະເພາະໃນນິໂຣດ ນີ້ເປັນສັດທາພະລະ (໑)

ວິຣິຍະພະລະ ເປັນແນວໃດ?

ຄື ຊື່ວ່າວິຣິຍະພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະຍ້ອນມີສະພາວະອຸບປະຖຳສະຫະຊາຕະທຳ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະຄອບງຳກິເລດທັງຫຼາຍ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະເປັນຄວາມມົດຈິດໃນເບື້ອງຕົ້ນແຫ່ງປະຕິເວດ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະຕັ້ງໝັ້ນແຫ່ງຈິດ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະເປັນຄວາມຜ່ອງແຜ້ວແຫ່ງຈິດ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະເປັນເຄື່ອງບັນລຸທຳວິເສດ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະຮູ້ແຈ້ງທຳທີ່ຍິ່ງ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະຕັດສະຮູ້ສັດຈະ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະໃຫ້ກາຣະກະບຸກຄົນຕັ້ງຢູ່ສະເພາະໃນນິໂຣດ ນີ້ເປັນວິຣິຍະພະລະ (໒)

ສະຕິພະລະ ເປັນແນວໃດ?

ຄື ຊື່ວ່າສະຕິພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ຍ້ອນມີສະພາວະອຸບປະຖຳສະຫະຊາຕະທຳ ຯລຯ ຊື່ວ່າສະຕິພະລະ ຍ້ອນມີສະພາວະໃຫ້ກາຣະກະບຸກຄົນຕັ້ງຢູ່ສະເພາະໃນນິໂຣດ ນີ້ເປັນສະຕິພະລະ (໓)

ສະມາທິພະລະ ເປັນແນວໃດ?

ຄື ຊື່ວ່າສະມາທິພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າສະມາທິພະລະຍ້ອນມີສະພາວະອຸບປະຖຳສະຫະຊາຕະທຳ ຯລຯ ຊື່ວ່າສະມາທິພະລະ ຍ້ອນມີສະພາວະໃຫ້ກາຣະກະບຸກຄົນຕັ້ງຢູ່ສະເພາະໃນນິໂຣດ ນີ້ເປັນສະມາທິພະລະ (໔)

ປັນຍາພະລະ ເປັນແນວໃດ?

ຄື ຊື່ວ່າປັນຍາພະລະ ຍ້ອນບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າປັນຍາພະລະ ຍ້ອນມີ

ສະພາວະອຸບປະຖຳສະຫະຊາຕະທຳ ຯລຯ ຊື່ວ່າປັນຍາພະລະ ຍ້ອນມີສະພາວະໃຫ້ກາຣະກະບຸກຄົນຕັ້ງຢູ່ສະເພາະໃນນິໂຣດ ນີ້ເປັນປັນຍາພະລະ (໕)

ຫິຣິພະລະ ເປັນແນວໃດ?

ຄື ຊື່ວ່າຫິຣິພະລະ ຍ້ອນລະອາຍກາມສັນທະດ້ວຍເນກຂຳມະ ຊື່ວ່າຫິຣິພະລະ ຍ້ອນລະອາຍພະຍາບາດດ້ວຍອະພະຍາບາດ ຊື່ວ່າຫິຣິພະລະ ຍ້ອນລະອາຍຖີນະມິດທະດ້ວຍອາໂລກະສັນຍາ ຊື່ວ່າຫິຣິພະລະ ຍ້ອນລະອາຍອຸດທັດຈະດ້ວຍອະວິກເຂປະ ຊື່ວ່າຫິຣິພະລະ ຍ້ອນລະອາຍວິຈິກິດສາດ້ວຍທຳມະວະວັດຖານ ຊື່ວ່າຫິຣິພະລະ ຍ້ອນລະອາຍອະວິດຊາດ້ວຍຍານ ຊື່ວ່າຫິຣິພະລະ ຍ້ອນລະອາຍອະຣະຕິດ້ວຍປາມຸດຊະ ຊື່ວ່າຫິຣິພະລະ ຍ້ອນລະອາຍນິວອນດ້ວຍປະຖົມຊານ ຯລຯ ຊື່ວ່າຫິຣິພະລະ ຍ້ອນລະອາຍກິເລດທັງປວງດ້ວຍອະຣະຫັດຕະມັກ ນີ້ເປັນຫິຣິພະລະ (໖)

ໂອດຕັບປະພະລະ ເປັນແນວໃດ?

ຄື ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວກາມສັນທະດ້ວຍເນກຂຳມະ ຊື່ວ່າ ໂອດຕັບປະພະລະ ຍ້ອນເກງກົວພະຍາບາດດ້ວຍອະພະຍາບາດ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວຖີນະມິດທະດ້ວຍອາໂລກະສັນຍາ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວອຸດທັດຈະດ້ວຍອະວິກເຂປະ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວວິຈິກິດສາດ້ວຍທຳມະວະວັດຖານ ຊື່ວ່າ ໂອດຕັບປະພະລະ ຍ້ອນເກງກົວອະວິດຊາດ້ວຍຍານ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວ ອະຣະຕິດ້ວຍປາມຸດຊະ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວນິວອນດ້ວຍປະຖົມຊານ ຊື່ວ່າ ໂອດຕັບປະພະລະ ຍ້ອນເກງກົວກິເລດທັງປວງດ້ວຍອະຣະຫັດຕະມັກ ນີ້ເປັນໂອດຕັບປະພະລະ (໗)

ປະຕິສັງຂານພະລະ ເປັນແນວໃດ?

ຄື ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາກາມສັນທະດ້ວຍເນກຂຳມະ ຊື່ວ່າ ປະຕິສັງຂານພະລະ ຍ້ອນພິຈາລະນາພະຍາບາດດ້ວຍອະພະຍາບາດ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາຖີນະມິດທະດ້ວຍອາໂລກະສັນຍາ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາອຸດທັດຈະດ້ວຍອະວິກເຂປະ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາວິຈິກິດສາດ້ວຍທຳມະວະວັດຖານ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາອະວິດຊາດ້ວຍຍານ ຊື່ວ່າປະຕິສັງຂານພະລະຍ້ອນພິຈາລະນາອະຣະຕິດ້ວຍປາມຸດຊະ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນານິວອນດ້ວຍປະຖົມຊານ ຯລຯ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາກິເລດທັງປວງດ້ວຍອະຣະຫັດຕະມັກ ນີ້ເປັນປະຕິສັງຂານພະລະ (໘)

ພາວະນາພະລະ ເປັນແນວໃດ? ຄື ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະຍ່ອມຈະເລີນ ເນກຂຳມະ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນ

ເມື່ອລະພະຍາບາດຍ່ອມຈະເລີນ ອະພະຍາບາດ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະຖີນະມິດທະຍ່ອມຈະເລີນ ອາໂລກະສັນຍາ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະອຸດທັດຈະຍ່ອມຈະເລີນ ອະວິກເຂປະ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະວິຈິກິດສາຍ່ອມຈະເລີນ ທຳມະວະວັດຖານ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະອະວິດຊາຍ່ອມຈະເລີນຍານ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະອະຣະຕີຍ່ອມຈະເລີນປາມຸດຊະ ຊື່ວ່າພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະນິວອນຍ່ອມຈະເລີນປະຖົມຊານ ຯລຯ ຊື່ວ່າ ພາວະນາພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກິເລດທັງປວງຍ່ອມຈະເລີນອະຣະຫັດຕະມັກ ນີ້ເປັນ ພາວະນາພະລະ (໗)

ອະນະວັດຊະພະລະ ເປັນແນວໃດ?

ຄື ຊື່ວ່າອະນະວັດຊະພະລະ ຍ້ອນໃນເນກຂຳມະບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະກາມສັນທະໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນອະພະຍາບາດບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະພະຍາບາດໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນອາໂລກະສັນຍາບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະຖີນະມິດທະໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນອະວິກເຂປະບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະອຸດທັດຈະໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນທຳມະວະວັດຖານບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະວິຈິກິດສາໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນຍານບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະອະວິດຊາໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນປາມຸດຊະບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະອະຣະຕີໄດ້ແລ້ວ ຊື່ວ່າອະນະວັດຊະພະລະ ຍ້ອນໃນປະຖົມຊານບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະນິວອນໄດ້ແລ້ວ ຯລຯ ຊື່ວ່າອະນະວັດຊະພະລະ ຍ້ອນໃນອະຣະຫັດຕະມັກບໍ່ມີໂທດແມ່ນໜ້ອຍໜຶ່ງ ຍ້ອນລະກິເລດທັງປວງໄດ້ແລ້ວ ນີ້ເປັນອະນະວັດຊະພະລະ (໑໐)

ສັງຄະຫະພະລະ ເປັນແນວໃດ?

ຄື ຊື່ວ່າສັງຄະຫະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມລວມຈິດໄວ້ດ້ວຍ ອຳນາດເນກຂຳມະ ຊື່ວ່າສັງຄະຫະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະພະຍາບາດ ຍ່ອມລວມຈິດໄວ້ດ້ວຍອຳນາດອະພະຍາບາດ ຊື່ວ່າສັງຄະຫະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະຖີນະມິດທະ ຍ່ອມລວມຈິດໄວ້ດ້ວຍອຳນາດອາໂລກະສັນຍາ ຯລຯ ຊື່ວ່າສັງຄະຫະພະລະ ຍ້ອນພຣະໂຍຄາວະຈອນເມື່ອ ລະກິເລດທັງປວງ ຍ່ອມລວມຈິດໄວ້ດ້ວຍອຳນາດອະຣະຫັດຕະມັກ ນີ້ເປັນສັງຄະຫະພະລະ (໑໑)

ຂັນຕິພະລະ ເປັນແນວໃດ?

ຄື ຊື່ວ່າຂັນຕິພະລະ ຍ້ອນເນກຂຳມະຍ່ອມອົດທົນ ຍ້ອນລະກາມສັນທະໄດ້ແລ້ວ ຊື່ວ່າ

ຂັນຕິພະລະ ຍ້ອນອະພະຍາບາດ ຍ່ອມອົດທົນ ຍ້ອນລະພະຍາບາດໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນອາໂລກະສັນຍາຍ່ອມອົດທົນ ຍ້ອນລະຖີນະມິດທະໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນອະວິກເຂປະຍ່ອມອົດທົນ ຍ້ອນລະອຸດທັດຈະໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນທຳມະວະວັດຖານຍ່ອມອົດທົນ ຍ້ອນລະວິຈິກິດສາໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນຍານຍ່ອມອົດທົນ ຍ້ອນລະອະວິດຊາໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນປາມຸດຊະຍ່ອມອົດທົນ ຍ້ອນລະອະຣະຕິໄດ້ແລ້ວ ຊື່ວ່າຂັນຕິພະລະ ຍ້ອນປະຖົມຊານຍ່ອມອົດທົນ ຍ້ອນລະນິວອນໄດ້ແລ້ວ ຯລຯ ຊື່ວ່າຂັນຕິພະລະ ຍ້ອນອະຣະຫັດຕະມັກຍ່ອມອົດທົນ ຍ້ອນລະກິເລດທັງປວງ ໄດ້ແລ້ວ ນີ້ເປັນຂັນຕິພະລະ (໑໘)

ປັນຍັດຕິພະລະ ເປັນແນວໃດ?

ຄື ຊື່ວ່າປັນຍັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມຕັ້ງຈິດໄວ້ດ້ວຍອຳນາດເນກຂຳມະ ຊື່ວ່າປັນຍັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະພະຍາບາດ ຍ່ອມຕັ້ງຈິດໄວ້ດ້ວຍອຳນາດອະພະຍາບາດ ຊື່ວ່າປັນຍັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະ ຖີນະມິດທະ ຍ່ອມຕັ້ງຈິດໄວ້ດ້ວຍອຳນາດອາໂລກະສັນຍາ ຯລຯ ຊື່ວ່າປັນຍັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກິເລດທັງປວງ ຍ່ອມຕັ້ງຈິດໄວ້ດ້ວຍອຳນາດອະຣະຫັດຕະມັກ ນີ້ເປັນປັນຍັດຕິພະລະ (໑໙)

ນິດຊັດຕິພະລະ ເປັນແນວໃດ?

ຄື ຊື່ວ່ານິດຊັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມເພ່ງຈິດດ້ວຍອຳນາດເນກຂຳມະ ຊື່ວ່ານິດຊັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະພະຍາບາດ ຍ່ອມເພ່ງຈິດດ້ວຍອຳນາດອະພະຍາບາດ ຊື່ວ່ານິດຊັດຕິພະລະ ຍ້ອນພຣະໂຍຄາວະຈອນ ເມື່ອລະຖີນະມິດທະ ຍ່ອມເພ່ງຈິດດ້ວຍອຳນາດອາໂລກະສັນຍາ ຯລຯ ຊື່ວ່ານິດຊັດຕິພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກິເລດທັງປວງ ຍ່ອມເພ່ງຈິດດ້ວຍອຳນາດອະຣະຫັດຕະມັກ ນີ້ເປັນ ນິດຊັດຕິພະລະ (໑໔)

ອິດສະຣິຍະພະລະ ເປັນແນວໃດ?

ຄື ຊື່ວ່າອິດສະຣິຍະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມບັງຄັບຈິດ ໃຫ້ເປັນໄປຕາມອຳນາດດ້ວຍອຳນາດເນກຂຳມະ ຊື່ວ່າອິດສະຣິຍະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະພະຍາບາດ ຍ່ອມບັງຄັບຈິດໃຫ້ເປັນໄປຕາມອຳນາດດ້ວຍອຳນາດອະພະຍາບາດ ຊື່ວ່າອິດສະຣິຍະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະຖີນະມິດທະ ຍ່ອມບັງຄັບຈິດໃຫ້ເປັນໄປຕາມອຳນາດ ດ້ວຍອຳນາດອາໂລກະສັນຍາ ຯລຯ ຊື່ວ່າອິດສະຣິຍະພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກິເລດທັງປວງ ຍ່ອມບັງຄັບຈິດໃຫ້ເປັນໄປຕາມອຳນາດດ້ວຍອຳນາດອະຣະຫັດຕະມັກ ນີ້ເປັນອິດສະຣິຍະພະລະ (໑໕)

ອະທິຖານພະລະ ເປັນແນວໃດ?

ຄື ຊື່ວ່າອະທິຖານພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກາມສັນທະ ຍ່ອມອະທິຖານຈິດ ດ້ວຍອຳນາດເນກຂຳມະ ຊື່ວ່າອະທິຖານພະລະ ຍ້ອນພຣະໂຍຄາວະຈອນເມື່ອລະພະຍາບາດ ຍ່ອມອະທິຖານຈິດດ້ວຍອຳນາດອະພະຍາບາດ ຊື່ວ່າອະທິຖານພະລະ ຍ້ອນພຣະໂຍຄາວະຈອນເມື່ອລະຖີນະມິດທະ ຍ່ອມອະທິຖານຈິດດ້ວຍອຳນາດອາໂລກະສັນຍາ ຯລຯ ຊື່ວ່າອະທິຖານພະລະ ຍ້ອນພຣະໂຍຄາວະຈອນເມື່ອລະກິເລດທັງປວງ ຍ່ອມອະທິຖານຈິດດ້ວຍອຳນາດອະຣະຫັດຕະມັກ ນີ້ເປັນອະທິຖານພະລະ (໑໖)

ສະມະຖະພະລະ ເປັນແນວໃດ?

ຄື ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດເນກຂຳມະ ເປັນສະມະຖະພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດອະພະຍາບາດ ເປັນສະມະຖະພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດອາໂລກະສັນຍາ ເປັນສະມະຖະພະລະ ຯລຯ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນທັນໃຈເຂົ້າ ເປັນສະມະຖພະລະ ຄວາມທີ່ຈິດເປັນເອກັກຄະຕາຣົມບໍ່ຟຸ້ງຊ່ານດ້ວຍອຳນາດຄວາມເປັນຜູ້ພິຈາລະນາເຫັນຄວາມສະລະຄືນທັນໃຈອອກ ເປັນສະມະຖະພະລະ

ຄຳວ່າ ສະມະຖະພະລະ ອະທິບາຍວ່າ ຊື່ວ່າສະມະຖະພະລະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນນິວອນດ້ວຍປະຖົມຊານ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນວິຕົກວິຈານດ້ວຍທຸຕິຍະຊານ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວ ໃນປີຕິດ້ວຍຕະຕິຍະຊານ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນສຸກແລະທຸກດ້ວຍຈະຕຸດຖະຊານ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນຣູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາ ດ້ວຍອາກາສານັນຈາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນອາກາສານັນຈາຍະຕະນະສັນຍາດ້ວຍວິນຍານັນຈາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນວິນຍານັນຈາຍະຕະນະສັນຍາດ້ວຍອາກິນຈັນຍາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນອາກິນຈັນຍາຍະຕະນະສັນຍາດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ຊື່ວ່າສະມະຖະພະລະ ຍ້ອນຈິດບໍ່ຫວັ່ນໄຫວ ບໍ່ກວັດແກວ່ງ ບໍ່ເອນອຽງ ຍ້ອນອຸດທັດຈະ ຍ້ອນກິເລດທີ່ປະກອບດ້ວຍອຸດທັດຈະແລະຍ້ອນຂັນ ນີ້ເປັນສະມະຖພະລະ (໑໗)

ວິປັດສະນາພະລະ ເປັນແນວໃດ?

ຄື ອະນິດຈານຸປັດສະນາເປັນວິປັດສະນາພະລະ ທຸກຂານຸປັດສະນາເປັນວິປັດສະນາ

ພະລະ ຯລຯ ປະຕິນິດສັກຄານຸປັດສະນາເປັນວິປັດສະນາພະລະ ອະນິດຈານຸປັດສະນາໃນຮູບເປັນວິປັດສະນາພະລະ ທຸກຂານຸປັດສະນາໃນຮູບເປັນວິປັດສະນາພະລະ ຯລຯ ປະຕິນິດສັກຄານຸປັດສະນາໃນຮູບເປັນວິປັດສະນາພະລະ ອະນິດຈານຸປັດສະນາໃນເວທະນາ ຯລຯ ໃນສັນຍາ ຯລຯ ໃນສັງຂານ ຯລຯ ໃນວິນຍານ ຯລຯ ໃນຈັກຂຸ ຯລຯ ອະນິດຈານຸປັດສະນາໃນຊະຣາ ແລະມໍຣະນະເປັນວິປັດສະນາພະລະ ທຸກຂານຸປັດສະນາໃນຊະຣາ ແລະມໍຣະນະເປັນວິປັດສະນາພະລະ ປະຕິນິດສັກຄານຸປັດສະນາໃນຊະຣາ ແລະມໍຣະນະເປັນວິປັດສະນາພະລະ

ຄຳວ່າ ວິປັດສະນາພະລະ ອະທິບາຍວ່າ ຊື່ວ່າວິປັດສະນາພະລະ ຍ້ອນມີຄວາມໝາຍວ່າເປັນແນວໃດ?

ຄື ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນນິດຈະສັນຍາດ້ວຍອະນິດຈານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນສຸຂະສັນຍາດ້ວຍທຸກຂານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນອັດຕະສັນຍາດ້ວຍອະນັດຕານຸປັດສະນາ ຊື່ວ່າ ວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນນັນທິດ້ວຍນິບພິທານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນຣາຄະດ້ວຍວິຣາຄານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນສະມຸໄທດ້ວຍນິໂຣທານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວໃນອາທານະດ້ວຍປະຕິນິດສັກຄານຸປັດສະນາ ຊື່ວ່າວິປັດສະນາພະລະ ຍ້ອນຈິດບໍ່ຫວັ່ນໄຫວບໍ່ກວັດແກວ່ງ ບໍ່ເອນອຽງ ຍ້ອນອະວິດຊາ ຍ້ອນກິເລດທີ່ປະກອບດ້ວຍອະວິດຊາແລະຍ້ອນຂັນ ນີ້ເປັນວິປັດສະນາພະລະ (໑໗)

ເສກຂະພະລະ ໑໐ ອະເສຂະພະລະ ໑໐ ເປັນແນວໃດ?

ຄື ຊື່ວ່າເສກຂະພະລະ ຍ້ອນພຣະເສຂະຍັງຕ້ອງສຶກສາສຳມາທິດຖິ ຊື່ວ່າອະເສກຂະພະລະ ຍ້ອນພຣະອະເສກຂະສຶກສາໃນສຳມາທິດຖິນັ້ນສຳເລັດແລ້ວ ຊື່ວ່າເສກຂະພະລະ ຍ້ອນພຣະເສກຂະຍັງຕ້ອງສຶກສາສຳມາສັງກັບປະ ຊື່ວ່າອະເສກຂະພະລະ ຍ້ອນພຣະອະເສກຂະສຶກສາໃນສຳມາສັງກັບປະນັ້ນສຳເລັດແລ້ວ ຊື່ວ່າເສກຂະພະລະ ຍ້ອນພຣະເສກຂະຍັງຕ້ອງສຶກສາສຳມາວາຈາ ຯລຯ ສຳມາກຳມັນຕະ ຯລຯ ສຳມາອາຊີວະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ ສຳມາສະມາທິ ຯລຯ ສຳມາຍານະ[១] ຯລຯ ສຳມາວິມຸດຕິ ຊື່ວ່າອະເສກຂະພະລະ

ຍ້ອນພຣະອະເສກຂະສຶກສາໃນສຳມາວາຈາ ສຳມາກຳມັນຕະ ສຳມາອາຊີວະ ສຳມາວາຍາມະ ສຳມາສະຕິ ສຳມາສະມາທິ ສຳມາຍານະ ສຳມາວິມຸດຕິນັ້ນສຳເລັດແລ້ວ ເສກຂະພະລະ ໑໐ ອະເສກຂະພະລະ ໑໐ ນີ້ແລ (໑໙-໔໐) (=໓໗)

ຂີນາສະວະພະລະ ໑໐ ເປັນແນວໃດ?

ຄື ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບໃນພຣະທຳວິໄນນີ້ເຫັນວ່າເປັນສະພາວະບໍ່

ທ່ຽງ ດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ແມ່ນຂໍ້ທີ່ສັງຂານທັງປວງເປັນທຳທີ່ພິກຂຸຂີນາສົບໃນພຣະທຳວິໄນນີ້ເຫັນວ່າເປັນສະພາວະບໍ່ທ່ຽງ ດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ເຊິ່ງພິກຂຸຂີນາສົບໄດ້ອາໄສແລ້ວຢືນຢັນຄວາມສິ້ນອາສະວະວ່າ ອາສະວະທັງຫຼາຍຂອງເຮົາສິ້ນແລ້ວ (໑)

ກາມທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານໄຟດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ແມ່ນຂໍ້ທີ່ກາມທັງຫຼາຍເປັນທຳທີ່ພິກຂຸຂີນາສົບເຫັນວ່າປຽບດ້ວຍຂຸມຖ່ານໄຟດ້ວຍປັນຍາອັນຊອບຕາມຄວາມເປັນຈິງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ເຊິ່ງພິກຂຸຂີນາສົບໄດ້ອາໄສແລ້ວຢືນຢັນຄວາມສິ້ນອາສະວະວ່າ ອາສະວະທັງຫຼາຍຂອງເຮົາສິ້ນແລ້ວ (໒)

ຈິດຂອງພິກຂຸຂີນາສົບເປັນທຳມະຊາດເອນໄປ ນ້ອມໄປ ໂອນໄປໃນວິເວກ ຕັ້ງຢູ່ໃນວິເວກ ຍິນດີໃນເນກຂຳມະ ວ່າງຈາກທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ແມ່ນຂໍ້ທີ່ຈິດຂອງພິກຂຸຂີນາສົບເປັນທຳມະຊາດເອນໄປ ນ້ອມໄປ ໂອນໄປໃນວິເວກ ຕັ້ງຢູ່ໃນວິເວກ ຍິນດີໃນເນກຂຳມະ ວ່າງຈາກທຳທັງຫຼາຍອັນເປັນບ່ອນຕັ້ງແຫ່ງອາສະວະໂດຍປະການທັງປວງ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ເຊິ່ງພິກຂຸຂີນາສົບໄດ້ອາໄສແລ້ວຢືນຢັນຄວາມສິ້ນອາສະວະວ່າ ອາສະວະທັງຫຼາຍຂອງເຮົາສິ້ນແລ້ວ (໓)

ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ສະຕິປັດຖານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ເຊິ່ງພິກຂຸຂີນາສົບໄດ້ອາໄສແລ້ວຢືນຢັນຄວາມສິ້ນອາສະວະວ່າ ອາສະວະທັງຫຼາຍຂອງເຮົາສິ້ນແລ້ວ (໔)

ສຳມັບປະທານ ໔ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ຯລຯ ອິດທິບາດ ໔ ຯລຯ ອິນຊີ ໕ ຯລຯ ພະລະ ໕ ຯລຯ ໂພດຊົງ ໗ ຯລຯ ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ແມ່ນຂໍ້ທີ່ອະຣິຍະມັກມີອົງ ໘ ເປັນທຳທີ່ພິກຂຸຂີນາສົບຈະເລີນອົບຮົມດີແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ເຊິ່ງພິກຂຸຂີນາສົບໄດ້ອາໄສແລ້ວຢືນຢັນຄວາມສິ້ນອາສະວະວ່າ ອາສະວະທັງຫຼາຍຂອງເຮົາສິ້ນແລ້ວ ນີ້ກໍເປັນກຳລັງຂອງພິກຂຸຂີນາສົບ ໑໐ (໕-໑໐) (=໔໘)

ອິດທິພະລະ ໑໐ ມີອັນໃດແດ່ ຄື

໑. ລິດທີ່ອະທິຖານ
໒. ລິດທີ່ສະແດງໄດ້ຕ່າງ ໆ
໓. ລິດທີ່ສຳເລັດດ້ວຍໃຈ
໔. ລິດທີ່ແຜ່ໄປດ້ວຍຍານ
໕. ລິດທີ່ແຜ່ໄປດ້ວຍສະມາທິ
໖. ລິດຂອງພຣະອະຣິຍະ
໗. ລິດທີ່ເກີດຈາກຜົນກຳ
໘. ລິດຂອງທ່ານຜູ້ມີບຸນ
໙. ລິດທີ່ສຳເລັດມາຈາກວິດຊາ
໑໐. ຊື່ວ່າລິດ ຍ້ອນມີສະພາວະສຳເລັດດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໃຈ ນີ້ແມ່ນອິດທິພະລະ ໑໐ (໑໐)

ຕະຖາຄະຕະພະລະ ໑໐ ມີອັນໃດແດ່?

ຄື ຕະຖາຄົດຮູ້ຊັດແຈ້ງຖານະໂດຍຄວາມເປັນຖານະ ແລະອະຖານະໂດຍຄວາມເປັນອະຖານະໃນໂລກນີ້ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງຖານະໂດຍຄວາມເປັນຖານະ ແລະອະຖານະໂດຍຄວາມເປັນອະຖານະຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ທີ່ຕະຖາຄົດອາໄສແລ້ວຍືນຍັນຖານະທີ່ອົງອາດບັນລືສີຫະນາດປະກາດພົມມະຈັກໃນບໍລິສັດ (໑)

ຕະຖາຄົດຮູ້ຊັດແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງວິບາກແຫ່ງການຍຶດຖືກຳທີ່ເປັນທັງອະດີດ ອະນາຄົດ ແລະປັດຈຸບັນ ໂດຍຖານະ ໂດຍເຫດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໒)

ຕະຖາຄົດຮູ້ຊັດແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງປະຕິປະທາທີ່ໃຫ້ເຖິງພູມທັງປວງຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໓)

ຕະຖາຄົດຮູ້ຊັດແຈ້ງໂລກທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງໂລກທາດຫຼາຍຊະນິດ ມີທາດທີ່ແຕກຕ່າງກັນຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໔)

ຕະຖາຄົດຮູ້ຊັດແຈ້ງວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ການທີ່ຕະຖາຄົດ ຮູ້ຊັດວ່າໝູ່ສັດເປັນຜູ້ມີອັດທະຍາໄສຕ່າງກັນຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດຯລຯ (໕)

ຕະຖາຄົດຮູ້ຊັດແຈ້ງວ່າສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນມີອິນຊີແກ່ກ້າ ແລະມີອິນຊີອ່ອນຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງວ່າສັດເຫຼົ່າອື່ນ ແລະບຸກຄົນເຫຼົ່າອື່ນມີອິນຊີແກ່ກ້າ ແລະມີອິນຊີອ່ອນຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໖)

ຕະຖາຄົດຮູ້ຊັດແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດ ຕາມຄວາມເປັນຈິງ ການທີ່ຕະຖາຄົດຮູ້ຊັດແຈ້ງຄວາມເສົ້າໝອງ ຄວາມຜ່ອງແຜ້ວແຫ່ງຊານ ວິໂມກ ສະມາທິ ແລະສະມາບັດ ແລະການອອກຈາກຊານ ວິໂມກ ສະມາທິ ແລະສະມາບັດຕາມຄວາມເປັນຈິງ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໗)

ຕະຖາຄົດຣະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ຣະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ພ້ອມທັງລັກສະນະທົ່ວໄປແລະຊີວະປະຫວັດແບບນີ້ ການທີ່ຕະຖາຄົດຣະລຶກເຖິງຊາດກ່ອນໄດ້ຫຼາຍຊາດ ຄື ໑ ຊາດແດ່ ໒ ຊາດແດ່ ຯລຯ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໘)

ຕະຖາຄົດເຫັນໝູ່ສັດທີ່ກຳລັງຈຸຕິແລະກຳລັງເກີດດ້ວຍຕາທິບອັນບໍລິສຸດເໜືອມະນຸດ ການທີ່ຕະຖາຄົດເຫັນໝູ່ສັດທີ່ກຳລັງຈຸຕິແລະກຳລັງເກີດດ້ວຍຕາທິບອັນບໍລິສຸດເໜືອມະນຸດ ນີ້ເປັນກຳລັງຂອງຕະຖາຄົດ ຯລຯ (໙)

ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ[๑]ປັນຍາວິມຸດຕິ[๒]ອັນບໍ່ມີອາສະວະຍ້ອນອາສະວະທັງຫຼາຍ ສິ້ນແລ້ວດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ[๓] ການທີ່ຕະຖາຄົດເຮັດໃຫ້ແຈ້ງເຈໂຕວິມຸດຕິ ປັນຍາວິມຸດຕິອັນບໍ່ມີອາສະວະ ຍ້ອນອາສະວະທັງຫຼາຍສິ້ນແລ້ວດ້ວຍປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ນີ້ເປັນກຳລັງຂອງຕະຖາຄົດ ທີ່ຕະຖາຄົດອາໄສແລ້ວຢືນຢັນຖານະທີ່ອົງອາດບັນລືສີຫະນາດ ປະກາດພົມມະຈັກໃນບໍລິສັດ ນີ້ຕະຖາຄະຕະພະລະ ໑໐ (໑໐) (=໖໗)

[໔໘] ຊື່ວ່າສັດທາພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າສະຕິພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າສະມາທິພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າປັນຍາພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າຫິຣິພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າໂອດຕັບປະພະລະ ຍ້ອນມີສະພາວະເປັນແນວໃດ? ຊື່ວ່າປະຕິສັງຂານພະລະ ຍ້ອນມີສະພາວະເປັນແນວໃດ? ຯລຯ ຊື່ວ່າຕະຖາຄະຕະພະລະ ຍ້ອນມີສະພາວະເປັນແນວໃດ?

ຄື ຊື່ວ່າສັດທາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າວິຣິຍະພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າສະຕິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະມາທິພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າປັນຍາພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າ ຫິຣິພະລະ ຍ້ອນລະອາຍບາບອະກຸສົນທຳ ຊື່ວ່າໂອດຕັບປະພະລະ ຍ້ອນເກງກົວບາດ ອະກຸສົນທຳ ຊື່ວ່າປະຕິສັງຂານພະລະ ຍ້ອນພິຈາລະນາກິເລດທັງຫຼາຍດ້ວຍຍານ ຊື່ວ່າພາວະນາພະລະ ຍ້ອນທຳທັງຫຼາຍທີ່ເກີດໃນພາວະນານັ້ນມີຣົດເປັນແນວດຽວກັນ ຊື່ວ່າອະນະວັດຊະພະລະ ຍ້ອນໃນເນກຂຳມະນັ້ນບໍ່ມີໂທດແມ່ນໜ້ອຍໜຶ່ງ ຊື່ວ່າສັງຄະຫະພະລະ ຍ້ອນພຣະໂຍຄາວະຈອນລວມຈິດໄວ້ດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່າຂັນຕິພະລະ ຍ້ອນເນກຂຳມະເປັນຕົ້ນຍ່ອມອົດທົນຕໍ່ນິວອນມີການສັນທະເປັນຕົ້ນນັ້ນ ຊື່ວ່າປັນຍັດຕິພະລະ ຍ້ອນພຣະໂຍຄາວະຈອນຕັ້ງຈິດໄວ້ດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່ານິດຊັດຕິພະລະ ຍ້ອນພຣະໂຍຄາວະຈອນຍ່ອມເພ່ງຈິດດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່າອິດສະຣິຍະພະລະ ຍ້ອນພຣະໂຍຄາວະຈອນຍ່ອມບັງຄັບຈິດໃຫ້ເປັນໄປຕາມອຳນາດດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່າອະທິຖານພະລະ ຍ້ອນພຣະໂຍຄາວະຈອນຍ່ອມອະທິຖານຈິດດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່າສະມະຖະພະລະ ຍ້ອນຈິດເປັນເອກັກຄະຕາຣົມດ້ວຍເນກຂຳມະເປັນຕົ້ນນັ້ນ ຊື່ວ່າວິປັດສະນາພະລະ ຍ້ອນພຣະໂຍຄາວະຈອນຍ່ອມພິຈາລະນາເຫັນທຳທີ່ເກີດໃນພາວະນານັ້ນ ຊື່ວ່າເສກຂະພະລະ ຍ້ອນພຣະເສຂະຍັງຕ້ອງສຶກສາໃນສຳມາທິດຖິເປັນຕົ້ນນັ້ນ ຊື່ວ່າ

ອະເສກຂະພະລະ ຍ້ອນພຣະອະເສຂະສິກສາໃນສຳມາທິດຖິເປັນຕົ້ນນັ້ນສຳເລັດແລ້ວ ຊື່ວ່າຂີນາສະວະພະລະ ຍ້ອນອາສະວະທັງຫຼາຍສິ້ນແລ້ວດ້ວຍຄວາມເຫັນດ້ວຍດີນັ້ນ ຊື່ວ່າອິດທິພະລະ ຍ້ອນລິດຍ່ອມສຳເລັດດ້ວຍການອະທິຖານເປັນຕົ້ນດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໄຈ ຊື່ວ່າຕະຖາຄະຕະພະລະ ຍ້ອນມີສະພາວະມີກຳລັງຫາປະມານບໍ່ໄດ້ ແນວນີ້

**ພະລະກະຖາ ຈົບ**

## ໑໐. ສູນຍະກະຖາ
## ວ່າດ້ວຍຄວາມວ່າງ

[໔໓] ຂ້າພະເຈົ້າໄດ້ສະດັບມາແນວນີ້

ສະໄໝໜຶ່ງ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ ໃນພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີ ເຂດເມືອງສາວັດຖີ ເທື່ອນັ້ນ ທ່ານພຣະອານົນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງຢູ່ບ່ອນທີ່ສົມຄວນ ໄດ້ທູນຖາມວ່າ ຂ້າແດ່ພຣະອົງຜູ້ຈະເລີນ ທີ່ເຂົາກ່າວກັນວ່າ ໂລກວ່າງ ໂລກວ່າງ ດ້ວຍເຫດເທົ່າໃດນໍ ພຣະອົງຈຶ່ງຕັດວ່າ ໂລກກວ່າງ

ພຣະອົງຈຶ່ງຕັດວ່າ ອານົນ ໂລກກວ່າງຍ້ອນວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ດັ່ງນັ້ນ ເຮົາຈຶ່ງກ່າວວ່າ ໂລກວ່າງ ອານົນ ອັນໃດນໍ ວ່າງຈາກອັດຕາແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ຄື ຈັກຂຸເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ຮູບວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈັກຂຸວິນຍານເປັນທຳວ່າງຈາກອັດຕາແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈັກຂຸສຳຜັດເປັນທຳວ່າງຈາກອັດຕາແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ແມ່ນສຸກຂະເວທະນາ ທຸກຂະເວທະນາ ຫຼືອຸເປກຂາເວທະນາທີ່ເກີດຍ້ອນຈັກຂຸສຳຜັດເປັນປັດໄຈກໍເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາໂສຕະ ຯລຯ ສັດທະ ຯລຯ ຄານະ ຯລຯ ຄັນທະ ຯລຯ ຊິວຫາ ຯລຯ ຣະສະ ຯລຯ ກາຍະ ຯລຯ ໂຜດຖັບພະ ຯລຯ ມະໂນເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ທຳມາຣົມເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ມະໂນວິນຍານເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ມະໂນສຳຜັດເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ແມ່ນສຸກຂະເວທະນາ ທຸກຂະເວທະນາ ຫຼື ອຸເປກຂາເວທະນາທີ່ເກີດຍ້ອນມະໂນສຳຜັດເປັນປັດໄຈກໍເປັນທຳວ່າງຈາກອັດຕາ ແລະຈາກສິ່ງທີ່ເນື່ອງດ້ວຍອັດຕາ ຍ້ອນແນວນັ້ນ ເຮົາຈຶ່ງກ່າວວ່າໂລກວ່າງ

### ໑. ບົດມາຕິກາ

[໔໗] ໑. ສູນຍະສູນຍະ (ຄວາມວ່າງດ້ວຍທຳທີ່ວ່າງ)

໔. ສັງຂານສູນຍະ (ຄວາມວ່າງດ້ວຍທຳທີ່ເປັນສັງຂານ)
໕. ວິປະຣິນາມະສູນຍະ (ຄວາມວ່າງດ້ວຍທຳທີ່ຜັນປ່ຽນ)
໔. ອັງຄະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນເລີດ)
໕. ລັກຂະນະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນລັກສະນະ)
໖. ວິກຂຳພະນະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນເຫດຂົ່ມ)
໗. ຕະທັງຄະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນຄູ່ປັບ)
໘. ສະມຸດເສທະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນເຫດໃຫ້ຕັດຂາດ)
໙. ປະຕິປັດສັດທິສູນຍະ (ຄວາມວ່າງດ້ວຍທຳທີ່ເປັນເຫດໃຫ້ສະງົບຣະງັບ)
໑໐. ນິດສະຣະນະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນເຫດສະລັດອອກ)
໑໑. ອັດຊັດຕະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນພາຍໃນ)
໑໔. ພະຫິດທາສູນຍະ (ຄວາມວ່າງດ້ວຍທຳທີ່ເປັນພາຍນອກ)
໑໕. ທຸພະໂຕສູນຍະ (ຄວາມວ່າງດ້ວຍທຳທີ່ເປັນພາຍໃນແລະພາຍນອກ)
໑໔. ສະພາຄະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນກຸ່ມດຽວກັນ)
໑໕. ວິສະພາຄະສູນຍະ (ຄວາມວ່າງດ້ວຍທຳທີ່ຕ່າງກຸ່ມກັນ)
໑໖. ເອສະນາສູນຍະ (ຄວາມວ່າງດ້ວຍທຳທີ່ສະແຫວງຫາ)
໑໗. ປະຣິກຄະຫະສູນຍະ (ຄວາມວ່າງດ້ວຍທຳທີ່ກຳນົດ)
໑໘. ປະຕິລາພະສູນຍະ (ຄວາມວ່າງດ້ວຍທຳທີ່ໄດ້)
໑໙. ປະຕິເວທະສູນຍະ (ຄວາມວ່າງດ້ວຍທຳທີ່ຮູ້ແຈ້ງ)
໔໐. ເອກັດຕະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນສະພາວະດຽວ)
໔໑. ນານັດຕະສູນຍະ (ຄວາມວ່າງດ້ວຍທຳທີ່ເປັນສະພາວະຕ່າງ ໆ)
໔໔. ຂັນຕິສູນຍະ (ຄວາມວ່າງດ້ວຍທຳທີ່ພໍໃຈ)
໔໕. ອະທິຖານສູນຍະ (ຄວາມວ່າງດ້ວຍທຳທີ່ອະທິຖານ)
໔໔. ປະຣິໂຍຄາຫະນະສູນຍະ (ຄວາມວ່າງດ້ວຍທຳທີ່ຢັ່ງລົງ)
໔໕. ຄວາມວ່າງຂັ້ນສູງສຸດຂອງຄວາມວ່າງທັງປວງ ຄື ການທີ່ບຸກຄົນຜູ້ມີສຳປະຊັນຍະທຳຄວາມດຳຣົງມີຢູ່ແຫ່ງກິເລດໃຫ້ໝົດສິ້ນໄປ

## ໔. ນິດເທດ

[໔໘] ໑. ສູນຍະສູນຍະ ເປັນແນວໃດ?

ຄື ຈັກຂຸເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼື ຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ໂສຕະ ฯລฯ ຄານະ ฯລฯ ຊິວຫາ ฯລฯ ກາຍ ฯລฯ ມະໂນເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ

ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼືຈາກຄວາມບໍ່ຜັນປ່ຽນ ເປັນທຳມະດາ ນີ້ຊື່ວ່າ ສູນຍະສູນຍະ

໔. ສັງຂານສູນຍະ ເປັນແນວໃດ?

ຄື ສັງຂານ ໓ ປະການ ໄດ້ແກ່

໑. ປຸນຍາພິສັງຂານ
໔. ອະປຸນຍາພິສັງຂານ
໓. ອາເນນຊາພິສັງຂານ

ປຸນຍາພິສັງຂານ ເປັນທຳວ່າງຈາກອະປຸນຍາພິສັງຂານ ແລະອາເນນຊາພິສັງຂານ
ອະປຸນຍາພິສັງຂານ ເປັນທຳວ່າງຈາກປຸນຍາພິສັງຂານ ແລະອາເນນຊາພິສັງຂານ
ອາເນນຊາພິສັງຂານ ເປັນທຳວ່າງຈາກປຸນຍາພິສັງຂານ ແລະອະປຸນຍາພິສັງຂານ
ນີ້ແມ່ນສັງຂານ ໓ ປະການ
ອີກໄນໜຶ່ງ ສັງຂານ ໓ ປະການ ໄດ້ແກ່

໑. ກາຍສັງຂານ
໔. ວະຈີສັງຂານ
໓. ຈິດຕະສັງຂານ

ກາຍສັງຂານ ເປັນທຳວ່າງຈາກວະຈີສັງຂານ ແລະຈິດຕະສັງຂານ
ວະຈີສັງຂານ ເປັນທຳວ່າງຈາກກາຍສັງຂານ ແລະຈິດຕະສັງຂານ
ຈິດຕະສັງຂານ ເປັນທຳວ່າງຈາກກາຍສັງຂານ ແລະວະຈີສັງຂານ
ນີ້ແມ່ນສັງຂານ ໓ ປະການ ອີກໄນໜຶ່ງ
ອີກໄນໜຶ່ງ ສັງຂານ ໓ ປະການ ໄດ້ແກ່

໑. ສັງຂານສ່ວນອະດີດ
໔. ສັງຂານສ່ວນອະນາຄົດ
໓. ສັງຂານສ່ວນປັດຈຸບັນ

ສັງຂານສ່ວນອະດີດ ເປັນທຳວ່າງຈາກສັງຂານສ່ວນອະນາຄົດແລະສັງຂານສ່ວນປັດຈຸບັນ
ສັງຂານສ່ວນອະນາຄົດ ເປັນທຳວ່າງຈາກສັງຂານສ່ວນອະດີດ ແລະສັງຂານສ່ວນປັດຈຸບັນ
ສັງຂານສ່ວນປັດຈຸບັນ ເປັນທຳວ່າງຈາກສັງຂານສ່ວນອະດີດແລະສັງຂານສ່ວນອະນາຄົດ
ນີ້ແມ່ນສັງຂານ ໓ ປະການ ອີກໄນໜຶ່ງ
ທັງຫຼາຍທີ່ກ່າວນີ້ຊື່ວ່າ ສັງຂານສູນຍະ

໓. ວິປະຣິນາມະສູນຍະ ເປັນແນວໃດ?

ຄື ຮູບທີ່ເກີດແລ້ວເປັນທຳວ່າງຕາມສະພາວະ ຮູບທີ່ດັບໄປເປັນທຳຜັນປ່ຽນແລະວ່າງ ເວທະນາທີ່ເກີດແລ້ວເປັນທຳວ່າງຕາມສະພາວະ ເວທະນາທີ່ດັບໄປເປັນທຳຜັນປ່ຽນແລະວ່າງ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ພົບທີ່ເກີດແລ້ວເປັນທຳວ່າງຕາມສະພາວະ ພົບທີ່ດັບໄປເປັນທຳຜັນປ່ຽນແລະວ່າງ ນີ້ຊື່ວ່າວິປະຣິນາມະສູນຍະ

໔. ອັງຄະສູນຍະ ເປັນແນວໃດ?

ຄື ທາງທີ່ເລີດ ທາງທີ່ປະເສີດ ທາງທີ່ວິເສດ ຄື ຄວາມສະງົບແຫ່ງສັງຂານທັງປວງ ຄວາມສະລະຄືນອຸປະທິທັງປວງ ຄວາມສິ້ນໄປແຫ່ງຕັນຫາ ຄວາມຄາຍກຳໜັດ ຄວາມດັບ ນິບພານ ນີ້ຊື່ວ່າ ອັງຄະສູນຍະ

໕. ລັກຂະນະສູນຍະ ເປັນແນວໃດ?

ຄື ລັກສະນະ ໒ ປະການ ໄດ້ແກ່

໑. ພານລັກສະນະ (ລັກສະນະຄົນພານ)
໒. ບັນດິດລັກສະນະ (ລັກສະນະບັນດິດ)

ພານລັກສະນະ ເປັນທຳວ່າງຈາກບັນດິດລັກສະນະ

ບັນດິດລັກສະນະ ເປັນທຳວ່າງຈາກພານລັກສະນະ

ລັກສະນະ ໓ ປະການ ໄດ້ແກ່

໑. ອຸບປາທະລັກສະນະ (ລັກສະນະຄວາມເກີດຂຶ້ນ)
໒. ວະຍະລັກສະນະ (ລັກສະນະຄວາມເສື່ອມ)
໓. ຖິຕັນຍະຖັດຕະລັກສະນະ (ລັກສະນະຜັນປ່ຽນເມື່ອຍັງຕັ້ງຢູ່)

ອຸບປາທະລັກສະນະ ເປັນທຳວ່າງຈາກວະຍະລັກສະນະແລະຖິຕັນຍະຖັດຕະລັກສະນະ

ວະຍະລັກສະນະ ເປັນທຳວ່າງຈາກອຸບປາທະລັກສະນະແລະຖິຕັນຍະຖັດຕະລັກສະນະ

ຖິຕັນຍະຖັດຕະລັກສະນະ ເປັນທຳວ່າງຈາກອຸບປາທະລັກສະນະແລະວະຍະລັກສະນະ

ອຸບປາທະລັກສະນະແຫ່ງຮູບ ເປັນທຳວ່າງຈາກວະຍະລັກສະນະ ແລະຖິຕັນຍະຖັດຕະລັກສະນະ

ວະຍະລັກສະນະແຫ່ງຮູບ ເປັນທຳວ່າງຈາກອຸບປາທະລັກສະນະ ແລະຖິຕັນຍະຖັດຕະລັກສະນະ

ຖິຕັນຍະຖັດຕະລັກສະນະແຫ່ງຮູບ ເປັນທຳວ່າງຈາກອຸບປາທະລັກສະນະ ແລະວະຍະລັກສະນະ

ອຸບປາທະລັກສະນະແຫ່ງເວທະນາ ฯลฯ ສັນຍາ ฯลฯ ສັງຂານ ฯลฯ ວິນຍານ ฯลฯ ຈັກຂຸ ฯลฯ

ອຸບປາທະລັກສະນະແຫ່ງຊະຣາແລະມໍລະນະ ເປັນທຳວ່າງຈາກວະຍະລັກສະນະແລະຖິຕັນຍະຖັດຕະລັກສະນະ

ວະຍະລັກສະນະແຫ່ງຊະຣາແລະມໍລະນະ ເປັນທຳວ່າງຈາກອຸບປາທະລັກສະນະແລະຖິຕັນຍະຖັດຕະລັກສະນະ

ຖິຕັນຍະຖັດຕະລັກສະນະແຫ່ງຊະຣາແລະມໍລະນະ ເປັນທຳວ່າງຈາກອຸບປາທະລັກສະນະແລະວະຍະລັກສະນະ

ທັງຫຼາຍນີ້ຊື່ວ່າລັກຂະນະສູນຍະ

ຜ. ວິກຂຳພະນະສູນຍະ ເປັນແນວໃດ?

ຄື ການສັນທະເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍເນກຂຳມະ ແລະເປັນທຳວ່າງຈາກເນກຂຳມະ ພະຍາບາດເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍອະພະຍາບາດ ແລະເປັນທຳວ່າງຈາກອະພະຍາບາດ ຖີນະມິດທະເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍອາໂລກະສັນຍາ ແລະເປັນທຳວ່າງຈາກອາໂລກະສັນຍາ ອຸດທັດຈະເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍອະວິກເຂປະ ແລະເປັນທຳວ່າງຈາກອະວິກເຂປະ ວິຈິກິດສາເປັນເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍທຳມະວະວັດຖານ ແລະເປັນທຳວ່າງຈາກທຳມະວະວັດຖານ ອະວິດຊາເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍຍານ ແລະເປັນທຳວ່າງຈາກຍານ ອະຣະຕິເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍປາມຸດຊະ ແລະເປັນທຳວ່າງຈາກປາມຸດຊະ ນິວອນເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍປະຖົມຊານ ແລະເປັນທຳວ່າງຈາກປະຖົມຊານ ฯลฯ ກິເລດທັງປວງເປັນທຳທີ່ບຸກຄົນຂົ່ມໄວ້ດ້ວຍອະຣະຫັດຕະມັກ ແລະເປັນທຳວ່າງຈາກອະຣະຫັດຕະມັກ ນີ້ຊື່ວ່າວິກຂຳພະນະສູນຍະ

ກ. ຕະທັງຄະສູນຍະ ເປັນແນວໃດ?

ຄື ການສັນທະເປັນທຳທີ່ບຸກຄົນລະໄດ້ດ້ວຍເນກຂຳມະ ແລະເປັນທຳວ່າງຈາກເນກຂຳມະ ພະຍາບາດເປັນທຳທີ່ບຸກຄົນລະໄດ້ດ້ວຍອະພະຍາບາດ ແລະເປັນທຳວ່າງຈາກອະພະຍາບາດ ຖີນະມິດທະເປັນທຳທີ່ບຸກຄົນລະໄດ້ດ້ວຍອາໂລກະສັນຍາ ແລະເປັນທຳວ່າງຈາກອາໂລກະສັນຍາ ອຸດທັດຈະເປັນທຳທີ່ບຸກຄົນລະໄດ້ດ້ວຍອະວິກເຂປະ ແລະເປັນທຳວ່າງຈາກອະວິກເຂປະ ວິຈິກິດສາເປັນທຳທີ່ບຸກຄົນລະໄດ້ດ້ວຍທຳມະວະວັດຖານ ແລະເປັນທຳວ່າງຈາກທຳມະວະວັດຖານ ອະວິດຊາເປັນທຳທີ່ບຸກຄົນລະໄດ້ດ້ວຍຍານ ແລະເປັນທຳວ່າງຈາກຍານ ອະຣະຕິເປັນທຳທີ່ບຸກຄົນລະໄດ້ດ້ວຍປາມຸດຊະ ແລະເປັນທຳວ່າງຈາກປາມຸດຊະ ນິວອນເປັນທຳທີ່ບຸກຄົນລະໄດ້ດ້ວຍປະຖົມຊານ ແລະເປັນທຳວ່າງຈາກປະຖົມຊານ ฯลฯ ກິເລດທັງປວງເປັນທຳທີ່ບຸກຄົນລະໄດ້ດ້ວຍອະຣະຫັດຕະມັກ ແລະເປັນທຳວ່າງຈາກອະຣະຫັດຕະມັກ ນີ້ຊື່ວ່າຕະທັງຄະສູນຍະ

໗. ສະມຸດເສທະສູນຍະ ເປັນແນວໃດ?

ຄື ກາມສັນທະເປັນທໍາທີ່ບຸກຄົນຕັດຂາດດ້ວຍເນກຂໍາມະ ແລະເປັນທໍາວ່າງຈາກເນກຂໍາມະ ພະຍາບາດເປັນທໍາທີ່ບຸກຄົນຕັດຂາດດ້ວຍອະພະຍາບາດ ແລະເປັນທໍາວ່າງຈາກອະພະຍາບາດ ຖີນະມິດທະເປັນທໍາທີ່ບຸກຄົນຕັດຂາດດ້ວຍອາໂລກະສັນຍາ ແລະເປັນທໍາວ່າງຈາກອາໂລກະສັນຍາ ອຸດທັດຈະເປັນທໍາທີ່ບຸກຄົນຕັດຂາດດ້ວຍອະວິກເຂປະ ແລະເປັນທໍາວ່າງຈາກອະວິກເຂປະ ວິຈິກິດສາເປັນທໍາທີ່ບຸກຄົນຕັດຂາດດ້ວຍທໍາມະວະວັດຖານ ແລະເປັນທໍາວ່າງຈາກທໍາມະວະວັດຖານ ອະວິດຊາເປັນທໍາທີ່ບຸກຄົນຕັດຂາດດ້ວຍຍານ ແລະເປັນທໍາວ່າງຈາກຍານ ອະຣະຕິເປັນທໍາທີ່ບຸກຄົນຕັດຂາດດ້ວຍປາມຸດຊະ ແລະເປັນທໍາວ່າງຈາກປາມຸດຊະ ນິວອນເປັນທໍາທີ່ບຸກຄົນຕັດຂາດດ້ວຍປະຖົມຊານ ແລະເປັນທໍາວ່າງຈາກປະຖົມຊານ ໗ລ໗ ກິເລດທັງປວງເປັນທໍາທີ່ບຸກຄົນຕັດຂາດດ້ວຍອະຣະຫັດຕະມັກ ແລະເປັນທໍາວ່າງຈາກອະຣະຫັດຕະມັກ ນີ້ຊື່ວ່າສະມຸດເສທະສູນຍະ

໙. ປະຕິປັດສັດທິສູນຍະ ເປັນແນວໃດ?

ຄື ກາມສັນທະເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍເນກຂໍາມະ ແລະເປັນທໍາວ່າງຈາກເນກຂໍາມະ ພະຍາບາດເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍອະພະຍາບາດ ແລະເປັນທໍາວ່າງຈາກອະພະຍາບາດ ຖີນະມິດທະເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍອາໂລກະສັນຍາ ແລະເປັນທໍາວ່າງຈາກອາໂລກະສັນຍາ ອຸດທັດຈະເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍອະວິກເຂປະ ແລະເປັນທໍາວ່າງຈາກອະວິກເຂປະ ວິຈິກິດສາເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍທໍາມະວະວັດຖານ ແລະເປັນທໍາວ່າງຈາກທໍາມະວະວັດຖານ ອະວິດຊາເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍຍານ ແລະເປັນທໍາວ່າງຈາກຍານ ອະຣະຕິເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍປາມຸດຊະ ແລະເປັນທໍາວ່າງຈາກປາມຸດຊະ ນິວອນເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍປະຖົມຊານ ແລະເປັນທໍາວ່າງຈາກປະຖົມຊານ ໗ລ໗ ກິເລດທັງປວງເປັນທໍາທີ່ບຸກຄົນເຮັດໃຫ້ສະງົບຣະງັບດ້ວຍອະຣະຫັດຕະມັກ ແລະເປັນທໍາວ່າງຈາກອະຣະຫັດຕະມັກ ແລະເປັນທໍາວ່າງຈາກອະຣະຫັດຕະມັກ ນີ້ຊື່ວ່າປະຕິປັດສັດທິສູນຍະ

໑໐. ນິດສະຣະນະສູນຍະ ເປັນແນວໃດ?

ຄື ກາມສັນທະເປັນທໍາທີ່ບຸກຄົນສະລັດອອກດ້ວຍເນກຂໍາມະ ແລະເປັນທໍາວ່າງຈາກເນກຂໍາມະ ພະຍາບາດເປັນທໍາທີ່ບຸກຄົນສະລັດອອກດ້ວຍອະພະຍາບາດ ແລະເປັນທໍາວ່າງຈາກອະພະຍາບາດ ຖີນະມິດທະເປັນທໍາທີ່ບຸກຄົນສະລັດອອກດ້ວຍອາໂລກະສັນຍາ ແລະເປັນທໍາວ່າງຈາກອາໂລກະສັນຍາ ອຸດທັດຈະເປັນທໍາທີ່ບຸກຄົນສະລັດອອກດ້ວຍອະວິກເຂປະ ແລະເປັນທໍາວ່າງຈາກອະວິກເຂປະ ວິຈິກິດສາເປັນທໍາທີ່ບຸກຄົນສະລັດອອກດ້ວຍທໍາມະວະວັດຖານ ແລະເປັນທໍາວ່າງຈາກທໍາມະວະວັດຖານ ອະວິດຊາເປັນທໍາທີ່ບຸກຄົນສະລັດອອກ ດ້ວຍຍານ ແລະເປັນທໍາ

ວ່າງຈາກຍານ ອະຣະຕິເປັນທຳທີ່ບຸກຄົນສະລັດອອກດ້ວຍປາມຸດຊະ ແລະເປັນທຳວ່າງຈາກປາມຸດຊະ ນິວອນເປັນທຳທີ່ບຸກຄົນສະລັດອອກດ້ວຍປະຖົມຊານ ແລະເປັນທຳວ່າງຈາກປະຖົມຊານ ຯລຯ ກິເລດທັງປວງເປັນທຳທີ່ບຸກຄົນສະລັດອອກດ້ວຍອະຣະຫັດຕະມັກ ແລະເປັນທຳວ່າງຈາກອະຣະຫັດຕະມັກ ນີ້ຊື່ວ່ານິດສະຣະນະສູນຍະ

໑໑. ອັດຊັດຕະສູນຍະ ເປັນແນວໃດ?

ຄື ຈັກຂຸທີ່ເປັນອາຍະຕະນະພາຍໃນ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼື ຈາກຄວາມບໍ່ຜັນປ່ຽນ ເປັນທຳມະດາ ໂສຕະ ຯລຯ ຄານະ ຯລຯ ຊິວຫາ ຯລຯ ກາຍະ ຯລຯ ມະໂນທີ່ເປັນອາຍະຕະນະ ພາຍໃນ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼື ຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ນີ້ຊື່ວ່າ ອັດຊັດຕະສູນຍະ

໑໘. ພະຫິດທາສູນຍະ ເປັນແນວໃດ?

ຄື ຮູບທີ່ເປັນອາຍະຕະນະພາຍນອກ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼືຈາກຄວາມບໍ່ຜັນປ່ຽນ ເປັນທຳມະດາ ສຽງ ຯລຯ ກິ່ນ ຯລຯ ຣະສະ ຯລຯ ໂຜດຖັບພະ ຯລຯ ທຳມາຣົມທີ່ເປັນອາຍະຕະນະພາຍນອກ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼືຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ນີ້ຊື່ວ່າພະຫິດທາສູນຍະ

໑໓. ທຸພະໂຕສູນຍະ ເປັນແນວໃດ?

ຄື ຈັກຂຸທີ່ເປັນອາຍະຕະນະພາຍໃນ ແລະຮູບທີ່ເປັນອາຍະຕະນະພາຍນອກທັງສອງນັ້ນ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼືຈາກຄວາມບໍ່ຜັນປ່ຽນເປັນທຳມະດາ ໂສຕະທີ່ເປັນອາຍະຕະນະພາຍໃນແລະສັດທະທີ່ເປັນອາຍະຕະນະພາຍນອກ ຯລຯ ຄານະທີ່ເປັນອາຍະຕະນະພາຍໃນແລະຄັນທະທີ່ເປັນອາຍະຕະນະພາຍນອກ ຯລຯ ຊິວຫາທີ່ເປັນອາຍະຕະນະພາຍໃນແລະຣົດທີ່ເປັນອາຍະຕະນະພາຍນອກ ຯລຯ ກາຍທີ່ເປັນອາຍະຕະນະພາຍໃນແລະໂຜດຖັບພະທີ່ເປັນອາຍະຕະນະພາຍນອກ ຯລຯ ມະໂນທີ່ເປັນອາຍະຕະນະພາຍໃນແລະທຳມາຣົມທີ່ເປັນອາຍະຕະນະພາຍນອກທັງສອງນັ້ນ ເປັນທຳວ່າງຈາກອັດຕາ ຈາກສິ່ງທີ່ເນື່ອງດ້ວຍອັດຕາ ຈາກຄວາມທ່ຽງ ຈາກຄວາມຍັ່ງຍືນ ຈາກຄວາມໝັ້ນຄົງ ຫຼືຈາກຄວາມບໍ່ຜັນປ່ຽນ ນີ້ຊື່ວ່າທຸພະໂຕສູນຍະ

໑໔. ສະພາຄະສູນຍະ ເປັນແນວໃດ?

ຄື ອາຍະຕະນະພາຍໃນ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ອາຍະຕະນະພາຍນອກ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ໝວດວິນຍານ ໖ ເປັນທຳຈຸດຽວກັນແລະເປັນທຳ

ວ່າງ ໝວດຜັດສະ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ໝວດເວທະນາ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ໝວດສັນຍາ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ໝວດເຈຕະນາ ໖ ເປັນທຳກຸ່ມດຽວກັນແລະເປັນທຳວ່າງ ນີ້ຊື່ວ່າສະພາຄະສູນຍະ

໑໕. ວິສະພາຄະສູນຍະ ເປັນແນວໃດ?

ຄື ອາຍະຕະນະພາຍໃນ ໖ ເປັນທຳຕ່າງກຸ່ມກັບອາຍະຕະນະພາຍນອກ ໖ ແລະເປັນທຳວ່າງ ອາຍະຕະນະພາຍນອກ ໖ ເປັນທຳຕ່າງກຸ່ມກັບໝວດວິນຍານ ໖ ແລະເປັນທຳວ່າງ ໝວດຜັດສະ ໖ ເປັນທຳຕ່າງກຸ່ມກັບໝວດເວທະນາ ໖ ແລະເປັນທຳວ່າງ ໝວດເວທະນາ ໖ ເປັນທຳຕ່າງກຸ່ມກັບໝວດສັນຍາ ໖ ແລະເປັນທຳວ່າງ ໝວດສັນຍາ ໖ ເປັນທຳຕ່າງກຸ່ມກັບໝວດເຈຕະນາ ໖ ແລະເປັນທຳວ່າງ ນີ້ຊື່ວ່າວິສະພາຄະສູນຍະ

໑໖. ເອສະນາສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກກາມສັນທະ ອະພະຍາບາດທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນສະແຫວງຫາເປັນທຳວ່າງຈາກນິວອນ ໗ລ໗ ອະຣະຫັດຕະມັກທີ່ບຸກຄົນສະແຫວງຫາ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າເອສະນາສູນຍະ

໑໗. ປະຣິກຄະຫະສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນກຳນົດ ເປັນທຳວ່າງຈາກກາມສັນທະ ອະພະຍາບາດທີ່ບຸກຄົນກຳນົດ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນກຳນົດ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນກຳນົດ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນກຳນົດ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນກຳນົດ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນກຳນົດ ເປັນທຳວ່າງຈາກນິວອນ ໗ລ໗ ອະຣະຫັດຕະມັກທີ່ບຸກຄົນກຳນົດ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າປະຣິກຄະຫະສູນຍະ

໑໘. ປະຕິລາພະສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນໄດ້ ເປັນທຳວ່າງຈາກກາມສັນທະ ອະພະຍາບາດທີ່ບຸກຄົນໄດ້ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນໄດ້ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນໄດ້ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນໄດ້ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນໄດ້ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນໄດ້ ເປັນທຳ

ວ່າງຈາກນິວອນ ໗ລ໗ ອະຣະຫັດຕະມັກທີ່ບຸກຄົນໄດ້ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າ ປະຕິລາພະສູນຍະ

໑໙. ປະຕິເວທະສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກການສັນທະ ອະພະຍາບາດທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກນິວອນ ໗ລ໗ ອະຣະຫັດຕະມັກທີ່ບຸກຄົນຮູ້ແຈ້ງ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າປະຕິເວທະສູນຍະ

໘໐-໘໑. ເອກັດຕະສູນຍະ ນານັດຕະສູນຍະ ເປັນແນວໃດ?

ຄື ການສັນທະເປັນສະພາວະຕ່າງ ໆ ເນກຂຳມະເປັນສະພາວະດຽວ ເນກຂຳມະທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກການສັນທະ ພະຍາບາດເປັນສະພາວະຕ່າງ ໆ ອະພະຍາບາດເປັນສະພາວະດຽວ ອະພະຍາບາດທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກພະຍາບາດ ຖີນະມິດທະເປັນສະພາວະຕ່າງ ໆ ອາໂລກະສັນຍາເປັນສະພາວະດຽວ ອາໂລກະສັນຍາທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກຖີນະມິດທະ ອຸດທັດຈະເປັນສະພາວະຕ່າງ ໆ ອະວິກເຂປະເປັນສະພາວະດຽວ ອະວິກເຂປະທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກອຸດທັດຈະ ວິຈິກິດສາເປັນສະພາວະຕ່າງ ໆ ທຳມະວະວັດຖານເປັນສະພາວະດຽວ ທຳມະວະວັດຖານທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກວິຈິກິດສາ ອະວິດຊາເປັນສະພາວະຕ່າງ ໆ ຍານເປັນສະພາວະດຽວ ຍານທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກອະວິດຊາ ອະຣະຕິເປັນສະພາວະຕ່າງ ໆ ປາມຸດຊະເປັນສະພາວະດຽວ ປາມຸດຊະທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກອະຣະຕິ ນິວອນເປັນສະພາວະຕ່າງ ໆ ປະຖົມຊານເປັນສະພາວະດຽວ ປະຖົມຊານທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກນິວອນ ໗ລ໗ ກິເລດທັງປວງເປັນສະພາວະຕ່າງ ໆ ອະຣະຫັດຕະມັກເປັນສະພາວະດຽວ ອະຣະຫັດຕະມັກທີ່ເປັນສະພາວະດຽວຂອງບຸກຄົນຜູ້ຄິດຢູ່ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າເອກັດຕະສູນຍະ ນານັດຕະສູນຍະ

໘໒. ຂັນຕິສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນພໍໃຈ ເປັນທຳວ່າງຈາກການສັນທະ ອະພະຍາບາດທີ່ບຸກຄົນພໍໃຈ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນພໍໃຈ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນພໍໃຈ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນພໍໃຈ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນພໍໃຈ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນພໍໃຈ

ເປັນທຳວ່າງຈາກນິວອນ ໆລໆ ອະຣະຫັດຕະມັກທີ່ບຸກຄົນພໍໃຈ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າຂັນຕິສູນຍະ

໔໓. ອະທິຖານະສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນອະທິຖານ ເປັນທຳວ່າງຈາກກາມສັນທະ ອະພະຍາບາດທີ່ບຸກຄົນອະທິຖານ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນອະທິຖານ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນອະທິຖານ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນອະທິຖານ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນອະທິຖານ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນອະທິຖານ ເປັນທຳວ່າງຈາກນິວອນ ໆລໆ ອະຣະຫັດຕະມັກທີ່ບຸກຄົນອະທິຖານ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າອະທິດຖານະສູນຍະ

໔໔. ປະຣິໂຍຄາຫະນະສູນຍະ ເປັນແນວໃດ?

ຄື ເນກຂຳມະທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກກາມສັນທະ ອະພະຍາບາດທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກພະຍາບາດ ອາໂລກະສັນຍາທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກຖີນະມິດທະ ອະວິກເຂປະທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກອຸດທັດຈະ ຍານທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກອະວິດຊາ ທຳມະວະວັດຖານທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກອະຣະຕິ ປະຖົມຊານທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກນິວອນ ໆລໆ ອະຣະຫັດຕະມັກທີ່ບຸກຄົນຢັ່ງລົງ ເປັນທຳວ່າງຈາກກິເລດທັງປວງ ນີ້ຊື່ວ່າປະຣິໂຍຄາຫະນະສູນຍະ

໔໕. ຄວາມວ່າງຂັ້ນສູງສຸດຂອງຄວາມວ່າງທັງປວງ ຄື ການທີ່ບຸກຄົນຜູ້ມີສຳປະຊັນຍະກະທຳຄວາມດຳຣົງຢູ່ກິເລດໃຫ້ສິ້ນໄປ ເປັນແນວໃດ?

ຄື ບຸກຄົນຜູ້ມີສຳປະຊັນຍະໃນໂລກນີ້ ກະທຳຄວາມດຳຣົງຢູ່ກາມສັນທະໃຫ້ສິ້ນໄປດ້ວຍເນກຂຳມະ ກະທຳຄວາມດຳຣົງຢູ່ພະຍາບາດໃຫ້ສິ້ນໄປດ້ວຍອະພະຍາບາດ ກະທຳຄວາມດຳຣົງຢູ່ຖີນະມິດທະໃຫ້ສິ້ນໄປດ້ວຍອາໂລກະສັນຍາ ກະທຳຄວາມດຳຣົງຢູ່ອຸດທັດຈະໃຫ້ສິ້ນໄປດ້ວຍອະວິກເຂປະ ກະທຳຄວາມດຳຣົງຢູ່ວິຈິກິດສາໃຫ້ສິ້ນໄປດ້ວຍທຳມະວະວັດຖານ ກະທຳຄວາມດຳຣົງຢູ່ອະວິດຊາໃຫ້ສິ້ນໄປດ້ວຍຍານ ກະທຳຄວາມດຳຣົງຢູ່ອະຣະຕິໃຫ້ສິ້ນໄປດ້ວຍປາມຸດຊະ ກະທຳຄວາມດຳຣົງຢູ່ນິວອນໃຫ້ສິ້ນໄປດ້ວຍປະຖົມຊານ ໆລໆ ກະທຳຄວາມດຳຣົງຢູ່ກິເລດທັງປວງໃຫ້ສິ້ນໄປດ້ວຍອະຣະຫັດຕະມັກ

ອີກໄນໜຶ່ງ ຄວາມເປັນໄປແຫ່ງຈັກຂຸນີ້ຂອງບຸກຄົນຜູ້ມີສຳປະຊັນຍະ ຜູ້ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ຍ່ອມສິ້ນໄປ ແລະຄວາມເປັນໄປແຫ່ງຈັກຂຸອື່ນກໍບໍ່ເກີດຂຶ້ນ ຄວາມເປັນໄປແຫ່ງໂສຕະ ໆລໆ ຄວາມເປັນໄປແຫ່ງຄານະ ໆລໆ ຄວາມເປັນໄປແຫ່ງຊິວຫາ ໆລໆ ຄວາມເປັນໄປແຫ່ງກາຍະ ໆລໆ

ຄວາມເປັນໄປແຫ່ງມະໂນນີ້ຂອງບຸກຄົນຜູ້ມີສຳປະຊັນຍະ ຜູ້ປະຣິນິບພານດ້ວຍອະນຸປາທິເສສະນິບພານທາດ ຍ່ອມສິ້ນໄປ ແລະຄວາມເປັນໄປແຫ່ງມະໂນອື່ນກໍບໍ່ເກີດຂຶ້ນ ນີ້ຊື່ວ່າຄວາມວ່າງຂັ້ນສູງສຸດຂອງຄວາມວ່າງທັງປວງ ຄື ການທີ່ບຸກຄົນຜູ້ມີສຳປະຊັນຍະກະທຳຄວາມດຳຣົງມີຢູ່ແຫ່ງກິເລດໃຫ້ໝົດສິ້ນໄປ ເປັນແບວນີ້ແລ

**ສູນຍະກະຖາ ຈົບ**

**ຍຸຄະນັດທະວັກທີ ໘ ຈົບ**

## ລວມກະຖາທີ່ມີໃນວັກນີ້ ຄື

| | |
|---|---|
| ໑. ຍຸຄະນັດທະກະຖາ | ໖. ສັດຈະກະຖາ |
| ໒. ໂພດຊົງຄະກະຖາ | ໔. ເມດຕາກະຖາ |
| ໕. ວິຣາຄະກະຖາ | ໗. ປະຕິສຳພິທາກະຖາ |
| ໗. ທຳມະຈັກກະຖາ | ໙. ໂລກຸດຕະຣະກະຖາ |
| ໙. ພະລະກະຖາ | ໑໐. ສູນຍະກະຖາ |

ວັກທີ ໘ ນີ້ເປັນວັກອັນປະເສີດ ບໍ່ມີວັກອື່ນສະເໝີທ່ານຜູ້ຊົງນິກາຍຕັ້ງໄວ້ແລ້ວແບວນີ້ແລ

# ៩. ປັນຍາວັກ

## ໝວດວ່າດ້ວຍປັນຍາ

## ໑. ມະຫາປັນຍາກະຖາ

### ວ່າດ້ວຍມະຫາປັນຍາ

[໑] ອະນິດຈານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ທຸກຂານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ອະນັດຕານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ນິບພິທານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ວິຣາຄານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ນິໂຣທານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ປະຕິນິດສັກຄານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ຄື ອະນິດຈານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາທີ່ແລ່ນໄປໃຫ້ເຕັມຮອບ

ທຸກຂານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາທຳລາຍກິເລດໃຫ້ເຕັມຮອບ

ອະນັດຕານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາຫຼາຍໃຫ້ເຕັມຮອບ

ນິບພິທານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແຫຼມຄົມ ໃຫ້ເຕັມຮອບ

ວິຣາຄານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາໄພບູນໃຫ້ເຕັມຮອບ

ນິໂຣທານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເລິກເຊິ່ງໃຫ້ເຕັມຮອບ

ປະຕິນິດສັກຄານຸປັດສະນາທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາບໍ່ໃກ້ໃຫ້ເຕັມຮອບ

ປັນຍາ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດຄວາມເປັນບັນດິດໃຫ້ເຕັມຮອບ

ປັນຍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາກວ້າງຂວາງໃຫ້ເຕັມຮອບ ປັນຍາ ໙ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເບີກບານໃຫ້ເຕັມຮອບປັນຍາເບີກບານເປັນປະຕິພານະປະຕິສຳພິທາ ອັດຖະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດອັດຖະແຫ່ງປັນຍາເບີກບານນັ້ນ ທຳມະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍ ການກຳນົດທຳ (ແຫ່ງປັນຍາເບີກບານນັ້ນ) ນິຣຸດຕິປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດນິຣຸດຕິ (ແຫ່ງປັນຍາເບີກບານນັ້ນ) ປະຕິພານະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດປະຕິພານ (ແຫ່ງປັນຍາເບີກບານນັ້ນ) ປະຕິສຳພິທາ ໔ ປະການນີ້ເປັນອັນບຸກຄົນ ບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາແຫ່ງປັນຍາເບີກບານນັ້ນ

ອະນິດຈານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ຯລຯ ປະຕິນິດສັກຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ຄື ອະນິດຈານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປ ໃຫ້ເຕັມຮອບ ຯລຯ ປະຕິນິດສັກຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາບໍ່ໃກ້ໃຫ້ເຕັມຮອບ

ປັນຍາ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມທຳຄວາມເປັນບັນດິດໃຫ້ເຕັມຮອບ

ປັນຍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາກວ້າງຂວາງໃຫ້ເຕັມຮອບ

ປັນຍາ ໙ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເບີກບານໃຫ້ເຕັມຮອບ

ປັນຍາເບີກບານເປັນປະຕິພານະປະຕິສຳພິທາ ອັດຖະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດອັດຖະແຫ່ງປັນຍາເບີກບານນັ້ນ ທຳມະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດທຳ(ແຫ່ງປັນຍາເບີກບານນັ້ນ) ນິຣຸດຕິປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດນິຣຸດຕິ(ແຫ່ງປັນຍາເບີກບານນັ້ນ) ປະຕິພານະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດປະຕິພານແຫ່ງປັນຍາເບີກບານນັ້ນ ປະຕິສຳພິທາ ໔ ປະການນີ້ເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາແຫ່ງປັນຍາເບີກບານນັ້ນ

ອະນິດຈານຸປັດສະນາໃນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂຸ ຯລຯ

ອະນິດຈານຸປັດສະນາໃນຊະຣາແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ຯລຯ ປະຕິນິດສັກຄານຸປັດສະນາໃນຊະຣາແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ອະນິດຈານຸປັດສະນາໃນຊະຣາ ແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ ຯລຯ ປະຕິນິດສັກຄານຸປັດສະນາໃນຊະຣາ ແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາບໍ່ໃກ້ໃຫ້ເຕັມຮອບ

ປັນຍາ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດຄວາມເປັນບັນດິດໃຫ້ເຕັມຮອບ

ປັນຍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາກວ້າງຂວາງໃຫ້ ເຕັມຮອບ

ປັນຍາ ໙ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເບີກບານໃຫ້ເຕັມຮອບ

ປັນຍາເບີກບານເປັນປະຕິພານະປະຕິສຳພິທາ ອັດຖະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດອັດຖະແຫ່ງປັນຍາເບີກບານນັ້ນ ທຳມະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດທຳ(ແຫ່ງປັນຍາເບີກບານນັ້ນ) ນິຣຸດຕິປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດນິຣຸດຕິ(ແຫ່ງປັນຍາເບີກບານນັ້ນ) ປະຕິພານະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດປະຕິພານ(ແຫ່ງປັນຍາເບີກບານນັ້ນ) ປະຕິສຳພິທາ ໔ ປະການນີ້ເປັນອັນບຸກຄົນບັນລຸແລ້ວ ຖືກຕ້ອງແລ້ວດ້ວຍປັນຍາແຫ່ງປັນຍາເບີກບານນັ້ນ

[໔] ອະນິດຈານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ອະນິດຈານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ທຸກຂານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ທຸກຂານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ອະນັດຕານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ອະນັດຕານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ນິບພິທານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ນິບພິທານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ວິຣາຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ວິຣາຄານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ນິໂຣທານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ນິໂຣທານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ປະຕິນິດສັກຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ປະຕິນິດສັກຄານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ຄື ອະນິດຈານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ ອະນິດຈານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ທຸກຂານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາທຳລາຍກິເລດ ໃຫ້ເຕັມຮອບ ທຸກຂານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ອະນັດຕານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາຫຼາຍໃຫ້ເຕັມຮອບ ອະນັດຕານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ນິບພິທານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແຫຼມຄົມໃຫ້ເຕັມຮອບ ນິບພິທານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ວິຣາຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາກວ້າງຂວາງໃຫ້ເຕັມຮອບ ວິຣາຄານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ນິໂຣທານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເລິກເຊິ່ງໃຫ້ເຕັມຮອບ ນິໂຣທານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ປະຕິນິດສັກຄານຸປັດສະນາໃນຮູບທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາບໍ່ໃກ້ໃຫ້ເຕັມຮອບ ປະຕິນິດສັກຄານຸປັດສະນາໃນຮູບທີ່ເປັນອະດີດ ອະນາຄົດ ແລະ ປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ

ປັນຍາ ໗ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດຄວາມເປັນບັນດິດໃຫ້ເຕັມຮອບ

ປັນຍາ ໘ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາກວ້າງຂວາງໃຫ້ເຕັມຮອບ

ປັນຍາ ໙ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາເບີກບານໃຫ້ເຕັມຮອບ

ປັນຍາເບີກບານເປັນປະຕິພານະປະຕິສຳພິທາ ອັດຖະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດອັດຖະແຫ່ງປັນຍາຮ່າເຣີງນັ້ນ ທຳມະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດທຳ (ແຫ່ງປັນຍາເບີກບານນັ້ນ) ນິຣຸດຕິປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດນິຣຸດຕິ (ແຫ່ງປັນຍາເບີກບານນັ້ນ) ປະຕິພານະປະຕິສຳພິທາເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດປະຕິພານ (ແຫ່ງປັນຍາເບີກບານນັ້ນ) ປະຕິສຳພິທາ ໔ ປະການນີ້ເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາແຫ່ງປັນຍາເບີກບານນັ້ນ

ອະນິດຈານຸປັດສະນາໃນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານ ຯລຯ ຈັກຂຸ ຯລຯ

ອະນິດຈານຸປັດສະນາໃນຊະຣາແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ອະນິດຈານຸປັດສະນາໃນຊະຣາ ແລະມໍຣະນະທີ່ເປັນອະດີດ

ອະ ນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ຯລຯ ປະຕິນິດສັກຄານຸປັດສະນາໃນຊະຣາແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ ປະຕິນິດສັກຄານຸປັດສະນາໃນຊະຣາແລະມໍຣະນະທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແນວໃດໃຫ້ເຕັມຮອບ

ຄື ອະນິດຈານຸປັດສະນາໃນຊະຣາແລະມໍຣະນະທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ ອະນິດຈານຸປັດສະນາໃນຊະຣາແລະມໍຣະນະທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເຮັດປັນຍາແລ່ນໄປໃຫ້ເຕັມຮອບ ຯລຯ ປະຕິສຳພິທາ ໔ ປະການນີ້ເປັນອັນບຸກຄົນບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາແຫ່ງປັນຍາເບີກບານນັ້ນ

[໓] ພິກຂຸທັງຫຼາຍ ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

ທຳ ໔ ປະການ ມີອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ (ຄົບສັດຕະບຸຣຸດ)
໒. ສັດທຳມັດສະວະນະ (ຟັງພຣະສັດທຳ)
໓. ໂຍນິໂສມະນະສິການ (ການພິຈາລະນາໂດຍແຍບຄາຍ)
໔. ທຳມານຸທຳມະປະຕິປັດຕິ (ປະຕິບັດທຳສົມຄວນແກ່ທຳ)

ທຳ ໔ ປະການນີ້ແລທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງໂສດາປັດຕິຜົນ

ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງສະກະທາຄາມິຜົນ ຯລຯ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງອະນາຄາມິຜົນ ຯລຯ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

ທຳ ໔ ປະການ ມີອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ
໒. ສັດທຳມັດສະວະນະ
໓. ໂຍນິໂສມະນະສິການ
໔. ທຳມານຸທຳມະປະຕິປັດຕິ

ທຳ ໔ ປະການນີ້ແລທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອເຮັດໃຫ້ແຈ້ງອະຣະຫັດຕະຜົນ

ທຳ ໔ ປະການນີ້ທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອການໄດ້ປັນຍາ ໆລໆ ຍ່ອມເປັນໄປເພື່ອຄວາມຈະເລີນແຫ່ງປັນຍາ ໆລໆ ຍ່ອມເປັນໄປເພື່ອຄວາມໄພບູນແຫ່ງປັນຍາ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຫຼາຍ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາກວ້າງຂວາງ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄພບູນ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເລິກເຊິ່ງ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາບໍ່ໃກ້ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເໝືອນແຜ່ນດິນ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ສົມບູນດ້ວຍປັນຍາ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄວ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາທັນໃດ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຣ່າເຣິງ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແລ່ນໄປ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແຫຼມຄົມ ໆລໆ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ

ທຳ ໔ ປະການ ມີອັນໃດແດ່ ຄື

໑. ສັບປຸຣິສະສັງເສວະ
໒. ສັດທຳມັດສະວະນະ
໓. ໂຍນິໂສມະນະສິການ
໔. ທຳມານຸທຳມະປະຕິປັດຕິ

ທຳ ໔ ປະການນີ້ແລທີ່ບຸກຄົນຈະເລີນ ເຮັດໃຫ້ຫຼາຍແລ້ວ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ

## ໑. ໂສລະສະປັນຍານິດເທດ

### ສະແດງປັນຍາ ໑໖ ປະການ

[໔] ຄຳວ່າ ຍ່ອມເປັນໄປເພື່ອການໄດ້ປັນຍາ ອະທິບາຍວ່າ ການໄດ້ປັນຍາ ເປັນແນວໃດ?

ຄື ການໄດ້ ການໄດ້ສະເພາະ ການເຖິງ ການເຖິງສະເພາະ ການຖືກຕ້ອງ ການເຮັດໃຫ້ແຈ້ງ ການເຂົ້າເຖິງພ້ອມເຊິ່ງມັກຄະຍານ ໔ ຜົນຍານ ໔ ປະຕິສຳພິທາຍານ ໔ ອະພິນຍາ ຍານ ໖ ຍານ ໗໓ ຍານ ໗໗ ນີ້ຊື່ວ່າການໄດ້ປັນຍາ ໃນຄຳວ່າ ຍ່ອມເປັນໄປເພື່ອໄດ້ປັນຍາ (໑)

ຄຳວ່າ ຍ່ອມເປັນໄປເພື່ອຄວາມຈະເລີນແຫ່ງປັນຍາ ອະທິບາຍວ່າ ຄວາມຈະເລີນແຫ່ງປັນຍາ ເປັນແນວໃດ?

ຄື ປັນຍາຂອງພຣະເສຂະ ໗ ຈຳພວກ ແລະຂອງກັນລະຍານະປຸຖຸຊົນ ຍ່ອມຈະເລີນ ປັນຍາຂອງພຣະອະຣະຫັນ ຍ່ອມຈະເລີນ ຊື່ວ່າຄວາມຈະເລີນດ້ວຍປັນຍາທີ່ຈະເລີນແລ້ວ ນີ້ຊື່ວ່າ ຄວາມຈະເລີນແຫ່ງປັນຍາ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມຈະເລີນແຫ່ງປັນຍາ (໔)

ຄຳວ່າ ຍ່ອມເປັນໄປເພື່ອຄວາມໄພບູນແຫ່ງປັນຍາ ອະທິບາຍວ່າ ຄວາມໄພບູນ ແຫ່ງ ປັນຍາ ເປັນແນວໃດ?

ຄື ປັນຍາຂອງພຣະເສຂະ ໗ ຈຳພວກ ແລະຂອງກັນລະຍານະປຸຖຸຊົນ ຍ່ອມເຖິງຄວາມ ໄພບູນ ປັນຍາຂອງພຣະອະຣະຫັນທີ່ເຖິງຄວາມໄພບູນແລ້ວ ນີ້ຊື່ວ່າຄວາມໄພບູນແຫ່ງປັນຍາ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມໄພບູນແຫ່ງປັນຍາ (໕)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຫຼາຍ ອະທິບາຍວ່າ ປັນຍາຫຼາຍ ເປັນ ແນວໃດ?

ຄື ຊື່ວ່າປັນຍາຫຼາຍ ຍ້ອນກຳນົດອັດຖະໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດທຳໄດ້ ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດນິຣຸດຕິໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດປະຕິພານໄດ້ ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດສີນຂັນໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດສະມາທິຂັນ ໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດປັນຍາຂັນໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດວິມຸດຕິ ຂັນໄດ້ຫຼາຍ ຊື່ວ່າ ປັນຍາຫຼາຍ ຍ້ອນກຳນົດວິມຸດຕິຍານທັດສະນະຂັນໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດຖານະແລະອະຖານະໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດວິຫາຣະສະມາບັດໄດ້ ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດອະຣິຍະສັດໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດສະຕິປັດ ຖານໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດສຳມັບປະທານໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນ ກຳນົດອິດທິບາດໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດອິນຊີໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນ ກຳນົດພະລະໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດໂພດຊົງໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນ ກຳນົດອະຣິຍະມັກໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດສາມັນຍະຜົນໄດ້ຫຼາຍ ຊື່ວ່າປັນຍາ ຫຼາຍ ຍ້ອນກຳນົດອະພິນຍາໄດ້ຫຼາຍ ຊື່ວ່າປັນຍາຫຼາຍ ຍ້ອນກຳນົດນິບພານທີ່ເປັນປະໂຫຍດ ຢ່າງຍິ່ງໄດ້ຫຼາຍ ນີ້ຊື່ວ່າປັນຍາຫຼາຍ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຫຼາຍ (໖)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາກວ້າງຂວາງ ອະທິບາຍວ່າ ປັນຍາກວ້າງ ຂວາງ ເປັນແນວໃດ?

ຄື ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນຂັນຕ່າງ ໆ ກວ້າງຂວາງຊື່ວ່າ ປັນຍາ ກວ້າງຂວາງ ຍ້ອນຍານເປັນໄປໃນທາດຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນ ຍານເປັນໄປໃນອາຍະຕະນະຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານ ເປັນໄປ ໃນປະຕິດຈະສະມຸບບາດຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນ ຄວາມໄດ້ເນືອງ ໆ ເຊິ່ງຄວາມວ່າງຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານ

ເປັນໄປໃນອັດຖະຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນທຳຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນນິຣຸດຕິ ຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນປະຕິພານຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນສີນຂັນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນສະມາທິຂັນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນປັນຍາຂັນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນວິມຸດຕິຂັນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນວິມຸດຕິຍານທັດສະນະຂັນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນຖານະແລະອະຖານະຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນວິຫາຣະສະມາບັດຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນອະຣິຍະສັດຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນສະຕິປັດຖານຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນສຳມັບປະທານຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນອິດທິບາດຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນອິນຊີຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນພະລະຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນໂພດຊົງຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນອະຣິຍະມັກຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນສາມັນຍະຜົນຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນອະພິນຍາຕ່າງ ໆ ກວ້າງຂວາງ ຊື່ວ່າປັນຍາກວ້າງຂວາງ ຍ້ອນຍານເປັນໄປໃນນິບພານທີ່ເປັນປະໂຫຍດຢ່າງຍິ່ງເໜືອ ກວ່າທຳທີ່ທົ່ວໄປແກ່ປຸຖຸຊົນ ນີ້ຊື່ວ່າປັນຍາກວ້າງຂວາງ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາກວ້າງຂວາງ (໕)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄພບູນ ອະທິບາຍວ່າ ປັນຍາໄພບູນ ເປັນແນວໃດ?

ຄື ຊື່ວ່າປັນຍາໄພບູນ ຍ້ອນກຳນົດອັດຖະໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດທຳໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດນິຣຸດຕິໄພບູນ ຊື່ວ່າ ປັນຍາໄພບູນ ຍ້ອນກຳນົດປະຕິພານໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດ ສີລະຂັນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດສະມາທິຂັນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດປັນຍາຂັນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດວິມຸດຕິຂັນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດວິມຸດຕິຍານທັດສະນະຂັນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດຖານະແລະອະຖານະໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດວິຫາຣະສະມາບັດໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດອະຣິຍະສັດໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດສະຕິປັດຖານໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດສຳມັບປະທານໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດ ອິດທິບາດໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດອິນຊີໄພບູນ ຊື່ວ່າປັນຍາ

ໄພບູນ ຍ້ອນກຳນົດພະລະໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດໂພດຊົງໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດອະຣິຍະມັກໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດສາມັນຍະຜົນໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດອະພິນຍາໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດອະພິນຍາໄພບູນ ຊື່ວ່າປັນຍາໄພບູນ ຍ້ອນກຳນົດນິບພານທີ່ເປັນປະໂຫຍດຢ່າງຍິ່ງໄພບູນ ນີ້ຊື່ວ່າປັນຍາໄພບູນ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄພບູນ (໖)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເລິກເຊິ່ງ ອະທິບາຍວ່າ ປັນຍາເລິກເຊິ່ງເປັນແນວໃດ?

ຄື ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນຂັນເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນທາດເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອາຍະຕະນະເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນປະຕິດຈະສະມຸບບາດເລິກເຊິ່ງ ຊື່ວ່າ ປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນຄວາມໄດ້ເນືອງ ໆ ເຊິ່ງຄວາມວ່າງຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອັດຖະຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານ ເປັນໄປໃນທຳຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນນິຣຸດຕິຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນປະຕິພານຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາ ເລິກເຊິ່ງ ຍ້ອນຍານເປັນໄປໃນສີນຂັນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງຍ້ອນຍານເປັນໄປໃນສະມາທິຂັນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນປັນຍາຂັນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນວິມຸດຕິຂັນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນວິມຸດຕິຍານທັດສະນະຂັນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນຖານະແລະອະຖານະຕ່າງ ໆ ເລິກເຊິ່ງ ຊື່ວ່າ ປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນວິຫາຣະສະມາບັດຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອະຣິຍະສັດຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນສະຕິປັດຖານຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນສຳມັປປະທານຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອິດທິບາດຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອິນຊີຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນພະລະຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນໂພດຊົງຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອະຣິຍະມັກຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນສາມັນຍະຜົນຕ່າງ ໆ ເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນອະພິນຍາເລິກເຊິ່ງ ຊື່ວ່າປັນຍາເລິກເຊິ່ງ ຍ້ອນຍານເປັນໄປໃນນິບພານທີ່ເປັນປະໂຫຍດເລິກເຊິ່ງ ນີ້ຊື່ວ່າປັນຍາເລິກເຊິ່ງ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເລິກເຊິ່ງ (໗)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາບໍ່ໃກ້ ອະທິບາຍວ່າ ປັນຍາບໍ່ໃກ້ ເປັນແນວໃດ?

ຄື ອັດຖະປະຕິສຳພິທາບຸກຄົນໃດບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດອັດຖະ ທຳມະປະຕິສຳພິທາບຸກຄົນໃດບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດທຳ ນິຣຸດຕິປະຕິສຳພິທາບຸກຄົນໃດບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາ ໂດຍການກຳນົດນິຣຸດຕິ ປະຕິພານະປະຕິສຳພິທາບຸກຄົນໃດບັນລຸແລ້ວ ເຮັດໃຫ້ແຈ້ງແລ້ວ ຖືກຕ້ອງແລ້ວດ້ວຍປັນຍາໂດຍການກຳນົດປະຕິພານອັດຖະ ທຳ ນິຣຸດຕິ ແລະປະຕິພານຂອງບຸກຄົນນັ້ນໃຜອື່ນສາມາດຈະເຖິງໄດ້ ແລະບຸກຄົນ ນັ້ນກໍເປັນຜູ້ໜຶ່ງທີ່ປຸຖຸຊົນອື່ນ ໆ ບໍ່ສາມາດຈະທຽມທັນໄດ້ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງເປັນປັນຍາບໍ່ໃກ້ປັນຍາຂອງກັນລະຍານະປຸຖຸຊົນຫ່າງໄກແສນໄກ ບໍ່ໃກ້ ບໍ່ຊິດກັບປັນຍາຂອງບຸກຄົນທີ ໘ ເມື່ອທຽບກັບກັນລະຍານະປຸຖຸຊົນ ບຸກຄົນທີ ໘ ມີປັນຍາບໍ່ໃກ້

ປັນຍາຂອງບຸກຄົນທີ ໘ ຫ່າງໄກແສນໄກ ບໍ່ໃກ້ ບໍ່ຊິດກັບປັນຍາຂອງພຣະໂສດາບັນ ເມື່ອທຽບກັບບຸກຄົນທີ ໘ ພຣະໂສດາບັນມີປັນຍາບໍ່ໃກ້

ປັນຍາຂອງພຣະໂສດາບັນຫ່າງໄກແສນໄກ ບໍ່ໃກ້ ບໍ່ຊິດກັບປັນຍາຂອງພຣະສະກະທາຄາມີ ເມື່ອທຽບກັບພຣະໂສດາບັນ ພຣະສະກະທາຄາມີມີປັນຍາບໍ່ໃກ້

ປັນຍາຂອງພຣະສະກະທາຄາມີຫ່າງໄກແສນໄກ ບໍ່ໃກ້ ບໍ່ຊິດກັບປັນຍາຂອງພຣະອະນາຄາມີ ເມື່ອທຽບກັບພຣະສະກະທາຄາມີ ພຣະອະນາຄາມີມີປັນຍາບໍ່ໃກ້

ປັນຍາຂອງພຣະອະນາຄາມີຫ່າງໄກແສນໄກ ບໍ່ໃກ້ບໍ່ຊິດກັບປັນຍາຂອງພຣະອະຣະຫັນ ເມື່ອທຽບກັບພຣະອະນາຄາມີ ພຣະອະຣະຫັນມີປັນຍາບໍ່ໃກ້

ປັນຍາຂອງພຣະອະຣະຫັນຫ່າງໄກແສນໄກ ບໍ່ໃກ້ ບໍ່ຊິດກັບປັນຍາຂອງພຣະປັດເຈກພຸດທະເຈົ້າ ເມື່ອທຽບກັບພຣະອະຣະຫັນ ພຣະປັດເຈກພຸດທະເຈົ້າມີປັນຍາບໍ່ໃກ້ ເມື່ອທຽບກັບພຣະປັດເຈກພຸດທະເຈົ້າ ແລະໂລກພ້ອມທັງເທວະໂລກ ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຊົງເປັນຜູ້ເລີດ ຊົງມີປັນຍາບໍ່ໃກ້

[໔] ພຣະຜູ້ມີພຣະພາກເຈົ້າຊົງສະຫຼາດໃນປະເພດແຫ່ງປັນຍາ ຊົງມີຍານແຕກສານ ຊົງບັນລຸປະຕິສຳພິທາ ຊົງບັນລຸເວສາຣັດຊະຍານ ໔ ເປັນຜູ້ຊົງທະສະພະລະຍານ ຊົງເປັນບຸຣຸດອົງອາດ ຊົງເປັນບຸຣຸດເໝືອນຣາດຊະສີ ຊົງເປັນບຸຣຸດເໝືອນນາກ ຊົງເປັນບຸຣຸດອາຊາໄນ ຊົງເປັນບຸຣຸດຜູ້ເອົາທຸຣະ ມີພຣະຍານຫາບ່ອນສຸດບໍ່ໄດ້ ມີພຣະເດດຫາບ່ອນສຸດບໍ່ໄດ້ ມີພຣະຍົດຫາບ່ອນສຸດບໍ່ໄດ້ ຊົງມັ່ງຄັ່ງ ຊົງມີຊັບຫຼາຍ ມີພຣະປັນຍາເປັນຊັບ ຊົງເປັນຜູ້ນຳ ເປັນຜູ້ນຳໄປໂດຍວິເສດ ເປັນຜູ້ຕາມແນະນຳ ຊົງໃຫ້ຮູ້ຈັກປະໂຫຍດ ໃຫ້ພິນິດພິຈາລະນາ ຊົງເພ່ງປະໂຫຍດ ຊົງເຮັດໃຫ້ເຫຼື້ອມໃສໄດ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງເຮັດມັກ ທີ່ຍັງບໍ່ເກີດໃຫ້ເກີດຂຶ້ນ ຊົງເຮັດມັກທີ່ຍັງບໍ່ເກີດພ້ອມໃຫ້ເກີດພ້ອມ ຕັດບອກມັກທີ່ຍັງບໍ່ໄດ້ຕັດບອກ ຊົງຮູ້ຈັກມັກ ຊົງຮູ້ແຈ້ງມັກ ຊົງສະຫຼາດໃນມັກ ແລະສາວົກຂອງພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຜູ້ດຳເນີນໄປຕາມມັກຢູ່ໃນບັດນີ້ ຈະພຽບພ້ອມດ້ວຍສີລາທິຄຸນໃນພາຍຫຼັງ

ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງຮູ້ທຳທີ່ຄວນຮູ້ ຊົງເຫັນທຳທີ່ຄວນເຫັນ ມີພຣະຈັກຂຸ ມີພຣະຍານ ມີພຣະທຳ ເປັນເໝືອນພຣະພົມ ຕັດບອກນຳຄວາມໝາຍອອກມາປະທານອະມະຕະທຳ ເປັນພຣະທຳສາມີ ເປັນພຣະຕະຖາຄົດ ບໍ່ມີສິ່ງທີ່ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຍັງບໍ່ຊົງຮູ້ ບໍ່ຊົງເຫັນ ບໍ່ຊົງຮູ້ແຈ້ງ ບໍ່ຊົງເຮັດໃຫ້ແຈ້ງ ບໍ່ໄດ້ຊົງຖືກຕ້ອງດ້ວຍພຣະປັນຍາ ທຳທັງປວງລວມທັງອະດີດ ອະນາຄົດ ແລະປັດຈຸບັນຍ່ອມມາສູ່ຄອງສະເພາະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າໂດຍອາການທັງປວງ ທຳມະດາປະໂຫຍດທີ່ຄວນແນະນຳແນວໃດແນວໜຶ່ງເປັນທຳທີ່ຄວນຮູ້ມີຢູ່ ຄື ປະໂຫຍດຕົນ ປະໂຫຍດຜູ້ອື່ນ ຫຼືປະໂຫຍດທັງສອງຝ່າຍ ປະໂຫຍດໃນພົບປັດຈຸບັນ ຫຼືປະໂຫຍດໃນພົບໜ້າ ປະໂຫຍດຕື້ນຫຼືປະໂຫຍດເລິກປະໂຫຍດລີ້ລັບຫຼືປະໂຫຍດປິດບັງ ປະໂຫຍດທີ່ຄວນແນະນຳຫຼືປະໂຫຍດທີ່ແນະນຳແລ້ວ ປະໂຫຍດທີ່ບໍ່ມີໂທດຫຼືປະໂຫຍດທີ່ບໍ່ມີກິເລດ ປະໂຫຍດທີ່ຜ່ອງແຜ້ວຫຼືປະໂຫຍດຢ່າງຍິ່ງ ປະໂຫຍດທັງໝົດນັ້ນຍ່ອມເປັນໄປພາຍໃນພຣະພຸດທະຍານ

ກາຍຍະກຳ ວະຈີກຳ ມະໂນກຳທຸກຢ່າງຍ່ອມເປັນໄປຕາມພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າບໍ່ຕິດຂັດໃນອະດີດ ອະນາຄົດປັດຈຸບັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນບົດທຳທີ່ຄວນແນະນຳ ທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນເໝືອນຊັ້ນແຫ່ງຜະອົບ ໔ ຊັ້ນເຕັງກັນແຈບພໍດີ ຊັ້ນຜະອົບດ້ານລຸ່ມກໍບໍ່ເກີນດ້ານເທິງ ຊັ້ນຜະອົບດ້ານເທິງກໍບໍ່ເກີນ ດ້ານລຸ່ມ ຊັ້ນຜະອົບທັງ ໔ ຍ່ອມວາງປະກົບກັນທີ່ສ່ວນສຸດໂດຍຮອບຂອງກັນແລະກັນ ສັນໃດ ບົດທຳທີ່ຄວນແນະນຳແລະພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າກໍຕັ້ງຢູ່ໃນສ່ວນສຸດຮອບ ຂອງກັນແລະກັນ ສັນນັ້ນຄືກັນ ບົດທຳທີ່ຄວນແນະນຳມີຢູ່ພຽງໃດ ພຣະຍານກໍມີຢູ່ພຽງນັ້ນ ພຣະຍານມີຢູ່ພຽງໃດ ບົດທຳທີ່ຄວນແນະນຳກໍມີພຽງນັ້ນ ພຣະຍານຍ່ອມມີບົດທຳທີ່ຄວນແນະນຳເປັນສ່ວນສຸດຮອບ ບົດທຳທີ່ຄວນແນະນຳກໍຍ່ອມມີພຣະຍານເປັນສ່ວນສຸດຮອບ ພຣະຍານຍ່ອມບໍ່ເປັນໄປເກີນກວ່າບົດທຳທີ່ຄວນແນະນຳທາງແຫ່ງບົດທຳທີ່ຄວນແນະນຳກໍມີຢູ່ບໍ່ເກີນກວ່າພຣະຍານ ທຳເຫຼົ່ານັ້ນຍ່ອມຕັ້ງຢູ່ໃນສ່ວນສຸດຮອບຂອງກັນແລະກັນ

ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນທຳທັງປວງ ທຳທັງປວງນັບເນື່ອງດ້ວຍຄວາມນຶກ ນັບເນື່ອງດ້ວຍຄວາມຫວັງ ນັບເນື່ອງດ້ວຍມະນະສິການ ນັບເນື່ອງດ້ວຍຈິດຕຸບບາດຂອງພຣະຜູ້ມີພຣະພາກພຸດທະເຈົ້າ ພຣະຍານຂອງພຣະຜູ້ມີພຣະພາກພຸດທະເຈົ້າຍ່ອມເປັນໄປໃນສັດທັງປວງ ພຣະຜູ້ມີພຣະພາກເຈົ້າຊົງຮູ້ອັດທະຍາໄສ ອະນຸໄສ ຈະຣິດ ອະທິມຸດຕິຂອງເຫຼົ່າສັດທຸກຈຳພວກ ຊົງຮູ້ຈັກເຫຼົ່າສັດຜູ້ມີກິເລດເໝືອນທຸລີໜ້ອຍໃນປັນຍາຈັກຂຸ ມີກິ

ເລດເໝືອນທຸລີຫຼາຍໃນປັນຍາຈັກຂຸ ມີອິນຊີແກ່ກ້າ ມີອິນຊີອ່ອນ ມີອາການດີ ມີອາການຊາມ ທີ່ພຣະອົງເພິ່ງສອນໃຫ້ຮູ້ແຈ້ງໄດ້ງ່າຍ ເພິ່ງສອນໃຫ້ຮູ້ແຈ້ງໄດ້ຍາກ ເປັນພັບພະສັດ (ຜູ້ສົມຄວນບັນລຸທຳ) ແລະອະພັບພະສັດ (ຜູ້ບໍ່ສົມຄວນບັນລຸທຳ) ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຍ່ອມເປັນໄປພາຍໃນພຣະພຸດທະຍານ

ປາແລະເຕົ່າຊະນິດໃດຊະນິດໜຶ່ງ ລວມທັງປາຕິມິ ປາຕິມິງຄະລະ ແລະປາຕິມິຕິມິງຄະລະຍ່ອມເປັນໄປພາຍໃນມະຫາສະມຸດ ສັນໃດ ໂລກພ້ອມທັງເທວະໂລກ ມານໂລກ ພົມມະໂລກ ໝູ່ສັດພ້ອມທັງສະມະນະພາມ ເທວະດາ ແລະມະນຸດຍ່ອມເປັນໄປພາຍໃນພຣະພຸດທະຍານ ສັນນັ້ນຄືກັນ ນົກຊະນິດໃດຊະນິດໜຶ່ງ ລວມທັງຄຸດນາມວ່າ ເວນໄຕຍະບິນໄປໃນອາກາດ ສັນໃດ ພຣະພຸດທະສາວົກທັງຫຼາຍຜູ້ສະເໝີກັບພຣະສາຣີບຸດດ້ວຍປັນຍາກໍຍ່ອມເປັນໄປໃນສ່ວນແຫ່ງພຣະພຸດທະຍານ ສັນນັ້ນຄືກັນ ພຣະພຸດທະຍານຍ່ອມແຜ່ຄອບຄຸມປັນຍາຂອງເທວະດາ ແລະມະນຸດຢູ່

ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາລະອຽດ ຮູ້ວາທະຂອງຜູ້ອື່ນ ເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍ ເໝືອນຈະທ່ຽວທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາຂອງຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາເຂົ້າໄປຫາພຣະຕະຖາຄົດເຈົ້າທູນຖາມບັນຫາທັງລີ້ລັບແລະປົດບັງ ບັນຫາເຫຼົ່ານັ້ນທີ່ພຣະຜູ້ມີພຣະພາກເຈົ້າຊົງຊັກໄຊ້ແລະຕັດແກ້ແລ້ວເປັນບັນຫາມີເຫດໃຫ້ຊົງສະແດງ ໃນຂະນະນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮຸ່ງເຮືອງຍິ່ງດ້ວຍພຣະປັນຍາຍ້ອນຊົງແກ້ບັນຫາເຫຼົ່ານັ້ນ ຍ້ອນເຫດນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຊົງເປັນຜູ້ເລີດ ມີພຣະປັນຍາບໍ່ໃກ້ ນີ້ຊື່ວ່າປັນຍາບໍ່ໃກ້ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາບໍ່ໃກ້ (໗)

[໘] ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເໝືອນແຜ່ນດິນ ອະທິບາຍວ່າ ປັນຍາເໝືອນແຜ່ນດິນ ເປັນແນວໃດ?

ຄື ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳຣາຄະ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳຣາຄະແລ້ວ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳໂທສະ ຊື່ວ່າປັນຍາ ເໝືອນແຜ່ນດິນ ຍ້ອນຄອບງຳໂທສະແລ້ວ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳໂມຫະ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳໂມຫະແລ້ວ

ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳໂກທະ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳໂກທະແລ້ວ ฯລฯ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳອຸປະນາຫະ ฯລฯ ມັກຂະ ฯລฯ ປະລາສະ ฯລฯ ອິດສາ ฯລฯ ມັດສະຣິຍະ ฯລฯ ມາຍາ ฯລฯ ສາເຖີຍຍະ ฯລฯ ຖໍາພະ ฯລฯ ສາຣຳພະ ฯລฯ ມານະ ฯລฯ ອະຕິມານະ ฯລฯ ມະທະ ฯລฯ ປະມາທະ ฯລฯ

ກິເລດທັງປວງ ໆລໆ ທຸດຈະຣິດທັງປວງ ໆລໆ ອະພິສັງຂານທັງປວງ ໆລໆ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນຄອບງຳກຳອັນເປັນເຫດໃຫ້ເປັນໄປສູ່ພົບທັງປວງ ຊື່ວ່າ ປັນຍາເໝືອນແຜ່ນດິນ ຍ້ອນຄອບງຳກຳອັນເປັນເຫດໃຫ້ເປັນໄປສູ່ພົບທັງປວງແລ້ວ

ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນເປັນປັນຍາຍ່ຳຍີຣາຄະທີ່ເປັນຂ້າເສິກ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນເປັນປັນຍາຍ່ຳຍີໂທສະທີ່ເປັນຂ້າເສິກ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນເປັນປັນຍາຍ່ຳຍີໂມຫະທີ່ເປັນຂ້າເສິກ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນເປັນປັນຍາຍ່ຳຍີໂກທະ ໆລໆ ອຸປະນາຫະ ໆລໆ ມັກຂະ ໆລໆ ປະລາສະ ໆລໆ ອິດສາ ໆລໆ ມັດສະຣິຍະ ໆລໆ ມາຍາ ໆລໆ ສາເຖີຍຍະ ໆລໆ ຖຳພະ ໆລໆ ສາຣຳພະ ໆລໆ ມານະ ໆລໆ ອະຕິມານະ ໆລໆ ມະທະ ໆລໆ ປະມາທະ ໆລໆ ກິເລດທັງປວງ ໆລໆ ທຸດຈະຣິດທັງປວງ ໆລໆ

ອະພິສັງຂານທັງປວງ ໆລໆ ຊື່ວ່າປັນຍາເໝືອນແຜ່ນດິນ ຍ້ອນເປັນປັນຍາຍ່ຳຍີກຳທີ່ເປັນເຫດໄປສູ່ພົບທັງປວງທີ່ເປັນຂ້າເສິກ

ແຜ່ນດິນທ່ານກ່າວວ່າ ພູຣິ ບຸກຄົນປະກອບດ້ວຍປັນຍາທີ່ກວ້າງຂວາງໄພບູນສະເໝີດ້ວຍແຜ່ນດິນນັ້ນ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາເໝືອນແຜ່ນດິນ ອີກປະການໜຶ່ງ ຄຳວ່າ ພູຣິ ນີ້ເປັນຊື່ຂອງປັນຍາ ປັນຍາກວ້າງຂວາງເໝືອນແຜ່ນດິນ ເປັນປັນຍາທຳລາຍກິເລດ ເປັນປັນຍາເຄື່ອງແນະນຳ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາເໝືອນແຜ່ນດິນນີ້ຊື່ວ່າປັນຍາເໝືອນແຜ່ນດິນ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາເໝືອນແຜ່ນດິນ (໗)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ສົມບູນປັນຍາ ອະທິບາຍວ່າ ຄວາມເປັນຜູ້ສົມບູນປັນຍາເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ເປັນຜູ້ໜັກດ້ວຍປັນຍາ ເປັນຜູ້ປະພຶດດ້ວຍປັນຍາ ມີປັນຍາເປັນບ່ອນອາໄສ ນ້ອມໄປດ້ວຍປັນຍາ ມີປັນຍາເປັນທຸງໄຊ ມີປັນຍາເປັນຍອດ ມີປັນຍາເປັນໃຫຍ່ ສົມບູນການເລືອກເຟັ້ນ ສົມບູນການຄົ້ນຄວ້າ ສົມບູນການພິຈາລະນາ ສົມບູນການເພ່ງພິນິດ ມີການເພ່ງພິຈາລະນາເປັນທຳມະດາ ປະພຶດຢູ່ດ້ວຍປັນຍາທີ່ແຈ້ງຊັດ ມີຄວາມປະພຶດງົດເວັ້ນດ້ວຍປັນຍາທີ່ແຈ້ງຊັດ ໜັກໃນປັນຍາ ສົມບູນປັນຍາ ເອນໄປໃນປັນຍາ ນ້ອມໄປໃນປັນຍາ ເອື້ອມໄປໃນປັນຍາ ນ້ອມຈິດໄປໃນປັນຍາ ລຸດພົ້ນໄປດ້ວຍປັນຍາ ມີປັນຍາເປັນໃຫຍ່ ປຽບເໝືອນພິກຂຸຜູ້ໜັກໃນຄະນະ ທ່ານຮຽກວ່າຜູ້ສົມບູນຄະນະ ຜູ້ໜັກໃນຈີວອນ ທ່ານຮຽກວ່າຜູ້ສົມບູນຈີວອນ ຜູ້ໜັກໃນບາດ ທ່ານຮຽກວ່າຜູ້ສົມບູນບາດ ຜູ້ໜັກໃນເສນາສະນະ ທ່ານຮຽກວ່າຜູ້ສົມບູນເສນາສະນະ ນີ້ຊື່ວ່າຄວາມເປັນຜູ້ສົມບູນປັນຍາ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ສົມບູນປັນຍາ (໑໐)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄວ ອະທິບາຍວ່າ ປັນຍາໄວ ເປັນແນວໃດ?

ຄື ຊື່ວ່າປັນຍາໄວ ຍ້ອນພໍ່າເພັງສີນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງອິນຊີສັງວອນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງໂພຊະເນມັດຕັນຍຸຕາໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງຊາຄະຣິຍານຸໂຍກໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງສີນຂັນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງສະມາທິຂັນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງປັນຍາຂັນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງວິມຸດຕິຂັນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງວິມຸດຕິຍານທັດສະນະຂັນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຮູ້ແຈ້ງຖານະແລະອະຖານະໄດ້ໄວ ຊື່ວ່າປັນຍາໄວ ຍ້ອນພໍ່າເພັງວິຫາຣະສະມາບັດໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຮູ້ແຈ້ງອະຣິຍະສັດໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນສະຕິປັດຖານໄດ້ໄວ ຊື່ວ່າປັນຍາໄວຍ້ອນຈະເລີນສຳມັບປະທານໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນອິດທິບາດໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນອິນຊີໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນພະລະໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນໂພດຊົງໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຈະເລີນອະຣິຍະມັກໄດ້ໄວ ຊື່ວ່າປັນຍາໄວ ຍ້ອນເຮັດໃຫ້ແຈ້ງສາມັນຍະຜົນໄດ້ໄວ ຊື່ວ່າປັນຍາໄວ ຍ້ອນຮູ້ແຈ້ງອະພິນຍາໄດ້ໄວ ຊື່ວ່າປັນຍາໄວ ຍ້ອນເຮັດໃຫ້ແຈ້ງນິບພານທີ່ເປັນປະໂຫຍດຢ່າງຍິ່ງໄດ້ໄວ ນີ້ຊື່ວ່າປັນຍາໄວໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາໄວ (໑໑)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາສັບໄວ ອະທິບາຍວ່າ ປັນຍາສັບໄວ ເປັນແນວໃດ?

ຄື ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງສີນໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງອິນຊີສັງວອນໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງໂພຊະເນມັດຕັນຍຸຕາໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງຊາຄະຣິຍານຸໂຍກໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງສີນຂັນ ຯລຯ ສະມາທິຂັນ ຯລຯ ປັນຍາຂັນ ຯລຯ ວິມຸດຕິຂັນ ຯລຯ ຊື່ວ່າປັນຍາສັບໄວ ຍ້ອນພໍ່າເພັງວິມຸດຕິຍານທັດສະນະຂັນ ໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຮູ້ແຈ້ງຖານະແລະອະຖານະໄດ້ທັນທີ ຊື່ວ່າປັນຍາສັບໄວຍ້ອນພໍ່າເພັງວິຫາຣະສະມາບັດໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຮູ້ແຈ້ງອະຣິຍະສັດໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຈະເລີນສະຕິປັດຖານໄດ້ທັນທີ ຊື່ວ່າປັນຍາສັບໄວຍ້ອນຈະເລີນສຳມັບປະທານໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຈະເລີນອິດທິບາດໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຈະເລີນອິນຊີໄດ້ທັນທີ ຊື່ວ່າປັນຍາສັບໄວຍ້ອນຈະເລີນພະລະໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຈະເລີນໂພດຊົງໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຈະເລີນອະຣິຍະມັກໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນເຮັດໃຫ້ແຈ້ງສາມັນຍະຜົນໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນຮູ້ແຈ້ງອະພິນຍາໄດ້ທັນທີ ຊື່ວ່າປັນຍາສັບໄວ ຍ້ອນເຮັດໃຫ້ແຈ້ງນິບພານທີ່ເປັນປະໂຫຍດຢ່າງຍິ່ງໄດ້ທັນທີ ນີ້ຊື່ວ່າປັນຍາສັບໄວ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາສັບໄວ (໑໔)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຮ່າເຣີງ ອະທິບາຍວ່າ ປັນຍາຮ່າເຣີງເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງສີນ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງອິນຊີສັງວອນຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງໂພຊະເນມັດຕັນຍຸຕາ ຍ້ອນເຫດນັ້ນ ປັນຍາ ນັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງຊາຄະຣິຍານຸໂຍກ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງສີນຂັນ ຯລຯ ສະມາທິຂັນ ຯລຯ ປັນຍາຂັນ ຯລຯ ວິມຸດຕິຂັນ ຯລຯ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ພໍ່າເພັງວິມຸດຕິຍານທັດສະນະຂັນ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ

ບຸກຄົນບາງຄົນໃນໂລກນີ້ ຯລຯ ຮູ້ແຈ້ງຖານະແລະອະຖານະ ຯລຯ ພໍ່າເພັງວິຫາຣະສະມາບັດໃຫ້ເຕັມຮອບ ຯລຯ ຮູ້ແຈ້ງອະຣິຍະສັດ ຯລຯ ຈະເລີນສະຕິປັດຖານ ຯລຯ ຈະເລີນສໍາມັບປະທານ ຯລຯ ຈະເລີນອິດທິບາດ ຯລຯ ຈະເລີນອິນຊີ ຯລຯ ຈະເລີນພະລະ ຯລຯ ຈະເລີນໂພດຊົງ ຯລຯ ຈະເລີນອະຣິຍະມັກ ຯລຯ ບຸກຄົນບາງຄົນໃນໂລກນີ້ ຯລຯ ເຮັດໃຫ້ແຈ້ງສາມັນຍະຜົນ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ເຮັດໃຫ້ແຈ້ງອະພິນຍາ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ ບຸກຄົນບາງຄົນໃນໂລກນີ້ມີຄວາມເບີກບານຫຼາຍ ມີຄວາມພໍໃຈຫຼາຍ ມີຄວາມຍິນດີຫຼາຍ ມີຄວາມປາໂມດຫຼາຍ ເຮັດໃຫ້ແຈ້ງນິບພານທີ່ເປັນປະໂຫຍດຢ່າງຍິ່ງ ດ້ວຍປັນຍານັ້ນ ຍ້ອນເຫດນັ້ນ ປັນຍານັ້ນຈຶ່ງຊື່ວ່າປັນຍາຮ່າເຣິງ ນີ້ຊື່ວ່າປັນຍາຮ່າເຣິງ ໃນຄໍາວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາຮ່າເຣິງ (໑໓)

[໗] ຄໍາວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແລ່ນໄປ ອະທິບາຍວ່າ ປັນຍາແລ່ນໄປ ເປັນແນວໃດ?

ຄື ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປສູ່ຮູບທັງປວງທີ່ເປັນອະດີດອະນາຄົດແລະປັດຈຸບັນ ເປັນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ມີຢູ່ໃນບ່ອນໄກຫຼືມີຢູ່ໃນທີ່ໃກ້ ໂດຍຄວາມບໍ່ທ່ຽງ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປໂດຍຄວາມເປັນທຸກ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປໂດຍຄວາມເປັນອະນັດຕາ

ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປສູ່ເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປສູ່ວິນຍານທັງປວງທີ່ເປັນອະດີດ

ອະນາຄົດ ແລະປັດຈຸບັນ ເປັນພາຍໃນຫຼືພາຍນອກ ຫຍາບຫຼືລະອຽດ ຊົ່ວຫຼືປະນີດ ມີຢູ່ໃນບ່ອນໄກຫຼືມີຢູ່ໃນບ່ອນໃກ້ໂດຍຄວາມບໍ່ທ່ຽງ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປໂດຍຄວາມເປັນທຸກ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປໂດຍຄວາມເປັນອະນັດຕາ

ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປສູ່ຈັກຂຸ ฯລฯ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປສູ່ຊະຣາແລະມໍຣະນະທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນໂດຍຄວາມບໍ່ທ່ຽງ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປໂດຍຄວາມເປັນທຸກ ຊື່ວ່າປັນຍາແລ່ນໄປ ຍ້ອນປັນຍາສັບໄວແລ່ນໄປ ໂດຍຄວາມເປັນອະນັດຕາ

ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າຣູບທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ຊື່ວ່າບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ຊື່ວ່າເປັນທຸກ

ຍ້ອນມີສະພາວະເປັນໄພ ຊື່ວ່າເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານ ພັນແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຣູບ

ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າຊະຣາແລະມໍຣະນະທັງທີ່ເປັນອະດີດ ອະນາຄົດແລະປັດຈຸບັນ ຊື່ວ່າບໍ່ທ່ຽງ ຍ້ອນມີສະພາວະສິ້ນໄປ ຊື່ວ່າເປັນທຸກ ຍ້ອນມີສະພາວະເປັນໄພ ຊື່ວ່າເປັນອະນັດຕາ ຍ້ອນມີສະພາວະບໍ່ມີແກ່ນສານແລ້ວພັນແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຊະຣາແລະມໍລະນະ

ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າຣູບທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປເປັນທຳມະດາແລ້ວພັນແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຣູບ

ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ฯລฯ ຈັກຂຸ ฯລฯ ຊື່ວ່າປັນຍາແລ່ນໄປ ຍ້ອນທຽບຄຽງ ພິນິດ ພິຈາລະນາ ເຮັດໃຫ້ແຈ້ງວ່າຊະຣາແລະມໍຣະນະທັງທີ່ເປັນອະດີດ ອະນາຄົດ ແລະປັດຈຸບັນ ເປັນສະພາວະບໍ່ທ່ຽງ ຖືກປັດໄຈປຸງແຕ່ງ ອາໄສກັນແລະກັນເກີດຂຶ້ນ ມີຄວາມສິ້ນໄປ ເສື່ອມໄປ ຄາຍອອກ ດັບໄປເປັນທຳມະດາແລ້ວພັນແລ່ນໄປສູ່ນິບພານເຊິ່ງເປັນຄວາມດັບແຫ່ງຊະຣາແລະມໍລະນະ ນີ້ຊື່ວ່າປັນຍາແລ່ນໄປ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແລ່ນໄປ (໑໔)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແຫຼມຄົມ ອະທິບາຍວ່າ ປັນຍາແຫຼມຄົມ ເປັນແນວໃດ?

ຄື ຊື່ວ່າປັນຍາແຫຼມຄົມ ຍ້ອນທຳລາຍກິເລດໄດ້ສັບພັນ ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບການວິຕົກທີ່ເກີດຂຶ້ນໄວ້ ລະ ບັນເທົາ ເຮັດການວິຕົກທີ່ເກີດຂຶ້ນ ໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີອີກຕໍ່ໄປ

ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບພະຍາບາດວິຕົກທີ່ເກີດຂຶ້ນໄວ້ ຯລຯ
ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບວິຫິງສາວິຕົກທີ່ເກີດຂຶ້ນໄວ້ ຯລຯ
ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບບາບອະກຸສົນທຳທີ່ເກີດຂຶ້ນໄວ້ ຯລຯ
ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບຣາຄະທີ່ເກີດຂຶ້ນໄວ້ ຯລຯ

ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບໂທສະໄວ້ ລະ ບັນເທົາ ເຮັດໂທສະໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີອີກຕໍ່ໄປ ຯລຯ ໂມຫະ ຯລຯ ໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖຳພະ ຯລຯ ສາຣຳພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທັງປວງ ຯລຯ ທຸດຈະຣິດທັງປວງ ຯລຯ ອະພິສັງຂານທັງປວງ ຯລຯ

ຊື່ວ່າປັນຍາແຫຼມຄົມ ຍ້ອນບໍ່ຮັບກຳອັນເປັນເຫດໃຫ້ໄປສູ່ພົບທັງປວງທີ່ເກີດຂຶ້ນໄວ້ ລະ ບັນເທົາ ເຮັດກຳອັນເປັນເຫດໃຫ້ໄປສູ່ພົບທັງປວງທີ່ເກີດຂຶ້ນໃຫ້ສິ້ນສຸດ ໃຫ້ເຖິງຄວາມບໍ່ມີອີກຕໍ່ໄປແລ້ວ ຊື່ວ່າປັນຍາແຫຼມຄົມ ຍ້ອນເຮັດໃຫ້ບັນລຸ ເຮັດໃຫ້ແຈ້ງ ເຮັດໃຫ້ຖືກຕ້ອງອະຣິຍະມັກ ໔ ສາມັນຍະຜົນ ໔ ປະຕິສຳພິທາ ໔ ອະພິນຍາ ໖ ພຽງອາສະນະດຽວ ນີ້ຊື່ວ່າປັນຍາແຫຼມຄົມ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາແຫຼມຄົມ (໑໔)

ຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ ອະທິບາຍວ່າ ປັນຍາທຳລາຍກິເລດ ເປັນແນວໃດ?

ຄື ບຸກຄົນບາງຄົນໃນໂລກນີ້ເປັນຜູ້ສົມບູນດ້ວຍຄວາມສະດຸ້ງ ເປັນຜູ້ສົມບູນດ້ວຍຄວາມຫວາດສຽວ ເປັນຜູ້ສົມບູນດ້ວຍຄວາມເບື່ອໜ່າຍ ເປັນຜູ້ສົມບູນດ້ວຍຄວາມຣະອາ ເປັນຜູ້ສົມບູນດ້ວຍຄວາມບໍ່ພໍໃຈ ອວ່າຍໜ້າໜີ ບໍ່ຍິນດີໃນສັງຂານທັງປວງ ຍ່ອມທຳລາຍ ທຳລາຍກອງໂລພະທີ່ບໍ່ເຄີຍແຫວກ ບໍ່ເຄີຍທຳລາຍ (ດ້ວຍປັນຍາ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າປັນຍາທຳລາຍກິເລດ

ບຸກຄົນບາງຄົນໃນໂລກນີ້ ຯລຯ ທຳລາຍກອງໂທສະທີ່ບໍ່ເຄີຍແຫວກ ບໍ່ເຄີຍທຳລາຍ (ດ້ວຍປັນຍາ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າປັນຍາທຳລາຍກິເລດ

ບຸກຄົນບາງຄົນໃນໂລກນີ້ ຯລຯ ທຳລາຍກອງໂມຫະທີ່ບໍ່ເຄີຍແຫວກ ບໍ່ເຄີຍທຳລາຍ (ດ້ວຍປັນຍາ) ຍ້ອນເຫດນັ້ນ ຈຶ່ງຊື່ວ່າປັນຍາທຳລາຍກິເລດ

ບຸກຄົນບາງຄົນໃນໂລກນີ້ ຯລຯ ຍ່ອມທຳລາຍ ທຳລາຍໂກທະ ຯລຯ ອຸປະນາຫະ ຯລຯ ມັກຂະ ຯລຯ ປະລາສະ ຯລຯ ອິດສາ ຯລຯ ມັດສະຣິຍະ ຯລຯ ມາຍາ ຯລຯ ສາເຖີຍຍະ ຯລຯ ຖໍາພະ ຯລຯ ສາຣໍາພະ ຯລຯ ມານະ ຯລຯ ອະຕິມານະ ຯລຯ ມະທະ ຯລຯ ປະມາທະ ຯລຯ ກິເລດທັງປວງ ຯລຯ ທຸດຈະຣິດທັງປວງ ຯລຯ ອະພິສັງຂານທັງປວງ ຯລຯ

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ສົມບູນດ້ວຍຄວາມສະດຸ້ງ ເປັນຜູ້ສົມບູນດ້ວຍຄວາມຫວາດສຽວ ເປັນຜູ້ສົມບູນດ້ວຍຄວາມເບື່ອໜ່າຍ ເປັນຜູ້ສົມບູນດ້ວຍຄວາມຣະອາ ເປັນຜູ້ສົມບູນດ້ວຍຄວາມບໍ່ພໍໃຈ ເບືອນໜ້າອອກ ບໍ່ຍິນດີໃນສັງຂານທັງປວງ ຍ່ອມແທງກ ທຳລາຍກຳ ເຊິ່ງເປັນເຫດໃຫ້ສັດໄປສູ່ພົບທັງປວງທີ່ບໍ່ເຄີຍແທງກ ບໍ່ເຄີຍທຳລາຍ (ດ້ວຍປັນຍາ) ຍ້ອນເຫດນັ້ນຈຶ່ງຊື່ວ່າປັນຍາທຳລາຍກິເລດ ນີ້ຊື່ວ່າປັນຍາທຳລາຍກິເລດ ໃນຄຳວ່າ ຍ່ອມເປັນໄປເພື່ອຄວາມເປັນຜູ້ມີປັນຍາທຳລາຍກິເລດ (໑໖)

ປັນຍາເຫຼົ່ານີ້ຮຽກວ່າ ປັນຍາ ໑໖ ປະການ ບຸກຄົນປະກອບດ້ວຍປັນຍາ ໑໖ ປະການນີ້ ຊື່ວ່າຜູ້ບັນລຸປະຕິສຳພິທາ

## ໔. ປຸກຄະລະວິເສສະນິດເທດ

### ສະແດງບຸກຄົນວິເສດ

[໗] ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກໜຶ່ງເຖິງພ້ອມດ້ວຍຄວາມພຽນມາກ່ອນ ພວກໜຶ່ງບໍ່ເຖິງພ້ອມດ້ວຍຄວາມພຽນມາກ່ອນ ພວກທີ່ເຖິງພ້ອມດ້ວຍ ຄວາມພຽນມາກ່ອນເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ບໍ່ເຖິງພ້ອມດ້ວຍຄວາມພຽນມາກ່ອນນັ້ນ ແລະຍານຂອງບຸກຄົນຜູ້ເຖິງພ້ອມດ້ວຍຄວາມພຽນມາກ່ອນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ຄື ພວກໜຶ່ງເປັນພະຫູສູດ ພວກໜຶ່ງບໍ່ໄດ້ເປັນພະຫູສູດ ພວກທີ່ເປັນພະຫູສູດເປັນພວກທີ່ປະເສີດວິເສດຍິ່ງກວ່າພວກທີ່ບໍ່ໄດ້ເປັນພະຫູສູດນັ້ນ ແລະຍານຂອງບຸກຄົນຜູ້ເປັນພະຫູສູດນັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ຄື ພວກໜຶ່ງສົມບູນເທດສະໜາ ພວກໜຶ່ງບໍ່ສົມບູນເທດສະໜາ ພວກທີ່ສົມບູນເທດສະໜາເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ບໍ່ສົມບູນເທດສະໜານັ້ນ ແລະຍານຂອງບຸກຄົນຜູ້ສົມບູນເທດສະໜານັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍ

ຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ແລະພວກທີ່ສົມບູນເຫດສະໜາກໍມີ ໔ ຈຳພວກ ຄື ພວກໜຶ່ງອາໄສຄູ ພວກໜຶ່ງບໍ່ອາໄສຄູ ພວກທີ່ອາໄສຄູເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ບໍ່ອາໄສຄູນັ້ນ ແລະຍານຂອງບຸກຄົນຜູ້ອາໄສຄູນັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ພວກທີ່ສົມບູນເຫດສະໜາກໍມີ ໔ ຈຳພວກ ແລະພວກທີ່ອາໄສຄູກໍມີ ໔ ຈຳພວກ ຄື ພວກໜຶ່ງ ມີວິຫາຣະທຳຫຼາຍ ພວກໜຶ່ງມີວິຫາຣະທຳບໍ່ຫຼາຍ ພວກທີ່ມີວິຫາຣະທຳຫຼາຍເປັນຜູ້ປະເສີດ ວິເສດຍິ່ງກວ່າພວກທີ່ມີວິຫາຣະທຳບໍ່ຫຼາຍນັ້ນ ແລະຍານຂອງບຸກຄົນຜູ້ມີວິຫາຣະທຳຫຼາຍນັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ພວກທີ່ສົມບູນເຫດສະໜາກໍມີ ໔ ຈຳພວກ ພວກທີ່ອາໄສຄູກໍມີ ໔ ຈຳພວກ ແລະພວກທີ່ມີວິຫາຣະທຳຫຼາຍກໍມີ ໔ ຈຳພວກ ຄື ພວກໜຶ່ງມີການພິຈາລະນາຫຼາຍ ພວກໜຶ່ງມີການພິຈາລະນາບໍ່ຫຼາຍ ພວກທີ່ມີການພິຈາລະນາຫຼາຍ ເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ມີການພິຈາລະນາບໍ່ຫຼາຍນັ້ນແລະຍານຂອງບຸກຄົນຜູ້ມີການພິຈາລະນາຫຼາຍນັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ພວກທີ່ສົມບູນເຫດສະໜາກໍມີ ໔ ຈຳພວກ ພວກທີ່ອາໄສຄູກໍມີ ໔ ຈຳພວກ ພວກທີ່ມີວິຫາຣະທຳຫຼາຍກໍມີ ໔ ຈຳພວກ ແລະພວກທີ່ມີການພິຈາລະນາຫຼາຍກໍມີ ໔ ຈຳພວກ ຄື ພວກໜຶ່ງ ເປັນພຣະເສຂະບັນລຸປະຕິສຳພິທາ ພວກໜຶ່ງເປັນພຣະອະເສຂະບັນລຸປະຕິສຳພິທາ ພວກທີ່ເປັນພຣະອະເສຂະບັນລຸປະຕິສຳພິທາເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ເປັນພຣະເສຂະບັນລຸປະຕິສຳພິທານັ້ນ ແລະຍານຂອງພຣະອະເສຂະຜູ້ບັນລຸປະຕິສຳພິທານັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໔ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໔ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໔ ຈຳພວກ ພວກທີ່ສົມບູນເຫດສະໜາກໍມີ ໔ ຈຳພວກ ພວກທີ່ມີວິຫາຣະທຳຫຼາຍກໍມີ ໔ ຈຳພວກ ພວກທີ່ມີການພິຈາລະນາຫຼາຍກໍມີ ໔ ຈຳພວກ ແລະພວກທີ່ເປັນພຣະອະເສຂະບັນລຸປະຕິສຳພິທາກໍມີ ໔ ຈຳພວກ ຄື ພວກໜຶ່ງບັນລຸສາວົກປາຣະມີ ພວກໜຶ່ງບໍ່ບັນລຸສາວົກປາຣະມີ ພວກທີ່ບັນລຸສາວົກປາຣະມີເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ບໍ່ບັນລຸສາວົກປາຣະມີ ແລະຍານຂອງຜູ້ບັນລຸສາວົກປາຣະມີນັ້ນຍ່ອມແຕກສານ

ບຸກຄົນຜູ້ບັນລຸປະຕິສຳພິທາມີ ໘ ຈຳພວກ ຄື ພວກທີ່ບັນລຸປະຕິສຳພິທາ ເຖິງພ້ອມດ້ວຍຄວາມພຽນມາກ່ອນກໍມີ ໘ ຈຳພວກ ແມ່ນພວກທີ່ເປັນພະຫູສູດກໍມີ ໘ ຈຳພວກ ພວກທີ່ສົນທະນາເຫດສະໜາກໍມີ ໘ ຈຳພວກ ພວກທີ່ອາໄສຄູກໍມີ ໘ ຈຳພວກ ພວກທີ່ມີວິຫາຣະທຳຫຼາຍກໍມີ ໘ ຈຳພວກ ພວກທີ່ມີການພິຈາລະນາຫຼາຍກໍມີ ໘ ຈຳພວກ ແລະພວກທີ່ເປັນພຣະອະເສຂະບັນລຸປະຕິສຳພິທາກໍມີ ໘ ຈຳພວກ ຄື ພວກໜຶ່ງບັນລຸສາວົກປາຣະມີ ພວກໜຶ່ງເປັນພຣະປັດເຈກສຳພຸດທະເຈົ້າ ພວກທີ່ເປັນພຣະປັດເຈກສຳພຸດທະເຈົ້າເປັນຜູ້ປະເສີດວິເສດຍິ່ງກວ່າພວກທີ່ບັນລຸສາວົກປາຣະມີນັ້ນ ແລະຍານຂອງຜູ້ເປັນພຣະປັດເຈກສຳພຸດທະເຈົ້ານັ້ນ ຍ່ອມແຕກສານ

ເມື່ອທຽບກັບພຣະປັດເຈກພຸດທະເຈົ້າແລະໂລກພ້ອມທັງເທວະໂລກ ພຣະຕະຖາຄົດ ອະຣະຫັນຕະສຳມາສຳພຸດທະເຈົ້າຊົງເປັນຜູ້ເລີດ ຊົງບັນລຸປະຕິສຳພິທາ ຊົງສະຫຼາດໃນປະເພດແຫ່ງປັນຍາ ມີພຣະຍານແຕກສານ ຊົງບັນລຸເຖິງປະຕິສຳພິທາ ຊົງບັນລຸເວສາຣັດຊະຍານ ໔ ຊົງເປັນຜູ້ຊົງທະສະພົນລະຍານ ຊົງເປັນບຸຣຸດອົງອາດ ຊົງເປັນບຸຣຸດເໝືອນຣາດຊະສີ ໗ລ໗ ເຫຼົ່າບັນດິດຜູ້ເປັນກະສັດ ເປັນພາມ ເປັນຄະຫະບໍດີ ເປັນສະມະນະ ຜູ້ມີປັນຍາລະອຽດ ຮູ້ວາທະຂອງຜູ້ອື່ນເໝືອນນາຍຂະມັງທະນູສາມາດຍິງເນື້ອຊາຍ ເໝືອນຈະທຳລາຍທິດຖິຂອງຜູ້ອື່ນດ້ວຍປັນຍາຂອງຕົນ ບັນດິດເຫຼົ່ານັ້ນພາກັນປຸງແຕ່ງບັນຫາເຂົ້າໄປຫາພຣະຕະຖາຄົດເຈົ້າທູນຖາມບັນຫາທັງລີ້ລັບແລະປິດບັງ ບັນຫາເຫຼົ່ານັ້ນທີ່ພຣະຜູ້ມີພຣະພາກເຈົ້າ ຊົງຊັກໄຊ້ແລະຕັດແກ້ແລ້ວ ເປັນບັນຫາມີເຫດໃຫ້ຊົງສະແດງ ຂະນະນັ້ນພຣະຜູ້ມີພຣະພາກເຈົ້າຊົງຮຸ່ງເຮືອງຍິ່ງດ້ວຍພຣະປັນຍາ ຍ້ອນຊົງແກ້ບັນຫາເຫຼົ່ານັ້ນ ຍ້ອນເຫດນັ້ນ ພຣະຜູ້ມີ ພຣະພາກເຈົ້າຈຶ່ງຊົງເປັນຜູ້ເລີດ ຊົງບັນລຸປະຕິສຳພິທາ ດັ່ງນີ້

**ມະຫາປັນຍາກະຖາ ຈົບ**

## ໘. ອິດທິກະຖາ

## ວ່າດ້ວຍລິດ

[໗] ລິດເປັນແນວໃດ? ລິດມີເທົ່າໃດ ພູມແຫ່ງລິດມີເທົ່າໃດ ບາດແຫ່ງລິດມີເທົ່າໃດ ບົດແຫ່ງລິດມີເທົ່າໃດ ມູນແຫ່ງລິດມີເທົ່າໃດ

ຖາມ : ລິດເປັນແນວໃດ?

ຕອບ : ຊື່ວ່າລິດ ຍ້ອນມີສະພາວະສຳເລັດ

ຖາມ : ລິດມີເທົ່າໃດ

ຕອບ : ລິດມີ ໑໐ ຢ່າງ

ຖາມ : ພູມແຫ່ງລິດມີເທົ່າໃດ

ຕອບ : ພູມແຫ່ງລິດມີ ໔ ຢ່າງ ຯລຯ ບາດແຫ່ງລິດມີ ໔ ຢ່າງ ຯລຯ ບົດແຫ່ງລິດມີ ໗ ຢ່າງ ຯລຯ ມູນແຫ່ງລິດມີ ໑໖ ຢ່າງ

ລິດ ໑໐ ຢ່າງ ມີອັນໃດແດ່ ຄື

໑. ລິດທີ່ອະທິຖານ
໒. ລິດທີ່ສະແດງໄດ້ຕ່າງ ໆ
໓. ລິດທີ່ສຳເລັດດ້ວຍໃຈ
໔. ລິດທີ່ແຜ່ໄປດ້ວຍຍານ
໕. ລິດທີ່ແຜ່ໄປດ້ວຍສະມາທິ
໖. ລິດຂອງພຣະອະຣິຍະ
໗. ລິດທີ່ເກີດຈາກຜົນກຳ
໘. ລິດຂອງທ່ານຜູ້ມີບຸນ
໙. ລິດທີ່ສຳເລັດມາຈາກວິດຊາ
໑໐. ຊື່ວ່າລິດ ຍ້ອນມີສະພາວະສຳເລັດ ດ້ວຍການປະກອບໂດຍຊອບໃນສ່ວນ ນັ້ນ ໆ ເປັນປັດໄຈ

ພູມແຫ່ງລິດ ໔ ຢ່າງ ມີອັນໃດແດ່ ຄື

໑. ປະຖົມຊານ ເປັນພູມເກີດຈາກວິເວກ
໒. ທຸຕິຍະຊານ ເປັນພູມແຫ່ງປີຕິແລະສຸກ
໓. ຕະຕິຍະຊານ ເປັນພູມແຫ່ງອຸເປກຂາແລະສຸກ
໔. ຈະຕຸດຖະຊານ ເປັນພູມແຫ່ງອຸເປກຂາ

ພູມແຫ່ງລິດ ໔ ແນວນີ້ ຍ່ອມເປັນໄປເພື່ອຄວາມໄດ້ລິດ ເພື່ອຄວາມໄດ້ສະເພາະລິດ ເພື່ອສະແດງລິດໄດ້ຕ່າງ ໆ ເພື່ອຄວາມສຳເລັດແຫ່ງລິດ ເພື່ອຄວາມຊຳນານໃນລິດ ເພື່ອຄວາມແກ່ກ້າດ້ວຍລິດ

ບາດແຫ່ງລິດ ໔ ຢ່າງ ມີອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ຈະເລີນອິດທິບາດອັນປະກອບດ້ວຍ ສັນທະສະມາທິປະທານສັງຂານ
໒. ຈະເລີນອິດທິບາດອັນປະກອບດ້ວຍ ວິຣິຍະສະມາທິປະທານສັງຂານ
໓. ຈະເລີນອິດທິບາດອັນປະກອບດ້ວຍ ຈິດຕະສະມາທິປະທານສັງຂານ
໔. ຈະເລີນອິດທິບາດອັນປະກອບດ້ວຍ ວິມັງສາສະມາທິປະທານສັງຂານ

ບາດແຫ່ງລິດ ໔ ແນວນີ້ ຍ່ອມເປັນໄປເພື່ອຄວາມໄດ້ລິດ ເພື່ອຄວາມໄດ້ສະເພາະລິດ ເພື່ອສະແດງລິດໄດ້ຕ່າງ ໆ ເພື່ອຄວາມສຳເລັດແຫ່ງລິດ ເພື່ອຄວາມຊຳນານໃນລິດ ເພື່ອຄວາມແກ່ກ້າດ້ວຍລິດ

ບົດແຫ່ງລິດ ໗ ຢ່າງ ມີອັນໃດແດ່ ຄື

ຖ້າພິກຂຸອາໄສສັນທະໄດ້ສະມາທິ ໄດ້ເອກັກຄະຕາຈິດ ສັນທະບໍ່ແມ່ນສະມາທິ ສະມາທິກໍບໍ່ແມ່ນ ສັນທະ ສັນທະເປັນແນວໜຶ່ງ ສະມາທິກໍເປັນແນວໜຶ່ງ

ຖ້າພິກຂຸອາໄສວິຣິຍະໄດ້ສະມາທິ ໄດ້ເອກັກຄະຕາຈິດ ວິຣິຍະບໍ່ແມ່ນສະມາທິ ສະມາທິກໍບໍ່ແມ່ນ ວິຣິຍະ ວິຣິຍະເປັນແນວໜຶ່ງ ສະມາທິກໍເປັນແນວໜຶ່ງ

ຖ້າພິກຂຸອາໄສຈິດໄດ້ສະມາທິ ໄດ້ເອກັກຄະຕາຈິດ ຈິດບໍ່ແມ່ນສະມາທິ ສະມາທິກໍບໍ່ແມ່ນຈິດຈິດເປັນແນວໜຶ່ງ ສະມາທິກໍເປັນແນວໜຶ່ງ

ຖ້າພິກຂຸອາໄສວິມັງສາໄດ້ສະມາທິ ໄດ້ເອກັກຄະຕາຈິດ ວິມັງສາບໍ່ແມ່ນສະມາທິ ສະມາທິກໍບໍ່ແມ່ນວິມັງສາ ວິມັງສາເປັນແນວໜຶ່ງ ສະມາທິກໍເປັນແນວໜຶ່ງ

ບົດແຫ່ງລິດ ໗ ຢ່າງນີ້ ຍ່ອມເປັນໄປເພື່ອຄວາມໄດ້ລິດ ເພື່ອຄວາມໄດ້ສະເພາະລິດ ເພື່ອສະແດງລິດໄດ້ຕ່າງ ໆ ເພື່ອຄວາມສຳເລັດແຫ່ງລິດ ເພື່ອຄວາມຊຳນານໃນລິດ ເພື່ອຄວາມແກ່ກ້າດ້ວຍລິດ

ມູນແຫ່ງລິດ ໑໖ ຢ່າງ ມີອັນໃດແດ່ ຄື

໑. ຈິດບໍ່ແຟບລົງຍ່ອມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຍ້ອນເຫດນັ້ນຈຶ່ງຊື່ວ່າອາເນນຊາ (ບໍ່ຫວັ່ນໄຫວ)
໒. ຈິດບໍ່ຟູຂຶ້ນຍ່ອມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຍ້ອນເຫດນັ້ນຈຶ່ງຊື່ວ່າອາເນນຊາ
໓. ຈິດບໍ່ຍິນດີຍ່ອມບໍ່ຫວັ່ນໄຫວຍ້ອນຣາຄະ ຍ້ອນເຫດນັ້ນຈຶ່ງຊື່ວ່າ ອາເນນຊາ
໔. ຈິດບໍ່ມຸ້ງຮ້າຍຍ່ອມບໍ່ຫວັ່ນໄຫວຍ້ອນພະຍາບາດ ຍ້ອນເຫດນັ້ນຈຶ່ງຊື່ວ່າອາເນນຊາ
໕. ຈິດອັນທິດຖິບໍ່ອາໄສຍ່ອມບໍ່ຫວັ່ນໄຫວຍ້ອນທິດຖິ ຍ້ອນເຫດນັ້ນຈຶ່ງຊື່ວ່າອາເນນຊາ
໖. ຈິດບໍ່ພົວພັນຍ່ອມບໍ່ຫວັ່ນໄຫວຍ້ອນສັນທະຣາຄະ ຍ້ອນເຫດນັ້ນຈຶ່ງຊື່ວ່າອາເນນຊາ
໗. ຈິດລຸດພົ້ນຍ່ອມບໍ່ຫວັ່ນໄຫວຍ້ອນກາມຣາຄະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ
໘. ຈິດບໍ່ເກາະກ່ຽວຍ່ອມບໍ່ຫວັ່ນໄຫວຍ້ອນກິເລດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອາເນນຊາ
໙. ຈິດປາສະຈາກເຄື່ອງຄອບງຳຍ່ອມບໍ່ຫວັ່ນໄຫວຍ້ອນຄວາມຄອບງຳ ກິເລດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ
໑໐. ຈິດທີ່ເປັນເອກັກຄະຕາຣົມຍ່ອມບໍ່ຫວັ່ນຍ້ອນກິເລດຕ່າງ ໆ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ
໑໑. ຈິດທີ່ກຳນົດດ້ວຍສັດທາຍ່ອມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ
໑໒. ຈິດທີ່ກຳນົດດ້ວຍວິຣິຍະຍ່ອມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ

໑໓. ຈິດທີ່ກຳນົດດ້ວຍສະຕິຍ່ອມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອາເນນຊາ
໑໔. ຈິດທີ່ກຳນົດດ້ວຍສະມາທິຍ່ອມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າ ອາເນນຊາ
໑໕. ຈິດທີ່ກຳນົດດ້ວຍປັນຍາຍ່ອມບໍ່ຫວັ່ນໄຫວຍ້ອນອະວິດຊາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ
໑໖. ຈິດທີ່ເຖິງຄວາມສະຫວ່າງສະໄຫວຍ່ອມບໍ່ຫວັ່ນໄຫວຍ້ອນຄວາມມືດຄືອະວິດຊາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າອາເນນຊາ

ມູນແຫ່ງລິດ ໑໖ ຢ່າງນີ້ ຍ່ອມເປັນໄປເພື່ອຄວາມໄດ້ລິດ ເພື່ອຄວາມໄດ້ສະເພາະລິດ ເພື່ອສະແດງລິດໄດ້ຕ່າງ ໆ ເພື່ອຄວາມສຳເລັດແຫ່ງລິດ ເພື່ອຄວາມເປັນຜູ້ຊຳນານໃນລິດ ເພື່ອຄວາມແກ່ກ້າດ້ວຍລິດ

## ທະສະອິດທິນິດເທດ

### ສະແດງລິດ ໑໐ ຢ່າງ

[໑໐] ລິດທີ່ອະທິຖານ ເປັນແນວໃດ?

ຄື ພິກຂຸໃນບ່ອນນີ້ສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດກໍໄດ້ ສະແດງໃຫ້ຫາຍໄປກໍໄດ້ ຊອດຝາ ກຳແພງ ພູເຂົາ ໄປໄດ້ບໍ່ຕິດຂັດເໝືອນໄປໃນທີ່ວ່າງກໍໄດ້ ຜຸດຂຶ້ນດຳລົງໃນແຜ່ນດິນເໝືອນດຳລົງໃນນ້ຳກໍໄດ້ ຍ່າງໄປເທິງນ້ຳໂດຍນ້ຳບໍ່ແຍກເໝືອນຍ່າງໄປເທິງແຜ່ນດິນກໍໄດ້ ເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ໃຊ້ຝາມືລູບຈັບດວງຈັນດວງອາທິດເຊິ່ງມີລິດມີອານຸພາບຫຼາຍແນວນັ້ນກໍໄດ້ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້

ຄຳວ່າ ໃນບ່ອນນີ້ ອະທິບາຍວ່າ ໃນຄວາມເຫັນນີ້ ຄື ໃນຄວາມຖືກໃຈນີ້ ຄວາມພໍໃຈນີ້ ຄວາມຍຶດຖືນີ້ ທຳນີ້ ວິໄນນີ້ ທຳວິໄນນີ້ ປາພົດນີ້ ພົມມະຈັນນີ້ ສັດຖຸສາດນີ້ ຍ້ອນເຫດນັ້ນ ທ່ານຈຶ່ງກ່າວວ່າ ໃນບ່ອນນີ້

ຄຳວ່າ ພິກຂຸ ອະທິບາຍວ່າ ພິກຂຸຜູ້ເປັນກັນລະຍານະປຸຖຸຊົນ ເປັນພຣະເສຂະ ຫຼືເປັນພຣະອະຣະຫັນຜູ້ມີທຳບໍ່ກຳເຣີບ

ຄຳວ່າ ສະແດງລິດໄດ້ຫຼາຍຢ່າງ ອະທິບາຍວ່າ ສະແດງລິດໄດ້ມີປະການຕ່າງ ໆ

ຄຳວ່າ ແມ່ນຄົນດຽວສະແດງເປັນຫຼາຍຄົນກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດໂດຍປົກກະຕິເປັນຜູ້ດຽວ ຍ່ອມນຶກໃຫ້ເປັນຫຼາຍຄົນ ຄື ນຶກໃຫ້ເປັນ ໑໐໐ ຄົນ ໑,໐໐໐ ຄົນ ໑໐໐,໐໐໐ ຄົນ ແລ້ວອະທິຖານດ້ວຍຍານວ່າ ຈົ່ງເປັນຫຼາຍຄົນ ກໍເປັນຫຼາຍຄົນໄດ້ ທ່ານຜູ້ມີລິດເຖິງຄວາມເປັນຜູ້

ຊຳນານແຫ່ງຈິດ ແມ່ນຄົນດຽວສະແດງເປັນຫຼາຍຄົນກໍໄດ້ ປຽບເໝືອນທ່ານພຣະຈຸລະປັນຖົກອົງດຽວສະແດງເປັນຫຼາຍອົງກໍໄດ້ສັນນັ້ນ

ຄຳວ່າ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດໂດຍປົກກະຕິເປັນຫຼາຍຄົນ ຍ່ອມນຶກໃຫ້ເປັນຄົນດຽວແລ້ວອະທິຖານດ້ວຍຍານວ່າ ຈົ່ງເປັນຄົນດຽວ ກໍເປັນຄົນດຽວໄດ້ ທ່ານຜູ້ມີລິດນັ້ນ ເຖິງຄວາມຊຳນານແຫ່ງຈິດ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ປຽບເໝືອນທ່ານຈຸລະປັນຖົກຫຼາຍອົງສະແດງເປັນອົງດຽວກໍໄດ້

[໑໑] ຄຳວ່າ ສະແດງໃຫ້ຜາກົດກໍໄດ້ ອະທິບາຍວ່າ ທີ່ໃຜ ໆ ບໍ່ປິດບັງໄວ້ ເຮັດໃຫ້ ບໍ່ມີອັນໃດປິດບັງ ໃຫ້ເປີດເຜີຍຜາກົດກໍໄດ້

ຄຳວ່າ ສະແດງໃຫ້ຫາຍໄປກໍໄດ້ ອະທິບາຍວ່າ ທີ່ໃຜ ໆ ເປີດໄວ້ ເຮັດໃຫ້ເປັນທີ່ປິດບັງມິດຊິດກໍໄດ້

ຄຳວ່າ ຊອດຝາ ຊອດກຳແພງ ຯລຯ ເໝືອນໄປໃນອາກາດກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດເປັນຜູ້ໄດ້ອາກາດກະສິນສະມາບັດ ໂດຍປົກກະຕິຍ່ອມນຶກເຖິງຝາ ກຳແພງ ພູເຂົາ ແລ້ວອະທິຖານດ້ວຍຍານວ່າ ຈົ່ງເປັນທີ່ວ່າງ ກໍເປັນທີ່ວ່າງໄດ້ ທ່ານຜູ້ມີລິດນັ້ນຍ່ອມຊອດຝາກຳແພງພູເຂົາ ໄປໄດ້ບໍ່ຕິດຂັດ ທ່ານຜູ້ມີລິດນັ້ນເຖິງຄວາມຊຳນານແຫ່ງຈິດຍ່ອມຊອດຝາ ກຳແພງພູເຂົາ ໄປໄດ້ບໍ່ຕິດຂັດເໝືອນໄປໃນທີ່ແຈ້ງ ປຽບເໝືອນພວກມະນຸດຜູ້ບໍ່ມີລິດ ໂດຍປົກກະຕິໄປໃນທີ່ບໍ່ມີອັນໃດປິດບັງກັ້ນໄວ້ໂດຍບໍ່ຕິດຂັດ

ຄຳວ່າ ຜຸດຂຶ້ນດຳລົງໃນແຜ່ນດິນ ເໝືອນຍ່າງໄປເທິງນ້ຳກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດເປັນຜູ້ໄດ້ອາໂປກະສິນສະມາບັດ ໂດຍປົກກະຕິຍ່ອມນຶກເຖິງແຜ່ນດິນແລ້ວອະທິຖານດ້ວຍຍານວ່າ ຈົ່ງເປັນນ້ຳ ກໍເປັນນ້ຳໄດ້ ທ່ານຜູ້ມີລິດນັ້ນຜຸດຂຶ້ນດຳລົງໃນແຜ່ນດິນກໍໄດ້ ທ່ານຜູ້ມີລິດນັ້ນເຖິງຄວາມຊຳນານແຫ່ງຈິດຜຸດຂຶ້ນດຳລົງໃນແຜ່ນດິນເໝືອນຍ່າງໄປເທິງນ້ຳ ກໍໄດ້ ປຽບເໝືອນພວກມະນຸດຜູ້ບໍ່ມີລິດໂດຍປົກກະຕິຜຸດຂຶ້ນດຳລົງໃນນ້ຳໄດ້

ຄຳວ່າ ຍ່າງໄປເທິງນ້ຳ ຯລຯ ເໝືອນຍ່າງໄປເທິງແຜ່ນດິນກໍໄດ້ ອະທິບາຍວ່າ ທ່ານ ຜູ້ມີລິດເປັນຜູ້ໄດ້ປະຖະວີກະສິນສະມາບັດ ໂດຍປົກກະຕິຍ່ອມນຶກເຖິງນ້ຳແລ້ວອະທິຖານດ້ວຍຍານວ່າ ຈົ່ງເປັນແຜ່ນດິນ ກໍເປັນແຜ່ນດິນໄດ້ ທ່ານຜູ້ມີລິດນັ້ນຍ່າງໄປເທິງນ້ຳໂດຍນ້ຳບໍ່ແຍກກໍໄດ້ ທ່ານຜູ້ມີລິດນັ້ນເຖິງຄວາມຊຳນານແຫ່ງຈິດຍ່າງໄປເທິງນ້ຳໂດຍນ້ຳບໍ່ແຍກເໝືອນຍ່າງໄປເທິງດິນກໍໄດ້ ປຽບເໝືອນພວກມະນຸດຜູ້ບໍ່ມີລິດໂດຍປົກກະຕິຍ່າງໄປເທິງແຜ່ນດິນໂດຍແຜ່ນດິນບໍ່ແຕກແຍກອອກສັນນັ້ນ

ຄຳວ່າ ເຫາະໄປໃນອາກາດເໝືອນນົກບິນໄປກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດເປັນຜູ້ໄດ້ປະຖະວີກະສິນສະມາບັດ ໂດຍປົກກະຕິຍ່ອມນຶກເຖິງອາກາດແລ້ວອະທິຖານດ້ວຍຍານວ່າ ຈົ່ງ

ເປັນແຜ່ນດິນ ກໍເປັນແຜ່ນດິນໄດ້ ທ່ານຜູ້ມີລິດນັ້ນຍ່າງແດ່ ຢືນແດ່ ນັ່ງແດ່ ນອນແດ່ ໃນກາງອາກາດ ທ່ານຜູ້ມີລິດນັ້ນເຖິງຄວາມຊໍານານແຫ່ງຈິດ ຍ່າງແດ່ ຢືນແດ່ ນັ່ງແດ່ ນອນແດ່ ໃນກາງອາກາດເໝືອນນົກບິນໄປກໍໄດ້ ປຽບເໝືອນພວກມະນຸດຜູ້ບໍ່ມີລິດ ໂດຍປົກກະຕິຍ່າງແດ່ ຢືນແດ່ ນັ່ງແດ່ ນອນແດ່ ເທິງແຜ່ນດິນ

[໑໔] ຄໍາວ່າ ໃຊ້ຝ່າມືລູບຈັບດວງຈັນແລະດວງອາທິດເຊິ່ງມີລິດມີອານຸພາບຫຼາຍແນວນີ້ກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດໃນສາດສະໜານີ້ເຖິງຄວາມຊໍານານແຫ່ງຈິດ ນັ່ງຫຼື ນອນກໍຕາມນຶກເຖິງດວງຈັນແລະດວງອາທິດແລ້ວອະທິຖານດ້ວຍຍານວ່າດວງຈັນແລະດວງອາທິດຈົ່ງມີໃນທີ່ໃກ້ມື ກໍມີໃນທີ່ໃກ້ມືໄດ້ ທ່ານຜູ້ມີລິດນັ້ນນັ່ງຫຼືນອນກໍຕາມ ໃຊ້ຝ່າມືລູບຈັບດວງຈັນແລະດວງອາທິດນີ້ ທ່ານຜູ້ມີລິດນັ້ນເຖິງຄວາມຊໍານານແຫ່ງຈິດ ນັ່ງຫຼືນອນກໍຕາມ ໃຊ້ຝ່າມືລູບຈັບດວງຈັນແລະດວງອາທິດນີ້ ປຽບ ເໝືອນພວກມະນຸດຜູ້ບໍ່ມີລິດໂດຍປົກກະຕິຍ່ອມສໍາຜັດຮູບອັນໃດ ໆ ທີ່ໃກ້ມືໄດ້ ສັນນັ້ນ

ຄໍາວ່າ ໃຊ້ອໍານາດທາງກາຍໄປຕະຫຼອດພົມມະໂລກກໍໄດ້ ອະທິບາຍວ່າ ທ່ານຜູ້ມີລິດເຖິງຄວາມຊໍານານແຫ່ງຈິດນັ້ນ ຖ້າປະສົງຈະໄປສູ່ພົມມະໂລກ ກໍອະທິຖານບ່ອນໄກໃຫ້ເປັນບ່ອນໃກ້ວ່າ ຈົ່ງເປັນບ່ອນໃກ້ ກໍເປັນບ່ອນໃກ້ໄດ້ ອະທິຖານບ່ອນໃກ້ໃຫ້ເປັນບ່ອນໄກວ່າ ຈົ່ງເປັນບ່ອນໄກ ກໍເປັນບ່ອນໄກໄດ້ ອະທິຖານຂອງຫຼາຍໃຫ້ເປັນຂອງໜ້ອຍວ່າ ຈົ່ງເປັນຂອງໜ້ອຍ ກໍເປັນຂອງໜ້ອຍໄດ້ ອະທິຖານຂອງໜ້ອຍໃຫ້ເປັນຂອງຫຼາຍວ່າ ຈົ່ງເປັນຂອງຫຼາຍ ກໍເປັນຂອງຫຼາຍໄດ້ ຍ່ອມເຫັນຮູບພົມນັ້ນໄດ້ດ້ວຍທິບພະຈັກຂຸ ຍ່ອມຟັງສຽງພົມນັ້ນໄດ້ດ້ວຍທິບພະໂສຕະທາດ ຍ່ອມຮູ້ຈິດຂອງພົມນັ້ນໄດ້ດ້ວຍເຈໂຕປະຣິຍະຍານ ຖ້າທ່ານຜູ້ມີລິດເຖິງຄວາມຊໍານານແຫ່ງຈິດນັ້ນ ປະສົງຈະໄປສູ່ພົມມະໂລກດ້ວຍກາຍທີ່ຜາກົດ ກໍນ້ອມຈິດອະທິຖານດ້ວຍອໍານາດກາຍ ເມື່ອຢັ່ງລົງສູ່ສຸຂະສັນຍາ ແລະລະຫຸສັນຍາແລ້ວກໍໄປສູ່ພົມມະໂລກໄດ້ ດ້ວຍກາຍທີ່ຜາກົດຢູ່ ຖ້າທ່ານຜູ້ມີລິດເຖິງຄວາມຊໍານານແຫ່ງຈິດນັ້ນ ປະສົງຈະໄປສູ່ພົມມະໂລກດ້ວຍກາຍທີ່ບໍ່ຜາກົດ ກໍນ້ອມກາຍອະທິຖານດ້ວຍອໍານາດຈິດ ເມື່ອຢັ່ງລົງສູ່ສຸຂະສັນຍາແລະລະຫຸສັນຍາແລ້ວກໍໄປສູ່ພົມມະໂລກໄດ້ດ້ວຍກາຍທີ່ບໍ່ຜາກົດ ທ່ານຜູ້ມີລິດເນຣະມິດຮູບທີ່ສໍາເລັດດ້ວຍໃຈ ມີອະໄວຍະວະຄົບທຸກສ່ວນ ມີອິນຊີບໍ່ບົກຜ່ອງໄວ້ຂ້າງໜ້າຂອງພົມນັ້ນ ຖ້າທ່ານຜູ້ມີລິດຍ່າງຢູ່ ຮູບກາຍເນຣະມິດນັ້ນກໍຍ່າງຢູ່ ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດຢືນຢູ່ ຮູບກາຍເນຣະມິດກໍຢືນຢູ່ ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດນັ່ງຢູ່ ຮູບກາຍເນຣະມິດກໍນັ່ງຢູ່ ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດນອນຢູ່ ຮູບກາຍເນຣະມິດກໍນອນຢູ່ ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດບັງຫວນຄວັນຢູ່ ຮູບກາຍເນຣະມິດກໍບັງຫວນຄວັນຢູ່ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດເຮັດໃຫ້ໄຟລຸກຢູ່ ຮູບກາຍເນຣະມິດກໍມີໄຟລຸກຢູ່ ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດກ່າວທໍາຢູ່ ຮູບກາຍເນຣະມິດກໍກ່າວທໍາຢູ່ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດຖາມບັນຫາຢູ່ ຮູບກາຍເນຣະມິດກໍຖາມບັນຫາຢູ່ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດຖືກຮູບກາຍເນຣະມິດຖາມບັນຫາກໍແກ້

ບັນຫາຢູ່ ຮູບກາຍເນຣະມິດຖືກທ່ານຜູ້ມີລິດຖາມບັນຫາກໍແກ້ບັນຫາຢູ່ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດຢືນສົນທະນາປາໄສກັບພິມນັ້ນຢູ່ ຮູບກາຍເນຣະມິດກໍຢືນສົນທະນາປາໄສກັບພິມນັ້ນຢູ່ໃນບ່ອນນັ້ນ ຖ້າທ່ານຜູ້ມີລິດເຮັດກິດໃດຢູ່ ຮູບກາຍເນຣະມິດກໍເຮັດກິດນັ້ນ ໆ ຢູ່ ນີ້ລິດທີ່ອະທິຖານ (໑)

[໑໓] ລິດທີ່ສະແດງໄດ້ຕ່າງ ໆ ເປັນແນວໃດ?

ຄື ພຣະເຖຣະຊື່ອະພິພູເປັນສາວົກຂອງພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າ ພະນາມວ່າສິຂີ ສະຖິດຢູ່ໃນພົມມະໂລກ ເປ່ງສຽງໃຫ້ພັນໂລກທາດຮັບຮູ້ ທ່ານສະແດງ ທຳດ້ວຍກາຍທີ່ຜາກົດກໍມີ ດ້ວຍກາຍທີ່ບໍ່ຜາກົດກໍມີ ດ້ວຍກາຍເຄິ່ງໜຶ່ງສ່ວນລຸ່ມ ຜາກົດກໍມີ ດ້ວຍກາຍເຄິ່ງໜຶ່ງສ່ວນເທິງບໍ່ຜາກົດກໍມີ ດ້ວຍກາຍເຄິ່ງໜຶ່ງສ່ວນເທິງຜາກົດກໍມີ ດ້ວຍກາຍເຄິ່ງໜຶ່ງສ່ວນລຸ່ມບໍ່ຜາກົດກໍມີ ທ່ານລະເພດປົກກະຕິແລ້ວສະແດງເພດເປັນກຸມານແດ່ ສະແດງເພດເປັນນາກແດ່ ສະແດງເພດເປັນຄຸດແດ່ ສະແດງເພດເປັນຍັກແດ່ ສະແດງເພດເປັນອະສູນແດ່ ສະແດງເພດເປັນພຣະອິນແດ່ ສະແດງເພດເປັນເທວະດາແດ່ ສະແດງເພດເປັນພົມແດ່ ສະແດງຮູບມະຫາສະມຸດແດ່ ສະແດງຮູບພູເຂົາແດ່ ສະແດງຮູບປ່າແດ່ ສະແດງຮູບຣາດຊະສີແດ່ ສະແດງຮູບເສືອໂຄ່ງແດ່ ສະແດງຮູບເສືອເຫຼືອງແດ່ ສະແດງຮູບຊ້າງແດ່ ສະແດງພົນມ້າແດ່ ສະແດງພົນລົດແດ່ ສະແດງພົນບົກແດ່ ສະແດງກອງທັບຕັ້ງປະຊິດກັນຕ່າງ ໆ ແດ່ ນີ້ລິດທີ່ສະແດງໄດ້ຕ່າງ ໆ (໔)

[໑໔] ລິດທີ່ສຳເລັດດ້ວຍໃຈ ເປັນແນວໃດ?

ຄື ພິກຂຸໃນສາດສະໜານີ້ເນຣະມິດກາຍອື່ນຈາກກາຍນີ້ມີຮູບສຳເລັດດ້ວຍໃຈ ມີອະໄວຍະວະ ຄົບທຸກສ່ວນ ມີອິນຊີບໍ່ບົກຜ່ອງ ປຽບເໝືອນບຸຣຸດດຶງໄສ້ອອກຈາກຫຍ້າປ້ອງ ເຂົາເພິ່ງມີຄວາມໝາຍຮູ້ແນວນີ້ວ່າ ນີ້ຫຍ້າປ້ອງ ນີ້ໄສ້ ຫຍ້າປ້ອງເປັນແນວໜຶ່ງ ໄສ້ກໍເປັນແນວໜຶ່ງ ແຕ່ໄສ້ກໍດຶງອອກຈາກຫຍ້າປ້ອງນັ້ນເອງ ອີກປະການໜຶ່ງ ບຸຣຸດດຶງດາບອອກຈາກຝັກ ເຂົາເພິ່ງມີຄວາມໝາຍຮູ້ແນວນີ້ວ່າ ນີ້ດາບ ນີ້ຝັກດາບເປັນແນວໜຶ່ງ ຝັກກໍເປັນແນວໜຶ່ງ ແຕ່ດາບກໍດຶງອອກຈາກຝັກນັ້ນເອງ ອີກປະການໜຶ່ງ ບຸຣຸດເອົາງູອອກຈາກທໍ່ ເຂົາເພິ່ງມີຄວາມໝາຍຮູ້ແນວນີ້ວ່າ ນີ້ງູ ນີ້ທໍ່ ງູເປັນແນວໜຶ່ງ ທໍ່ກໍເປັນແນວໜຶ່ງ ແຕ່ງູກໍອອກຈາກທໍ່ນັ້ນ ສັນໃດ ພິກຂຸນັ້ນກໍສັນນັ້ນຄືກັນ ເນຣະມິດກາຍອື່ນນອກຈາກກາຍນີ້ມີຮູບສຳເລັດດ້ວຍໃຈ ມີອະໄວຍະວະຄົບທຸກສ່ວນ ມີອິນຊີບໍ່ບົກຜ່ອງ ນີ້ລິດທີ່ສຳເລັດດ້ວຍໃຈ (໓)

[໑໕] ລິດທີ່ແຜ່ໄປດ້ວຍຍານ ເປັນແນວໃດ?

ຄື ສະພາວະທີ່ລະນິດຈະສັນຍາຍ່ອມສຳເລັດໄດ້ດ້ວຍອະນິດຈານຸປັດສະນາ ຍ້ອນເຫດນັ້ນ ຈຶ່ງເປັນລິດທີ່ແຜ່ໄປດ້ວຍຍານ ສະພາວະທີ່ລະສຸຂະສັນຍາຍ່ອມສຳເລັດໄດ້ດ້ວຍທຸກຂານຸປັດສະນາ ຯລຯ ສະພາວະທີ່ລະອັດຕະສັນຍາຍ່ອມສຳເລັດໄດ້ດ້ວຍອະນັດຕານຸປັດສະນາ ຯລຯ

ສະພາວະທີ່ລະນັນທິຍ່ອມສຳເລັດໄດ້ດ້ວຍນິບພິທານຸປັດສະນາ ຯລຯ ສະພາວະທີ່ລະຣາຄະ ຍ່ອມສຳເລັດໄດ້ດ້ວຍວິຣາຄານຸປັດສະນາ ຯລຯ ສະພາວະທີ່ລະສະມຸໄທຍ່ອມສຳເລັດໄດ້ດ້ວຍ ນິໂຣທານຸປັດສະນາ ຯລຯ ສະພາວະທີ່ລະອາທານະຍ່ອມສຳເລັດໄດ້ດ້ວຍປະຕິນິດສັກຄານຸປັດ ສະນາ ຍ້ອນເຫດນັ້ນ ຈຶ່ງເປັນລິດທີ່ແຜ່ໄປດ້ວຍຍານ ທ່ານພຣະພາກຸລະ ທ່ານພຣະສັງກິດຈະ ທ່ານພຣະພູຕະປາລະມີລິດທີ່ແຜ່ໄປດ້ວຍຍານ ນີ້ລິດທີ່ແຜ່ໄປດ້ວຍຍານ (໔)

[໑໖] ລິດທີ່ແຜ່ໄປດ້ວຍສະມາທິ ເປັນແນວໃດ?

ຄື ສະພາວະທີ່ລະນິວອນຍ່ອມສຳເລັດໄດ້ດ້ວຍປະຖົມຊານ ຍ້ອນເຫດນັ້ນ ຈຶ່ງເປັນລິດທີ່ ແຜ່ໄປດ້ວຍສະມາທິ ສະພາວະທີ່ລະວິຕົກວິຈານຍ່ອມສຳເລັດໄດ້ດ້ວຍທຸຕິຍະຊານ ຍ້ອນເຫດນັ້ນ ຈຶ່ງເປັນລິດທີ່ແຜ່ໄປດ້ວຍສະມາທິ ສະພາວະທີ່ລະປີຕິຍ່ອມສຳເລັດໄດ້ດ້ວຍຕະຕິຍະຊານ ຯລຯ ສະພາວະທີ່ລະສຸກແລະທຸກຍ່ອມສຳເລັດໄດ້ດ້ວຍຈະຕຸດຖະຊານ ຯລຯ ສະພາວະທີ່ລະຮູບສັນຍາ ປະຕິຄະສັນຍາ ນານັດຕະສັນຍາຍ່ອມສຳເລັດໄດ້ດ້ວຍອາກາສານັນຈາຍະຕະນະສະມາບັດ ຯລຯ ສະພາວະທີ່ລະອາກາສານັນຈາຍະຕະນະສັນຍາຍ່ອມສຳເລັດໄດ້ດ້ວຍວິນຍານັນຈາຍະຕະ ນະສະມາບັດ ຯລຯ ສະພາວະທີ່ລະວິນຍານັນຈາຍະຕະນະສັນຍາ ຍ່ອມສຳເລັດໄດ້ດ້ວຍອາກິນ ຈັນຍາຍະຕະນະສະມາບັດ ຯລຯ ສະພາວະທີ່ລະອາກິນຈັນຍາຍະຕະນະສັນຍາ ຍ່ອມສຳເລັດ ໄດ້ດ້ວຍເນວະສັນຍານາສັນຍາຍະຕະນະສະມາບັດ ຍ້ອນເຫດນັ້ນ ຈຶ່ງເປັນລິດທີ່ແຜ່ໄປດ້ວຍສະ ມາທິ ທ່ານພຣະສາຣີບຸດມີລິດທີ່ແຜ່ໄປດ້ວຍສະມາທິ ທ່ານພຣະສັນຊີວະມີລິດທີ່ແຜ່ໄປດ້ວຍສະ ມາທິ ທ່ານພຣະຂານຸໂກນທັນຍະມີລິດທີ່ແຜ່ໄປດ້ວຍສະມາທິ ອຸດຕະຣາອຸປາສິກາມີລິດທີ່ແຜ່ໄປ ດ້ວຍສະມາທິ ສາມາວະດີອຸປາສິກາມີລິດທີ່ແຜ່ໄປດ້ວຍສະມາທິ ນີ້ລິດທີ່ແຜ່ໄປດ້ວຍສະມາທິ (໕)

[໑໗] ລິດຂອງພຣະອະຣິຍະ ເປັນແນວໃດ?

ຄື ພິກຂຸໃນສາດສະໜານີ້ ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນວ່າເປັນ ສິ່ງທີ່ບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນນັ້ນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ ປະຕິກູນນັ້ນວ່າເປັນສິ່ງທີ່ປະຕິກູນຢູ່ ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນແລະ ໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ ປະຕິກູນນັ້ນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ຖ້າຫວັງວ່າ ເຮົາເພິ່ງມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ ກໍມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນແລະໃນສິ່ງທີ່ ປະຕິກູນນັ້ນວ່າເປັນສິ່ງທີ່ປະຕິກູນຢູ່ ຖ້າຫວັງວ່າ ເຮົາເພິ່ງເວັ້ນສິ່ງທັງສອງນັ້ນ ມີອຸເປກຂາ ມີສະ ຕິສຳປະຊັນຍະໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນຢູ່ ກໍເປັນຜູ້ມີອຸເປກຂາ ມີສະຕິສຳປະຊັນ ຍະໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນນັ້ນຢູ່

ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ເປັນແນວໃດ?

ຄື ພິກຂຸແຜ່ໄປດ້ວຍເມດຕາ ຫຼືນ້ອມເຂົ້າໄປໂດຍຄວາມເປັນທາດ ໃນສິ່ງທີ່ບໍ່ໜ້າປາຖະໜາ ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ແນວນີ້

ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ ເປັນແນວໃດ?

ຄື ພິກຂຸແຜ່ໄປໂດຍຄວາມບໍ່ງາມ ຫຼືນ້ອມໄປໂດຍຄວາມບໍ່ທ່ຽງໃນສິ່ງທີ່ໜ້າປາຖະໜາ ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ແນວນີ້

ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນ ແລະໃນສິ່ງທີ່ບໍ່ປະຕິກູນວ່າເປັນສິ່ງທີ່ບໍ່ປະຕິກູນຢູ່ ເປັນແນວໃດ?

ຄື ພິກຂຸແຜ່ໄປດ້ວຍເມດຕາ ຫຼືນ້ອມເຂົ້າໄປໂດຍຄວາມເປັນທາດໃນສິ່ງທີ່ບໍ່ໜ້າປາຖະໜາແລະໜ້າປາຖະໜາ ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນວ່າ ເປັນສິ່ງທີ່ບໍ່ປະຕິກູນຢູ່ແນວນີ້

ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນ ແລະໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ ເປັນແນວໃດ?

ຄື ພິກຂຸແຜ່ໄປໂດຍຄວາມບໍ່ງາມ ຫຼືນ້ອມເຂົ້າໄປໂດຍຄວາມບໍ່ທ່ຽງ ໃນສິ່ງທີ່ໜ້າປາຖະໜາແລະບໍ່ໜ້າປາຖະໜາ ພິກຂຸມີຄວາມໝາຍຮູ້ໃນສິ່ງທີ່ບໍ່ປະຕິກູນແລະໃນສິ່ງທີ່ປະຕິກູນວ່າເປັນສິ່ງທີ່ປະຕິກູນຢູ່ແນວນີ້

ພິກຂຸເວັ້ນສິ່ງທັງສອງນັ້ນ ມີອຸເປກຂາ ມີສະຕິສຳປະຊັນຍະໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນຢູ່ ເປັນແນວໃດ?

ຄື ພິກຂຸໃນສາດສະໜານີ້ເຫັນຮູບທາງຕາແລ້ວ ບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະ ຟັງສຽງທາງຫູ ຯລຯ ດົມກິ່ນທາງດັງ ຯລຯ ຊີມຣົດທາງລີ້ນ ຯລຯ ຖືກຕ້ອງໂຜດຖັບພະທາງກາຍ ຯລຯ ຮູ້ແຈ້ງທຳມາຣົມທາງໃຈແລ້ວບໍ່ດີໃຈ ບໍ່ເສຍໃຈ ມີອຸເປກຂາ ມີສະຕິສຳປະຊັນຍະຢູ່ ພິກຂຸເວັ້ນສິ່ງທັງສອງນັ້ນ ມີອຸເປກຂາ ມີສະຕິສຳປະຊັນຍະ ໃນສິ່ງທີ່ປະຕິກູນແລະໃນສິ່ງທີ່ບໍ່ປະຕິກູນຢູ່ແນວນີ້ ນີ້ລິດຂອງພຣະອະຣິຍະ (໖)

[໑໗] ລິດທີ່ເກີດຈາກຜົນກຳ ເປັນແນວໃດ?

ຄື ນົກທຸກຊະນິດ ເທວະດາທຸກຈຳພວກ ມະນຸດບາງພວກ ວິນິປາຕິກະເຜດບາງພວກ ມີລິດເກີດຈາກຜົນກຳ ນີ້ລິດທີ່ເກີດຈາກຜົນກຳ (໗)

ລິດຂອງທ່ານຜູ້ມີບຸນ ເປັນແນວໃດ?

ຄື ພຣະເຈົ້າຈັກກະພັດສະເດັດເຫາະໄປໃນອາກາດພ້ອມດ້ວຍຈະຕຸຣົງຄິນິເສນາ[១] ຕະຫຼອດຈົນ ພວກຄົນລ້ຽງມ້າເປັນທີ່ສຸດ ລິດຂອງໂຊຕິຍະຄະຫະບໍດີຜູ້ມີບຸນ ລິດຂອງຊະດິລະຄະຫະບໍດີຜູ້ມີບຸນ ລິດຂອງເມນທະກະຄະຫະບໍດີຜູ້ມີບຸນ ລິດຂອງໂຄສິດຄະຫະບໍດີຜູ້ມີບຸນ ລິດຂອງທ່ານຜູ້ມີບຸນຫຼາຍ ໕ ທ່ານນີ້ເປັນລິດຂອງທ່ານຜູ້ມີບຸນ ນີ້ລິດຂອງທ່ານຜູ້ມີບຸນ (໘)

ລິດທີ່ສຳເລັດມາຈາກວິດຊາ ເປັນແນວໃດ?

ຄື ພວກວິທະຍາທອນຈົ່ມວິຊາແລ້ວເຫາະໄປໄດ້ ສະແດງພົນຊ້າງແດ່ ສະແດງພົນມ້າແດ່ ສະແດງພົນລົດແດ່ ສະແດງພົນບົກແດ່ ສະແດງກອງທັບຕັ້ງປະຊິດກັນຕ່າງ ໆ ແດ່ ໃນກາງອາກາດ ນີ້ລິດທີ່ສຳເລັດມາຈາກວິດຊາ (໙)

ຊື່ວ່າລິດຍ້ອນມີສະພາວະສຳເລັດດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໄຈ ເປັນແນວໃດ?

ຄື ສະພາວະທີ່ລະກາມສັນທະ ຍ່ອມສຳເລັດໄດ້ດ້ວຍເນກຂຳມະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າລິດຍ້ອນມີສະພາວະສຳເລັດດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໄຈ ສະພາວະແຫ່ງການລະພະຍາບາດຍ່ອມສຳເລັດໄດ້ດ້ວຍອະພະຍາບາດ ຯລຯ ສະພາວະທີ່ລະຖີນະມິດທະຍ່ອມສຳເລັດໄດ້ດ້ວຍອາໂລກະສັນຍາ ຯລຯ ສະພາວະທີ່ລະກິເລດທັງປວງຍ່ອມສຳເລັດໄດ້ດ້ວຍອະຣະຫັດຕະມັກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າລິດຍ້ອນມີສະພາວະສຳເລັດດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໄຈ ຊື່ວ່າລິດຍ້ອນມີສະພາວະສຳເລັດ ດ້ວຍການປະກອບໂດຍຊອບໃນສ່ວນນັ້ນ ໆ ເປັນປັດໄຈແນວນີ້ (໑໐)

ລິດ ໑໐ ປະການເປັນແນວນີ້

**ທະສະອິດທິນິດເທດ ຈົບ**

**ອິດທິກະຖາ ຈົບ**

## ໓. ອະພິສະມະຍະກະຖາ

## ວ່າດ້ວຍການຕັດສະຣູ້

[໑໙] ຄຳວ່າ ການຕັດສະຣູ້ ອະທິບາຍວ່າ ຕັດສະຣູ້ດ້ວຍອັນໃດ ຄື ຕັດສະຣູ້ ດ້ວຍຈິດ

ຕັດສະຣູ້ດ້ວຍຈິດບໍ ຖ້າແນວນັ້ນ ບຸກຄົນຜູ້ບໍ່ມີຍານ ກໍຕັດສະຣູ້ໄດ້ ບຸກຄົນຜູ້ບໍ່ມີຍານຕັດສະຣູ້ບໍ່ໄດ້ ຕັດສະຣູ້ດ້ວຍຍານ

ຕັດສະຣູ້ດ້ວຍຍານບໍ ຖ້າແນວນັ້ນ ບຸກຄົນຜູ້ບໍ່ມີຈິດກໍຕັດສະຣູ້ໄດ້ ບຸກຄົນຜູ້ບໍ່ມີຈິດກໍຕັດສະຣູ້ບໍ່ໄດ້ ຕັດສະຣູ້ໄດ້ດ້ວຍຈິດແລະດ້ວຍຍານ

ຕັດສະຮູ້ໄດ້ດ້ວຍຈິດແລະຍານບໍ ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍກາມາວະຈອນຈິດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍກາມາວະຈອນຈິດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍຮູບປາວະຈອນຈິດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍຮູບປາວະຈອນຈິດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍອະຮູບປາວະຈອນຈິດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍອະຮູບປາວະຈອນຈິດ ແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍກຳມັດສະກະຕາຈິດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍກຳມັດສະກະຕາຈິດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍສັດຈານຸໂລມິກະຈິດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍສັດຈານຸໂລມິກະຈິດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍຈິດທີ່ເປັນອະດີດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍຈິດທີ່ເປັນອະດີດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍຈິດທີ່ເປັນອະນາຄົດແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍຈິດທີ່ເປັນອະນາຄົດແລະຍານບໍ່ໄດ້

ຖ້າແນວນັ້ນ ກໍຕັດສະຮູ້ໄດ້ດ້ວຍໂລກິຍະຈິດທີ່ເປັນປັດຈຸບັນແລະຍານແນວນັ້ນບໍ ຕັດສະຮູ້ດ້ວຍ ໂລກິຍະຈິດທີ່ເປັນປັດຈຸບັນແລະຍານບໍ່ໄດ້ (ແຕ່ )ຕັດສະຮູ້ໄດ້ດ້ວຍຈິດທີ່ເປັນປັດຈຸບັນແລະຍານໃນ ຂະນະແຫ່ງໂລກຸດຕະຣະມັກ

ຕັດສະຮູ້ໄດ້ດ້ວຍຈິດທີ່ເປັນປັດຈຸບັນ ແລະຍານໃນຂະນະແຫ່ງໂລກຸດຕະຣະມັກ ເປັນແນວໃດ?

ຄື ໃນຂະນະແຫ່ງໂລກຸດຕະຣະມັກ ຈິດເປັນໃຫຍ່ໃນການໃຫ້ເກີດຂຶ້ນ ແລະເປັນເຫດເປັນປັດໄຈແຫ່ງຍານ ຈິດທີ່ສຳປະຍຸດດ້ວຍຍານນັ້ນມີນິໂຣດເປັນໂຄຈອນ ຍານເປັນໃຫຍ່ໃນການເຫັນ ແລະເປັນເຫດເປັນປັດໄຈແຫ່ງຈິດ ຍານທີ່ສຳປະຍຸດດ້ວຍຈິດນັ້ນມີນິໂຣດເປັນໂຄຈອນ ຍ່ອມຕັດສະຮູ້ດ້ວຍຈິດທີ່ເປັນປັດຈຸບັນ ແລະດ້ວຍຍານໃນຂະນະແຫ່ງໂລກຸດຕະຣະມັກແນວນີ້

[໔໐] ຖາມ : ການຕັດສະຮູ້ມີເທົ່ານີ້ບໍ

ຕອບ : ບໍ່ແມ່ນມີເທົ່ານີ້ ໃນຂະນະແຫ່ງໂລກຸດຕະຣະມັກ ການຕັດສະຮູ້ຄືຄວາມເຫັນ ຊື່ວ່າສຳມາທິດຖິ ການຕັດສະຮູ້ຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ການຕັດສະຮູ້ຄືການກຳນົດ ຊື່ວ່າສຳມາວາຈາ ການຕັດສະຮູ້ຄືສະມຸດຖານ ຊື່ວ່າສຳມາກຳມັນຕະ ການຕັດສະຮູ້ຄືຄວາມຜ່ອງແຜ້ວ ຊື່ວ່າສຳມາອາຊີວະ ການຕັດສະຮູ້ຄືຄວາມຕັ້ງໝັ້ນ ຊື່ວ່າສຳມາສະຕິ ການຕັດສະຮູ້ຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສຳມາສະມາທິ

ການຕັດສະຮູ້ຄືຄວາມຕັ້ງໝັ້ນ ຊື່ວ່າສະຕິສຳໂພດຊົງ ໗ລ໗ ການຕັດສະຮູ້ຄື ການພິຈາລະນາ ຊື່ວ່າອຸເປກຂາສຳໂພດຊົງ

ການຕັດສະຮູ້ຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມບໍ່ມີສັດທາ ຊື່ວ່າສັດທາພະລະ ການຕັດສະຮູ້ຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຂີ້ຄ້ານ ຊື່ວ່າວິຣິຍະພະລະ ການຕັດສະຮູ້ຄືຄວາມບໍ່ຫວັ່ນໄຫວຍ້ອນຄວາມຜະໝາດ ຊື່ວ່າສະຕິພະລະ ການຕັດສະຮູ້ຄືຄວາມບໍ່ຫວັ່ນໄຫວຍ້ອນອຸດທັດຈະ ຊື່ວ່າສະມາທິພະລະ ການຕັດສະຮູ້ຄືຄວາມບໍ່ຫວັ່ນໄຫວຍ້ອນອະວິດຊາ ຊື່ວ່າ ປັນຍາພະລະ

ການຕັດສະຮູ້ຄືຄວາມນ້ອມໃຈເຊື່ອ ຊື່ວ່າສັດທິນຊີ ການຕັດສະຮູ້ຄືການປະຄອງໄວ້ ຊື່ວ່າວິຣິຍິນຊີ ການຕັດສະຮູ້ຄືຄວາມຕັ້ງໝັ້ນ ຊື່ວ່າສະຕິນຊີ ການຕັດສະຮູ້ຄືຄວາມບໍ່ຟຸ້ງຊ່ານ ຊື່ວ່າສະມາທິນຊີ ການຕັດສະຮູ້ຄືຄວາມເຫັນ ຊື່ວ່າປັນຍິນຊີ ການຕັດສະຮູ້ທີ່ຊື່ວ່າອິນຊີ ຍ້ອນມີສະພາວະເປັນໃຫຍ່ ການຕັດສະຮູ້ທີ່ຊື່ວ່າພະລະ ຍ້ອນມີສະພາວະບໍ່ຫວັ່ນໄຫວ ການຕັດສະຮູ້ທີ່ຊື່ວ່າໂພດຊົງ ຍ້ອນມີສະພາວະນຳອອກ

ການຕັດສະຮູ້ທີ່ຊື່ວ່າມັກ ຍ້ອນມີສະພາວະເປັນເຫດ ການຕັດສະຮູ້ທີ່ຊື່ວ່າສະຕິປັດຖານຍ້ອນມີສະພາວະຕັ້ງໝັ້ນ ການຕັດສະຮູ້ທີ່ຊື່ວ່າສຳມັບປະທານ ຍ້ອນມີສະພາວະດຳຣົງໄວ້

ການຕັດສະຮູ້ທີ່ຊື່ວ່າອິດທິບາດ ຍ້ອນມີສະພາວະໃຫ້ສຳເລັດ ການຕັດສະຮູ້ທີ່ຊື່ວ່າສັດຈະຍ້ອນມີສະພາວະເປັນຂອງແທ້ ການຕັດສະຮູ້ທີ່ຊື່ວ່າສະມະຖະ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ການຕັດສະຮູ້ທີ່ຊື່ວ່າວິປັດສະນາ ຍ້ອນມີສະພາວະພິຈາລະນາເຫັນ ການຕັດສະຮູ້ທີ່ຊື່ວ່າສະມະຖະແລະວິປັດສະນາ ຍ້ອນມີສະພາວະມີຣົດເປັນແນວດຽວກັນ ການຕັດສະຮູ້ທີ່ຊື່ວ່າທຳທີ່ເປັນຄູ່ກັນຍ້ອນມີສະພາວະບໍ່ລ່ວງເລີຍກັນ

ການຕັດສະຮູ້ທີ່ຊື່ວ່າສີລະວິສຸດທິ ຍ້ອນມີສະພາວະສັງລວມ ການຕັດສະຮູ້ທີ່ຊື່ວ່າຈິດຕະວິສຸດທິ ຍ້ອນມີສະພາວະບໍ່ຟຸ້ງຊ່ານ ການຕັດສະຮູ້ທີ່ຊື່ວ່າທິດຖິ ຍ້ອນມີສະພາວະເຫັນ ການຕັດສະຮູ້ທີ່ຊື່ວ່າອະທິໂມກ ຍ້ອນມີສະພາວະລຸດພົ້ນ ການຕັດສະຮູ້ທີ່ຊື່ວ່າວິດຊາ ຍ້ອນມີສະພາວະຮູ້ແຈ້ງ ການຕັດສະຮູ້ທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະສະລະ ການຕັດສະຮູ້ທີ່ຊື່ວ່າຍານໃນຄວາມສິ້ນໄປ ຍ້ອນມີສະພາວະຕັດຂາດ ການຕັດສະຮູ້ທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນເຫດການຕັດສະຮູ້ທີ່ຊື່ວ່າມະນະສິການ ຍ້ອນມີສະພາວະເປັນສະມຸດຖານ ການຕັດສະຮູ້ທີ່ຊື່ວ່າຜັດສະຍ້ອນມີສະພາວະເປັນທີ່ລວມ ການຕັດສະຮູ້ທີ່ຊື່ວ່າເວທະນາ ຍ້ອນມີສະພາວະເປັນທີ່ປະຊຸມ ການຕັດສະຮູ້ທີ່ຊື່ວ່າສະມາທິ ຍ້ອນມີສະພາວະເປັນປະທານ ການຕັດສະຮູ້ທີ່ຊື່ວ່າສະຕິ ຍ້ອນມີສະພາວະເປັນໃຫຍ່ ການຕັດສະຮູ້ທີ່ຊື່ວ່າປັນຍາ ຍ້ອນມີສະພາວະເປັນທຳທີ່ຍິ່ງກວ່າທຳນັ້ນ ການຕັດສະຮູ້ທີ່ຊື່ວ່າວິມຸດຕິ ຍ້ອນມີສະພາວະເປັນແກ່ນສານ ການຕັດສະຮູ້ທີ່ຊື່ວ່າ ທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

[໔໑] ຖາມ : ການຕັດສະຣູ້ມີເທົ່ານີ້ບໍ

ຕອບ : ບໍ່ແມ່ນມີເທົ່ານີ້ ໃນຂະນະແຫ່ງໂສດາປັດຕິມັກ ການຕັດສະຣູ້ຄືຄວາມເຫັນ ຊື່ວ່າສຳມາທິດຖິ ຯລຯ ການຕັດສະຣູ້ທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ຖາມ : ການຕັດສະຣູ້ມີເທົ່ານີ້ບໍ

ຕອບ : ບໍ່ແມ່ນມີເທົ່ານີ້ ໃນຂະນະແຫ່ງໂສດາປັດຕິຜົນ ການຕັດສະຣູ້ຄືຄວາມເຫັນ ຊື່ວ່າສຳມາທິດຖິ ຯລຯ ການຕັດສະຣູ້ທີ່ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະຣະງັບ ການຕັດສະຣູ້ທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ຯລຯ ການ ຕັດສະຣູ້ທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ຖາມ : ການຕັດສະຣູ້ມີເທົ່ານີ້ບໍ

ຕອບ : ບໍ່ແມ່ນມີເທົ່ານີ້ ໃນຂະນະແຫ່ງສະກະທາຄາມີມັກ ຯລຯ ໃນຂະນະແຫ່ງສະກະທາຄາມີຜົນ ຯລຯ ໃນຂະນະແຫ່ງອະນາຄາມີມັກ ຯລຯ ໃນຂະນະແຫ່ງອະນາຄາມີຜົນ ຯລຯ ໃນຂະນະແຫ່ງອະຣະຫັດຕະມັກ ຯລຯ ໃນຂະນະແຫ່ງອະຣະຫັດຕະຜົນ ການຕັດສະຣູ້ຄືຄວາມເຫັນ ຊື່ວ່າສຳມາທິດຖິ ການຕັດສະຣູ້ຄືຄວາມນຶກຕອງ ຊື່ວ່າສຳມາສັງກັບປະ ຯລຯ ການຕັດສະຣູ້ທີ່ຊື່ວ່າອະນຸບປາທະຍານ ຍ້ອນມີສະພາວະຣະງັບ ການຕັດສະຣູ້ທີ່ຊື່ວ່າສັນທະ ຍ້ອນມີສະພາວະເປັນມູນ ຯລຯ ການຕັດສະຣູ້ທີ່ຊື່ວ່າທຳທີ່ຢັ່ງລົງສູ່ອະມະຕະຄືນິບພານ ຍ້ອນມີສະພາວະເປັນບ່ອນສຸດ

ບຸກຄົນນີ້ນັ້ນຍ່ອມລະກິເລດໄດ້ ຄື ລະກິເລດທີ່ເປັນອະດີດໄດ້ ລະກິເລດທີ່ເປັນອະນາຄົດໄດ້ (ແລະ) ລະກິເລດທີ່ເປັນປັດຈຸບັນໄດ້

ຄຳວ່າ ລະກິເລດທີ່ເປັນອະດີດໄດ້ ອະທິບາຍວ່າ ບຸກຄົນລະກິເລດທີ່ເປັນອະດີດໄດ້ບໍ ຖ້າແນວນັ້ນ ບຸກຄົນນັ້ນກໍທຳກິເລດທີ່ສິ້ນແລ້ວໃຫ້ສິ້ນໄປ ເຮັດກິເລດທີ່ດັບແລ້ວໃຫ້ດັບໄປ ເຮັດກິເລດທີ່ປາສະຈາກແລ້ວໃຫ້ປາສະຈາກໄປ ເຮັດກິເລດທີ່ໝົດແລ້ວໃຫ້ໝົດໄປ ລະກິເລດທີ່ເປັນອະດີດເຊິ່ງບໍ່ມີຢູ່ ຍ້ອນເຫດນັ້ນ ບຸກຄົນນັ້ນຊື່ວ່າລະກິເລດທີ່ເປັນອະດີດບໍ່ໄດ້

ຄຳວ່າ ລະກິເລດທີ່ເປັນອະນາຄົດໄດ້ ອະທິບາຍວ່າ ບຸກຄົນລະກິເລດທີ່ເປັນອະນາຄົດໄດ້ບໍ ຖ້າແນວນັ້ນ ບຸກຄົນນັ້ນກໍລະກິເລດທີ່ຍັງບໍ່ເກີດ ລະກິເລດທີ່ຍັງບໍ່ບັງເກີດ ລະກິເລດທີ່ຍັງບໍ່ເກີດຂຶ້ນ ລະກິເລດທີ່ຍັງບໍ່ຜາກົດ ລະກິເລດທີ່ເປັນອະນາຄົດເຊິ່ງບໍ່ມີຢູ່ ຍ້ອນເຫດນັ້ນ ບຸກຄົນນັ້ນຊື່ວ່າລະກິເລດທີ່ເປັນອະນາຄົດບໍ່ໄດ້

ຄຳວ່າ ລະກິເລດທີ່ເປັນປັດຈຸບັນໄດ້ ອະທິບາຍວ່າ ບຸກຄົນລະກິເລດທີ່ເປັນປັດຈຸບັນໄດ້ບໍ ຖ້າແນວນັ້ນ ບຸກຄົນຜູ້ກຳໜັດກໍລະຣາຄະໄດ້ ຜູ້ຂັດເຄືອງກໍລະໂທສະໄດ້ ຜູ້ຫຼົງກໍລະໂມຫະໄດ້ ຜູ້ມີມານະຜູກພັນກໍລະມານະໄດ້ ຜູ້ຖືທິດຖິຜິດກໍລະທິດຖິໄດ້ ຜູ້ເຖິງຄວາມຟຸ້ງຊ່ານ ກໍລະອຸດທັດຈະ

ໄດ້ ຜູ້ລັງເລບໍ່ແນ່ໃຈກໍລະວິຈິກິດສາໄດ້ ຜູ້ມີເຫື່ອແຮງກໍລະອະນຸໄສໄດ້ ທໍາຝ່າຍດໍາແລະທໍາຝ່າຍຂາວ ເປັນທໍາຄູ່ກັນເປັນໄປນໍາກັນ ມັກຄະພາວະນາທີ່ມີຄວາມໝົ່ນໝອງ ດ້ວຍກິເລດນັ້ນຈຶ່ງມີຢູ່ ຍ້ອນເຫດນັ້ນ ບຸກຄົນນັ້ນຊື່ວ່າລະກິເລດທີ່ເປັນອະດີດບໍ່ໄດ້ ລະກິເລດທີ່ເປັນອະນາຄົດບໍ່ໄດ້ (ແລະ) ລະກິເລດທີ່ເປັນປັດຈຸບັນບໍ່ໄດ້

ບຸກຄົນລະກິເລດທີ່ເປັນອະດີດບໍ່ໄດ້ ລະກິເລດທີ່ເປັນອະນາຄົດບໍ່ໄດ້ (ແລະ) ລະກິເລດທີ່ເປັນປັດຈຸບັນບໍ່ໄດ້ບໍ ຖ້າແນວນັ້ນ ມັກຄະພາວະນາກໍບໍ່ມີ ການເຮັດຜົນໃຫ້ແຈ້ງກໍບໍ່ມີ ການລະກິເລດກໍບໍ່ມີ ທໍາມາພິສະໄໝກໍບໍ່ມີ ມັກຄະພາວະນາມີຢູ່ ການເຮັດຜົນໃຫ້ແຈ້ງກໍມີຢູ່ ການລະກິເລດກໍມີຢູ່ ທໍາມາພິສະໄໝກໍມີຢູ່ ເໝືອນອັນໃດ ເໝືອນຕົ້ນໄມ້ກໍາລັງສູງໃຫຍ່ຍັງບໍ່ເກີດຜົນ ບຸຣຸດເພິ່ງຕັດຕົ້ນໄມ້ນັ້ນທີ່ຮາກ ຜົນທີ່ຍັງບໍ່ເກີດຂອງຕົ້ນໄມ້ນັ້ນກໍເກີດບໍ່ໄດ້ ທີ່ຍັງບໍ່ບັງເກີດກໍບັງເກີດບໍ່ໄດ້ ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນບໍ່ໄດ້ ທີ່ຍັງບໍ່ຜາກົດກໍຜາກົດບໍ່ໄດ້

ຄວາມເກີດຂຶ້ນເປັນເຫດ ຄວາມເກີດຂຶ້ນເປັນປັດໄຈແຫ່ງຄວາມບັງເກີດຂອງກິເລດທັງຫຼາຍ ຈິດເຫັນໂທດໃນຄວາມເກີດຂຶ້ນແລ້ວ ຈຶ່ງແລ່ນໄປສູ່ນິບພານເຊິ່ງບໍ່ມີຄວາມເກີດຂຶ້ນ ຍ້ອນຈິດແລ່ນໄປສູ່ນິບພານເຊິ່ງບໍ່ມີຄວາມເກີດຂຶ້ນ ກິເລດທີ່ເພິ່ງບັງເກີດຍ້ອນຄວາມເກີດຂຶ້ນເປັນປັດໄຈ ທີ່ຍັງບໍ່ເກີດກໍເກີດບໍ່ໄດ້ ທີ່ຍັງບໍ່ບັງເກີດກໍບັງເກີດບໍ່ໄດ້ ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນບໍ່ໄດ້ ທີ່ຍັງບໍ່ຜາກົດກໍຜາກົດບໍ່ໄດ້ ກໍສັນນັ້ນຄືກັນ ຍ້ອນເຫດດັບ ທຸກຈຶ່ງດັບດ້ວຍປະການແນວນີ້ຄວາມເປັນໄປເປັນເຫດ ຯລຯ ນິມິດເປັນເຫດ ຯລຯ ກໍາເປັນເຄື່ອງປະມວນມາເປັນເຫດ ກໍາເປັນເຄື່ອງປະມວນມາເປັນປັດໄຈ ແຫ່ງຄວາມບັງເກີດຂອງກິເລດທັງຫຼາຍ ຈິດເຫັນໂທດໃນກໍາເປັນເຄື່ອງປະມວນມາແລ້ວ ຈຶ່ງແລ່ນໄປສູ່ນິບພານເຊິ່ງບໍ່ມີກໍາເປັນເຄື່ອງປະມວນມາ ຍ້ອນຈິດແລ່ນໄປສູ່ນິບພານເຊິ່ງບໍ່ມີກໍາເປັນເຄື່ອງປະມວນມາ ກິເລດທີ່ເພິ່ງບັງເກີດຍ້ອນກໍາເປັນເຄື່ອງປະມວນມາເປັນປັດໄຈ ທີ່ຍັງບໍ່ເກີດກໍເກີດບໍ່ໄດ້ ທີ່ຍັງບໍ່ບັງເກີດກໍບັງເກີດບໍ່ໄດ້ ທີ່ຍັງບໍ່ເກີດຂຶ້ນກໍເກີດຂຶ້ນບໍ່ໄດ້ ທີ່ຍັງບໍ່ຜາກົດກໍຜາກົດບໍ່ໄດ້ ຍ້ອນເຫດດັບ ທຸກຈຶ່ງດັບດ້ວຍປະການແນວນີ້ ມັກຄະພາວະນາຈຶ່ງມີຢູ່ ການເຮັດຜົນໃຫ້ແຈ້ງກໍມີຢູ່ ການລະກິເລດກໍມີຢູ່ ທໍາມາພິສະໄໝກໍມີຢູ່ດ້ວຍປະການແນວນີ້

**ອະພິສະມະຍະກະຖາ ຈົບ**

# ໔. ວິເວກກະຖາ

## ວ່າດ້ວຍວິເວກ

[໔໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ວຽກງານທີ່ຕ້ອງເຮັດດ້ວຍກໍາລັງແນວໃດແນວໜຶ່ງ ວຽກງານນັ້ນທັງໝົດບຸກຄົນຕ້ອງອາໄສແຜ່ນດິນ ດໍາຣົງຢູ່ເທິງແຜ່ນດິນ ຈຶ່ງເຮັດກັນໄດ້ ວຽກງານທີ່ຕ້ອງເຮັດດ້ວຍກໍາ

ລັງນີ້ ບຸກຄົນຍ່ອມເຮັດໄດ້ດ້ວຍອາການແນວນີ້ ແມ່ນສັນໃດ ພິກຂຸອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກມີອົງ ໘ ກໍສັນນັ້ນຄືກັນ

ພິກຂຸອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກມີອົງ ໘ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນສຳມາທິດຖິທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ (ຄວາມສະລະ) ຈະເລີນສຳມາສັງກັບປະ ฯລฯ ຈະເລີນສຳມາວາຈາ ฯລฯ ຈະເລີນສຳມາກຳມັນຕະ ฯລฯ ຈະເລີນສຳມາອາຊີວະ ฯລฯ ຈະເລີນສຳມາວາຍາມະ ฯລฯ ຈະເລີນສຳມາສະຕິ ฯລฯ ຈະເລີນສຳມາສະມາທິທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ພິກຂຸອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກມີອົງ ໘ ໄດ້ແນວນີ້

[໔໓] ພິກຂຸທັງຫຼາຍ ພີຊະຄາມແລະພູຕະຄາມເຫຼົ່າໃດເຫຼົ່າໜຶ່ງ ພີຊະຄາມແລະ ພູຕະຄາມເຫຼົ່ານັ້ນທັງໝົດອາໄສແຜ່ນດິນ ດຳຣົງຢູ່ເທິງແຜ່ນດິນ ຈຶ່ງເຖິງຄວາມຈະເລີນງອກງາມໄພບູນໄດ້ ພີຊະຄາມແລະພູຕະຄາມເຫຼົ່ານີ້ເຖິງຄວາມຈະເລີນງອກງາມໄພບູນດ້ວຍປະການແນວນີ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກມີອົງ ໘ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ດ້ວຍປະການແນວນີ້

ພິກຂຸອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກມີອົງ ໘ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນນີ້ຈະເລີນສຳມາທິດຖິທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ຈະເລີນສຳມາສັງກັບປະ ฯລฯ ຈະເລີນສຳມາວາຈາ ฯລฯ ຈະເລີນສຳມາກຳມັນຕະ ฯລฯ ຈະເລີນສຳມາອາຊີວະ ฯລฯ ຈະເລີນສຳມາວາຍາມະ ฯລฯ ຈະເລີນສຳມາສະຕິ ฯລฯ ຈະເລີນສຳມາສະມາທິທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ ພິກຂຸອາໄສສິນ ດຳຣົງຢູ່ໃນສິນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອະຣິຍະມັກ ມີອົງ ໘ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍແນວນີ້ແລ

## ໑. ມັກຄັງຄະນິດເທດ

### ສະແດງອົງແຫ່ງມັກ

[໔໔] ສຳມາທິດຖິມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔

ສຳມາສັງກັບປະ ฯລฯ

ສຳມາວາຈາ ໗໘໗
ສຳມາກຳມັນຕະ ໗໘໗
ສຳມາອາຊີວະ ໗໘໗
ສຳມາວາຍາມະ ໗໘໗
ສຳມາສະຕິ ໗໘໗
ສຳມາສະມາທິມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔
ສຳມາທິດຖິມີວິເວກ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິເວກ (ສະຫງັດດ້ວຍຂົ່ມໄວ້)
໒. ຕະທັງຄະວິເວກ (ສະຫງັດດ້ວຍອົງນັ້ນ ໆ)
໓. ສະມຸດເສດວິເວກ (ສະຫງັດດ້ວຍຕັດຂາດ)
໔. ປະຕິປັດສັດທິວິເວກ (ສະຫງັດດ້ວຍສະງົບຣະງັບ)
໕. ນິດສະຣະນະວິເວກ (ສະຫງັດດ້ວຍສະລັດອອກໄດ້)

ວິເວກໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ວິເວກໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສດວິເວກຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິວິເວກໃນຂະນະແຫ່ງຜົນ ແລະນິດສະຣະນະວິເວກທີ່ເປັນຄວາມດັບຄືນິບພານ ສຳມາທິດຖິມີວິເວກ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນວິເວກ ໕ ນີ້

ສຳມາທິດຖິມີວິຣາຄະ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິຣາຄະ (ຄາຍກຳໜັດດ້ວຍຂົ່ມໄວ້)
໒. ຕະທັງຄະວິຣາຄະ (ຄາຍກຳໜັດດ້ວຍອົງນັ້ນ ໆ)
໓. ສະມຸດເສທະວິຣາຄະ (ຄາຍກຳໜັດດ້ວຍຕັດຂາດ)
໔. ປະຕິປັດສັດທິວິຣາຄະ (ຄາຍກຳໜັດດ້ວຍສະງົບຣະງັບ)
໕. ນິດສະຣະນະວິຣາຄະ (ຄາຍກຳໜັດດ້ວຍສະລັດອອກໄດ້)

ວິຣາຄະໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ວິຣາຄະໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສທະວິຣາຄະຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິວິຣາຄະໃນຂະນະແຫ່ງຜົນ ແລະນິດສະຣະນະວິຣາຄະທີ່ເປັນຄວາມດັບຄືນິບພານ ສຳມາທິດຖິມີວິຣາຄະ ໕ ນີ້ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນວິຣາຄະ ໕ ນີ້

ສຳມາທິດຖິມີນິໂຣດ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະນິໂຣດ (ດັບດ້ວຍຂົ່ມໄວ້)
໒. ຕະທັງຄະນິໂຣດ (ດັບດ້ວຍອົງນັ້ນ ໆ)
໓. ສະມຸດເສດນິໂຣດ (ດັບດ້ວຍຕັດຂາດ)
໔. ປະຕິປັດສັດທິນິໂຣດ (ດັບດ້ວຍສະງົບຣະງັບ)
໕. ນິດສະຣະນະນິໂຣດ (ດັບດ້ວຍສະລັດອອກໄດ້)

ນິໂຣດໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ນິໂຣດໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສດນິໂຣດຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິນິໂຣດໃນຂະນະແຫ່ງຜົນແລະນິດສະຣະນະ ນິໂຣດທີ່ເປັນຄວາມດັບຄືອະມະຕະທາດ ສຳມາທິດຖິມີນິໂຣດ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປ ດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນນິໂຣດ ໕ ນີ້

ສຳມາທິດຖິມີໂວດສັກຄະ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະໂວດສັກຄະ (ສະລະດ້ວຍຂົ່ມໄວ້)
໒. ຕະທັງຄະໂວດສັກຄະ (ສະລະດ້ວຍອົງນັ້ນ ໆ)
໓. ສະມຸດເສທະໂວດສັກຄະ (ສະລະດ້ວຍຕັດຂາດ)
໔. ປະຕິປັດສັດທິໂວດສັກຄະ (ສະລະດ້ວຍສະງົບຣະງັບ)
໕. ນິດສະຣະນະໂວດສັກຄະ (ສະລະດ້ວຍສະລັດອອກໄດ້)

ໂວດສັກຄະໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ໂວດສັກຄະໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສທະໂວດສັກຄະຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິໂວດສັກຄະໃນຂະນະແຫ່ງຜົນ ແລະນິດສະຣະນະໂວດສັກຄະທີ່ເປັນຄວາມດັບຄືນິບພານ ສຳມາທິດຖິມີໂວດສັກຄະ ໕ ນີ້ ພິກຂຸ ເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນໂວດສັກຄະ ໕ ນີ້

ສຳມາທິດຖິ ມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໒ ນີ້

[໔໕] ສຳມາສັງກັບປະ ຯລຯ ສຳມາວາຈາ ຯລຯ ສຳມາກຳມັນຕະ ຯລຯ ສຳມາອາຊີວະ ຯລຯ ສຳມາວາຍາມະ ຯລຯ ສຳມາສະຕິ ຯລຯ

ສຳມາສະມາທິມີວິເວກ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິເວກ ໒. ຕະທັງຄະວິເວກ

໓. ສະມຸດເສທະວິເວກ ໔. ປະຕິປັດສັດທິວິເວກ

໕. ນິດສະຣະນະວິເວກ

ວິເວກໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ວິເວກໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສດວິເວກຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິວິເວກໃນຂະນະແຫ່ງຜົນແລະນິດສະຣະນະວິເວກທີ່ເປັນຄວາມດັບຄືນິບພານ ສຳມາສະມາທິມີວິເວກ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນວິເວກ ໕ ນີ້

ສຳມາສະມາທິມີວິຣາຄະ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິຣາຄະ ໒. ຕະທັງຄະວິຣາຄະ

໓. ສະມຸດເສທະວິຣາຄະ ໔. ປະຕິປັດສັດທິວິຣາຄະ

໕. ນິດສະຣະນະວິຣາຄະ

ວິຣາຄະໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ວິຣາຄະໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສທະວິຣາຄະຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິວິຣາຄະໃນຂະນະຜົນ ແລະນິດສະຣະນະວິຣາຄະທີ່ເປັນຄວາມດັບຄືນິບພານ ສຳມາສະມາທິມີວິຣາຄະ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນວິຣາຄະ ໕ ນີ້

ສຳມາສະມາທິມີນິໂຣດ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະນິໂຣດ ໒. ຕະທັງຄະນິໂຣດ

໓. ສະມຸດທະນິໂຣດ ໔. ປະຕິປັດສັດທິນິໂຣດ

໕. ນິດສະຣະນະນິໂຣດ

ນິໂຣດໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ນິໂຣດໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສທະນິໂຣດຂອງພິກຂຸ ຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິນິໂຣດໃນຂະນະຜົນ ແລະນິດສະຣະນະນິໂຣດທີ່ເປັນຄວາມດັບຄືອະມະຕະທາດ ສຳມາສະມາທິມີນິໂຣດ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນນິໂຣດ ໕ ນີ້

ສຳມາສະມາທິມີໂວດສັກຄະ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະໂວດສັກຄະ ໒. ຕະທັງຄະໂວດສັກຄະ

໓. ສະມຸດເສທະໂວດສັກຄະ ໔. ປະຕິປັດສັດທິໂວດສັກຄະ

໕. ນິດສະຣະນະໂວດສັກຄະ

ໂວດສັກຄະໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ໂວດສັກຄະໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສດໂວດສັກຄະຂອງພິກຂຸຜູ້ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິໂວດສັກຄະໃນຂະນະຜົນ ແລະນິດສະຣະນະໂວດສັກຄະທີ່ເປັນຄວາມດັບຄືນິບພານ ສຳມາສະມາທິມີໂວດສັກຄະ ໕ ນີ້ ພິກຂຸເກີດສັນທະ ນ້ອມໄປດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນໂວດສັກຄະ ໕ ນີ້ ສຳມາສະມາທິມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໘ ນີ້

[໔໙] ພິກຂຸທັງຫຼາຍ ວຽກງານທີ່ຕ້ອງເຮັດດ້ວຍກຳລັງແນວໃດແນວໜຶ່ງ ວຽກງານ ນັ້ນທັງໝົດ ບຸກຄົນຕ້ອງອາໄສແຜ່ນດິນ ດຳຣົງຢູ່ເທິງແຜ່ນດິນ ຈຶ່ງເຮັດໄດ້ ວຽກງານທີ່ຕ້ອງເຮັດດ້ວຍກຳລັງນີ້ບຸກຄົນຍ່ອມເຮັດໄດ້ດ້ວຍປະການແນວນີ້ ແມ່ນສັນໃດ ພິກຂຸອາໄສສີນ ດຳຣົງຢູ່ໃນສີນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງໂພດຊົງ ໗ ກໍສັນນັ້ນຄືກັນ ฯລฯ ພິກຂຸຜູ້ຈະເລີນ ເຮັດໃຫ້ຫຼາຍເຊິ່ງໂພດຊົງ ໗ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ฯລฯ ພິກຂຸຜູ້ຈະເລີນ ເຮັດໃຫ້ຫຼາຍເຊິ່ງພະລະ ໕ ฯລฯ ພິກຂຸຜູ້ຈະເລີນ ເຮັດໃຫ້ຫຼາຍເຊິ່ງພະລະ ໕ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ฯລฯ ພິກຂຸຜູ້ຈະເລີນ ເຮັດໃຫ້ຫຼາຍເຊິ່ງອິນຊີ ໕ ฯລฯ

ພືຊະຄາມແລະພູຕະຄາມເຫຼົ່າໃດເຫຼົ່າໜຶ່ງ ພືຊະຄາມແລະພູຕະຄາມເຫຼົ່ານັ້ນທັງໝົດອາໄສແຜ່ນດິນ ດຳຣົງຢູ່ເທິງແຜ່ນດິນ ຈຶ່ງເຖິງຄວາມຈະເລີນງອກງາມໄພບູນໄດ້ ພືຊະຄາມແລະພູຕະຄາມເຫຼົ່ານັ້ນຍ່ອມເຖິງຄວາມຈະເລີນງອກງາມໄພບູນດ້ວຍປະການແນວນີ້ ແມ່ນສັນໃດ ພິກຂຸກໍສັນນັ້ນຄືກັນ ອາໄສສີນ ດຳຣົງຢູ່ໃນສີນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອິນຊີ ໕ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ

ພິກຂຸອາໄສສີນ ດຳຣົງຢູ່ໃນສີນແລ້ວ ຈະເລີນເຮັດໃຫ້ຫຼາຍເຊິ່ງອິນຊີ ໕ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ເປັນແນວໃດ?

ຄື ພິກຂຸໃນທຳວິໄນຈະເລີນສັດທິນຊີທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ຈະເລີນວິຣິຍິນຊີ ฯລฯ

ຈະເລີນສະຕິນຊີ ฯລฯ

ຈະເລີນສະມາທິນຊີ ฯລฯ

ຈະເລີນປັນຍິນຊີທີ່ອາໄສວິເວກ ອາໄສວິຣາຄະ ອາໄສນິໂຣດ ນ້ອມໄປໃນໂວດສັກຄະ

ພິກຂຸອາໄສສີນ ດຳຣົງຢູ່ໃນສີນແລ້ວ ຈະເລີນ ເຮັດໃຫ້ຫຼາຍເຊິ່ງອິນຊີ ໕ ຍ່ອມເຖິງຄວາມຈະເລີນງອກງາມໄພບູນໃນທຳທັງຫຼາຍ ແນວນີ້ແລ

## ໔. ອິນທະຣິຍະນິດເທດ

### ສະແດງອິນຊີ

[໔໗] ສັດທິນຊີມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔

ວິຣິຍິນຊີ ຯລຯ

ສະຕິນຊີ ຯລຯ

ສະມາທິນຊີ ຯລຯ

ປັນຍິນຊີມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔

ສັດທິນຊີມີວິເວກ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິເວກ
໒. ສະມຸດເສທະວິເວກ
໕. ນິດສະຣະນະວິເວກ
໔. ຕະທັງຄະວິເວກ
໔. ປະຕິປັດສັດທິວິເວກ

ວິເວກໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ວິເວກໃນການລະທິດຖິດ້ວຍອົງນັ້ນ ໆ ຂອງພິກຂຸຜູ້ຈະເລີນສະມາທິທີ່ເປັນສ່ວນແຫ່ງການທຳລາຍກິເລດ ສະມຸດເສດວິເວກຂອງພິກຂຸຜູ້ ຈະເລີນໂລກຸດຕະຣະມັກທີ່ໃຫ້ເຖິງຄວາມສິ້ນໄປ ປະຕິປັດສັດທິວິເວກໃນຂະນະຜົນ ແລະນິດສະຣະນະ ວິເວກທີ່ເປັນຄວາມດັບຄືນິບພານ ສັດທິນຊີມີວິເວກ ໕ ນີ້ ພິກຂຸເກີດສັນທະນ້ອມໄປ ດ້ວຍສັດທາ ແລະມີຈິດຕັ້ງໝັ້ນດ້ວຍດີໃນວິເວກ ໕ ນີ້ ຯລຯ

ສັດທິນຊີມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔ ແນວນີ້ແລ

ວິຣິຍິນຊີ ຯລຯ

ສະຕິນຊີ ຯລຯ

ສະມາທິນຊີ ຯລຯ

ປັນຍິນຊີມີວິເວກ ໕ ມີອັນໃດແດ່ ຄື

໑. ວິກຂຳພະນະວິເວກ
໒. ສະມຸດເສທະວິເວກ
໔. ຕະທັງຄະວິເວກ
໔. ປະຕິປັດສັດທິວິເວກ

໕. ນິດສະຣະນະວິເວກ

ວິເວກໃນການຂົ່ມນິວອນຂອງພິກຂຸຜູ້ຈະເລີນປະຖົມຊານ ໗ລ໗
ປັນຍິນຊີມີວິເວກ ໕ ມີວິຣາຄະ ໕ ມີນິໂຣດ ໕ ມີໂວດສັກຄະ ໕ ມີນິດໄສ ໑໔ ແນວນີ້ແລ

**ວິເວກກະຖາ ຈົບ**

## ໕. ຈະຣິຍາກະຖາ

### ວ່າດ້ວຍຄວາມປະພຶດ

[໔໘] ຄຳວ່າ ຄວາມປະພຶດ ອະທິບາຍວ່າ ຄວາມປະພຶດ ໘ ຢ່າງ ໄດ້ແກ່

| | |
|---|---|
| ໑. ຄວາມປະພຶດໃນອີຣິຍາບົດ | ໒. ຄວາມປະພຶດໃນອາຍະຕະນະ |
| ໓. ຄວາມປະພຶດໃນສະຕິ | ໔. ຄວາມປະພຶດໃນສະມາທິ |
| ໕. ຄວາມປະພຶດໃນຍານ | ໖. ຄວາມປະພຶດໃນມັກ |
| ໗. ຄວາມປະພຶດໃນຜົນ | |
| ໘. ຄວາມປະພຶດເພື່ອປະໂຫຍດແກ່ໂລກ | |

ຄຳວ່າ ຄວາມປະພຶດໃນອີຣິຍາບົດ ໄດ້ແກ່ ຄວາມປະພຶດໃນອີຣິຍາບົດ ໔
ຄຳວ່າ ຄວາມປະພຶດໃນອາຍະຕະນະ ໄດ້ແກ່ ຄວາມປະພຶດໃນອາຍະຕະນະພາຍໃນ ແລະອາຍະຕະນະພາຍນອກຢ່າງລະ ໖
ຄຳວ່າ ຄວາມປະພຶດໃນສະຕິ ໄດ້ແກ່ ຄວາມປະພຶດໃນສະຕິປັດຖານ ໔
ຄຳວ່າ ຄວາມປະພຶດໃນສະມາທິ ໄດ້ແກ່ ຄວາມປະພຶດໃນຊານ ໔
ຄຳວ່າ ຄວາມປະພຶດໃນຍານ ໄດ້ແກ່ ຄວາມປະພຶດໃນອະຣິຍະສັດ ໔
ຄຳວ່າ ຄວາມປະພຶດໃນມັກ ໄດ້ແກ່ ຄວາມປະພຶດໃນອະຣິຍະມັກ ໔
ຄຳວ່າ ຄວາມປະພຶດໃນຜົນ ໄດ້ແກ່ ຄວາມປະພຶດໃນສາມັນຍະຜົນ ໔
ຄຳວ່າ ຄວາມປະພຶດເພື່ອປຣະໂຫຍດແກ່ໂລກ ໄດ້ແກ່ ຄວາມປະພຶດໃນພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ຄວາມປະພຶດໃນພຣະປັດເຈກພຸດທະເຈົ້າບາງສ່ວນ ຄວາມປະພຶດໃນພຣະສາວົກບາງສ່ວນ ຄວາມປະພຶດໃນອີຣິຍາບົດມີແກ່ຜູ້ຕັ້ງຕົນໄວ້ຊອບ ຄວາມປະພຶດໃນອາຍະຕະນະມີແກ່ຜູ້ສັງລວມອິນຊີ ຄວາມປະພຶດໃນສະຕິມີແກ່ຜູ້ທີ່ຢູ່ດ້ວຍຄວາມບໍ່ຜະໝາດ ຄວາມປະພຶດໃນສະມາທິມີແກ່ຜູ້ຂວນຂວາຍໃນອະທິຈິດ ຄວາມປະພຶດໃນຍານມີແກ່ຜູ້ບັນລຸປັນຍາເຄື່ອງຕັດສະຣູ້ ຄວາມປະພຶດໃນມັກມີແກ່ຜູ້ປະຕິບັດຊອບ ຄວາມປະພຶດໃນຜົນມີແກ່ຜູ້ໄດ້

ບັນລຸ ແລະຄວາມປະພຶດເພື່ອປະໂຫຍດແກ່ໂລກມີແກ່ພຣະຕະຖາຄົດອະຣະຫັນຕະສຳມາສຳພຸດທະເຈົ້າ ພຣະປັດເຈກພຸດທະເຈົ້າບາງສ່ວນ ພຣະສາວົກບາງສ່ວນ

ເຫຼົ່ານີ້ຊື່ວ່າຄວາມປະພຶດ ໘ ຢ່າງ

ອີກໄນໜຶ່ງ ຄວາມປະພຶດ ໘ ຢ່າງ ຄື

໑. ຜູ້ນ້ອມໃຈເຊື່ອ ຊື່ວ່າຍ່ອມປະພຶດດ້ວຍສັດທາ
໒. ຜູ້ປະຄອງໄວ້ ຊື່ວ່າຍ່ອມປະພຶດດ້ວຍວິຣິຍະ
໓. ຜູ້ຕັ້ງຈິດໝັ້ນ ຊື່ວ່າຍ່ອມປະພຶດດ້ວຍສະຕິ
໔. ຜູ້ບໍ່ທຳຄວາມຟຸ້ງຊ່ານ ຊື່ວ່າຍ່ອມປະພຶດດ້ວຍສະມາທິ
໕. ຜູ້ຮູ້ຊັດແຈ້ງ ຊື່ວ່າຍ່ອມປະພຶດດ້ວຍປັນຍາ
໖. ຜູ້ຮູ້ແຈ້ງ ຊື່ວ່າຍ່ອມປະພຶດດ້ວຍຍານ
໗. ຜູ້ມະນະສິການວ່າ ກຸສົນທຳຍ່ອມດຳເນີນໄປແກ່ຜູ້ປະຕິບັດແນວນີ້ ຊື່ວ່າ ຍ່ອມປະພຶດດ້ວຍຄວາມປະພຶດໃນອາຍະຕະນະ
໘. ຜູ້ມະນະສິການວ່າ ຜູ້ປະຕິບັດແນວນີ້ ຍ່ອມບັນລຸຄຸນວິເສດ ຊື່ວ່າຍ່ອມປະພຶດໃນຄວາມປະພຶດດ້ວຍຄຸນວິເສດ

ເຫຼົ່ານີ້ຊື່ວ່າຄວາມປະພຶດ ໘ ຢ່າງ

ອີກໄນໜຶ່ງ ຄວາມປະພຶດ ໘ ຢ່າງ ຄື

໑. ຄວາມປະພຶດສຳມາທິດຖິ ຊື່ວ່າທັດສະນະຈະຣິຍາ
໒. ຄວາມປະພຶດສຳມາສັງກັບປະ ຊື່ວ່າອະພິນິໂຣທະຈະຣິຍາ
໓. ຄວາມປະພຶດສຳມາວາຈາ ຊື່ວ່າປະຣິກຄະຫະຈະຣິຍາ
໔. ຄວາມປະພຶດສຳມາກຳມັນຕະ ຊື່ວ່າສະມຸດຖານຈະຣິຍາ
໕. ຄວາມປະພຶດສຳມາອາຊີວະ ຊື່ວ່າໂວທະນະຈະຣິຍາ
໖. ຄວາມປະພຶດສຳມາວາຍາມະ ຊື່ວ່າປັກຄະຫະຈະຣິຍາ
໗. ຄວາມປະພຶດສຳມາສະຕິ ຊື່ວ່າອຸປັດຖານະຈະຣິຍາ
໘. ຄວາມປະພຶດສຳມາສະມາທິ ຊື່ວ່າອະວິກເຂປະຈະຣິຍາ

ເຫຼົ່ານີ້ຊື່ວ່າຄວາມປະພຶດ ໘ ຢ່າງ

**ຈະຣິຍາກະຖາ ຈົບ**

## ໖. ປາຕິຫາຣິຍະກະຖາ

### ວ່າດ້ວຍປາຕິຫານ

[໓໐] ພິກຂຸທັງຫຼາຍ ປາຕິຫານ ໓ ປະການ ນີ້
ປາຕິຫານ ໓ ປະການ ມີອັນໃດແດ່ ຄື

໑. ອິດທິປາຕິຫານ (ປາຕິຫານຄືລິດ)
໒. ອາເທສະນາປາຕິຫານ (ປາຕິຫານຄືການທາຍໃຈ)
໓. ອະນຸສາສະນີປາຕິຫານ (ປາຕິຫານຄືສອນໃຫ້ເຫັນຈິງ)

ອິດທິປາຕິຫານ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ສະແດງລິດໄດ້ຫຼາຍຢ່າງ ຄື ຄົນດຽວສະແດງເປັນຫຼາຍຄົນກໍໄດ້ ຫຼາຍຄົນສະແດງເປັນຄົນດຽວກໍໄດ້ ສະແດງໃຫ້ຜາກົດກໍໄດ້ ສະແດງໃຫ້ຫາຍໄປກໍໄດ້ ຯລຯ ໃຊ້ອຳນາດທາງກາຍໄປຈົນເຖິງພົມມະໂລກກໍໄດ້ ນີ້ເຮົາຮຽກວ່າ ອິດທິປາຕິຫານ (໑)

ອາເທສະນາປາຕິຫານ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ທາຍໃຈຕາມເຫດທີ່ກຳນົດໄດ້ວ່າ ໃຈຂອງທ່ານເປັນແນວນີ້ແດ່ ໃຈຂອງທ່ານເປັນເຊັ່ນນີ້ແດ່ ໃຈຂອງທ່ານເປັນດັ່ງນີ້ແດ່ ເຖິງແມ່ນພິກຂຸນັ້ນ ຈະທາຍໃຈໄດ້ຫຼວງຫຼາຍ ການທາຍໃຈນັ້ນກໍຄືງເປັນແນວນັ້ນ ບໍ່ເປັນແນວອື່ນ ສ່ວນພິກຂຸບາງອົງໃນທຳວິໄນນີ້ບໍ່ທາຍໃຈຕາມເຫດທີ່ກຳນົດເລີຍ ແຕ່ເມື່ອໄດ້ຟັງສຽງຂອງມະນຸດຂອງອະມະນຸດ ຫຼືຂອງເທວະດາກໍທາຍໃຈໄດ້ວ່າ ໃຈຂອງທ່ານເປັນແນວນີ້ແດ່ ໃຈຂອງທ່ານເປັນເຊັ່ນນີ້ແດ່ ໃຈຂອງທ່ານເປັນດັ່ງນີ້ແດ່ ເຖິງແມ່ນພິກຂຸນັ້ນຈະທາຍໃຈໄດ້ຫຼວງຫຼາຍ ການທາຍໃຈນັ້ນກໍຄືງເປັນແນວນັ້ນ ບໍ່ເປັນແນວອື່ນ ພິກຂຸບາງອົງໃນທຳວິໄນນີ້ ຍ່ອມບໍ່ທາຍໃຈຕາມເຫດທີ່ກຳນົດເລີຍ ແລະບໍ່ໄດ້ຟັງສຽງຂອງມະນຸດ ຂອງອະມະນຸດ ຫຼືຂອງເທວະດາແລ້ວທາຍໃຈ ແຕ່ເມື່ອໄດ້ຟັງສຽງນຶກຕອງຂອງຜູ້ທີ່ກຳລັງນຶກຕອງຢູ່ກໍທາຍໃຈໄດ້ວ່າ ໃຈຂອງທ່ານເປັນແນວນີ້ແດ່ ໃຈຂອງທ່ານເປັນເຊັ່ນນີ້ແດ່ ໃຈຂອງທ່ານເປັນດັ່ງນີ້ແດ່ ເຖິງແມ່ນພິກຂຸນັ້ນຈະທາຍໃຈໄດ້ຫຼວງຫຼາຍ ການທາຍໃຈນັ້ນກໍຄືງເປັນແນວນັ້ນ ບໍ່ເປັນແນວອື່ນ ສ່ວນພິກຂຸບາງອົງໃນທຳວິໄນນີ້ບໍ່ທາຍໃຈຕາມເຫດທີ່ກຳນົດເລີຍ ບໍ່ໄດ້ຟັງສຽງຂອງມະນຸດ ຂອງອະມະນຸດ ຫຼືຂອງເທວະດາແລ້ວທາຍໃຈ ຫຼືບໍ່ໄດ້ຟັງສຽງນຶກຕອງຂອງຜູ້ທີ່ກຳລັງນຶກຕອງຢູ່ແລ້ວທາຍໃຈ ແຕ່ເມື່ອກຳນົດໃຈຂອງທ່ານຜູ້ເຂົ້າສະມາທິເຊິ່ງບໍ່ມີວິຕົກ ບໍ່ມີວິຈານ ດ້ວຍໃຈຂອງຕົນແລ້ວ ກໍຮູ້ໄດ້ວ່າ ທ່ານຜູ້ນີ້ຕັ້ງມະໂນສັງຂານໄວ້ເປັນແນວໃດ? ກໍຈັກນຶກເຖິງວິຕົກຊື່ນັ້ນໃນລະຫວ່າງໃຈນີ້ແນວນັ້ນ ເຖິງແມ່ນພິກຂຸນັ້ນຈະທາຍໃຈໄດ້ຫຼວງຫຼາຍ ການທາຍໃຈນັ້ນກໍຄືງເປັນແນວນັ້ນບໍ່ເປັນແນວອື່ນ ນີ້ຮຽກວ່າ ອາເທສະນາປາຕິຫານ (໒)

ອະນຸສາສະນີປາຕິຫານ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ ພ່ຳສອນແນວນີ້ວ່າ ຈົ່ງນຶກຕອງແນວນີ້ ຢ່ານຶກຕອງແນວນັ້ນ ຈົ່ງມະນະສິການແນວນີ້ ຢ່າມະນະສິການແນວນັ້ນ ຈົ່ງລະສິ່ງນີ້ ຈົ່ງເຂົ້າເຖິງສິ່ງນີ້ຢູ່ເທີ້ນ ນີ້ຮຽກວ່າອະນຸສາສະນີປາຕິຫານ (໓)

ພິກຂຸທັງຫຼາຍ ປາຕິຫານ ໓ ປະການນີ້

[໓໑] ເນກຂຳມະຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ເນກຂຳມະຍ່ອມກຳຈັດກາມສັນທະໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຊົນເຫຼົ່າໃດປະກອບດ້ວຍເນກຂຳມະນັ້ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ມີຈິດບໍລິສຸດ ມີຄວາມດຳຣິບໍ່ຂຸ່ນມົວ ຍ້ອນແນວນັ້ນເນກຂຳມະຈຶ່ງເປັນອາເທສະນາປາຕິຫານ ແລະເນກຂຳມະນັ້ນເພິ່ງປະຕິບັດແນວນີ້ ເພິ່ງຈະເລີນແນວນີ້ ເພິ່ງເຮັດໃຫ້ຫຼາຍແນວນີ້ ເພິ່ງຕັ້ງສະຕິທີ່ເປັນທຳສົມຄວນແກ່ເນກຂຳມະນັ້ນໄວ້ໃຫ້ໝັ້ນແນວນີ້ ຍ້ອນແນວນັ້ນເນກຂຳມະຈຶ່ງເປັນອະນຸສາສະນີປາຕິຫານ (໑)

ອະພະຍາບາດຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອະພະຍາບາດຍ່ອມກຳຈັດພະຍາບາດໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຊົນເຫຼົ່າໃດປະກອບດ້ວຍອະພະຍາບາດນັ້ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ມີຈິດບໍລິສຸດ ມີຄວາມດຳຣິບໍ່ຂຸ່ນມົວ ຍ້ອນແນວນັ້ນ ອະພະຍາບາດຈຶ່ງເປັນອາເທສະນາປາຕິຫານ ແລະອະພະຍາບາດນັ້ນເພິ່ງປະຕິບັດແນວນີ້ ເພິ່ງຈະເລີນແນວນີ້ ເພິ່ງເຮັດໃຫ້ຫຼາຍແນວນີ້ ເພິ່ງຕັ້ງສະຕິທີ່ເປັນທຳສົມຄວນແກ່ອະພະຍາບາດນັ້ນໄວ້ໃຫ້ໝັ້ນ ແນວນີ້ ຍ້ອນແນວນັ້ນ ອະພະຍາບາດຈຶ່ງເປັນອະນຸສາສະນີປາຕິຫານ (໒)

ອາໂລກະສັນຍາຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອາໂລກະສັນຍາຍ່ອມກຳຈັດຖີນະມິດທະໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຊົນເຫຼົ່າໃດປະກອບດ້ວຍອາໂລກະສັນຍານັ້ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ມີຈິດບໍລິສຸດ ມີຄວາມດຳຣິບໍ່ຂຸ່ນມົວ ຍ້ອນແນວນັ້ນ ອາໂລກະສັນຍາຈຶ່ງເປັນອາເທສະນາປາຕິຫານ ແລະອາໂລກະສັນຍານັ້ນເພິ່ງປະຕິບັດແນວນີ້ ເພິ່ງຈະເລີນແນວນີ້ ເພິ່ງເຮັດໃຫ້ຫຼາຍແນວນີ້ ເພິ່ງຕັ້ງສະຕິທີ່ເປັນທຳສົມຄວນແກ່ອາໂລກະສັນຍານັ້ນໄວ້ໃຫ້ໝັ້ນແນວນີ້ ຍ້ອນແນວນັ້ນ ອາໂລກະສັນຍາຈຶ່ງເປັນອະນຸສາສະນີປາຕິຫານ (໓)

ອະວິກເຂປະຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອະວິກເຂປະຍ່ອມກຳຈັດອຸດທັດຈະໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຊົນເຫຼົ່າໃດປະກອບດ້ວຍອະວິກເຂປະນັ້ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ມີຈິດບໍລິສຸດ ມີຄວາມດຳຣິບໍ່ຂຸ່ນມົວ ຍ້ອນແນວນັ້ນ ອະວິກເຂປະຈຶ່ງເປັນອາເທສະນາປາຕິຫານ ແລະອະວິກເຂປະນັ້ນເພິ່ງປະຕິບັດແນວນີ້ ເພິ່ງຈະເລີນແນວນີ້ ເພິ່ງເຮັດໃຫ້ຫຼາຍແນວນີ້ ເພິ່ງຕັ້ງສະຕິທີ່ເປັນທຳສົມຄວນແກ່ອະວິກເຂປະນັ້ນໄວ້ໃຫ້ໝັ້ນແນວນີ້ ຍ້ອນແນວນັ້ນ ອະວິກເຂປະຈຶ່ງເປັນອະນຸສາສະນີປາຕິຫານ (໔)

ທຳມະວະວັດຖານຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ທຳມະວະວັດຖານຍ່ອມກຳຈັດວິຈິກິດສາໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຯລຯ (໕)

ຍານຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ຍານຍ່ອມກຳຈັດອະວິດຊາໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຯລຯ (໖)

ປາມຸດຊະຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ປາມຸດຊະຍ່ອມກຳຈັດອະຣະຕິໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຯລຯ (໗)

ປະຖົມຊານຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ປະຖົມຊານຍ່ອມກຳຈັດນິວອນທັງຫຼາຍໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຯລຯ (໔໖ + ໗ = ໕໓)

ອະຣະຫັດຕະມັກຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອະຣະຫັດຕະມັກຍ່ອມກຳຈັດ ກິເລດໄດ້ທັງໝົດ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຊົນເຫຼົ່າໃດປະກອບດ້ວຍອະຣະຫັດຕະມັກນັ້ນ ຊົນເຫຼົ່ານັ້ນທັງໝົດເປັນຜູ້ມີຈິດບໍລິຈິດ ມີຄວາມດຳຣິບໍ່ຂຸ່ນມົວ ຍ້ອນແນວນັ້ນ ອະຣະຫັດຕະມັກຈຶ່ງເປັນອາເທສະນາປາຕິຫານ ແລະອະຣະຫັດຕະມັກນັ້ນເພິ່ງປະຕິບັດແນວນີ້

ເພິ່ງຈະເລີນແນວນີ້ ເພິ່ງເຮັດໃຫ້ຫຼາຍແນວນີ້ ເພິ່ງຕັ້ງສະຕິທີ່ເປັນທຳສົມຄວນແກ່ອະຣະຫັດຕະມັກນັ້ນໄວ້ໃຫ້ໝັ້ນແນວນີ້ ຍ້ອນແນວນັ້ນ ອະຣະຫັດຕະມັກຈຶ່ງເປັນອະນຸສາສະນີປາຕິຫານ (໔ + ໕໓ =໕໗)

[໕໔] ເນກຂຳມະຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ເນກຂຳມະຍ່ອມກຳຈັດກາມສັນທະໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ອິດທິແລະປາຕິຫານນີ້ຮຽກວ່າ ອິດທິປາຕິຫານ

ອະພະຍາບາດຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອະພະຍາບາດຍ່ອມກຳຈັດພະຍາບາດໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ອິດທິແລະປາຕິຫານຮຽກວ່າອິດທິປາຕິຫານ ອາໂລກະສັນຍາຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອາໂລກະສັນຍາຍ່ອມກຳຈັດຖີນະມິດທະໄດ້ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ຯລຯ ອະຣະຫັດຕະມັກຍ່ອມສຳເລັດ ຍ້ອນແນວນັ້ນ ຈຶ່ງຊື່ວ່າອິດທິ ອະຣະຫັດຕະມັກຍ່ອມກຳຈັດກິເລດໄດ້ທັງໝົດ ຍ້ອນແນວນັ້ນ ຈຶ່ງເປັນປາຕິຫານ ອິດທິແລະປາຕິຫານນີ້ຮຽກວ່າອິດທິປາຕິຫານ ແນວນີ້ແລ

**ປາຕິຫາຣິຍະກະຖາ ຈົບ**

## ໗. ສະມະສີສະກະຖາ

### ວ່າດ້ວຍທຳທີ່ສະງົບແລະເປັນປະທານ

[໕໕] ປັນຍາໃນຄວາມບໍ່ຜາກົດແຫ່ງທຳທັງປວງ ຍ້ອນຕັດຂາດໂດຍຊອບແລະດັບໄປ ຊື່ວ່າສະມະສີສັດຖະຍານ ເປັນແນວໃດ?

ຄື ຄຳວ່າ ທຳທັງປວງ ໄດ້ແກ່ ຂັນ ໕ ອາຍະຕະນະ ໑໒ ທາດ ໑໘ ກຸສົນທຳ ອະກຸສົນທຳ ອັບພະຍາກະຕະທຳ ກາມາວະຈອນທຳ ຣູບປາວະຈອນທຳ ອະຣູບປາວະຈອນທຳ ອະປະຣິຍາປັນນະທຳ

ຄຳວ່າ ຍ້ອນຕັດຂາດໂດຍຊອບ ອະທິບາຍວ່າ ພຣະໂຍຄາວະຈອນຕັດກາມສັນທະຂາດໂດຍຊອບດ້ວຍເນກຂຳມະ ຕັດພະຍາບາດຂາດໂດຍຊອບດ້ວຍອະພະຍາບາດ ຕັດຖີນະມິດທະຂາດ ໂດຍຊອບດ້ວຍອາໂລກະສັນຍາ ຕັດອຸດທັດຈະຂາດໂດຍຊອບດ້ວຍອະວິກເຂປະ ຕັດວິຈິກິດສາຂາດ ໂດຍຊອບດ້ວຍທຳມະວະວັດຖານ ຕັດອະວິດຊາຂາດໂດຍຊອບດ້ວຍຍານ ຕັດອະຣະຕີຂາດໂດຍຊອບດ້ວຍປາມຸດຊະ ຕັດນິວອນຂາດໂດຍຊອບດ້ວຍປະຖົມຊານ ຯລຯ ຕັດກິເລດທັງປວງຂາດໂດຍຊອບດ້ວຍອະຣະຫັດຕະມັກ

ຄຳວ່າ ດັບໄປ ອະທິບາຍວ່າ ພຣະໂຍຄາວະຈອນດັບກາມສັນທະໄດ້ດ້ວຍເນກຂຳມະ ດັບພະຍາບາດໄດ້ດ້ວຍອະພະຍາບາດ ດັບຖີນະມິດທະໄດ້ດ້ວຍອາໂລກະສັນຍາ ດັບອຸດທັດຈະໄດ້ດ້ວຍອະວິກເຂປະ ດັບວິຈິກິດສາໄດ້ດ້ວຍທຳມະວະວັດຖານ ດັບອະວິດຊາໄດ້ດ້ວຍຍານ ດັບອະຣະຕີໄດ້ດ້ວຍ ປາມຸດຊະ ດັບນິວອນໄດ້ດ້ວຍປະຖົມຊານ ຯລຯ ດັບກິເລດທັງປວງໄດ້ດ້ວຍອະຣະຫັດຕະມັກ

ຄຳວ່າ ບໍ່ຜາກົດ ອະທິບາຍວ່າ ເມື່ອພຣະໂຍຄາວະຈິນໄດ້ເນກຂຳມະ ກາມສັນທະຍ່ອມບໍ່ຜາກົດ ເມື່ອໄດ້ອະພະຍາບາດ ພະຍາບາດຍ່ອມບໍ່ຜາກົດ ເມື່ອໄດ້ອາໂລກະສັນຍາ ຖີນະມິດທະຍ່ອມບໍ່ຜາກົດ ເມື່ອໄດ້ອະວິກເຂປະ ອຸດທັດຈະຍ່ອມບໍ່ຜາກົດ ເມື່ອໄດ້ທຳມະວະວັດຖານ ວິຈິກິດສາຍ່ອມບໍ່ຜາກົດ ເມື່ອໄດ້ຍານ ອະວິດຊາຍ່ອມບໍ່ຜາກົດ ເມື່ອໄດ້ປາມຸດຊະອະຣະຕີຍ່ອມບໍ່ຜາກົດ ເມື່ອໄດ້ປະຖົມຊານ ນິວອນຍ່ອມບໍ່ຜາກົດ ຯລຯ ເມື່ອໄດ້ອະຣະຫັດຕະມັກ ກິເລດທັງປວງຍ່ອມບໍ່ຜາກົດ

ຄຳວ່າ ສະງົບ ອະທິບາຍວ່າ ເນກຂຳມະຊື່ວ່າສະງົບ ຍ້ອນລະກາມສັນທະໄດ້ແລ້ວ ອະພະຍາບາດຊື່ວ່າສະງົບ ຍ້ອນລະພະຍາບາດໄດ້ແລ້ວ ອາໂລກະສັນຍາຊື່ວ່າສະງົບ ຍ້ອນລະ ຖີນະມິດທະໄດ້ແລ້ວ ອະວິກເຂປະຊື່ວ່າສະງົບ ຍ້ອນລະອຸດທັດຈະໄດ້ແລ້ວ ທຳມະວະວັດຖານ ຊື່ວ່າ ສະງົບ ຍ້ອນລະວິຈິກິດສາໄດ້ແລ້ວ ຍານຊື່ວ່າສະງົບ ຍ້ອນລະອະວິດຊາໄດ້ແລ້ວ ປາມຸດຊະຊື່ວ່າສະງົບ ຍ້ອນລະອະຣະຕີໄດ້ແລ້ວ ປະຖົມຊານຊື່ວ່າສະງົບ ຍ້ອນລະນິວອນໄດ້ແລ້ວ ຯລຯ ອະຣະຫັດຕະມັກຊື່ວ່າສະງົບ ຍ້ອນລະກິເລດທັງປວງໄດ້ແລ້ວ

ຄຳວ່າ ເປັນປະທານ ອະທິບາຍວ່າ ທຳເປັນປະທານ ໑໓ ປະການ ໄດ້ແກ່

໑. ຕັນຫາມີຄວາມກັງວົນເປັນປະທານ
໒. ມານະມີຄວາມພົວພັນເປັນປະທານ

໓. ທິດຖິມີຄວາມຍຶດຖືເປັນປະທານ
໔. ອຸດທັດຈະມີຄວາມຟຸ້ງຊ່ານເປັນປະທານ
໕. ອະວິດຊາມີກິເລດເປັນປະທານ
໖. ສັດທາມີຄວາມນ້ອມໃຈເຊື່ອເປັນປະທານ
໗. ວິຣິຍະມີຄວາມປະຄອງໄວ້ເປັນປະທານ
໘. ສະຕິມີຄວາມເຂົ້າໄປຕັ້ງໝັ້ນເປັນປະທານ
໙. ສະມາທິມີຄວາມບໍ່ຟຸ້ງຊ່ານເປັນປະທານ
໑໐. ປັນຍາມີຄວາມເຫັນເປັນປະທານ
໑໑. ຊີວິຕິນຊີມີຄວາມເປັນໄປເປັນປະທານ
໑໔. ວິໂມກມີອາລົມເປັນປະທານ
໑໓. ນິໂຣດມີສັງຂານເປັນປະທານ

**ສະມະສີສະກະຖາ ຈົບ**

## ໘. ສະຕິປັດຖານະກະຖາ

### ວ່າດ້ວຍສະຕິປັດຖານ

[໓໔] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ
ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້
ສະຕິປັດຖານ ໔ ປະການ ມີອັນໃດແດ່ ຄື
ພິກຂຸໃນທຳວິໄນນີ້

໑. ເປັນຜູ້ພິຈາລະນາເຫັນກາຍໃນກາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກ
໔. ເປັນຜູ້ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ຯລຯ
໓. ເປັນຜູ້ພິຈາລະນາເຫັນຈິດໃນຈິດຢູ່ ຯລຯ
໔. ເປັນຜູ້ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ມີຄວາມພຽນ ມີສຳປະຊັນຍະ ມີສະ ຕິ ກຳຈັດອະພິດຊາ ແລະໂທມະນັດໃນໂລກ

ພິກຂຸທັງຫຼາຍ ສະຕິປັດຖານ ໔ ປະການນີ້ແລ

[໓໕] ພິກຂຸເປັນຜູ້ພິຈາລະນາເຫັນກາຍໃນກາຍຢູ່ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນກອງປະຖະວີທາດໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍ

ຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຍຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນກາຍດ້ວຍອາການ ໆ ແນວນີ້ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນກາຍໃນກາຍວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ
໒. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ
໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳນັ້ນເຂົ້າໄປ
໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນກອງອາໂປທາດ ฯລฯ ກອງເຕໂຊທາດ ฯລฯ ກອງວາໂຍທາດ ฯລฯ ກອງຜົມ ฯລฯ ກອງຂົນ ฯລฯ ກອງຜິວ ฯລฯ ກອງໜັງ ฯລฯ ກອງຊີ້ນ ฯລฯ ກອງເອັນ ฯລฯ ກອງກະດູກ ฯລฯ ພິຈາລະນາເຫັນກອງໄຂກະດູກ ໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຍຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນກາຍດ້ວຍອາການ ໆ ແນວນີ້ ກາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນກາຍນັ້ນດ້ວຍສະຕິນັ້ນ ແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນກາຍໃນກາຍວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ฯລฯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸເປັນຜູ້ພິຈາລະນາເຫັນກາຍໃນກາຍຢູ່ແນວນີ້ (໑)

ພິກຂຸເປັນຜູ້ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນສຸກຂະເວທະນາໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ຯລຯ ຍ່ອມສະລະຄືນ ບໍ່ຢຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ຯລຯ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນເວທະນາດ້ວຍອາການ ຖ ຢ່າງນີ້ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນເວທະນານັ້ນດ້ວຍສະຕິນັ້ນແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນທຸກຂະເວທະນາ ຯລຯ ອະທຸກຂະມະສຸຂະເວທະນາ ຯລຯ ຈັກຂຸສຳຜັດສະຊາເວທະນາ ຯລຯ ໂສຕະສຳຜັດສະຊາເວທະນາ ຯລຯ ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນຄານະສຳຜັດສະຊາເວທະນາ ຯລຯ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນເວທະນາດ້ວຍອາການ ຖ ຢ່າງນີ້ ເວທະນາຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນເວທະນານັ້ນດ້ວຍສະຕິນັ້ນ ແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸເປັນຜູ້ພິຈາລະນາເຫັນເວທະນາໃນເວທະນາທັງຫຼາຍຢູ່ແນວນີ້ (໒)

ພິກຂຸເປັນຜູ້ພິຈາລະນາເຫັນຈິດໃນຈິດຢູ່ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນຈິດມີຣາຄະໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ຯລຯ ຍ່ອມສະລະຄືນ ບໍ່ຢຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ຯລຯ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນຈິດດ້ວຍອາການ ຖ ຢ່າງນີ້ ຈິດຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນຈິດນັ້ນດ້ວຍສະຕິນັ້ນ ແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນຈິດໃນຈິດວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸບາງອົງໃນທຳວິໄນນີ້ພິຈາລະນາເຫັນຈິດທີ່ປາສະຈາກຣາຄະ ຯລຯ ຈິດມີໂທສະ ຯລຯ ຈິດປາສະຈາກໂທສະ ຯລຯ ຈິດມີໂມຫະ ຯລຯ ຈິດປາສະຈາກໂມຫະ ຯລຯ ຈິດຫົດຫູ່ ຯລຯ ຈິດຟຸ້ງຊ່ານ ຯລຯ ຈິດເປັນມະຫັກຄະຕະ ຯລຯ ຈິດບໍ່ເປັນມະຫັກຄະຕະ ຯລຯ ຈິດມີຈິດອື່ນຍິ່ງກວ່າ ຯລຯ ຈິດບໍ່ມີຈິດອື່ນຍິ່ງກວ່າ ຯລຯ ຈິດຕັ້ງໝັ້ນ ຯລຯ ຈິດບໍ່ຕັ້ງໝັ້ນ ຯລຯ ຈິດລຸດພົ້ນ ຯລຯ ຈິດບໍ່ລຸດພົ້ນ ຯລຯ ຈັກຂຸວິນຍານ ຯລຯ ໂສຕະວິນຍານ ຯລຯ ຄານະວິນຍານ ຯລຯ ຊິວຫາວິນຍານ ຯລຯ ກາຍະວິນຍານ ຯລຯ ພິກຂຸບາງອົງໃນ ທຳວິໄນນີ້ພິຈາລະນາເຫັນມະໂນວິນຍານໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ຯລຯ ຍ່ອມສະລະຄືນ ບໍ່ຢຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ຯລຯ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນຈິດດ້ວຍອາການ ໆ ຢ່າງນີ້ ຈິດຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນຈິດນັ້ນດ້ວຍສະຕິນັ້ນແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນຈິດໃນຈິດວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື ຯລຯ ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸເປັນຜູ້ພິຈາລະນາເຫັນຈິດໃນຈິດຢູ່ແນວນີ້ (໓)

ພິກຂຸເປັນຜູ້ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ ເປັນແນວໃດ?

ຄື ພິກຂຸບາງອົງໃນທຳວິໄນນີ້ເວັ້ນກາຍ ເວັ້ນເວທະນາ ເວັ້ນຈິດແລ້ວພິຈາລະນາ ເຫັນທຳທັງຫຼາຍທີ່ເຫຼືອຈາກນັ້ນໂດຍຄວາມບໍ່ທ່ຽງ ບໍ່ພິຈາລະນາເຫັນໂດຍຄວາມທ່ຽງ ພິຈາລະນາເຫັນໂດຍຄວາມເປັນທຸກ ບໍ່ພິຈາລະນາເຫັນໂດຍຄວາມເປັນສຸກ ພິຈາລະນາເຫັນໂດຍຄວາມເປັນອະນັດຕາ ບໍ່ພິຈາລະນາເຫັນໂດຍຄວາມເປັນອັດຕາ ຍ່ອມເບື່ອໜ່າຍ ບໍ່ຍິນດີ ຍ່ອມຄາຍກຳໜັດ ບໍ່ກຳໜັດ ຍ່ອມເຮັດຣາຄະໃຫ້ດັບ ບໍ່ໃຫ້ເກີດ ຍ່ອມສະລະຄືນ ບໍ່ຢຶດຖື ເມື່ອພິຈາລະນາເຫັນໂດຍຄວາມບໍ່ທ່ຽງ ຍ່ອມລະນິດຈະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນທຸກ ຍ່ອມລະສຸຂະສັນຍາໄດ້ ເມື່ອພິຈາລະນາເຫັນໂດຍຄວາມເປັນອະນັດຕາ ຍ່ອມລະອັດຕະສັນຍາໄດ້ ເມື່ອເບື່ອໜ່າຍ ຍ່ອມລະນັນທິໄດ້ ເມື່ອຄາຍກຳໜັດ ຍ່ອມລະຣາຄະໄດ້ ເມື່ອເຮັດຣາຄະໃຫ້ດັບ ຍ່ອມລະສະມຸໄທໄດ້ ເມື່ອສະລະຄືນ ຍ່ອມລະອາທານະໄດ້ ພິກຂຸພິຈາລະນາເຫັນທຳທັງຫຼາຍດ້ວຍອາການ ໆ ຢ່າງນີ້ ທຳທັງຫຼາຍຍ່ອມຜາກົດ ບໍ່ແມ່ນສະຕິ ສະຕິຜາກົດດ້ວຍ ເປັນຕົວຣະລຶກດ້ວຍ ພິກຂຸພິຈາລະນາເຫັນທຳເຫຼົ່ານັ້ນດ້ວຍສະຕິນັ້ນແລະດ້ວຍຍານນັ້ນ ຍ້ອນເຫດນັ້ນ ຈຶ່ງຮຽກການພິຈາລະນາເຫັນທຳໃນທຳທັງຫຼາຍວ່າ ສະຕິປັດຖານພາວະນາ

ຄຳວ່າ ພາວະນາ ອະທິບາຍວ່າ ພາວະນາມີ ໔ ຢ່າງ ຄື

໑. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າທຳທັງຫຼາຍທີ່ເກີດໃນພາວະນານັ້ນບໍ່ລ່ວງເລີຍກັນ

໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າອິນຊີທັງຫຼາຍມີຣົດເປັນແນວດຽວກັນ

໓. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່ານຳຄວາມພຽນທີ່ສົມຄວນແກ່ທຳ ນັ້ນເຂົ້າໄປ

໔. ຊື່ວ່າພາວະນາ ຍ້ອນມີຄວາມໝາຍວ່າປະຕິບັດເນືອງ ໆ

ພິກຂຸເປັນຜູ້ພິຈາລະນາເຫັນທຳໃນທຳທັງຫຼາຍຢູ່ແນວນີ້ ຢ່າງນີ້ແລ (໔)

**ສະຕິປັດຖານກະຖາ ຈົບ**

## ໗. ວິປັດສະນາກະຖາ

### ວ່າດ້ວຍວິປັດສະນາ

[໓໗] ເລື້ອງເກີດຂຶ້ນທີ່ເມືອງສາວັດຖີ

ພິກຂຸທັງຫຼາຍ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນສັງຂານບາງຢ່າງໂດຍຄວາມທ່ຽງ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມຂັນຕິຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໑)

ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນສັງຂານທັງປວງໂດຍຄວາມບໍ່ທ່ຽງ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປໄດ້ທີ່ພິກຂຸຜູ້ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໒)

ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ພິຈາລະນາເຫັນສັງຂານບາງຢ່າງໂດຍຄວາມເປັນສຸກ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຢັ່ງລົງສູ່ສຳມັດຕະນິຍາມຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໓)

ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນສັງຂານທັງປວງໂດຍຄວາມເປັນທຸກ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປໄດ້ທີ່ພິກຂຸຜູ້ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນ (໔)

ເປັນໄປບໍ່ໄດ້ເລີຍ ທີ່ພິກຂຸຜູ້ພິຈາລະນາເຫັນທຳບາງຢ່າງໂດຍຄວາມເປັນອັດຕາ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼືອະຣະຫັດຕະຜົນ (໕)

ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນທຳບາງຢ່າງໂດຍຄວາມເປັນອະນັດຕາ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປໄດ້ທີ່ພິກຂຸຜູ້ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໖)

ເປັນໄປບໍ່ໄດ້ເລີຍ ທີ່ພິກຂຸຜູ້ພິຈາລະນາເຫັນນິບພານໂດຍຄວາມເປັນທຸກ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປບໍ່ໄດ້ເລີຍທີ່ພິກຂຸຜູ້ບໍ່ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໗)

ເປັນໄປໄດ້ທີ່ພິກຂຸຜູ້ພິຈາລະນາເຫັນນິບພານໂດຍຄວາມເປັນສຸກ ຈັກເປັນຜູ້ປະກອບດ້ວຍອະນຸໂລມຂັນຕິ ເປັນໄປໄດ້ທີ່ພິກຂຸຜູ້ປະກອບດ້ວຍອະນຸໂລມຂັນຕິ ຈັກຢັ່ງລົງສູ່ສຳມັດຕະນິຍາມ ເປັນໄປໄດ້ທີ່ພິກຂຸຜູ້ຢັ່ງລົງສູ່ສຳມັດຕະນິຍາມ ຈັກເຮັດໃຫ້ແຈ້ງໂສດາປັດຕິຜົນ ສະກະທາຄາມິຜົນ ອະນາຄາມິຜົນ ຫຼື ອະຣະຫັດຕະຜົນ (໘)

[໓໗] ພິກຂຸຍ່ອມໄດ້ອະນຸໂລມຂັນຕິດ້ວຍອາການເທົ່າໃດ ຢັ່ງລົງສູ່ສຳມັດຕະນິຍາມດ້ວຍອາການເທົ່າໃດ?

ພິກຂຸຍ່ອມໄດ້ອະນຸໂລມຂັນຕິດ້ວຍອາການ ໔໐ ຢ່າງ ຢັ່ງລົງສູ່ສຳມັດຕະນິຍາມດ້ວຍອາການ ໔໐ ຢ່າງ

ພິກຂຸຍ່ອມໄດ້ອະນຸໂລມຂັນຕິດ້ວຍອາການ ໔໐ ຢ່າງ ຢັ່ງລົງສູ່ສຳມັດຕະນິຍາມດ້ວຍອາການ ໔໐ ຢ່າງ ເປັນແນວໃດ?

ຄື ພິກຂຸເຫັນປັນຈະຂັນ

໑. ໂດຍຄວາມບໍ່ທ່ຽງ
໒. ໂດຍຄວາມເປັນທຸກ
໓. ໂດຍຄວາມເປັນໂຣກ
໔. ໂດຍຄວາມເປັນດັ່ງຫົວຝີ
໕. ໂດຍຄວາມເປັນດັ່ງລູກສອນ
໖. ໂດຍເປັນຄວາມລຳບາກ
໗. ໂດຍເປັນອາພາດ
໘. ໂດຍເປັນຢ່າງອື່ນ
໙. ໂດຍເປັນຂອງຊຳຣຸດ
໑໐. ໂດຍເປັນອັບປະມຸງຄຸນ

໑໑. ໂດຍເປັນອັນຕະລາຍ

໑໒. ໂດຍເປັນໄພ

໑໓. ໂດຍເປັນອຸປະສັກ

໑໔. ໂດຍເປັນຄວາມຫວັ່ນໄຫວ

໑໕. ໂດຍເປັນຂອງຜຸພັງ

໑໖. ໂດຍເປັນຂອງບໍ່ຍັ່ງຍືນ

໑໗. ໂດຍເປັນຂອງບໍ່ມີອັນໃດຕ້ານທານ

໑໘. ໂດຍເປັນຂອງບໍ່ມີອັນໃດປ້ອງກັນ

໑໙. ໂດຍເປັນຂອງບໍ່ມີບ່ອນເພິ່ງ

໒໐. ໂດຍເປັນຄວາມວ່າງເປົ່າ

໒໑. ໂດຍຄວາມເປົ່າ

໒໒. ໂດຍເປັນສູນຍະຕະ (ຄວາມວ່າງ)

໒໓. ໂດຍເປັນອະນັດຕາ

໒໔. ໂດຍເປັນໂທດ

໒໕. ໂດຍເປັນຂອງມີຄວາມຜັນປ່ຽນເປັນທຳມະດາ

໒໖. ໂດຍເປັນຂອງບໍ່ມີແກ່ນສານ

໒໗. ໂດຍເປັນມູນແຫ່ງຄວາມລຳບາກ

໒໘. ໂດຍເປັນດັ່ງເພດຊະຄາດ

໒໙. ໂດຍເປັນຄວາມເສື່ອມໄປ

໓໐. ໂດຍເປັນຂອງມີອາສະວະ

໓໑. ໂດຍເປັນຂອງຖືກປັດໄຈປຸງແຕ່ງ

໓໒. ໂດຍເປັນເຫຍື່ອແຫ່ງມານ

໓໓. ໂດຍເປັນຂອງມີຄວາມເກີດເປັນທຳມະດາ

໓໔. ໂດຍເປັນຂອງມີຄວາມແກ່ເປັນທຳມະດາ

໓໕. ໂດຍເປັນຂອງມີຄວາມເຈັບໄຂ້ເປັນທຳມະດາ

໓໖. ໂດຍເປັນຂອງມີຄວາມຕາຍເປັນທຳມະດາ

໓໗. ໂດຍເປັນຂອງມີຄວາມເສົ້າໂສກເປັນທຳມະດາ

໓໘. ໂດຍເປັນຂອງມີຄວາມລຳພັນຮ້ອງໄຫ້ເປັນທຳມະດາ

໓໙. ໂດຍເປັນຂອງມີຄວາມຄັບແຄ້ນໃຈເປັນທຳມະດາ

໔໐. ໂດຍເປັນຂອງມີຄວາມເສົ້າໝອງເປັນທຳມະດາ

[໓໗] ໑. ພິກຂຸເມື່ອເຫັນປັນຈະຂັນໂດຍຄວາມບໍ່ທ່ຽງ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານທ່ຽງ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໒. ເມື່ອເຫັນປັນຈະຂັນໂດຍຄວາມເປັນທຸກ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານສຸກ ຍ່ອມຫຍັ່ງສູ່ສຳມັດຕະນິຍາມ

໓. ເມື່ອເຫັນປັນຈະຂັນໂດຍຄວາມເປັນໂຣກ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບປັນຈະຂັນເປັນນິບພານບໍ່ມີໂຣກ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔. ເມື່ອເຫັນປັນຈະຂັນໂດຍຄວາມເປັນດັ່ງຫົວຝີ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ເປັນດັ່ງຫົວຝີ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕. ເມື່ອເຫັນປັນຈະຂັນໂດຍຄວາມເປັນດັ່ງລູກສອນ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີລູກສອນ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໖. ເມື່ອເຫັນປັນຈະຂັນໂດຍເປັນຄວາມລຳບາກ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມລຳບາກ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໗. ເມື່ອເຫັນປັນຈະຂັນໂດຍເປັນອາພາດ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີອາພາດ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໘. ເມື່ອເຫັນປັນຈະຂັນ ໂດຍຄວາມເປັນອື່ນ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີສິ່ງອື່ນເປັນປັດໄຈ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໙. ເມື່ອເຫັນປັນຈະຂັນໂດຍເປັນຂອງຊຳຣຸດ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານ ບໍ່ມີຄວາມຊຳຣຸດເປັນທຳມະດາ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໐. ເມື່ອເຫັນປັນຈະຂັນໂດຍເປັນອັບປະມຸງຄຸນຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີສະໜຽດ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໑. ເມື່ອເຫັນປັນຈະຂັນໂດຍເປັນອັນຕະລາຍ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີອັນຕະລາຍ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໒. ເມື່ອເຫັນປັນຈະຂັນໂດຍເປັນໄພ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມ

ດັບແຫ່ງປັນຈະຂັນເປັນນິບພານບໍ່ມີໄພ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໓. ເມື່ອເຫັນປັນຈະຂັນໂດຍເປັນອຸປະສັກຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີອຸປະສັກ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໔. ເມື່ອເຫັນປັນຈະຂັນໂດຍເປັນຄວາມຫວັ່ນໄຫວ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມຫວັ່ນໄຫວ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໕. ເມື່ອເຫັນປັນຈະຂັນໂດຍເປັນຂອງຜຸພັງ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມຜຸພັງ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໖. ເມື່ອເຫັນປັນຈະຂັນໂດຍເປັນຂອງບໍ່ຍັ່ງຍືນ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າຄວາມດັບແຫ່ງປັນຈະຂັນເປັນນິບພານມີຄວາມຍັ່ງຍືນ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໗. ເມື່ອເຫັນປັນຈະຂັນໂດຍເປັນຂອງບໍ່ມີອັນໃດຕ້ານທານ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີທີ່ຕ້ານທານ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໘. ເມື່ອເຫັນປັນຈະຂັນໂດຍເປັນຂອງບໍ່ມີອັນໃດປ້ອງກັນ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີທີ່ປ້ອງກັນ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໑໙. ເມື່ອເຫັນປັນຈະຂັນໂດຍເປັນຂອງບໍ່ມີບ່ອນເພິ່ງ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີບ່ອນເພິ່ງ ຍ່ອມຢັ່ງລົງ ສູ່ສຳມັດຕະນິຍາມ

໒໐. ເມື່ອເຫັນປັນຈະຂັນໂດຍວ່າງເປົ່າ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ວ່າງເປົ່າ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໒໑. ເມື່ອເຫັນປັນຈະຂັນໂດຍເປັນຄວາມເປົ່າ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ເປົ່າ ຍ່ອມຢັ່ງລົງ ສູ່ສຳມັດຕະນິຍາມ

໒໒. ເມື່ອເຫັນປັນຈະຂັນໂດຍເປັນສູນຍະຕະ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານວ່າງຍິ່ງ ຍ່ອມຢັ່ງລົງ ສູ່ສຳມັດຕະນິຍາມ

໒໓. ເມື່ອເຫັນປັນຈະຂັນໂດຍເປັນອະນັດຕາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີປະໂຫຍດຢ່າງຍິ່ງ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໔. ເມື່ອເຫັນປັນຈະຂັນໂດຍເປັນໂທດ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີໂທດ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໕. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມຜັນປ່ຽນເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີຄວາມບໍ່ຜັນປ່ຽນເປັນທຳມະດາ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໖. ເມື່ອເຫັນປັນຈະຂັນໂດຍເປັນຂອງບໍ່ມີແກ່ນສານ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານມີແກ່ນສານ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໗. ເມື່ອເຫັນປັນຈະຂັນໂດຍເປັນມູນແຫ່ງຄວາມລຳບາກ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີມູນແຫ່ງຄວາມລຳບາກ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໘. ເມື່ອເຫັນປັນຈະຂັນໂດຍເປັນດັ່ງເພດຊະຄາດ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ເປັນດັ່ງເພດຊະຄາດ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໔໙. ເມື່ອເຫັນປັນຈະຂັນໂດຍເປັນຄວາມເສື່ອມໄປ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມເສື່ອມໄປ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕໐. ເມື່ອເຫັນປັນຈະຂັນໂດຍເປັນຂອງມີອາສະວະ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີອາສະວະ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕໑. ເມື່ອເຫັນປັນຈະຂັນໂດຍເປັນຂອງຖືກປັດໄຈປຸງແຕ່ງ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ຖືກປັດໄຈປຸງແຕ່ງ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕໔. ເມື່ອເຫັນປັນຈະຂັນໂດຍເປັນເຫຍື່ອແຫ່ງມານ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ເປັນເຫຍື່ອແຫ່ງມານ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕໕. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມເກີດເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມເກີດ ຍ່ອມຢັ່ງລົງສູ່ສຳມັດຕະນິຍາມ

໕໔. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມແກ່ເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມແກ່ ຍ່ອມ

ຍັ່ງລົງສູ່ສຳມັດຕະນິຍາມ

໓໕. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມເຈັບໄຂ້ເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມເຈັບໄຂ້ເປັນທຳມະດາ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

໓໖. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມຕາຍເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມຕາຍ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

໓໗. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມເສົ້າໂສກເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມເສົ້າໂສກ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

໓໘. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມລຳພັນເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມລຳພັນ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

໓໙. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມຄັບແຄ້ນໃຈເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານທີ່ບໍ່ມີຄວາມຄັບແຄ້ນໃຈ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

໔໐. ເມື່ອເຫັນປັນຈະຂັນໂດຍເປັນຂອງມີຄວາມເສົ້າໝອງເປັນທຳມະດາ ຍ່ອມໄດ້ອະນຸໂລມຂັນຕິ ເມື່ອເຫັນວ່າ ຄວາມດັບແຫ່ງປັນຈະຂັນເປັນນິບພານບໍ່ມີຄວາມເສົ້າໝອງ ຍ່ອມຍັ່ງລົງສູ່ສຳມັດຕະນິຍາມ

| | |
|---|---|
| [໓໙] ຄຳວ່າ ໂດຍຄວາມບໍ່ທ່ຽງ | ໄດ້ແກ່ ອະນິດຈານຸປັດສະນາ |
| ຄຳວ່າ ໂດຍຄວາມເປັນທຸກ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍຄວາມເປັນໂຣກ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍຄວາມເປັນດັ່ງຫົວຝີ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍຄວາມເປັນດັ່ງລູກສອນ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍເປັນຄວາມລຳບາກ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍເປັນອາພາດ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍເປັນຢ່າງອື່ນ | ໄດ້ແກ່ ອະນັດຕານຸປັດສະນາ |
| ຄຳວ່າ ໂດຍເປັນຂອງຊຳຣຸດ | ໄດ້ແກ່ ອະນິດຈານຸປັດສະນາ |
| ຄຳວ່າ ໂດຍເປັນອັບປະມຸງຄຸນ | ໄດ້ແກ່ ທຸກຂານຸປັດສະນາ (໑໐) |
| ຄຳວ່າ ໂດຍເປັນອັນຕະລາຍ | ໄດ້ແກ່ ທຸກຂານຸປັດສະນາ |
| ຄຳວ່າ ໂດຍເປັນໄພ | ໄດ້ແກ່ ທຸກຂານຸປັດສະນາ |

ຄຳວ່າ ໂດຍເປັນອຸປະສັກ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຄວາມຫວັ່ນໄຫວ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງຜຸພັງ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງບໍ່ຍັ່ງຍືນ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງບໍ່ມີອັນໃດຕ້ານທານ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງບໍ່ມີອັນໃດປ້ອງກັນ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງບໍ່ມີບ່ອນເພິ່ງ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຄວາມວ່າງເປົ່າ ໄດ້ແກ່ ອະນັດຕານຸປັດສະນາ (໑໐=໔໐)
ຄຳວ່າ ໂດຍຄວາມເປົ່າ ໄດ້ແກ່ ອະນັດຕານຸປັດສະນາ
ຄຳວ່າ ໂດຍເປັນສູນຍະຕະ ໄດ້ແກ່ ອະນັດຕານຸປັດສະນາ
ຄຳວ່າ ໂດຍເປັນອະນັດຕາ ໄດ້ແກ່ ອະນັດຕານຸປັດສະນາ
ຄຳວ່າ ໂດຍເປັນໂທດ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມຜັນປ່ຽນເປັນທຳມະດາ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງບໍ່ມີແກ່ນສານ ໄດ້ແກ່ ອະນັດຕານຸປັດສະນາ
ຄຳວ່າ ໂດຍເປັນມູນແຫ່ງຄວາມລຳບາກ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນດັ່ງເພດຊະຄາດ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຄວາມເສື່ອມໄປ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງມີອາສະວະ ໄດ້ແກ່ ທຸກຂານຸປັດສະນາ (໑໐ = ໓໐)
ຄຳວ່າ ໂດຍເປັນຂອງຖືກປັດໄຈປຸງແຕ່ງ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນເຫຍື່ອແຫ່ງມານ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມເກີດເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມແກ່ເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມເຈັບໄຂ້ເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມຕາຍເປັນທຳມະດາ ໄດ້ແກ່ ອະນິດຈານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມເສົ້າໂສກເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມລຳພັນເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມຄັບແຄ້ນໃຈເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ
ຄຳວ່າ ໂດຍເປັນຂອງມີຄວາມເສົ້າໝອງເປັນທຳມະດາ ໄດ້ແກ່ ທຸກຂານຸປັດສະນາ (໑໐ = ໔໐ )

ພິກຂຸຍ່ອມໄດ້ອະນຸໂລມຂັນຕິດ້ວຍອາການ ໔໐ ແບບນີ້ ຢັ່ງລົງສູ່ສຳມັດຕະນິຍາມ ດ້ວຍອາການ ໔໐ ແບບນີ້

ພິກຂຸຜູ້ໄດ້ອະນຸໂລມຂັນຕິດ້ວຍອາການ ໔໐ ແບບນີ້ ຜູ້ຢັ່ງລົງສູ່ສໍາມັດຕະນິຍາມດ້ວຍອາການ ໔໐ ແບບນີ້ມີອະນິດຈານຸປັດສະນາເທົ່າໃດ ມີທຸກຂານຸປັດສະນາເທົ່າໃດ ມີອະນັດຕານຸປັດສະນາເທົ່າໃດ

ທ່ານກ່າວວ່າ ມີອະນິດຈານຸປັດສະນາ ໔໐

ມີທຸກຂານຸປັດສະນາ ໑໒໕ ມີອະນັດຕານຸປັດສະນາ ໒໕ ແບບນີ້ແລ

**ວິປັດສະນາກະຖາ ຈົບ**

## ໑໐. ມາຕິກາກະຖາ

### ວ່າດ້ວຍຫົວຂໍ້ທໍາ

[໔໐] ຜູ້ບໍ່ມີຄວາມຫິວ ໂມກ ວິໂມກ ວິດຊາວິມຸດຕິ ອະທິສິນ ອະທິຈິດ ອະທິປັນຍາ ປັດສັດທິ ຍານ ທັດສະນະ ວິສຸດທິ ເນກຂໍາມະ ເຄື່ອງສະລັດ ຄວາມສະຫງັດ ຄວາມສະລະ ຄວາມປະພຶດ ຊານວິໂມກ ພາວະນາ ອະທິຖານ ຊີວິດ (໑໗)

[໔໑] ຄໍາວ່າ ຜູ້ບໍ່ມີຄວາມຫິວ ອະທິບາຍວ່າ ຜູ້ບໍ່ມີຄວາມຫິວ ຍ່ອມລຸດພົ້ນຈາກ ການສັນທະດ້ວຍເນກຂໍາມະ ຜູ້ບໍ່ມີຄວາມຫິວ ຍ່ອມລຸດພົ້ນຈາກພະຍາບາດດ້ວຍອະພະຍາບາດ ຯລຯ ຜູ້ບໍ່ມີຄວາມຫິວຍ່ອມລຸດພົ້ນຈາກນິວອນ ດ້ວຍປະຖົມຊານ ຯລຯ ຜູ້ບໍ່ມີຄວາມຫິວ ຍ່ອມລຸດພົ້ນຈາກກິເລດທັງປວງດ້ວຍອະຣະຫັດຕະມັກ (໑)

ຄໍາວ່າ ໂມກ ວິໂມກ ອະທິບາຍວ່າ ເນກຂໍາມະ ຊື່ວ່າໂມກ ວິໂມກ ຍ້ອນເປັນເຄື່ອງພົ້ນຈາກການສັນທະ ອະພະຍາບາດ ຊື່ວ່າໂມກ ວິໂມກ ຍ້ອນເປັນເຄື່ອງພົ້ນ ຈາກພະຍາບາດ ຯລຯ ປະຖົມຊານ ຊື່ວ່າໂມກ ວິໂມກ ຍ້ອນເປັນເຄື່ອງພົ້ນຈາກນິວອນ ຯລຯ ອະຣະຫັດຕະມັກ ຊື່ວ່າໂມກ ວິໂມກ ຍ້ອນເປັນເຄື່ອງພົ້ນຈາກກິເລດທັງປວງ (໒)

ຄໍາວ່າ ວິດຊາວິມຸດຕິ ອະທິບາຍວ່າ ເນກຂໍາມະ ຊື່ວ່າວິດຊາຍ້ອນຮູ້ ຊື່ວ່າວິມຸດຕິ ຍ້ອນລຸດພົ້ນຈາກການສັນທະ ຊື່ວ່າວິດຊາວິມຸດຕິຍ້ອນເມື່ອຮູ້ຈຶ່ງລຸດພົ້ນ ເມື່ອລຸດພົ້ນກໍຍ່ອມຮູ້ ອະພະຍາບາດ ຊື່ວ່າວິດຊາຍ້ອນຮູ້ ຊື່ວ່າວິມຸດຕິຍ້ອນລຸດພົ້ນຈາກພະຍາບາດ ຊື່ວ່າວິດຊາວິມຸດຕິຍ້ອນເມື່ອຮູ້ຈຶ່ງລຸດພົ້ນ ເມື່ອລຸດພົ້ນກໍຍ່ອມຮູ້ ຯລຯ ອະຣະຫັດຕະມັກ ຊື່ວ່າວິດຊາຍ້ອນຮູ້ ຊື່ວ່າວິມຸດຕິຍ້ອນລຸດພົ້ນຈາກກິເລດທັງປວງ ຊື່ວ່າວິດຊາວິມຸດຕິຍ້ອນເມື່ອຮູ້ຈຶ່ງລຸດພົ້ນ ເມື່ອລຸດພົ້ນກໍຍ່ອມຮູ້ (໓)

ຄໍາວ່າ ອະທິສິນ ອະທິຈິດ ອະທິປັນຍາ ອະທິບາຍວ່າ ເນກຂໍາມະ ຊື່ວ່າສີລະວິສຸດທິຍ້ອນມີຄວາມໝາຍວ່າກັ້ນການສັນທະ ຊື່ວ່າຈິດຕະວິສຸດທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ ຊື່

ວ່າທິດຖິວິສຸດທິ ຍ້ອນມີຄວາມໝາຍວ່າເຫັນ ບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານ ແລະ ຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ ອະພະຍາບາດ ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າ ກັ້ນພະຍາບາດ ຯລຯ ອະຣະຫັດຕະມັກ ຊື່ວ່າສີລະວິສຸດທິ ຍ້ອນມີຄວາມໝາຍວ່າກັ້ນກິເລດທັງປວງ ຊື່ວ່າຈິດຕະວິສຸດທິ ຍ້ອນມີຄວາມໝາຍວ່າບໍ່ຟຸ້ງຊ່ານ ຊື່ວ່າທິດຖິວິສຸດທິ ຍ້ອນມີຄວາມໝາຍວ່າເຫັນ ບັນດາຄວາມສັງລວມ ຄວາມບໍ່ຟຸ້ງຊ່ານແລະຄວາມເຫັນນັ້ນ ຄວາມສັງລວມ ຊື່ວ່າອະທິສີນສິກຂາ ຄວາມບໍ່ຟຸ້ງຊ່ານ ຊື່ວ່າອະທິຈິດຕະສິກຂາ ຄວາມເຫັນ ຊື່ວ່າອະທິປັນຍາສິກຂາ (໕ ໖)

ຄຳວ່າ ປັດສັດທິ ອະທິບາຍວ່າ ພຣະໂຍຄາວະຈອນຣະງັບການສັນທະດ້ວຍເນກຂຳມະ ຣະງັບພະຍາບາດດ້ວຍອະພະຍາບາດ ຯລຯ ຣະງັບກິເລດທັງປວງດ້ວຍອະຣະຫັດຕະມັກ (໗)

ຄຳວ່າ ຍານ ອະທິບາຍວ່າ ເນກຂຳມະ ຊື່ວ່າຍານຍ້ອນມີສະພາວະຮູ້ ຍ້ອນລະ ການສັນທະ ອະພະຍາບາດ ຊື່ວ່າຍານຍ້ອນມີສະພາວະຮູ້ ຍ້ອນລະພະຍາບາດ ຯລຯ ອະຣະຫັດຕະມັກ ຊື່ວ່າຍານຍ້ອນມີສະພາວະຮູ້ ຍ້ອນລະກິເລດທັງປວງ (໘)

ຄຳວ່າ ທັດສະນະ ອະທິບາຍວ່າ ເນກຂຳມະ ຊື່ວ່າທັດສະນະຍ້ອນເຫັນ ຍ້ອນລະການສັນທະ ອະພະຍາບາດ ຊື່ວ່າທັດສະນະຍ້ອນເຫັນ ຍ້ອນລະພະຍາບາດ ຯລຯ ອະຣະຫັດຕະມັກ ຊື່ວ່າທັດສະນະຍ້ອນເຫັນ ຍ້ອນລະກິເລດທັງປວງ (໙)

ຄຳວ່າ ວິສຸດທິ ອະທິບາຍວ່າ ບຸກຄົນເມື່ອລະການສັນທະ ຍ່ອມບໍລິດຈິດດ້ວຍເນກຂຳມະ ເມື່ອລະພະຍາບາດ ຍ່ອມບໍລິດຈິດດ້ວຍອະພະຍາບາດ ຯລຯ ເມື່ອລະກິເລດທັງປວງ ຍ່ອມບໍລິດຈິດດ້ວຍອະຣະຫັດຕະມັກ (໑໐)

ຄຳວ່າ ເນກຂຳມະ ອະທິບາຍວ່າ ເນກຂຳມະເປັນເຄື່ອງສະລັດການ ອະຮູບເປັນເຄື່ອງສະລັດຮູບ ນິໂຣດເປັນເນກຂຳມະແຫ່ງສິ່ງທີ່ມີທີ່ເປັນ ທີ່ຖືກປັດໄຈປຸງແຕ່ງ ທີ່ອາໄສກັນເກີດຂຶ້ນ ອະພະຍາບາດເປັນເນກຂຳມະແຫ່ງພະຍາບາດ ອາໂລກະສັນຍາເປັນເນກຂຳມະແຫ່ງຖີນະມິດທະ ຯລຯ ອະຣະຫັດຕະມັກເປັນເນກຂຳມະແຫ່ງກິເລດທັງປວງ (໑໑)

ຄຳວ່າ ເຄື່ອງສະລັດ ອະທິບາຍວ່າ ເນກຂຳມະເປັນເຄື່ອງສະລັດການ ອະຮູບເປັນເຄື່ອງສະລັດຮູບ ນິໂຣດເປັນເຄື່ອງສະລັດສິ່ງທີ່ມີທີ່ເປັນ ທີ່ຖືກປັດໄຈປຸງແຕ່ງ ທີ່ອາໄສກັນເກີດຂຶ້ນ ເນກຂຳມະເປັນເຄື່ອງສະລັດການສັນທະ ອະພະຍາບາດເປັນເຄື່ອງສະລັດພະຍາບາດ ຯລຯ ອະຣະຫັດຕະມັກເປັນເຄື່ອງສະລັດກິເລດທັງປວງ (໑໒)

ຄຳວ່າ ຄວາມສະຫງັດ ອະທິບາຍວ່າ ເນກຂຳມະເປັນຄວາມສະຫງັດຂອງກາມສັນທະ ອະພະຍາບາດເປັນຄວາມສະຫງັດຂອງພະຍາບາດ ຯລຯ ອະຣະຫັດຕະມັກເປັນຄວາມສະຫງັດຂອງກິເລດ ທັງປວງ (໑໓)

ຄຳວ່າ ຄວາມສະລະ ອະທິບາຍວ່າ ພຣະໂຍຄາວະຈອນສະລະກາມສັນທະດ້ວຍເນກຂຳມະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຄວາມສະລະ ສະລະພະຍາບາດດ້ວຍອະພະຍາບາດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຄວາມສະລະ ຯລຯ ສະລະກິເລດທັງປວງດ້ວຍອະຣະຫັດຕະມັກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຄວາມສະລະ (໑໔)

ຄຳວ່າ ຄວາມປະພຶດ ອະທິບາຍວ່າ ພຣະໂຍຄາວະຈອນປະພຶດລະກາມສັນທະດ້ວຍເນກຂຳມະ ປະພຶດລະພະຍາບາດດ້ວຍອະພະຍາບາດ ຯລຯ ປະພຶດລະກິເລດທັງປວງດ້ວຍ ອະຣະຫັດຕະມັກ (໑໕)

ຄຳວ່າ ຊານວິໂມກ ອະທິບາຍວ່າ ເນກຂຳມະຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ເນກຂຳມະຍ່ອມເຜົາກາມສັນທະໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ບຸກຄົນເມື່ອເຜົາຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ເມື່ອເຜົາໃຫ້ໄໝ້ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ກິເລດທັງຫຼາຍຍ່ອມໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທຳ ເຂົາຍ່ອມເຜົາກິເລດໃຫ້ໄໝ້ ຄືຮູ້ຈັກກິເລດທີ່ຖືກເຜົາແລ້ວແລະກິເລດທີ່ຖືກເຜົາໃຫ້ໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ອະພະຍາບາດຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ອະພະຍາບາດຍ່ອມເຜົາພະຍາບາດໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ຯລຯ ອາໂລກະສັນຍາຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ອາໂລກະສັນຍາຍ່ອມເຜົາຖີນະມິດທະໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ຯລຯ ອະຣະຫັດຕະມັກຍ່ອມເຜົາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ອະຣະຫັດຕະມັກຍ່ອມເຜົາກິເລດທັງປວງໃຫ້ໄໝ້ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານ ພຣະອະຣະຫັນເມື່ອເຜົາຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ເມື່ອເຜົາໃຫ້ໄໝ້ຍ່ອມລຸດພົ້ນ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ ກິເລດທັງຫຼາຍຍ່ອມໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າທຳ ເຂົາຍ່ອມເຜົາກິເລດໃຫ້ໄໝ້ ຄື ຮູ້ຈັກກິເລດທີ່ຖືກເຜົາແລ້ວແລະກິເລດທີ່ຖືກເຜົາໃຫ້ໄໝ້ໄປ ຍ້ອນເຫດນັ້ນ ຈຶ່ງຊື່ວ່າຊານວິໂມກ (໑໖)

[໔໘] ຄຳວ່າ ພາວະນາ ອະທິຖານ ຊີວິດ ອະທິບາຍວ່າ ບຸກຄົນຜູ້ລະກາມສັນທະຍ່ອມຈະເລີນເນກຂຳມະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ຍ່ອມອະທິຖານຈິດດ້ວຍອຳນາດເນກຂຳມະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍອະທິຖານ ຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານແນວນີ້ນັ້ນ ຍ່ອມເປັນຢູ່ສະງົບ ບໍ່ແມ່ນເປັນຢູ່ບໍ່ສະງົບ ເປັນຢູ່ຊອບ ເປັນຢູ່ບໍ່ຜິດ ເປັນຢູ່ມົດຈົດ ເປັນຢູ່ບໍ່ເສົ້າໝອງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍອາຊີວະ ຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານ ເຖິງພ້ອມດ້ວຍອາຊີວະແນວນີ້ນັ້ນ ເຂົ້າໄປສູ່ບໍລິສັດໃດ ຄື ຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະ

ມະນະບໍລິສັດກໍຕາມ ຍ່ອມອົງອາດບໍ່ເກີ້ເຂີນເຂົ້າໄປ ຂໍ້ນັ້ນ ຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານເຖິງພ້ອມດ້ວຍອາຊີວະແນວນັ້ນ

ບຸກຄົນລະພະຍາບາດ ຈະເລີນອະພະຍາບາດ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະຖີນະມິດທະ ຈະເລີນອາໂລກະສັນຍາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະອຸດທັດຈະ ຈະເລີນອະວິກເຂປະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະວິຈິກິດສາ ຈະເລີນທຳມະວະວັດຖານ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະອະວິດຊາ ຈະເລີນວິດຊາ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະອະຣະຕິ ຈະເລີນປາມຸດຊະ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະນິວອນ ຈະເລີນປະຖົມຊານ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ໗ລ໗ ລະກິເລດທັງປວງ ຈະເລີນອະຣະຫັດຕະມັກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍພາວະນາ ບຸກຄົນຍ່ອມຕັ້ງຈິດໝັ້ນດ້ວຍອຳນາດອະຣະຫັດຕະມັກ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍອະທິຖານ ຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານແນວນີ້ນັ້ນ ຍ່ອມເປັນຢູ່ສະງົບ ບໍ່ແມ່ນເປັນຢູ່ບໍ່ສະງົບ ເປັນຢູ່ຊອບ ບໍ່ເປັນຢູ່ຜິດ ເປັນຢູ່ມົດຈົດ ເປັນຢູ່ບໍ່ເສົ້າໝອງ ຍ້ອນເຫດນັ້ນ ຈຶ່ງຊື່ວ່າເຖິງພ້ອມດ້ວຍອາຊີວະ ຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານ ເຖິງພ້ອມດ້ວຍອາຊີວະແນວນີ້ນັ້ນ ເຂົ້າໄປສູ່ບໍລິສັດໃດ ຄື ຂັດຕິຍະ ບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມອົງອາດບໍ່ເກີ້ເຂີນເຂົ້າໄປ ຂໍ້ນັ້ນຍ້ອນເຫດໃດ ຍ້ອນບຸກຄົນນັ້ນເປັນຜູ້ເຖິງພ້ອມດ້ວຍພາວະນາ ເຖິງພ້ອມດ້ວຍອະທິຖານ ເຖິງພ້ອມດ້ວຍອາຊີວະແນວນັ້ນ ຢ່າງນີ້ແລ (໓ ໑໗)

**ມາຕິກາກະຖາ ຈົບ**

**ປັນຍາວັກທີ ໓ ຈົບ**

## ລວມກະຖາທີ່ມີຢູ່ໃນປະກອນປະຕິສຳພິທາມັກນີ້ ຄື

### ໑. ມະຫາວັກ

| | |
|---|---|
| ໑. ຍານະກະຖາ | ໘. ທິດຖິກະຖາ |
| ໓. ອານາປານັດສະຕິກະຖາ | ໔. ອິນທະຣິຍະກະຖາ |
| ໕. ວິໂມກຂະກະຖາ | ໖. ຄະຕິກະຖາ |
| ໗. ກຳມະກະຖາ | ໘. ວິປັນລາດກະຖາ |
| ໙. ມັກຄະກະຖາ | ໑໐. ມັນທະເປີຍຍະກະຖາ |

## ໘. ຍຸຄະນັດທະວັກ

| | |
|---|---|
| ໑. ຍຸຄະນັດທະກະຖາ | ໒. ສັດຈະກະຖາ |
| ໓. ໂພດຊັງຄະກະຖາ | ໔. ເມດຕາກະຖາ |
| ໕. ວິຣາຄະກະຖາ | ໖. ປະຕິສຳພິທາກະຖາ |
| ໗. ທຳມະຈັກກະຖາ | ໘. ໂລກຸດຕະຣະກະຖາ |
| ໙. ພະລະກະຖາ | ໑໐. ສູນຍະກະຖາ |

## ໓. ປັນຍາວັກ

| | |
|---|---|
| ໑. ມະຫາປັນຍາກະຖາ | ໒. ອິດທິກະຖາ |
| ໓. ອະພິສະມະຍະກະຖາ | ໔. ວິເວກກະຖາ |
| ໕. ຈະຣິຍາກະຖາ | ໖. ປາຕິຫາຣິຍະກະຖາ |
| ໗. ສະມະສີດສະກະຖາ | ໘. ສະຕິປັດຖານກະຖາ |
| ໙. ວິປັດສະນາກະຖາ | ໑໐. ມາຕິກາກະຖາ |

ໃນປະກອນປະຕິສຳພິທາມີ ໓ ວັກ ມີອັດຖະກວ້າງເລິກເຊິ່ງໃນມັກອັນເປັນອະນັນຕະໄນ ປຽບດ້ວຍສາຄອນ ເໝືອນນະພາກາດທີ່ເດຍລະດາດດ້ວຍດວງດາວ ແລະເໝືອນກັບສະໃຫຍ່ ໃຫ້ຄວາມສະຫວ່າງເຈີດຈ້າແຫ່ງຍານແກ່ພຣະໂຍຄີຜູ້ເປັນທຳກະຖິກາຈານໃຫ້ກວ້າງຂວາງ ແນວນີ້ແລ

**ປະຕິສຳພິທາມັກ ຈົບ**